# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໔໗

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໔໐

## ຂຸດທະກະນິກາຍ ຊາດົກ ພາກ ໔



ສະບັບຄົ້ນຄ້ວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາຣົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໙ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໙ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທ ຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໔໗

## ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໔໐

## ຂຸດທະກະນິກາຍ ຊາດົກ ພາກ ໔

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

## ໑໗. ປັນຍາສະນິບາດ

### ໑. ນະລິນິກາຊາດົກ (໕໔໖)

### ວ່າດ້ວຍພຣະຣາດຊະທິດານະລິນິກາ

(ພຣະເຈົ້າພົມມະທັດຮັບສັ່ງໃຫ້ຮຽກພຣະຣາດຊະທິດານະລິນິກາມາແລ້ວ ຕັດວ່າ)

[໑] ລູກສາວນະລິນິກາ ຊົນນະບົດກຳລັງເດືອດຮ້ອນ
ແມ່ນແຄວ້ນກໍກຳລັງພິນາດ ມາເທີ້ນ ລູກຈົ່ງໄປນຳພາມນັ້ນມາໃຫ້ພໍ່

(ພຣະຣາດຊະທິດານະລິນິກາສະດັບພຣະດຳຣັດນັ້ນແລ້ວ ຈຶ່ງຂາບທູນວ່າ)

[໒] ທູນຂະໝ່ອມພໍ່ ຂ້ານ້ອຍບໍ່ເຄີຍທົນທຸກລຳບາກ
ທັງບໍ່ສະຫຼາດໃນຫົນທາງໄກ
ຂ້ານ້ອຍຈັກໄປສູ່ປ່າທີ່ມີຊ້າງອາໄສຢູ່ໄດ້ແນວໃດ

(ພຣະຣາຊາຕັດວ່າ)

[໓] ລູກສາວນະລິນິກາ ລູກຈົ່ງໄປສູ່ຊົນນະບົດ
ທີ່ຮັ່ງມີ ດ້ວຍຊ້າງ ດ້ວຍລົດ ແລະດ້ວຍຍານ
ທີ່ສ້າງດ້ວຍໄມ້ ໂດຍວິທີນີ້ເທີ້ນ

[໔] ລູກຈົ່ງພາເອົາກອງພົນຊ້າງ ກອງພົນມ້າ ກອງພົນລົດ
ແລະກອງພົນຮາບໄປ ລູກຈັກນຳພານມາສູ່ອຳນາດໄດ້
ຍ້ອນຜົວພັນແລະຮູບຂອງລູກ

(ນາຍພານປ່າຊີ້ໄປທີ່ອາສົມ ແລ້ວຂາບທູນພຣະຣາດຊະທິດານະລິນິກາວ່າ)

[໕] ອາສົມອັນໜ້າອອນຊອນຂອງອິສີສິງຄະດາບົດຜາກົດຢູ່ນັ້ນ
ເຊິ່ງມີຕົ້ນກ້ວຍຜາກົດເປັນທິວແຖວ ທ້ອມລ້ອມໄປດ້ວຍປ່າແສມ

[໖] ນັ້ນແສງໄຟຍັງສະຫວ່າງແຈ້ງເຫັນປະຈັກຢູ່ ນັ້ນຄວັນໄຟຍັງຜາກົດຢູ່
ເຂົ້າໃຈວ່າ ອິສີສິງຄະດາບົດຜູ້ມີລິດຫຼາຍຈະຍັງບໍ່ເຊົາບູຊາໄຟ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມໃຫ້ຍິ່ງຂຶ້ນໄປ ຈຶ່ງຕັດວ່າ)

[໗] ອິສີສິງຄະດາບົດແນມເຫັນພຣະຣາດຊະທິດານັ້ນ
ໃສ່ຕຸ້ມຫູແກ້ວມະນີກຳລັງສະເດັດມາ
ເກີດຄວາມຢ້ານ ຈຶ່ງເຂົ້າໄປສູ່ອາສົມທີ່ມຸງດ້ວຍໃບໄມ້

[໘] ທີ່ໃກ້ປະຕູອາສົມຂອງດາບົດນັ້ນ
ພຣະຣາດຊະທິດານັ້ນກໍຊົງສະແດງໃຫ້ເຫັນອະໄວຍະວະຂອງລັບ
ແລະສ່ວນທີ່ຜາກົດ ຂະນະຫຼິ້ນໝາກຂ່າງຢູ່

[໙] ຝ່າຍຊະດິນດາບົດຜູ້ຢູ່ໃນບັນສາລາ
ເມື່ອເຫັນພຣະຣາດຊະທິດານັ້ນຊົງຫຼິ້ນຢູ່
ຈຶ່ງອອກມາຈາກອາສົມແລ້ວກ່າວຄຳນີ້ວ່າ

[໑໐] ທ່ານຜູ້ຈະເລີນທັງຫຼາຍ ຕົ້ນໄມ້ຂອງທ່ານຊື່ອັນໃດທີ່ມີໝາກເປັນແນວນີ້
ເຖິງທ່ານຈະດຶກໄປແລ້ວແມ່ນໃນບ່ອນໄກ
ມັນກໍຍ້ອນກັບມາ ບໍ່ລະຖິ້ມທ່ານໄປ

(ພຣະຣາດຊະທິດານະລິນິກາຕັດວ່າ)

[໑໑] ທ່ານພາມ ທີ່ໃກ້ອາສົມຂອງຂ້າພະເຈົ້າ
ທີ່ພູຄັນທະມາດ ຕົ້ນໄມ້ຊະນິດນັ້ນທີ່ມີໝາກເປັນແນວນີ້ມີຢູ່ຫຼາຍ
ເຖິງຂ້າພະເຈົ້າຈະດຶກໄປແລ້ວແມ່ນໃນບ່ອນໄກ
ມັນກໍຍ້ອນກັບມາ ບໍ່ລະຖິ້ມຂ້າພະເຈົ້າໄປ

(ອິສິສິງຄະດາບົດເມື່ອຈະກະທຳການປະຕິສັນຖານ  ຈຶ່ງກ່າວວ່າ)

[໑໘]	ເຊີນທ່ານຜູ້ຈະເລີນເຂົ້າໄປສູ່ອາສົມນີ້ເທີ້ນ
ຈົ່ງຮັບນ້ຳມັນທາຕີນແລະພັກສາຫານ  ຂ້າພະເຈົ້າຈັກໃຫ້
ນີ້ອາສະນະ  ເຊີນທ່ານຜູ້ຈະເລີນນັ່ງເທິງອາສະນະນີ້
ເຊີນທ່ານຜູ້ຈະເລີນຂົບສັນເຫງົ້າມັນແລະໝາກໄມ້  ໃນບ່ອນນີ້ເທີ້ນ

[໑໙]	ທີ່ລະຫວ່າງຂາອ່ອນທັງ ໘ ຂອງທ່ານນີ້ເປັນອັນໃດ
ສວຍພຽງດີ  ຜາກົດເປັນພຽງສີດຳ
ຂ້າພະເຈົ້າຖາມແລ້ວ  ຂໍທ່ານຈົ່ງບອກເນື້ອຄວາມນັ້ນແກ່ຂ້າພະເຈົ້າ
ອະໄວຍະວະສ່ວນປາຍຍອດ°ຂອງທ່ານເຂົ້າໄປຢູ່ໃນຝັກບໍ

(ພຣະຣາດຊະທິດານະລິນິກາລວງດາບົດວ່າ)

[໑໘]	ຂ້າພະເຈົ້າກຳລັງທ່ຽວສະແຫວງຫາຮາກໄມ້ແລະໝາກໄມ້ຢູ່ໃນປ່າ
ໄດ້ດຶກໝີດຸຮ້າຍໂຕໜຶ່ງ
ມັນແລ່ນປາດເຂົ້າເຖິງໂຕຂ້າພະເຈົ້າໂດຍທັນທີ
ເຮັດໃຫ້ຂ້າພະເຈົ້າລົ້ມລົງແລ້ວກັດອະໄວຍະວະສ່ວນປາຍຍອດໄປ

[໑໕]	ບາດນີ້  ມັນລົບກວນແລະເກີດອາການຄັນຂຶ້ນ
ຂ້າພະເຈົ້າຈຶ່ງບໍ່ໄດ້ຮັບຄວາມສຸກສະບາຍຕະຫຼອດເວລາ
ທ່ານຜູ້ຈະເລີນພໍຈະກຳຈັດອາການຄັນນີ້ໄດ້ບໍ
ຂ້າພະເຈົ້າຂໍຮ້ອງທ່ານຜູ້ຈະເລີນ
ໂຜດພ່ຳເພັງປະໂຫຍດແກ່ພາມດ້ວຍເທີ້ນ

(ອິສິສິງຄະດາບົດກ່າວວ່າ)

[໑໖]	ບາດຂອງທ່ານມີສີແດງ  ຄ່ອນຂ້າງເລິກແລະໃຫຍ່
ແຕ່ບໍ່ເນົ່າ  ມີກິ່ນຈັກໜ້ອຍ
ຂ້າພະເຈົ້າຈະປຸງຢານ້ຳຝາດໃຫ້ທ່ານຂະໜານໜຶ່ງ
ທີ່ທີ່ທ່ານຜູ້ຈະເລີນຈະເພິ່ງມີບໍຣົມມະສຸກໄດ້

(ພຣະຣາດຊະທິດານະລິນິກາຕັດວ່າ)

[໑໗]	ທ່ານພົມມະຈາຣີ  ການເສກມົນ  ການປຸງຢານ້ຳຝາດ

ແລະ ໂອສົດທັງຫຼາຍກໍບໍາບັດບໍ່ໄດ້
ຂໍທ່ານເພິ່ງໃຊ້ອົງຄະຊາດອັນອ່ອນນຸ້ມສູດສີກໍາຈັດອາການຄັນ
ທີ່ທີ່ຂ້າພະເຈົ້າຈະເພິ່ງມີບໍຣົມມະສຸກໄດ້ເທີ້ນ

(ອິສິສິງຄະດາບົດກ່າວວ່າ)

[໑໗] ອາສົມຂອງທ່ານຜູ້ຈະເລີນຢູ່ທາງທິດໃດຈາກບ່ອນນີ້ນໍ
ທ່ານຜູ້ຈະເລີນຍ່ອມອອນຊອນຢູ່ໃນປ່າບໍ
ມູນຜະລາຫານຂອງທ່ານມີພຽງພໍບໍ
ສັດຮ້າຍທັງຫຼາຍບໍ່ບຽດບຽນທ່ານຜູ້ຈະເລີນບໍ

(ພຣະຣາດຊະທິດານະລິນິກາຕັດວ່າ)

[໑໙] ຈາກບ່ອນນີ້ຊື່ໄປທາງທິດເໜືອ
ມີແມ່ນ້ຳຊື່ເຂມາເກີດຈາກປ່າຫິມະພານ
ອາສົມທີ່ໜ້າອອນຊອນຂອງຂ້າພະເຈົ້າຢູ່ແຄມຝັ່ງແມ່ນ້ຳນັ້ນ
ທ່ານຜູ້ຈະເລີນ ທ່ານຄວນຈະໄປຢ້ຽມອາສົມຂອງຂ້າພະເຈົ້າແດ່

[໔໐] ຕົ້ນໝາກມ່ວງ ຕົ້ນສາລະ ຕົ້ນໝາກເມົ່າ ຕົ້ນໝາກຫວ້າ
ຕົ້ນດອກຄູນ ແລະຕົ້ນແຄຝອຍ ອອກດອກບານເດຍລະດາດ
ທ່ານຜູ້ຈະເລີນ ທ່ານຄວນຈະໄປຢ້ຽມອາສົມຂອງຂ້າພະເຈົ້າແດ່
ເຊິ່ງມີພວກກິນນະຣະຂັບກ່ອມຢູ່ໂດຍຮອບ

[໔໑] ຕົ້ນຕານ ເຫງົ້າຕານ ແລະໝາກຕານ ຢູ່ບ່ອນນັ້ນ
ມີສີງົດງາມແລະມີກິ່ນຫອມ
ທ່ານຜູ້ຈະເລີນ ທ່ານຄວນຈະໄປຢ້ຽມອາສົມຂອງຂ້າພະເຈົ້າແດ່
ເຊິ່ງປະກອບໄປດ້ວຍພູມີພາກອັນງົດງາມນັ້ນແດ່

[໔໒] ໝາກໄມ້ແລະເຜືອກມັນເຊິ່ງມີສີສວຍງາມ
ມີກິ່ນຫອມແລະມີຣົດແຊບ
ທີ່ອາສົມຂອງຂ້າພະເຈົ້ານັ້ນມີຢູ່ພຽງພໍ
ແລະພວກນາຍພານພາກັນມາຍັງບ່ອນນັ້ນແລ້ວ
ຂໍຢ່າໄດ້ລັກມູນຜະລາຫານ[១]ຈາກອາສົມຂອງຂ້າພະເຈົ້ານັ້ນໄປເລີຍ

(ອິສິສິງຄະດາບົດກ່າວວ່າ)

[໔໓]　ຂະນະນີ້ ບິດາຂອງຂ້າພະເຈົ້າໄປສະແຫວງຫາມູນຜະລາຫານ
ຈະກັບມາໃນຕອນຄ່ຳ ເຮົາທັງ ໔ ຈະໄປສູ່ອາສົມນັ້ນ
ຕໍ່ເມື່ອບິດາກັບມາຈາກການສະແຫວງຫາມູນຜະລາຫານ

(ພຣະຣາດຊະທິດານະລິນິກາຕັດວ່າ)

[໔໔]　ລືສີແລະພຣະຣາດຊະລືສີທັງຫຼາຍຜູ້ເປັນຄົນດີເຫຼົ່າອື່ນ
ມີຈຳນວນຫຼາຍຢູ່ຕາມທາງ
ທ່ານຈົ່ງຖາມລືສີເຫຼົ່ານັ້ນເຖິງອາສົມຂອງຂ້າພະເຈົ້າເທີ້ນ
ລືສີເຫຼົ່ານັ້ນຈັກນຳທ່ານໄປສູ່ສະຖານທີ່ຢູ່ຂອງຂ້າພະເຈົ້າເອງ

(ພຣະດາບົດໂພທິສັດກັບມາຈາກປ່າແລ້ວຖາມວ່າ)

[໔໕]　ເຈົ້າບໍ່ໄດ້ຫັກຟືນ ບໍ່ໄດ້ຕັກນ້ຳ ບໍ່ໄດ້ດັງໄຟ
ຍ້ອນເຫດໃດນໍ ເຈົ້າຈຶ່ງເຫງົາຫງອຍຈຸກເຈົ່າຢູ່

[໔໖]　ແນ່ະລູກຜູ້ປະພຶດພົມມະຈັນ
ແຕ່ກ່ອນ ຟືນເຈົ້າກໍຫັກ ໄຟເຈົ້າກໍບູຊາ
ແມ່ນໄຟສຳລັບຜີງເຈົ້າກໍຈັດແຈງໄວ້
ຕັ່ງເຈົ້າກໍຕັ້ງໄວ້ ນ້ຳເຈົ້າກໍຕັກໄວ້ເພື່ອພໍ່
ລູກຍັງປະພຶດພົມມະຈັນອອນຊອນຢູ່ບໍ

[໔໗]　ເຈົ້າບໍ່ໄດ້ຫັກຟືນ ບໍ່ໄດ້ຕັກນ້ຳ
ບໍ່ໄດ້ດັງໄຟ ບໍ່ໄດ້ຫຸງຕົ້ມໂພຊະນາຫານ
ມື້ນີ້ ລູກຍັງບໍ່ໄດ້ທັກທາຍພໍ່ເລີຍ
ສິ່ງຂອງອັນໃດຫາຍຫຼື ຫຼືວ່າລູກມີທຸກໃຈອັນໃດ

(ອິສິສິງຄະດາບົດກ່າວວ່າ)

[໔໘]　ຊະດິນຜູ້ປະພຶດພົມມະຈັນໄດ້ມາບ່ອນນີ້
ຮູບຮ່າງຂອງທ່ານສວຍງາມ ໜ້າຊົມ
ບໍ່ສູງເກີນໄປແລະບໍ່ເຕ້ຍເກີນໄປ ມີຜິວພັນຜຸດຜ່ອງ
ຫົວຂອງທ່ານຜູ້ຈະເລີນດຳສວຍງາມ
ຍ້ອນປົກຄຸມດ້ວຍຜົມອັນດຳປອດເປັນເງົາງາມ

[໔໗] ບໍ່ມີໝວດ ບວດໄດ້ບໍ່ດີນ
ກໍທ່ານມີເຄື່ອງປະດັບເຊັ່ນກັບຕີນບາດຢູ່ທີ່ຄໍ
ແລະມີປຸ່ມ ໔ ປຸ່ມເກີດທີ່ເອິກຢ່າງງົດງາມ
ທັງຄູ່ມີຜິວພັນຜຸດຜ່ອງດັ່ງໝ່ວຍໝາກພັບຄຳ

[໕໐] ອັນໜຶ່ງ ໃບໜ້າຂອງທ່ານໜ້າຫັດສະນາຍິ່ງ
ກັນຈຽກຈອນກໍຫ້ອຍຢູ່ທີ່ຫູທັງ ໔
ເມື່ອມານົບຍ່າງໄປມາ ມັນກໍເປ່ງປະກາຍແວວວາວ
ສາຍຮັດຊະດາທີ່ປະດັບກໍສະຫວ່າງສະໄຫວຊັດຊະອານ

[໕໑] ແລະເຄື່ອງປະດັບແນວອື່ນອີກ ໔ ແນວຂອງມານົບນັ້ນ
ມີສີຂຽວ ສີເຫຼືອງ ສີແດງ ແລະສີຂາວ
ເມື່ອມານົບຍ່າງໄປມາ ມັນກໍແກວ່ງໄກວໄປມາ
ຄືໝູ່ນົກຕີຣີຕິ ຍາມເມື່ອຝົນຕົກ

[໕໔] ກໍທ່ານບໍ່ໄດ້ຄາດສາຍຮັດແອວທີ່ເຮັດດ້ວຍຫຍ້າມຸ້ງກະຕ່າຍ
ເປືອກປໍ ແລະຫຍ້າປ້ອງ
ສາຍຮັດແອວນັ້ນປົວສະບັດຄືສາຍຟ້າໃນອາກາດ
ສະຫວ່າງສະໄຫວຢູ່ລະຫວ່າງສະແອວກັບສະໂພກ

[໕໕] ອັນໜຶ່ງ ໝາກໄມ້ທັງຫຼາຍບໍ່ມີໃບ ບໍ່ມີຂວັ້ນ ຕິດຢູ່ທີ່ສະແອວ
ໃຕ້ສາຍບື ບໍ່ກະທົບກັນເລີຍ ສ່າຍໄດ້ເປັນນິດ
ພໍ່ ໝາກໄມ້ເຫຼົ່ານັ້ນເປັນໝາກຂອງຕົ້ນໄມ້ອັນໃດ

[໕໔] ກໍແລຊະດາໆຂອງຊະດິນນັ້ນເປັນຕາເບິ່ງຢ່າງຍິ່ງ
ມີປາຍງອນຫຼາຍກວ່າຮ້ອຍ ມີກິ່ນຫອມ
ຈັດຮູບຊົງແບ່ງຫົວເປັນສອງສ່ວນໄດ້ຢ່າງງົດງາມ
ຂໍໃຫ້ຊະດາຂອງເຮົາເປັນເຊັ່ນນັ້ນເທີ້ນ

[໕໕] ກໍເວລາໃດຊະດິນນັ້ນສະຍາຍຊະດາ
ທີ່ປະກອບດ້ວຍສີແລະກິ່ນເຫຼົ່ານັ້ນ
ເວລານັ້ນອາສົມນີ້ກໍຫອມອົບອວນ
ຄືດອກບົວຂຽວທີ່ຕ້ອງລົມ

[໓໖] ເປືອກຕົມທີ່ເຮືອນຮ່າງຊະດິນນັ້ນກໍເປັນຕາເບິ່ງຢ່າງຍິ່ງ
ບໍ່ເປັນເຊັ່ນກັບກາຍຂອງເຮົາເລີຍ
ພໍຖືກລົມໂຊຍພັດກໍຫອມຟຸ້ງ
ຄືປ່າໄມ້ມີດອກບານເດຍລະດາດປາຍລະດູຮ້ອນ

[໓໗] ຊະດິນນັ້ນຕີໝາກໄມ້ມີຮູບອັນວິຈິດງົດງາມໜ້າເບິ່ງລົງເທິງພື້ນດິນ
ແລະໝາກໄມ້ທີ່ດີກໄປແລ້ວຍ່ອມກັບມາສູ່ມືຂອງຊະດິນນັ້ນອີກ
ພໍ່ ໝາກໄມ້ນັ້ນເປັນໝາກຂອງຕົ້ນໄມ້ອັນໃດນໍ

[໓໘] ອັນໜຶ່ງ ແຂ້ວຂອງຊະດິນນັ້ນເປັນຕາເບິ່ງຢ່າງຍິ່ງ
ຂາວ ພຽງສະເໝີ ປຽບໄດ້ກັບຫອຍສັງທີ່ຂັດດີແລ້ວ
ເມື່ອທ່ານຍິ້ມ ຍ່ອມເຮັດໃຈໃຫ້ຜ່ອງໃສ
ຊະດິນນັ້ນຄົງບໍ່ໄດ້ຫຍ້ຳຜັກດ້ວຍແຂ້ວເຫຼົ່ານັ້ນເປັນແນ່

[໓໙] ຄຳເວົ້າຂອງທ່ານບໍ່ຫຍາບຄາຍ ບໍ່ຄາດເຄື່ອນ
ນຸ້ມນວນ ອ່ອນຫວານ ຊື່ກົງ ບໍ່ເຮັດໃຫ້ຟຸ້ງຊ່ານ ບໍ່ຄອນແຄນ
ເມື່ອເປ່ງອອກມາ ນ້ຳສຽງຂອງທ່ານເຮັດໃຫ້ຟູໃຈ
ມ່ວນຈັບໃຈ ຄືສຽງນົກກາຣະເວກ
ເຮັດໃຫ້ໃຈຂອງລູກກຳໜັດຍິ່ງ

[໔໐] ທ່ານມີນ້ຳສຽງຍືດຍ້ອຍ ບໍ່ເປັນຄຳເວົ້າທີ່ໜ້າລັງກຽດ
ແລະບໍ່ປະກອບດ້ວຍສຽງອັນພຶມພຳ
ລູກປາຖະໜາທີ່ຈະໄດ້ພົບທ່ານອີກ
ຍ້ອນຊະດິນໜຸ່ມໄດ້ເປັນມິດກັບລູກມາກ່ອນ

[໔໑] ບາດນີ້ເຊື່ອມຕໍ່ສະນິດດີ ກັງງເກົາທຸກສ່ວນ
ອູມໃຫຍ່ຕັ້ງຢູ່ຢ່າງເໝາະເຈາະ
ງາມພ້ອມຄ້າຍກັບກີບບົວ
ຊະດິນໜຸ່ມຂຶ້ນກວມລູກດ້ວຍບາດນັ້ນນັ້ນແລ
ໃຊ້ບັ້ນແອວດັນຂາອ່ອນໃຫ້ເປີດໄວ້

[໔໒] ຣັດສະໝີທີ່ແຜ່ຊ່ານຈາກກາຍຂອງທ່ານ
ເປ່ງປັ່ງພຸດຜ່ອງສະຫວ່າງສະໄຫວ
ຄືສາຍຟ້າໃນອາກາດ

ແມ່ນແຂນທັງ ໔ ຂອງທ່ານກໍອ່ອນນຸ້ມ
ມີຂົນເຊັ່ນກັບຂົນດອກອັນຊັນ
ນີ້ວຂອງທ່ານກໍກົມກ້ຽງວິຈິດງົດງາມ

[໔໓] ທ່ານມີຮ່າງກາຍບໍ່ຣະຄາຍເຄືອງ ມີຂົນບໍ່ຍາວ
ແຕ່ມີເລັບຍາວ ປາຍເລັບເປັນສີແດງ
ຊະດີນໜຸ່ມຮູບງາມກອດຮັດລູກດ້ວຍລຳແຂນທັງສອງ ອັນອ່ອນນຸ້ມ
ບຳລຸງບຳເລີໃຫ້ອອນຊອນ

[໔໔] ມືທັງຫຼາຍ ຂອງທ່ານອ່ອນນຸ້ມ ຄ້າຍກັບປຸຍນຸ່ນ ງາມຜຸດຜ່ອງ
ມີຜິວພັນງົດງາມ ກົມກ້ຽງຄືແຜ່ນຄຳອັນງົດງາມ
ທ່ານສຳຜັດລູກດ້ວຍມືເຫຼົ່ານັ້ນແລ້ວໄປຈາກບ່ອນນີ້
ຍ້ອນສຳຜັດນັ້ນ ມັນຈຶ່ງເຜົາລູກໃຫ້ຮ້ອນຮົນຢູ່ ນະທ່ານພໍ່

[໔໕] ຊະດີນໜຸ່ມນັ້ນບໍ່ໄດ້ຫາບຄອນແນ່ນອນ
ບໍ່ໄດ້ຫັກຟືນເອງແນ່ນອນ ບໍ່ໄດ້ປ້ຳຕົ້ນໄມ້ດ້ວຍຂວານແນ່ນອນ
ຍ້ອນທີ່ຝາມືທັງຫຼາຍຂອງທ່ານບໍ່ກະດ້າງເລີຍ

[໔໖] ສ່ວນເຈົ້າໝີໄດ້ເຮັດໃຫ້ຊະດີນໜຸ່ມນັ້ນເປັນບາດ
ຊະດີນໜຸ່ມນັ້ນໄດ້ກ່າວກັບລູກວ່າ
ຂໍທ່ານຊ່ອຍເຮັດໃຫ້ຂ້າພະເຈົ້າມີຄວາມສຸກດ້ວຍເທີ້ນ
ລູກໄດ້ຊ່ອຍເຮັດໃຫ້ທ່ານນັ້ນມີຄວາມສຸກ
ຍ້ອນການກະທຳນັ້ນ ຄວາມສຸກກໍມີແກ່ລູກດ້ວຍ
ທ່ານຜູ້ປະເສີດ ກໍທ່ານໄດ້ເວົ້າກັບລູກວ່າ ຂ້າພະເຈົ້າມີຄວາມສຸກແລ້ວ

[໔໗] ເຄື່ອງປູລາດໃບເຄືອເຂົາຂອງທ່ານພໍ່ນີ້
ກະຈັດກະຈາຍໄປຍ້ອນລູກກັບທ່ານ
ເຮົາທັງ ໔ ມີຄວາມອິດເມື່ອຍ ຈຶ່ງອອນຊອນກັນໃນນ້ຳ
ແລ້ວພາກັນເຂົ້າຕູບໃບໄມ້ຢູ່ເລື້ອຍ ໆ

[໔໘] ທ່ານພໍ່ ມື້ນີ້ມົນທັງຫຼາຍຂອງລູກບໍ່ແຈ່ມແຈ້ງເລີຍ
ການບູຊາໄຟແລະແມ່ນົການບູຊາຍັນກໍບໍ່ແຈ່ມແຈ້ງ
ຕາບໃດທີ່ລູກຍັງບໍ່ພໍ້ພົມມະຈາຣີນັ້ນ
ຕາບນັ້ນລູກຈະບໍ່ຍອມບໍຣິໂພກມູນຜະລາຫານຂອງທ່ານພໍ່

[໔໗] ທ່ານພໍ່ ທ່ານຕ້ອງຮູ້ຈັກແນ່ວ່າ ພິມມະຈາຣີຢູ່ທາງທິດໃດ
ຂໍທ່ານໂຜດຊ່ອຍພາລູກໄປໃຫ້ເຖິງທິດນັ້ນໂດຍໄວເທີ້ນພໍ່
ຂໍລູກຢ່າໄດ້ຕາຍໃນອາສົມຂອງທ່ານເລີຍ

[໕໐] ອັນໜຶ່ງ ລູກໄດ້ຟັງມາວ່າ ປ່າໄມ້ແຕກດອກບານເດຍລະດາດ ວິຈິດສວຍງາມ
ກຶກກ້ອງໄປດ້ວຍສຽງນົກ ມີຝູງນົກຢູ່ອາໄສ
ທ່ານພໍ່ ຂໍທ່ານໂຜດຊ່ອຍພາລູກໄປໃຫ້ເຖິງປ່ານັ້ນໂດຍໄວເທີ້ນ
ກ່ອນທີ່ລູກຈະຕ້ອງລະຊີວິດຖິ້ມໄວ້ໃນອາສົມຂອງທ່ານ

(ພຣະດາບົດໂພທິສັດກ່າວວ່າ)

[໕໑] ໃນແຄມປ່າທີ່ມີຣັດສະໝີສະຫວ່າງສະໄຫວນີ້
ເຊິ່ງມີໝູ່ຄົນທັນແລະເທບອັບປະສອນສະຖິດຢູ່
ເປັນບ່ອນຢູ່ຂອງລືສີທັງຫຼາຍ
ບຸກຄົນຜູ້ເປັນບັນດິດບໍ່ຄວນເຖິງຄວາມບໍ່ຍິນດີແນວນີ້ເລີຍ

[໕໒] ສັດທັງຫຼາຍເປັນມິດກໍມີ ບໍ່ເປັນມິດກໍມີ
ພວກເຂົາທຳຄວາມຮັກແພງໃນຍາດແລະມິດທັງຫຼາຍ
ສ່ວນເຈົ້າມີຄະສິງຄະດາບົດນີ້ຈັດວ່າເປັນຄົນຊົ່ວ
ຍ້ອນຕົນເອງຍັງບໍ່ຮູ້ເລີຍວ່າ ເຮົາມາຈາກໃສ

ກັບໄວ້ໃຈ(ມາຕຸຄາມດ້ວຍສຳຄັນວ່າເປັນມິດ)ຍ້ອນເຫດໃດ

[໕໓] ຍ້ອນວ່າ ຂຶ້ນຊື່ວ່າມິດຍ່ອມເຊື່ອມຕິດຕໍ່ກັນໄດ້
ຍ້ອນການຢູ່ຮ່ວມກັນຢູ່ປະຈຳ ໆ
ມິດນັ້ນນັ້ນເອງຂອງບຸກຄົນຜູ້ບໍ່ສະມາຄົມກັນ
ຍ່ອມເສື່ອມໄປຍ້ອນການບໍ່ໄດ້ຢູ່ຮ່ວມກັນ

[໕໔] ຫາກລູກຈະໄດ້ພົບເຫັນພິມມະຈາຣີ
ຈະໄດ້ເຈລະຈາກັບພິມມະຈາຣີ
ລູກຈະລະຖິ້ມຄຸນຄືຕະບະນີ້ໂດຍທັນທີ
ຄືເຂົ້າກ້າທີ່ສົມບູນຖືກແມ່ນ້ຳໃຫຍ່ພັດພາໄປ

[໕໕] ຫາກລູກຈະໄດ້ພົບເຫັນພິມມະຈາຣີອີກ
ໄດ້ເຈລະຈາກັບພິມມະຈາຣີອີກ

ລູກກໍຈະລະຖິ້ມອຳນາດແຫ່ງສະມະນະນີ້ໂດຍທັນທີ
ຄືເຂົ້າກ້າທີ່ລົມບູນຖືກແມ່ນ້ຳໃຫຍ່ພັດພາໄປ

[໕໖] ລູກເອີຍ ກໍພູດ°ເຫຼົ່ານີ້ທ່ອງທ່ຽວຢູ່ໃນມະນຸດສາໂລກ
ດ້ວຍການແປງຮູບຕ່າງ ໆ
ຄົນມີປັນຍາບໍ່ຄວນຄົບຫາພູດເຫຼົ່ານັ້ນ
ພົມມະຈາຣີບຸກຄົນຍ່ອມພິນາດໄປຍ້ອນກ່ຽວຂ້ອງກັບພູດນັ້ນ

**ນະລິນີກາຊາດົກທີ ໑ ຈົບ**

# ໘. ອຸມມາທັນຕີຊາດົກ (໕໒໗)

## ວ່າດ້ວຍເສນາບໍດີຖວາຍນາງອຸມມາທັນຕີແດ່ພຣະຣາຊາ

(ພຣະເຈົ້ານະຄອນສີພີຕັດວ່າ)

[໕໗] ສຸນັນທະ ນີ້ເປັນນິເວດຂອງໃຜນໍ
ລ້ອມດ້ວຍກຳແພງສີເຫຼືອງ
ໃຜນໍຜາກົດຢູ່ໃນບ່ອນໄກປານດັ່ງແປວໄຟໃນອາກາດ
ແລະປານດັ່ງແປວໄຟເທິງຈອມພູ

[໕໘] ສຸນັນທະ ຍິງນີ້ເປັນທິດາຂອງໃຜນໍ
ເປັນລູກໃພ້ຫຼືເປັນພັນລະຍາຂອງໃຜ
ເປັນຍິງໂສດຫຼືວ່າມີສາມີໃນນິເວດນີ້
ເຮົາຖາມແລ້ວ ທ່ານຈົ່ງບອກມາໂດຍໄວເທີ້ນ

(ສຸນັນທະສາຣະຖີຊາບທູນວ່າ)

[໕໙] ຂ້າແດ່ ພຣະອົງຜູ້ຈອມຊົນ ຍິງຄົນນັ້ນ
ຂ້າພຣະອົງຮູ້ຈັກທັງມານດາແລະບິດາຂອງນາງ
ແມ່ນສາມີຂອງນາງຂ້າພຣະອົງກໍຮູ້ຈັກ
ຂ້າແດ່ ພຣະພູມິບານ ບຸຣຸດນັ້ນເປັນຂ້າຣາດຊະບໍຣິພານຂອງພຣະອົງເອງ
ເປັນຜູ້ບໍ່ຜະໝາດໃນຣາດຊະກິດອັນເປັນປະໂຫຍດຂອງພຣະອົງ
ທັງກາງເວັນແລະກາງຄືນ

[໖໐] ຂ້າແດ່ ພຣະອົງຜູ້ຈອມຊົນ ກໍອຳມາດຄົນໜຶ່ງຂອງພຣະອົງ

ຜູ້ປະສົບຄວາມສໍາເລັດ ຮັ່ງມີ ແລະຈະເລີນຮຸ່ງເຮືອງ
ນາງເປັນພັນລະຍາຂອງອະພິປາຣະກະອຳມາດນັ້ນເອງ
ຊື່ວ່າອຸມມາທັນຕີ ຂ້ານ້ອຍ

(ພຣະເຈົ້ານະຄອນສີພີຕັດວ່າ)

[໖໑] ທ່ານຜູ້ຈະເລີນທັງຫຼາຍ ທ່ານຜູ້ຈະເລີນທັງຫຼາຍ ຊື່ຂອງນາງນີ້
ມານດາແລະບິດາຕັ້ງໃຫ້ເໝາະສົມດີແທ້ ເປັນຄວາມຈິງແນວນັ້ນ
ເມື່ອນາງອຸມມາທັນຕີແນມເບິ່ງເຮົາ ໄດ້ເຮັດໃຫ້ເຮົາຄ້າຍຈະເປັນບ້າ

[໖໒] ໃນຄືນເດືອນເພັງ ນາງມີໜ່ວຍຕາຊະມ້າຍຄ້າຍຕານາງເນື້ອຊາຍ
ຮ່າງກາຍມີຜິວພັນຄືກີບດອກບົວຂາວ ນັ່ງຢູ່ໃກ້ປ່ອງຢ້ຽມ
ໃນຄືນນັ້ນ ເຮົາໄດ້ເຫັນນາງນຸ່ງຜ້າສີແດງຄືສີຕີນນົກກາງແກແລ້ວ
ສຳຄັນວ່າດວງຈັນຂຶ້ນ ໒ ດວງ

[໖໓] ເວລາໃດນາງຊະມົດຊະມ້ອຍຊຳເລືອງແນມເບິ່ງເຮົາດ້ວຍອາການ
ອັນອ່ອນຫວານ ດ້ວຍໃບໜ້າອັນເບີກບານງົດງາມບໍລິສຸດ
ເໝືອນຈະລັກເອົາດວງໃຈຂອງເຮົາໄປ ປານວ່ານາງກິນນະຣີ
ເກີດທີ່ພູໃນປ່າລັກເອົາດວງໃຈຂອງກິນນະຣະໄປ

[໖໔] ເວລານັ້ນນາງຜູ້ເລີໂສມ ມີຜິວກາຍສີຄຳ
ໃສ່ຕຸ້ມຫູແກ້ວມະນີ ມີຜ້ານຸ່ງທ່ອນດຽວ ເຫຼືອດຕາເບິ່ງເຮົາ
ເໝືອນນາງເນື້ອຊາຍຕື່ນຕົກໃຈຢ້ານເມື່ອເຫັນນາຍພານ

[໖໕] ເມື່ອໃດນໍ ແມ່ນາງຜູ້ມີເລັບແດງ ມີຂົນງາມ
ແຂນອ່ອນນຸ້ມ ລູບທາດ້ວຍຈຸນແກ່ນຈັນ
ມີນິ້ວກົມກຽ້ງ ງາມຕັ້ງແຕ່ຫົວ
ຈັກບຳເລີເຮົາດ້ວຍກິຣິຍາອັນຊົດຊ້ອຍຊານສະຫຼາດ

[໖໖] ເມື່ອໃດນໍ ທິດາຂອງທ່ານຕິຣິຕິ
ຜູ້ມີທັບຊວງສັງວານຄຳ ແອວນ້ອຍແອວບາງ
ຈັກກອດເຮົາດ້ວຍແຂນທັງ ໒ ອັນອ່ອນນຸ້ມ
ເໝືອນເຄືອເຂົາຕຶງຮັດຕົ້ນໄມ້ທີ່ເກີດໃນປ່າໃຫຍ່

[໖໗] ເມື່ອໃດນໍ ນາງຜູ້ມີຜິວພັນງາມແດງດັ່ງນ້ຳຄັ່ງ

ມີເຕົ້າຖັນກົມກ້ຽງເໝືອນຟອງນ້ຳ
ຮ່າງກາຍມີຜິວພັນດັ່ງກີບດອກບົວຂາວ
ຈັກອຽງປາກເຂົ້າຈູບປາກເຮົາ
ຄືດັ່ງນັກເລງສຸຣາຍື່ນຈອກສຸຣາໃຫ້ນັກເລງສຸຣານຳກັນ

[໖໗] ເມື່ອໃດ ເຮົາໄດ້ເຫັນນາງຜູ້ມີສັນພາງກາຍ
ອັນຈະເລີນ ໜ້າອອນຊອນໃຈ ຢືນຢູ່
ເມື່ອນັ້ນ ເຮົາບໍ່ຮູ້ສຶກໂຕເລີຍ

[໖໙] ເຮົາໄດ້ເຫັນນາງອຸມມາທັນຕີຜູ້ໃສ່ຕຸ້ມຫູແກ້ວມະນີແລ້ວ
ນອນບໍ່ຫຼັບທັງກາງເວັນແລະກາງຄືນ
ຄືປຣາໄຊຕໍ່ຂ້າເສິກມາແລ້ວເປັນພັນຄັ້ງ

[໗໐] ຫາກທ້າວສັກກະຈະເພິ່ງປະທານພອນແກ່ເຮົາແລ້ວ
ຂໍເຮົາເພິ່ງໄດ້ພອນນັ້ນເທີ້ນ
ອະພິປາຣະກະເສນາບໍດີເພິ່ງອະພິຣົມກັບນາງອຸມມາທັນຕີ
ຕະຫຼອດຄືນໜຶ່ງຫຼືສອງຄືນ
ຈາກນັ້ນພຣະເຈົ້ານະຄອນສີພີເພິ່ງໄດ້ອະພິຣົມກັບນາງແດ່

(ອະພິປາຣະກະເສນາບໍດີຂາບທູນວ່າ)

[໗໑] ຂໍເດຊະພຣະອົງຜູ້ເປັນຈອມແຫ່ງພູດ
ເມື່ອຂ້າພຣະອົງນະມັດສະການຢູ່ເຊິ່ງພູດທັງຫຼາຍ
ເທວະດາຕົນໜຶ່ງໄດ້ມາກ່າວເນື້ອຄວາມນີ້ກັບຂ້າພຣະອົງວ່າ
ພຣະຫະໄທຂອງພຣະຣາຊາຈົດຈໍ່ຢູ່ສະເພາະນາງອຸມມາທັນຕີ
ຂ້າພຣະອົງຂໍຖວາຍນາງແດ່ພຣະອົງ
ຂໍພຣະອົງຊົງໃຫ້ນາງບຳເລີເທີ້ນ

(ພຣະເຈົ້ານະຄອນສີພີຕັດວ່າ)

[໗໔] ເຮົາຈະເພິ່ງຄາດໄປຈາກບຸນ ແລະບໍ່ແມ່ນເຮົາຈະບໍ່ຕາຍ
ທັງປະຊາຊົນຈະເພິ່ງຮູ້ຄວາມຊົ່ວຂອງເຮົານີ້
ອີກປະການໜຶ່ງ ເມື່ອໃຫ້ແລ້ວ
ທ່ານບໍ່ໄດ້ເຫັນນາງອຸມມາທັນຕີຜູ້ເປັນທີ່ຮັກ
ທ່ານຈະຄັບແຄ້ນໃຈຢ່າງໜັກ

(ອະພິປາຣະກະເສນາບໍດີຂາບທູນວ່າ)

[ກ໓] ຂ້າແດ່ ພຣະອົງຜູ້ຈອມຊົນ ນອກຈາກພຣະອົງແລະຂ້າພຣະອົງແລ້ວ
ປະຊາຊົນແມ່ນທັງໝົດບໍ່ເພິ່ງຮູ້ກຳທີ່ເຮັດແລ້ວໄດ້
ຂ້າພຣະອົງທູນຖວາຍນາງອຸມມາທັນຕີແດ່ພຣະອົງ
ຂ້າແດ່ ພຣະຣາຊາ ຂໍພຣະອົງ
ໂຜດຊົງອະພິຣົມຕັນຫາຄືຕົ້ນໄມ້ໃນປ່າ[໑]
ບໍກໍຊົງກຳຈັດນາງຖິ້ມສາ

(ພຣະເຈົ້ານະຄອນສິພິຕັດວ່າ)

[ກ໔] ຄົນຜູ້ເຮັດກຳຊົ່ວຍ່ອມຄິດວ່າ
ຄົນເຫຼົ່າອື່ນຢ່າຮູ້ການກະທຳນີ້ເລີຍ
ແຕ່ວ່າ ຄົນເທິງພື້ນປະຖະພີທີ່ປະກອບດ້ວຍລິດ[໒] ຍັງມີຢູ່
ຍ່ອມຈະເຫັນເຂົາຜູ້ກະທຳກຳຊົ່ວນັ້ນ

(ພຣະເຈົ້ານະຄອນສິພິຕັດວ່າ)

[ກ໕] ຄົນອື່ນ ໃຜແດ່ນໍເທິງພື້ນປະຖະພີໃນໂລກນີ້
ຈະເພິ່ງເຊື່ອທ່ານວ່າ ນາງບໍ່ໄດ້ເປັນທີ່ຮັກຂອງເຮົາ
ອີກປະການໜຶ່ງ ເມື່ອໃຫ້ແລ້ວ
ທ່ານບໍ່ໄດ້ເຫັນນາງອຸມມາທັນຕີຜູ້ເປັນທີ່ຮັກ
ທ່ານຈະຄັບແຄ້ນໃຈຢ່າງໜັກ

(ອະພິປາຣະກະເສນາບໍດີຂາບທູນວ່າ)

[ກ໖] ຂ້າແດ່ ພຣະອົງຜູ້ຈອມຊົນ ນາງອຸມມາທັນຕີນີ້
ເປັນທີ່ຮັກຂອງຂ້າພຣະອົງຢ່າງແທ້ຈິງ
ຂ້າແດ່ ພຣະພູມິບານ ນາງບໍ່ໄດ້ເປັນທີ່ຮັກຂອງຂ້າພຣະອົງກໍບໍ່ແມ່ນ
ຂໍເດຊະພຣະອົງຜູ້ຊົງພຣະຈະເລີນ
ຂໍພຣະອົງສະເດັດໄປຫານາງອຸມມາທັນຕີທັນທີ
ຄືຣາດຊະສີເຂົ້າໄປສູ່ຖ້ຳສິລາ

(ພຣະເຈົ້ານະຄອນສິພິຕັດວ່າ)

[໗໗] ປາດທັງຫຼາຍເຖິງຈະຖືກຄວາມທຸກຂອງຕົນບີບຄັ້ນແລ້ວ
ກໍຈະບໍ່ສະລະກຳທີ່ມີຜົນເປັນສຸກ
ຫຼືແມ່ນລຸ້ມຫຼົງມົວເມົາດ້ວຍຄວາມສຸກ
ກໍຈະບໍ່ປະພຶດກຳຊົ່ວ

(ອະພິປາຣະກະເສນາບໍດີຂາບທູນວ່າ)

[໗໘] ກໍພຣະອົງຊົງເປັນທັງມານດາແລະບິດາ ເປັນສາມີ ເປັນນາຍ
ເປັນຜູ້ຊຸບລ້ຽງ ແລະເປັນເທວະດາຂອງຂ້າພຣະອົງ
ຂ້າພຣະອົງພ້ອມທັງບຸດແລະພັນລະຍາເປັນຂ້າທາດຂອງພຣະອົງ
ຂ້າແດ່ ພຣະເຈົ້ານະຄອນສີພີ ຂໍພຣະອົງຊົງບໍຣິໂພກການ
ຕາມຄວາມສຸກສະບາຍເທີ້ນ

(ພຣະເຈົ້ານະຄອນສີພີຕັດວ່າ)

[໗໙] ຜູ້ໃດກະທຳຄວາມຊົ່ວດ້ວຍສຳຄັນວ່າ ເຮົາເປັນຜູ້ຍິ່ງໃຫຍ່
ເມື່ອກະທຳແລ້ວ ຜູ້ນັ້ນກໍບໍ່ຫວັ່ນເກງຕໍ່ຊົນເຫຼົ່າອື່ນ
ຍ້ອນກຳນັ້ນ ເຂົາຍ່ອມມີອາຍຸຢູ່ໄດ້ບໍ່ຍືນຍາວ
ແມ່ນເທບທັງຫຼາຍກໍແນມເຂົາດ້ວຍສາຍຕາອັນດູຖູກ

[໘໐] ຊົນເຫຼົ່າໃດຜູ້ດຳລົງຢູ່ໃນທຳ
ຮັບທານທີ່ເປັນຂອງຊົນເຫຼົ່າອື່ນ ອັນເຈົ້າຂອງມອບໃຫ້ແລ້ວ
ຊົນເຫຼົ່ານັ້ນຊື່ວ່າເປັນທັງຜູ້ຮັບ ເປັນທັງຜູ້ໃຫ້ໃນທານນັ້ນແມ່ນທັງໝົດ
ຍ່ອມເຮັດກຳອັນມີຜົນເປັນສຸກຢ່າງແນ່ນອນ

[໘໑] ຄົນອື່ນ ໃຜແດ່ນໍເທິງພື້ນປະຖະພີໃນໂລກນີ້
ຈະເພິ່ງເຊື່ອທ່ານວ່າ ນາງບໍ່ໄດ້ເປັນທີ່ຮັກຂອງເຮົາ
ອີກປະການໜຶ່ງ ເມື່ອໃຫ້ແລ້ວ
ທ່ານບໍ່ໄດ້ເຫັນນາງອຸມມາທັນຕີຜູ້ເປັນທີ່ຮັກ
ທ່ານຈະຄັບແຄ້ນໃຈຢ່າງໜັກ

(ອະພິປາຣະກະເສນາບໍດີຂາບທູນວ່າ)

[໘໔] ຂ້າແດ່ ພຣະອົງຜູ້ຈອມຊົນ ນາງອຸມມາທັນຕີນີ້
ເປັນທີ່ຮັກຂອງຂ້າພຣະອົງຢ່າງແທ້ຈິງ

ຂ້າແດ່ ພຣະພູມິບານ ນາງບໍ່ໄດ້ເປັນທີ່ຮັກຂອງຂ້າພຣະອົງກໍບໍ່ແມ່ນ
ຂ້າພຣະອົງຂໍຖວາຍນາງອຸມມາທັນຕີແດ່ພຣະອົງ
ຂ້າແດ່ ພຣະຣາຊາ ຂໍພຣະອົງໂຜດຊົງອະພິຣົມຕັນຫາຄືຕົ້ນໄມ້ໃນປ່າ
ບໍກໍຊົງກໍາຈັດນາງຖິ້ມສາ

(ພຣະເຈົ້ານະຄອນສີພິຕັດວ່າ)

[໗໓] ຜູ້ໃດກໍ່ຄວາມທຸກໃຫ້ແກ່ຜູ້ອື່ນດ້ວຍຄວາມທຸກຂອງຕົນ
ຫຼືກໍ່ຄວາມສຸກໃຫ້ແກ່ຕົນດ້ວຍຄວາມສຸກຂອງຄົນອື່ນ[໑]
(ຜູ້ນັ້ນຊື່ວ່າ ບໍ່ຮູ້ທໍາ) ສ່ວນຜູ້ໃດຮູ້ແນວນີ້ວ່າ
ຄວາມທຸກ ຄວາມສຸກນີ້ຂອງເຮົາເປັນແນວໃດ?
ຂອງຄົນເຫຼົ່າອື່ນກໍເປັນແນວນັ້ນ
ຜູ້ນັ້ນຊື່ວ່າ ຮູ້ທໍາ

[໗໔] ຄົນອື່ນ ໃຜແດ່ນໍເທິງພື້ນປະຖະພີໃນໂລກນີ້
ຈະເພິ່ງເຊື່ອທ່ານວ່າ ນາງບໍ່ໄດ້ເປັນທີ່ຮັກຂອງເຮົາ
ອີກປະການໜຶ່ງ ເມື່ອໃຫ້ແລ້ວ
ທ່ານບໍ່ໄດ້ເຫັນນາງອຸມມາທັນຕີຜູ້ເປັນທີ່ຮັກ
ທ່ານຈະຄັບແຄ້ນໃຈຢ່າງໜັກ

(ອະພິປາຣະກະເສນາບໍດີຂາບທູນວ່າ)

[໗໕] ຂ້າແດ່ ພຣະອົງຜູ້ຈອມຊົນ ພຣະອົງຊົງຮູ້ວ່າ
ນາງອຸມມາທັນຕີນີ້ເປັນທີ່ຮັກຂອງຂ້າພຣະອົງ
ຂ້າແດ່ ພຣະພູມິບານ ນາງບໍ່ໄດ້ເປັນທີ່ຮັກຂອງຂ້າພຣະອົງກໍບໍ່ແມ່ນ
ຂ້າແດ່ ພຣະອົງຜູ້ຈອມຊົນ ດ້ວຍຄວາມຈົ່ງຮັກພັກດີຕໍ່ພຣະອົງ
ຂ້າພຣະອົງຂໍຖວາຍນາງຜູ້ເປັນທີ່ຮັກແດ່ພຣະອົງ
ຂໍເດຊະສົມມຸດຕິເທບ ບຸກຄົນໃຫ້ສິ່ງຂອງອັນເປັນທີ່ຮັກ
ຍ່ອມໄດ້ສິ່ງຂອງອັນເປັນທີ່ຮັກ

(ພຣະເຈົ້ານະຄອນສີພິຕັດວ່າ)

[໗໖] ເຮົາຈັກຂ້າຕົນອັນມີກາມເປັນເຫດແນ່
ຍ້ອນເຮົາບໍ່ສາມາດຈະຂ້າທໍາດ້ວຍອະທໍາໄດ້

(ອະພິປາຣະກະເສນາບໍດີຂາບທູນວ່າ)

[໒໗]　ຂ້າແດ່ ພຣະອົງຜູ້ຈອມຊົນ
ຜູ້ປະເສີດແກ່ກ້າກວ່ານໍຣະຊົນ
ຖ້າພຣະອົງບໍ່ຊົງປະສົງນາງອຸມມາທັນຕີ
ຜູ້ເປັນສົມບັດຂອງຂ້າພຣະອົງ
ຂ້າພຣະອົງຈະສະລະນາງໃນທ່າມກາງປະຊາຊົນທັງປວງ
ພຣະອົງເພິ່ງນຳນາງຜູ້ພົ້ນຂາດຈາກຂ້າພຣະອົງແລ້ວມາຈາກບ່ອນນັ້ນເທີ້ນ

(ພຣະເຈົ້ານະຄອນສີພີຕັດວ່າ)

[໒໘]　ດຽວກ່ອນທ່ານອະພິປາຣະກະ ຜູ້ພ່ຳເພັງປະໂຫຍດ
ຫາກທ່ານສະລະນາງອຸມມາທັນຕີຜູ້ບໍ່ປະທຸດສະຮ້າຍຕໍ່ທ່ານ
ກໍຈິ່ງຈະບໍ່ເປັນໄປເພື່ອປະໂຫຍດແກ່ທ່ານ
ອັນໜຶ່ງ ການກ່າວໂທດຢ່າງໃຫຍ່ຫຼວງກໍຈະເພິ່ງມີແກ່ທ່ານ
ແມ່ນຄົນຜູ້ເປັນຝັກຝ່າຍຂອງທ່ານໃນເມືອງກໍຈິ່ງຈະບໍ່ມີອີກດ້ວຍ

(ອະພິປາຣະກະເສນາບໍດີຂາບທູນວ່າ)

[໒໙]　ຂ້າແດ່ ພຣະພູມິບານ ຂ້າພຣະອົງຈັກອົດກັ້ນຄຳກ່າວໂທດ
ຄຳນິນທາ ຄຳສັນເສີນ ແລະຄຳຕິຕຽນນັ້ນທຸກຢ່າງ
ຂໍຄຳນັ້ນທັງໝົດຈົ່ງມາຕົກແກ່ຂ້າພຣະອົງດ້ວຍເທີ້ນ
ຂ້າແດ່ ພຣະເຈົ້ານະຄອນສີພີ ຂໍພຣະອົງ
ຊົງບໍຣິໂພກການຕາມຄວາມສຸກສະບາຍເທີ້ນ

(ພຣະເຈົ້ານະຄອນສີພີຕັດວ່າ)

[໓໐]　ຜູ້ໃດບໍ່ຍຶດຖືຄຳນິນທາ ບໍ່ຍຶດຖືຄຳສັນເສີນ
ບໍ່ຍຶດຖືຄຳຕິຕຽນ ທັງບໍ່ຍຶດຖືການບູຊາ
ສິຣິແລະປັນຍາຍ່ອມປາສະຈາກຜູ້ນັ້ນ
ຄືນ້ຳຝົນທີ່ຕົກຈົນໂຊກຍ່ອມໄຫຼໄປຈາກບ່ອນໂນນ

(ອະພິປາຣະກະເສນາບໍດີຂາບທູນວ່າ)

[໓໑]　ຄວາມທຸກ ຄວາມສຸກ ອະກຸສົນທີ່ເປັນໄປລ່ວງທຳ

ແລະຄວາມຄັບແຄ້ນໃຈຈາກການເສຍສະລະນີ້ທັງໝົດ
ຂ້າພຣະອົງຈັກຮັບໄວ້ດ້ວຍເອີກເໝືອນພື້ນປະຖະພີຮັບໄວ້ໄດ້ທຸກຢ່າງ
ທັງຂອງບຸກຄົນຜູ້ໝັ້ນຄົງແລະຜູ້ຕື່ນຕົກໃຈ

(ພຣະເຈົ້ານະຄອນສີພີຕັດວ່າ)

[໗໘] ເຮົາບໍ່ປາຖະໜາອະກຸສົນທີ່ເປັນໄປລ່ວງທຳ
ຄວາມຄັບແຄ້ນໃຈ ແລະຄວາມທຸກຂອງບຸກຄົນເຫຼົ່າອື່ນ
ເຮົາຜູ້ດຳລົງຢູ່ໃນທຳຈະບໍ່ເຮັດປະໂຫຍດອັນໃດ ໆ ໃຫ້ເສື່ອມເສຍໄປ
ເຮົາຈັກນຳພາຣະນີ້ໄປພຽງຜູ້ດຽວທໍ່ນັ້ນ

(ອະພິປາຣະກະເສນາບໍດີຂາບທູນວ່າ)

[໗໙] ຂ້າແດ່ ພຣະອົງຜູ້ຈອມຊົນ ບຸນກຳອັນນຳໃຫ້ເຖິງ
ໂລກສະຫວັນຂອງຂ້າພຣະອົງ ຂໍພຣະອົງຢ່າຊົງເຮັດອັນຕະລາຍເລີຍ
ຂ້າພຣະອົງມີໃຈເຫຼື້ອມໃສ ຈະຖວາຍນາງອຸມມາທັນຕີແດ່ພຣະອົງ
ຄືກັບພຣະຣາຊາພຣະຣາດຊະທານຊັບ
ແກ່ພວກພາມໃນການບູຊາຍັນ

(ພຣະເຈົ້ານະຄອນສີພີຕັດວ່າ)

[໘໐] ທ່ານຜູ້ພ່ຳເພັງປະໂຫຍດ ທ່ານຫວັງປະໂຫຍດແກ່ເຮົາແນ່ແທ້
ທັງນາງອຸມມາທັນຕີແລະທ່ານກໍເປັນເພື່ອນຂອງເຮົາ
ເທວະດາ ບິດາ⁹ ແລະປະຊາຊົນທັງປວງຈະເພິ່ງນິນທາໄດ້
ອັນໜຶ່ງ ເຮົາກໍໄດ້ເຫັນບາບໃນສຳປະຣາຍະພົບ

(ອະພິປາຣະກະເສນາບໍດີຂາບທູນວ່າ)

[໘໑] ຂ້າແດ່ ພຣະເຈົ້ານະຄອນສີພີ ຊາວຊົນນະບົດພ້ອມທັງຊາວນິຄົມທັງປວງ
ຈະເພິ່ງກ່າວຂໍ້ນັ້ນວ່າບໍ່ເປັນທຳຫາບໍ່ໄດ້
ຂ້າພຣະອົງຖວາຍນາງອຸມມາທັນຕີແດ່ພຣະອົງ
ຍ້ອນນາງອຸມມາທັນຕີ ຂ້າພຣະອົງຖວາຍພຣະອົງແລ້ວ
ຂ້າແດ່ ພຣະຣາຊາ ຂໍພຣະອົງໂຜດຊົງອະພິຣົມຕັນຫາຄືຕົ້ນໄມ້ໃນປ່າ
ບໍກໍຊົງກຳຈັດນາງຖິ້ມສາ

(ພຣະເຈົ້ານະຄອນສີພີຕັດວ່າ)

[໙໖] ດຽວກ່ອນທ່ານຜູ້ພ່ຳເພັງປະໂຫຍດ ທ່ານຫວັງປະໂຫຍດແກ່ເຮົາແນ່ແທ້
ນາງອຸມມາທັນຕີແລະທ່ານກໍເປັນເພື່ອນຂອງເຮົາ
ກໍທຳຂອງສັດຕະບຸຣຸດທັງຫຼາຍທີ່ປະກາດໄວ້ດີແລ້ວ
ຍາກທີ່ຈະກ້າວລ່ວງໄດ້ ຄືຝັ່ງສະມຸດ

(ອະພິປາຣະກະເສນາບໍດີຂາບທູນວ່າ)

[໙໗] ພຣະອົງຊົງເປັນອາຫຸເນີຍຍະບຸກຄົນ໌
ຊົງອະນຸເຄາະສິ່ງທີ່ເປັນປະໂຫຍດ ຊົງເປັນຜູ້ປົກປ້ອງ
ຄຸ້ມຄອງ ແລະຊົງຮັກສາຄວາມປະສົງຂອງຂ້າພຣະອົງ
ຂ້າແດ່ ພຣະຣາຊາ ກໍຍັນທີ່ບູຊາແລ້ວໃນພຣະອົງມີຜົນຫຼາຍ
ຂໍພຣະອົງຊົງຮັບນາງອຸມມາທັນຕີ
ຕາມຄວາມປະສົງຂອງຂ້າພຣະອົງເທີ້ນ

(ພຣະເຈົ້ານະຄອນສີພີຕັດວ່າ)

[໙໘] ອະພິປາຣະກະກັດຕຸບຸດ ກໍທ່ານໄດ້ປະພຶດທຳທຸກຢ່າງແກ່ເຮົາໂດຍແທ້
ຄົນສອງຕີນຂອງທ່ານ ຄົນອື່ນໃຜແດ່ນໍ
ຈະກະທຳຄວາມໂດຍປອດໄພໃຫ້ແກ່ທ່ານໃນເວລາອາລຸນ ໃນຊີວະໂລກນີ້

(ອະພິປາຣະກະເສນາບໍດີຂາບທູນວ່າ)

[໙໙] ພຣະອົງຊົງເປັນຜູ້ປະເສີດ ຊົງເປັນຜູ້ຍອດຢ້ຽມ
ພຣະອົງຊົງມີທຳຄຸ້ມຄອງ ເປັນຜູ້ເຖິງທຳ ຊົງຮູ້ແຈ້ງທຳ
ຊົງມີປັນຍາດີ ພຣະອົງຜູ້ຊົງຮັກສາທຳ
ຂໍພຣະອົງຜູ້ມີທຳຄຸ້ມຄອງແລ້ວນັ້ນ
ຈົ່ງດຳລົງພະຊົນໝັ້ນຍືນນານ
ແລະໂຜດຊົງສະແດງທຳແກ່ຂ້າພຣະອົງດ້ວຍເທີ້ນ

(ພຣະເຈົ້ານະຄອນສີພີຕັດວ່າ)

[໑໐໐] ເຊີນເທີ້ນ ອະພິປາຣະກະ ທ່ານຈົ່ງຟັງຄຳຂອງເຮົາ
ເຮົາຈັກສະແດງທຳທີ່ພວກສັດຕະບຸຣຸດສ້ອງເສບແລ້ວແກ່ທ່ານ

[໑໐໑] ພຣະຣາຊາຊົງພໍພຣະທະໄທໃນທຳເປັນພຣະຣາຊາທີ່ດີ
ຄົນມີຄວາມຮູ້ຮອບຄອບເປັນຄົນດີ
ຄວາມບໍ່ປະທຸດສະຮ້າຍມິດເປັນຄວາມດີ
ການບໍ່ກະທຳບາບເປັນເຫດນຳສຸກມາໃຫ້

[໑໐໒] ໃນແຄວ້ນຂອງພຣະຣາຊາຜູ້ບໍ່ໂກດ ຜູ້ດຳລົງຢູ່ໃນທຳ
ມະນຸດທັງຫຼາຍເພິ່ງຫວັງຄວາມສຸກໃນເຮືອນຂອງຕົນ
ພາຍໃຕ້ຮົ່ມເງົາອັນຮົ່ມເຢັນ

[໑໐໓] ກຳໃດທີ່ບໍ່ໄດ້ພິຈາລະນາແລ້ວກະທຳລົງໄປ
ເປັນກຳບໍ່ຖືກ ເຮົາບໍ່ມັກກຳນັ້ນເລີຍ
ຝ່າຍພຣະຣາຊາເຫຼົ່າໃດຊົງຮູ້ແລ້ວ
ຈຶ່ງຊົງກະທຳລົງໄປດ້ວຍພຣະອົງເອງ
ເຮົາພໍໃຈກຳຂອງພຣະຣາຊາເຫຼົ່ານັ້ນ
ຂໍທ່ານຈົ່ງຟັງຂໍ້ອຸປະມາເຫຼົ່ານີ້ຂອງເຮົາ

[໑໐໔] ເມື່ອຝູງງົວຂ້າມນໍ້າໄປ
ຖ້າງົວຈ່າຝູງໄປຄົດຄ້ຽວ
ງົວທັງຝູງກໍໄປຄົດຄ້ຽວນຳກັນ
ໃນເມື່ອງົວຈ່າຝູງໄປຄົດຄ້ຽວ

[໑໐໕] ໃນໝູ່ມະນຸດກໍຄືກັນ
ຜູ້ໃດໄດ້ຮັບແຕ່ງຕັ້ງໃຫ້ເປັນໃຫຍ່
ຖ້າຜູ້ນັ້ນປະພຶດບໍ່ເປັນທຳ
ປະຊາຊົນຊາວເມືອງນັ້ນ
ກໍຈະປະພຶດບໍ່ເປັນທຳຕາມໄປດ້ວຍ
ຫາກພຣະຣາຊາບໍ່ຕັ້ງຢູ່ໃນທຳ
ຊາວເມືອງນັ້ນກໍຢູ່ເປັນທຸກ

[໑໐໖] ເມື່ອຝູງງົວຂ້າມນໍ້າໄປ
ຖ້າງົວຈ່າຝູງໄປຊື່
ງົວທັງຝູງກໍໄປຊື່ນຳກັນ
ໃນເມື່ອງົວຈ່າຝູງໄປຊື່

[໑໐໗] ໃນໝູ່ມະນຸດກໍຄືກັນ
ຜູ້ໃດໄດ້ຮັບແຕ່ງຕັ້ງໃຫ້ເປັນໃຫຍ່
ຖ້າຜູ້ນັ້ນປະພຶດຖືກທຳ
ປະຊາຊົນຊາວເມືອງນັ້ນ
ກໍຈະປະພຶດຖືກທຳຕາມໄປດ້ວຍ
ຫາກພຣະຣາຊາຕັ້ງຢູ່ໃນທຳ
ຊາວເມືອງນັ້ນກໍຢູ່ເປັນສຸກ[໑]

[໑໐໘] ອະພິປາຣະກະ ເຮົາບໍ່ປາຖະໜາຄວາມເປັນເທວະດາ
ຫຼືເພື່ອຈະຊະນະແຜ່ນດິນທັງປວງນີ້ໂດຍອະທຳເລີຍ

[໑໐໙] ແທ້ຈິງ ຣັດຕະນະແນວໃດແນວໜຶ່ງ
ຄື ງົວ ຂ້າທາດ ເງິນ ຜ້າ ແລະຈັນເຫຼືອງ
ກໍມີຢູ່ໃນໝູ່ມະນຸດໃນໂລກນີ້

[໑໑໐] ອັນໜຶ່ງ ແມ່ນດວງຈັນແລະດວງອາທິດ
ກໍຮັກສາ ມ້າ ຍິງ ແລະແກ້ວມະນີໄວ້ເພື່ອເຮົາ
ເຮົາບໍ່ເພິ່ງປະພຶດທຳບໍ່ສະໝ່ຳສະເໝີຍ້ອນເຫດແຫ່ງຣັດຕະນະນັ້ນເລີຍ
ຍ້ອນເຮົາເກີດເປັນພຣະຣາຊາຜູ້ຈະເລີນທີ່ສຸດທ່າມກາງຊາວນະຄອນສີພີ

[໑໑໑] ເຮົາເປັນຜູ້ນຳ ເປັນຜູ້ເກື້ອກູນ ມີຊື່ສຽງ ປົກຄອງແຄວ້ນ
ປະພຶດນອບນ້ອມທຳເພື່ອຊາວນະຄອນສີພີຢູ່
ເຮົານັ້ນຄິດເຖິງທຳນັ້ນຢູ່ເນືອງ ໆ
ຍ້ອນເຫດນັ້ນ ຈຶ່ງບໍ່ຕົກຢູ່ໃນອຳນາດຈິດຂອງຕົນ

(ອະພິປາຣະກະເສນາບໍດີຂາບທູນວ່າ)

[໑໑໒] ຂ້າແດ່ ມະຫາຣາດ
ພຣະອົງຈັກຊົງປົກຄອງຣາດຊະສົມບັດບໍ່ໃຫ້ພິນາດ
ໃຫ້ປອດໄພຢູ່ປະຈຳຕະຫຼອດການລະນານແນ່ແທ້
ຍ້ອນພຣະປັຊາຂອງພຣະອົງເປັນເຊັ່ນນັ້ນ

[໑໑໓] ພຣະອົງບໍ່ຊົງຜະໝາດທຳໃດ
ຂ້າພຣະອົງຂໍອະນຸໂມທະນາທຳນັ້ນຂອງພຣະອົງ

ກະສັດຜູ້ເປັນໃຫຍ່ ຊົງຜະໝາດທຳແລ້ວ
ຍ່ອມເຄື່ອນຈາກແຄວັນ

[໑໑໔] ຂ້າແດ່ ມະຫາຣາດຜູ້ເປັນກະສັດ
ຂໍພຣະອົງຊົງປະພຶດທຳໃນພຣະຊະນົກແລະພຣະຊົນນີເທີ້ນ
ພຣະອົງເມື່ອຊົງປະພຶດທຳໃນໂລກນີ້ແລ້ວ
ຈັກສະເດັດໄປສູ່ສະຫວັນ ຂ້ານ້ອຍ

[໑໑໕] ຂ້າແດ່ ມະຫາຣາດຜູ້ເປັນກະສັດ
ຂໍພຣະອົງຊົງປະພຶດທຳໃນພຣະໂອຣົດແລະພຣະຊາຍາເທີ້ນ
ພຣະອົງເມື່ອຊົງປະພຶດທຳໃນໂລກນີ້ແລ້ວ
ຈັກສະເດັດໄປສູ່ສະຫວັນ ຂ້ານ້ອຍ

[໑໑໖] ຂ້າແດ່ ມະຫາຣາດຜູ້ເປັນກະສັດ
ຂໍພຣະອົງຊົງປະພຶດທຳໃນມິດແລະອຳມາດເທີ້ນ
ພຣະອົງເມື່ອຊົງປະພຶດທຳໃນໂລກນີ້ແລ້ວ
ຈັກສະເດັດໄປສູ່ສະຫວັນ ຂ້ານ້ອຍ

[໑໑໗] ຂ້າແດ່ ມະຫາຣາດ ຂໍພຣະອົງຊົງປະພຶດທຳ
ໃນພາຫະນະແລະພົນນິກາຍເທີ້ນ
ພຣະອົງເມື່ອຊົງປະພຶດທຳໃນໂລກນີ້ແລ້ວ
ຈັກສະເດັດໄປສູ່ສະຫວັນ ຂ້ານ້ອຍ

[໑໑໘] ຂ້າແດ່ ມະຫາຣາດ ຂໍພຣະອົງຊົງປະພຶດທຳ
ໃນຊາວບ້ານແລະຊາວນິຄົມເທີ້ນ
ພຣະອົງເມື່ອຊົງປະພຶດທຳໃນໂລກນີ້ແລ້ວ
ຈັກສະເດັດໄປສູ່ສະຫວັນ ຂ້ານ້ອຍ

[໑໑໙] ຂ້າແດ່ ມະຫາຣາດ ຂໍພຣະອົງຊົງປະພຶດທຳ
ໃນແຄວັນແລະຊົນນະບົດເທີ້ນ
ພຣະອົງເມື່ອຊົງປະພຶດທຳໃນໂລກນີ້ແລ້ວ
ຈັກສະເດັດໄປສູ່ສະຫວັນ ຂ້ານ້ອຍ

[໑໒໐] ຂ້າແດ່ ມະຫາຣາດ ຂໍພຣະອົງຊົງປະພຶດທຳ

ໃນສະມະນະແລະພາມເຫີ້ນ
ພຣະອົງເມື່ອຊົງປະພຶດທຳໃນໂລກນີ້ແລ້ວ
ຈັກສະເດັດໄປສູ່ສະຫວັນ ຂ້ານ້ອຍ

[໑໘໑] ຂ້າແດ່ ມະຫາຣາດຜູ້ເປັນກະສັດ
ຂໍພຣະອົງຊົງປະພຶດທຳໃນໝູ່ເນື້ອແລະໝູ່ນົກເຫີ້ນ
ພຣະອົງເມື່ອຊົງປະພຶດທຳໃນໂລກນີ້ແລ້ວ
ຈັກສະເດັດໄປສູ່ສະຫວັນ ຂ້ານ້ອຍ

[໑໘໘] ຂ້າແດ່ ມະຫາຣາດ ຂໍພຣະອົງຊົງປະພຶດທຳເຫີ້ນ
ທຳທີ່ພຣະອົງປະພຶດແລ້ວນຳສຸກມາໃຫ້
ພຣະອົງເມື່ອຊົງປະພຶດທຳໃນໂລກນີ້ແລ້ວ
ຈັກສະເດັດໄປສູ່ສະຫວັນ ຂ້ານ້ອຍ

[໑໘໙] ຂ້າແດ່ ມະຫາຣາດ ຂໍພຣະອົງຊົງປະພຶດທຳເຫີ້ນ
ເທວະດາທັງຫຼາຍພ້ອມທັງພຣະອິນແລະພຣະພົມ
ບັນລຸເຖິງໂລກທິບດ້ວຍທຳທີ່ຕົນປະພຶດດີແລ້ວ
ຂໍພຣະອົງຢ່າໄດ້ຊົງຜະໝາດທຳເລີຍ ຂ້ານ້ອຍ

**ອຸມມາທັນຕີຊາດົກທີ ໘ ຈົບ**

## ໙. ມະຫາໂພທິຊາດົກ (໕໘໗)
## ວ່າດ້ວຍໂພທິກຸມານໂພທິສັດ

(ພຣະຣາຊາຕັດວ່າ)

[໑໘໔] ທ່ານພາມ ຍ້ອນເຫດໃດນໍ
ທ່ານຈຶ່ງຟ້າວຮ້ອນສວຍເອົາໄມ້ການເທົ້າ ໜັງເສືອ
ຮົ່ມ ເກີບ ໄມ້ຕະຂໍ ບາດ ແລະຜ້າພາດ
ທ່ານປາຖະໜາຈະໄປສູ່ທິດໃດນໍ

(ພຣະໂພທິສັດຂາບທູນວ່າ)

[໑໘໕] ຕະຫຼອດ ໑໘ ປີນີ້ທີ່ອາດຕະມາພາບຢູ່ໃນສຳນັກຂອງມະຫາບໍພິດ

ອາດຕະມາພາບບໍ່ໄດ້ຮູ້ຈັກສຽງໝາສີນໍ້າຕານເທົ່າຄໍາຣາມເລີຍ

[໑໘໖] ຂໍຖວາຍພຣະພອນມະຫາບໍພິດຜູ້ເປັນໃຫຍ່
ໝາໂຕນີ້ນັ້ນ ມັນຫຍິ່ງແຂ້ວສີຂາວ ເຫົ່າຄໍາຣາມຢ່າງຮ້ອນຮົນ
ຍ້ອນໄດ້ຍິນພຣະດໍາຣັດຂອງພຣະອົງ
ພ້ອມທັງພຣະມະເຫສີຜູ້ສິ້ນສັດທາອາດຕະມາພາບ

(ພຣະຣາຊາຕັດວ່າ)

[໑໘໗] ທ່ານພາມ ໂທດນັ້ນເປັນຄວາມຜິດ
ທີ່ຂ້ານ້ອຍກະທໍາແລ້ວຈິງຕາມທີ່ທ່ານກ່າວ
ຂ້ານ້ອຍນັ້ນເຫຼື້ອມໃສທ່ານຢ່າງຍິ່ງ
ຂໍນິມົນຢູ່ເທີ້ນ ຢ່າໄປເລີຍ ທ່ານພາມ

(ພຣະໂພທິສັດທູນວ່າ)

[໑໘໘] ເມື່ອທໍາອິດ ເຂົ້າສຸກສີຂາວລ້ວນ ຕໍ່ມາກໍກະດໍາກະດ່າງ
ບັດນີ້ກາຍເປັນສີແດງລ້ວນ
ຈຶ່ງເປັນການສົມຄວນທີ່ອາດຕະມາພາບຈະຫຼີກໄປ

[໑໘໙] ເມື່ອທໍາອິດ ອາສະນະຢູ່ພາຍໃນ
ຕໍ່ມາຢູ່ທ່າມກາງ ຕໍ່ມາຢູ່ພາຍນອກ
ອາດຕະມາພາບຂໍໄປເອງກ່ອນທີ່ຈະຖືກຂັບຈາກເມືອງ

໑໙໐] ບຸກຄົນບໍ່ເພິ່ງຄົບຫາຄົນຜູ້ສິ້ນສັດທາຄືນໍ້າສ້າງທີ່ບໍ່ມີນໍ້າ
ເຖິງແມ່ນຈະພະຍາຍາມຂຸດມັນຂຶ້ນ ນໍ້າກໍຈະເພິ່ງມີກິ່ນຕົມ

[໑໙໑] ບຸກຄົນເພິ່ງຄົບຫາຜູ້ທີ່ເຫຼື້ອມໃສທໍ່ນັ້ນ
ເພິ່ງເວັ້ນຄົນຜູ້ບໍ່ເຫຼື້ອມໃສ ເພິ່ງເຂົ້າໄປໃກ້ຄົນຜູ້ເຫຼື້ອມໃສ
ຄືຄົນຕ້ອງການນໍ້າເຂົ້າໄປຫາແມ່ນໍ້າ

[໑໙໒] ບຸກຄົນເພິ່ງຄົບຫາຄົນທີ່ຄົບດ້ວຍ
ບໍ່ເພິ່ງຄົບຫາຄົນທີ່ບໍ່ຄົບດ້ວຍ
ບຸກຄົນໃດບໍ່ຄົບຫາຄົນທີ່ຄົບດ້ວຍ
ບຸກຄົນນັ້ນຊື່ວ່າມີທໍາຂອງອະສັດຕະບຸຣຸດ

[໑໓໓] ຜູ້ໃດບໍ່ຄົບຫາຄົນທີ່ຄົບດ້ວຍ
ບໍ່ເສວະນາຄົນທີ່ເສວະນາດ້ວຍ
ຜູ້ນັ້ນແລເປັນຄົນຊົ່ວຊ້າທີ່ສຸດ
ຄືລີງທີ່ອາໄສຢູ່ຕາມງ່າໄມ້

[໑໓໔] ມິດທັງຫຼາຍຍ່ອມແໜງໜ່າຍກັນ
ຍ້ອນເຫດ ໓ ປະການນີ້ ຄື
໑. ຍ້ອນການຄຸກຄີກັນພໍ່າເພື້ອເກີນໄປ
໒. ຍ້ອນການບໍ່ຮ່ວມສະໂມສອນກັນ
໓. ຍ້ອນຂໍໃນເວລາອັນບໍ່ສົມຄວນ

[໑໓໕] ຍ້ອນເຫດນັ້ນ ບຸກຄົນບໍ່ເພິ່ງໄປມາຫາສູ່ກັນຈົນພໍ່າເພື້ອ
ບໍ່ຄວນເຫີນຫ່າງກັນໄປຈົນເນີ້ນນານ
ແລະເພິ່ງຂໍສິ່ງທີ່ຄວນຂໍຕາມການອັນສົມຄວນ
ເມື່ອເປັນແນວນີ້ ມິດທັງຫຼາຍຍ່ອມຈະບໍ່ແໜງໜ່າຍກັນ

[໑໓໖] ຄົນຜູ້ເປັນທີ່ຮັກຍ່ອມກັບກາຍບໍ່ເປັນທີ່ຮັກ
ຍ້ອນການຢູ່ຮ່ວມກັນດົນເກີນໄປ
ອາດຕະມາພາບຂໍຖວາຍພຣະພອນລາມະຫາບໍພິດໄປ
ກ່ອນທີ່ອາດຕະມາຈະບໍ່ເປັນທີ່ຮັກຂອງມະຫາບໍພິດ

(ພຣະຣາຊາຕັດວ່າ)

[໑໓໗] ຫາກພຣະຜູ້ເປັນເຈົ້າບໍ່ຍອມຮັບຮູ້
ການອັນຂະລິຂອງປະຣິຈາຣະຊົນສັດຕະບຸຣຸດຜູ້ອ້ອນວອນຢູ່ແນວນີ້
ແລະບໍ່ຍອມກະທຳຕາມຄຳຂໍຮ້ອງຂອງຂ້ານ້ອຍ
ຂ້ານ້ອຍຂໍວິງວອນພຣະຜູ້ເປັນເຈົ້າແນວນີ້ວ່າ
ພຣະຜູ້ເປັນເຈົ້າເພິ່ງແວ່ມາອີກ

(ພຣະໂພທິສັດຂາບທູນວ່າ)

[໑໓໘] ຂໍຖວາຍພຣະພອນ ມະຫາຣາດຜູ້ຜະດຸງແຄວ້ນໃຫ້ຈະເລີນ
ຫາກວ່າເມື່ອເຮົາຍັງຄົງເປັນຢູ່ແນວນີ້
ອັນຕະລາຍຈັກບໍ່ມີແກ່ມະຫາບໍພິດຫຼືແກ່ອາດຕະມາແລ້ວ

ເມື່ອມື້ຄືນລ່ວງໄປ ເຮົາຄົງຈະໄດ້ພົບກັນແດ່

[໑໓໙] ຫາກຄຳເວົ້າຂອງມະຫາບໍພິດເປັນໄປຕາມຄະຕິຂອງຕົນ
ແລະຕາມສະພາວະທີ່ເປັນຈິງແລ້ວ
ຍ້ອນບໍ່ມີຄວາມປະສົງ ສັດຈຶ່ງເຮັດກຳທີ່ບໍ່ຄວນເຮັດແດ່
ທີ່ຄວນເຮັດແດ່ ເມື່ອກະທຳໂດຍບໍ່ມີຄວາມປະສົງ
ໃຜບໍໃນໂລກນີ້ ຈະເປີເປື້ອນບາບ

[໑໔໐] ຫາກເນື້ອຄວາມທີ່ມະຫາບໍພິດຕັດແລ້ວນັ້ນ
ເປັນອັດຖະ ເປັນທຳ ເປັນຄຳເວົ້າທີ່ດີງາມ ບໍ່ຊົ່ວຊ້າ
ແລະຫາກພຣະດຳຣັດຂອງມະຫາບໍພິດຜູ້ຈະເລີນເປັນສັດຈະ
ວານອນກໍເປັນອັນອາດຕະມາຂ້າດີແລ້ວ

[໑໔໑] ກໍຫາກວ່າມະຫາບໍພິດເພິ່ງຮູ້ຄວາມຜິດພາດວາທະຂອງຕົນ
ມະຫາບໍພິດຈຶ່ງຈະບໍ່ຕິຕຽນອາດຕະມາເລີຍ
ຍ້ອນວາທະຂອງມະຫາບໍພິດຜູ້ຈະເລີນເປັນເຊັ່ນນັ້ນ

[໑໔໒] ຖ້າພຣະຜູ້ເປັນໃຫຍ່ກຳນົດຊີວິດ ຈັດສັນລິດ
ຄວາມຫາຍະນະ ແລະກຳດີກຳຊົ່ວແກ່ຊາວໂລກທັງປວງແລ້ວ
ຄົນຜູ້ເຮັດຕາມຄຳສັ່ງເຮັດບາບ
ພຣະຜູ້ເປັນໃຫຍ່ຍ່ອມເປີເປື້ອນບາບນັ້ນເອງ

[໑໔໓] ຫາກເນື້ອຄວາມທີ່ມະຫາບໍພິດຕັດແລ້ວນັ້ນ
ເປັນອັດຖະ ເປັນທຳ ເປັນຄຳເວົ້າທີ່ດີງາມ ບໍ່ຊົ່ວຊ້າ
ແລະຫາກພຣະດຳຣັດຂອງມະຫາບໍພິດຜູ້ຈະເລີນເປັນສັດຈະ
ວານອນກໍເປັນອັນອາດຕະມາຂ້າດີແລ້ວ

[໑໔໔] ກໍຫາກວ່າມະຫາບໍພິດເພິ່ງຮູ້ຄວາມຜິດພາດວາທະຂອງຕົນ
ມະຫາບໍພິດຈຶ່ງຈະບໍ່ຕິຕຽນອາດຕະມາເລີຍ
ຍ້ອນວາທະຂອງມະຫາບໍພິດຜູ້ຈະເລີນເປັນເຊັ່ນນັ້ນ

[໑໔໕] ຖ້າວ່າສັດຍ່ອມເຂົ້າເຖິງຄວາມສຸກແລະຄວາມທຸກ
ຍ້ອນເຫດແຫ່ງກຳທີ່ຕົນກະທຳໄວ້ໃນຊາດປາງກ່ອນ
ເຂົາຍ່ອມປົດໜີ້ຄືບາບກຳເກົ່າທີ່ຕົນເຮັດໄວ້ນັ້ນໄດ້

ເມື່ອຄວາມພົ້ນໜີ້ຄືບາບກຳເກົ່າມີຢູ່
ໃຜບໍໃນໂລກນີ້ຈະເປີເປື້ອນບາບ

[໑໘໖] ຫາກເນື້ອຄວາມທີ່ມະຫາບໍພິດຕັດແລ້ວນັ້ນ
ເປັນອັດຖະ ເປັນທຳ ເປັນຄຳເວົ້າທີ່ດີງາມ ບໍ່ຊົ່ວຊ້າ
ແລະຫາກພຣະດຳຣັດຂອງມະຫາບໍພິດຜູ້ຈະເລີນເປັນສັດຈະ
ວານອນກໍເປັນອັນອາດຕະມາຂ້າດີແລ້ວ

[໑໘໗] ກໍຫາກວ່າມະຫາບໍພິດເພິ່ງຮູ້ຄວາມຜິດພາດວາທະຂອງຕົນ
ມະຫາບໍພິດຈຶ່ງຈະບໍ່ຕິຽນອາດຕະມາເລີຍ
ຍ້ອນວາທະຂອງມະຫາບໍພິດຜູ້ຈະເລີນເປັນເຊັ່ນນັ້ນ

[໑໘໘] ຮູບຂອງສັດຍ່ອມເກີດມີໄດ້
ຍ້ອນອາໄສມະຫາພູຕະຮູບທັງ ໔ ທີ່ນັ້ນ
ກໍຮູບຍ່ອມເກີດມີໄດ້ຍ້ອນມະຫາພູຕະຮູບໃດ
ກໍຄວນໄປຕາມມະຫາພູຕະຮູບໆນັ້ນເອງ

[໑໘໙] ຊີວະຍ່ອມເປັນຢູ່ໃນໂລກນີ້ທີ່ນັ້ນ
ລະໄປແລ້ວ ລະຖິ້ມໄປແລ້ວ ຍ່ອມພິນາດ
ໂລກນີ້ຍ່ອມຂາດສູນ ທັງຄົນພານແລະບັນດິດກໍຂາດສູນ
ເມື່ອໂລກຂາດສູນຢູ່ ໃຜບໍໃນໂລກນີ້ຍ່ອມເປີເປື້ອນບາບ

[໑໙໐] ຫາກເນື້ອຄວາມທີ່ມະຫາບໍພິດຕັດແລ້ວນັ້ນ
ເປັນອັດຖະ ເປັນທຳ ເປັນຄຳເວົ້າທີ່ດີງາມ ບໍ່ຊົ່ວຊ້າ
ແລະຫາກພຣະດຳຣັດຂອງມະຫາບໍພິດຜູ້ຈະເລີນເປັນສັດຈະ
ວານອນກໍເປັນອັນອາດຕະມາຂ້າດີແລ້ວ

[໑໙໑] ກໍຫາກວ່າມະຫາບໍພິດເພິ່ງຮູ້ຄວາມຜິດພາດວາທະຂອງຕົນ
ມະຫາບໍພິດຈຶ່ງຈະບໍ່ຕິຽນອາດຕະມາເລີຍ
ຍ້ອນວາທະຂອງມະຫາບໍພິດຜູ້ຈະເລີນເປັນເຊັ່ນນັ້ນ

[໑໙໒] ນັກປິກຄອງທັງຫຼາຍທີ່ເປັນຄົນພານ
ສຳຄັນຕົນວ່າເປັນບັນດິດ ໄດ້ກ່າວໄວ້ໃນໂລກວ່າ
ບຸກຄົນເພິ່ງຂ້າມານດາບິດາ ອ້າຍ ນ້ອງຊາຍ

ແລະບຸດພັນລະຍາ ຖ້າເພິ່ງມີຄວາມປະສົງເຊັ່ນນັ້ນ

[໑໕໓] ບຸກຄົນເພິ່ງນັ່ງຫຼືນອນໃຕ້ຮົ່ມຕົ້ນໄມ້ໃດ
ບໍ່ເພິ່ງຫັກຮານງ່າຕົ້ນໄມ້ນັ້ນ
ຍ້ອນວ່າຄົນປະທຸດສະຮ້າຍມິດເປັນຄົນຊົ່ວ

[໑໕໔] ຖ້າເມື່ອມີຄວາມຕ້ອງການເກີດຂຶ້ນກໍເພິ່ງກິນແມ່ນທັງຮາກ
ອາດຕະມາພາບມີຄວາມຕ້ອງການອາຫານ
ວານອນກໍເປັນອັນອາດຕະມາຂ້າດີແລ້ວ

[໑໕໕] ຫາກເນື້ອຄວາມທີ່ມະຫາບໍພິດຕັດແລ້ວນັ້ນ
ເປັນອັດຖະ ເປັນທຳ ເປັນຄຳເວົ້າທີ່ດີງາມ ບໍ່ຊົ່ວຊ້າ
ແລະຫາກພຣະດຳຣັດຂອງມະຫາບໍພິດຜູ້ຈະເລີນເປັນສັດຈະ
ວານອນກໍເປັນອັນອາດຕະມາຂ້າດີແລ້ວ

[໑໕໖] ກໍຫາກວ່າມະຫາບໍພິດເພິ່ງຮູ້ຄວາມຜິດພາດວາທະຂອງຕົນ
ມະຫາບໍພິດຈຶ່ງຈະບໍ່ຕິຕຽນອາດຕະມາເລີຍ
ຍ້ອນວາທະຂອງມະຫາບໍພິດຜູ້ຈະເລີນເປັນເຊັ່ນນັ້ນ

[໑໕໗] ຄົນຜູ້ມີວາທະວ່າບໍ່ມີເຫດ ໑
ຄົນຜູ້ມີວາທະວ່າພຣະອິສວນເປັນຜູ້ສ້າງໂລກ ໑
ຄົນຜູ້ມີວາທະວ່າສຸກທຸກເກີດມີຍ້ອນກຳທີ່ເຮັດໄວ້ໃນຊາດປາງກ່ອນ ໑
ຄົນຜູ້ມີວາທະວ່າໂລກນີ້ຂາດສູນ ໑
ຄົນຜູ້ເປັນນັກປົກຄອງທີ່ເປັນພານ ໑

[໑໕໘] ຄົນເຫຼົ່ານັ້ນເປັນອະສັດຕະບຸຣຸດ ເປັນຄົນພານ
ມີຄວາມສຳຄັນຕົນວ່າເປັນບັນດິດໃນໂລກ
ຄົນເຊັ່ນນັ້ນເພິ່ງກະທຳບາບເອງແດ່
ເພິ່ງແນະນຳໃຫ້ຜູ້ອື່ນກະທຳບາບແດ່
ການຄຸກຄີກັບອະສັດຕະບຸຣຸດມີທຸກເປັນບ່ອນສຸດ ມີຜົນເຜັດຮ້ອນເປັນກຳໄລ

[໑໕໙] ໃນປາງກ່ອນ ໝາປ່າໂຕໜຶ່ງປອມໂຕເປັນແບ້
ບໍ່ຖືກຣະແວງສົງໄສຈຶ່ງເຂົ້າໄປຫາຝູງແບ້
ຂ້າທັງແມ່ແບ້ ແບ້ໂຕເມຍ ແລະແບ້ໂຕຜູ້

ເຮັດໃຫ້ເກີດຄວາມສະດຸ້ງຢ້ານແລ້ວຈຶ່ງໄປຕາມຄວາມປາຖະໜາ

[໑໗໐] ສະມະນະແລະພາມພວກໜຶ່ງກໍມີວິທີການແນວນັ້ນ
ກະທຳການປິດບັງຕົນ ຫຼອກລວງມະນຸດທັງຫຼາຍ
ລາງພວກບໍ່ບໍລິໂພກອາຫານ ລາງພວກນອນເທິງແຜ່ນດິນ
ລາງພວກທຳການສາບທາເຖົ້າທຸລີທີ່ຮ່າງກາຍ
ລາງພວກເຮັດຄວາມພຽນໂດຍການຍ່າງແຍ່ງແຍ້
ລາງພວກບໍລິໂພກອາຫານເປັນຄັ້ງຄາວ ລາງພວກບໍ່ດື່ມນ້ຳ
ເປັນຜູ້ມີອາຈາຣະຊົ່ວຊາມ ທ່ຽວເວົ້າອວດອ້າງວ່າເປັນພຣະອະຣະຫັນ

[໑໗໑] ສະມະນະແລະພາມເຫຼົ່ານັ້ນເປັນອະສັດຕະບຸຣຸດ ເປັນຄົນພານ
ມີຄວາມສຳຄັນຕົນວ່າເປັນບັນດິດໃນໂລກ
ຄົນເຊັ່ນນັ້ນເພິ່ງກະທຳບາບເອງແດ່
ເພິ່ງແນະນຳໃຫ້ຜູ້ອື່ນກະທຳບາບແດ່
ການຄຸກຄີກັບອະສັດຕະບຸຣຸດມີທຸກເປັນບ່ອນສຸດ ມີຜົນເຜັດຮ້ອນເປັນກຳໄລ

[໑໗໒] ຄົນເຫຼົ່າໃດກ່າວວ່າ
ຄວາມພຽນບໍ່ມີ ໑ ປະກາດຄວາມບໍ່ມີເຫດ ໑
ພັນນາການກະທຳຂອງຜູ້ອື່ນແລະການກະທຳຂອງຕົນ
ວ່າເປັນການສູນເປົ່າ ໑

[໑໗໓] ຄົນເຫຼົ່ານັ້ນເປັນອະສັດຕະບຸຣຸດ ເປັນຄົນພານ
ມີຄວາມສຳຄັນຕົນວ່າເປັນບັນດິດໃນໂລກ
ຄົນເຊັ່ນນັ້ນເພິ່ງກະທຳບາບເອງແດ່
ເພິ່ງແນະນຳໃຫ້ຜູ້ອື່ນກະທຳບາບແດ່
ການຄຸກຄີກັບອະສັດຕະບຸຣຸດມີທຸກເປັນບ່ອນສຸດ
ມີຜົນເຜັດຮ້ອນເປັນກຳໄລ

[໑໗໔] ກໍຖ້າວ່າຄວາມພຽນບໍ່ເພິ່ງມີ ກຳດີກຳຊົ່ວບໍ່ເພິ່ງມີ
ພຣະຣາຊາກໍຈະບໍ່ຊົງຊຸບລ້ຽງຊ່າງໄມ້
ແມ່ນເຄື່ອງຍົນທັງຫຼາຍກໍຈຶ່ງຈະບໍ່ໃຫ້ສ້າງ

[໑໗໕] ແຕ່ຍ້ອນຄວາມພຽນມີຢູ່ ກຳດີກຳຊົ່ວກໍມີຢູ່
ດັ່ງນັ້ນ ພຣະຣາຊາຈຶ່ງຊົງໃຫ້ສ້າງເຄື່ອງຍົນ

ແລະຊີງຊຸບລັງງຊ່າງໄມ້ໄວ້

[໑໖໖] ຫາກຝົນບໍ່ເພິ່ງຕົກ ຫິມະບໍ່ເພິ່ງຕົກຕະຫຼອດ ໑໐໐ ປີ
ໂລກນີ້ກໍເພິ່ງຂາດສູນ ໝູ່ສັດນີ້ເພິ່ງພິນາດໄປ

[໑໖໗] ແຕ່ຍ້ອນຝົນຍັງຕົກຢູ່ ແລະຫິມະຍັງໂຮຍຮໍາຢູ່ເນືອງ ໆ
ດັ່ງນັ້ນ ເຂົ້າກ້າຈຶ່ງອອກຜົນ
ແລະເຮັດໃຫ້ພຣະຣາຊາປົກຄອງແຄວ້ນໄດ້ໝັ້ນຍືນ

[໑໖໘] ເມື່ອຝູງງົວຂ້າມນໍ້າໄປ
ຖ້າງົວຈ່າຝູງໄປຄົດຄ້ຽວ
ງົວທັງຝູງກໍໄປຄົດຄ້ຽວນໍາກັນ
ໃນເມື່ອງົວຈ່າຝູງໄປຄົດຄ້ຽວ

[໑໖໙] ໃນໝູ່ມະນຸດກໍຄືກັນ
ຜູ້ໃດໄດ້ຮັບແຕ່ງຕັ້ງໃຫ້ເປັນໃຫຍ່
ຖ້າຜູ້ນັ້ນປະພຶດບໍ່ເປັນທໍາ
ປະຊາຊົນຊາວເມືອງນັ້ນ
ກໍຈະປະພຶດບໍ່ເປັນທໍາຕາມໄປດ້ວຍ
ຫາກພຣະຣາຊາບໍ່ຕັ້ງຢູ່ໃນທໍາ
ຊາວເມືອງນັ້ນກໍຢູ່ເປັນທຸກ

[໑໗໐] ເມື່ອຝູງງົວຂ້າມນໍ້າໄປ
ຖ້າງົວຈ່າຝູງໄປຊື່
ງົວທັງຝູງກໍໄປຊື່ນໍາກັນ
ໃນເມື່ອງົວຈ່າຝູງໄປຊື່

[໑໗໑] ໃນໝູ່ມະນຸດກໍຄືກັນ
ຜູ້ໃດໄດ້ຮັບແຕ່ງຕັ້ງໃຫ້ເປັນໃຫຍ່
ຖ້າຜູ້ນັ້ນປະພຶດຖືກທໍາ
ປະຊາຊົນຊາວເມືອງນັ້ນ
ກໍຈະປະພຶດຖືກທໍາຕາມໄປດ້ວຍ
ຫາກພຣະຣາຊາຕັ້ງຢູ່ໃນທໍາ
ຊາວເມືອງນັ້ນກໍຢູ່ເປັນສຸກ[๑]

[໑໗໔] ເມື່ອຕົ້ນໄມ້ໃຫຍ່ກຳລັງມີໜ່ອຍ
ຄົນໃດຕັດເອົາໜ່ອຍດິບ ຄົນນັ້ນຈະບໍ່ຮູ້ຣົດແຫ່ງໝາກໄມ້ນັ້ນ
ທັງພືດພັນແຫ່ງຕົ້ນໄມ້ນັ້ນກໍຈັກພິນາດໄປດ້ວຍ

[໑໗໓] ແຄວັ້ນອຸປະມາຄືກັບຕົ້ນໄມ້ໃຫຍ່
ພຣະຣາຊາພຣະອົງໃດຊົງປົກຄອງໂດຍບໍ່ເປັນທຳ
ພຣະຣາຊາພຣະອົງນັ້ນຈະບໍ່ຊົງຮູ້ຣົດແຫ່ງແຄວັ້ນນັ້ນ
ທັງແຄວັ້ນຂອງພຣະຣາຊາພຣະອົງນັ້ນກໍຈັກພິນາດໄປດ້ວຍ

[໑໗໔] ເມື່ອຕົ້ນໄມ້ໃຫຍ່ກຳລັງມີໜ່ອຍ
ຄົນໃດຕັດເອົາໜ່ອຍສຸກ ຄົນນັ້ນຈຶ່ງຈະຮູ້ຣົດແຫ່ງໝາກໄມ້ນັ້ນ
ທັງພືດພັນແຫ່ງຕົ້ນໄມ້ນັ້ນກໍຈັກບໍ່ພິນາດໄປດ້ວຍ

[໑໗໕] ແຄວັ້ນອຸປະມາຄືກັບຕົ້ນໄມ້ໃຫຍ່
ພຣະຣາຊາພຣະອົງໃດຊົງປົກຄອງແຄວັ້ນໂດຍທຳ
ພຣະຣາຊາພຣະອົງນັ້ນຈຶ່ງຈະຊົງຮູ້ຣົດແຫ່ງແຄວັ້ນນັ້ນ
ທັງແຄວັ້ນຂອງພຣະຣາຊາພຣະອົງນັ້ນກໍຈັກບໍ່ພິນາດໄປດ້ວຍ

[໑໗໖] ສ່ວນຂັດຕິຍະຣາຊາພຣະອົງໃດ
ຊົງປົກຄອງຊົນນະບົດໂດຍບໍ່ເປັນທຳ
ຂັດຕິຍະຣາຊາພຣະອົງນັ້ນຈະຊົງເປັນຜູ້ຄາດຈາກໂອສົດ໑ທັງປວງ

[໑໗໗] ຂັດຕິຍະຣາຊາພຣະອົງໃດຊົງບຽດບຽນຊາວນິຄົມ
ຜູ້ປະກອບການຊື້ຂາຍ ກະທຳການຖວາຍໂອຊະແລະຣາດຊະບູຊາ໌
ຂັດຕິຍະຣາຊາພຣະອົງນັ້ນຈະຊົງຄາດ
ຈາກພຣະຄັງສົມບັດເຊັ່ນນັ້ນຄືກັນ

[໑໗໘] ພຣະຣາຊາພຣະອົງໃດຊົງບຽດບຽນ
ນາຍຂະມັງທະນູຜູ້ຮູ້ເຂດແຫ່ງການປະຫານເປັນຢ່າງດີ ໑
ທະຫານຜູ້ກະທຳຄວາມຊອບໃນສົງຄາມ ໑ ມະຫາອຳມາດຜູ້ເລື່ອງລື ໑
ພຣະຣາຊາພຣະອົງນັ້ນຈະຊົງຄາດຈາກກຳລັງພົນ

[໑໗໙] ພຣະຣາຊາຜູ້ເປັນກະສັດພຣະອົງໃດຜູ້ບໍ່ປະພຶດທຳ
ຊົງບຽດບຽນໝູ່ລືສີຜູ້ມີຄວາມສັງລວມ ປະພຶດພົມມະຈັນ

ຂັດຕິຍະຣາຊາພຣະອົງນັ້ນຈະຊົງຄາດຈາກສະຫວັນເຊັ່ນນັ້ນຄືກັນ

[໑໗໐] ອັນໜຶ່ງ ພຣະຣາຊາຜູ້ບໍ່ຕັ້ງຢູ່ໃນທຳ
ຊົງປະຫານພຣະຊາຍາຜູ້ບໍ່ປະທຸດສະຮ້າຍ
ຍ່ອມຊົງປະສົບຖານະອັນຫຍາບຊ້າ
ແລະຄາດຈາກພຣະໂອຣົດທັງຫຼາຍ

[໑໗໑] ພຣະຣາຊາເພິ່ງປະພຶດທຳໃນຊາວຊົນນະບົດ
ໃນຊາວນິຄົມ ແລະໃນກຳລັງພົນ
ບໍ່ເພິ່ງຊົງບຽດບຽນໝູ່ລືສີ
ແລະເພິ່ງປະພຶດໃຫ້ສະໝ່ຳສະເໝີ
ໃນພຣະໂອຣົດແລະພຣະຊາຍາ

[໑໗໔] ພຣະຣາຊາຜູ້ເປັນໃຫຍ່ໃນແຜ່ນດິນ ຊົງປົກຄອງແຄວ້ນ
ບໍ່ຊົງກິ້ວກາດເຊັ່ນນັ້ນ
ພຣະອົງຍ່ອມຊົງເຮັດສັດຕູໃຫ້ຫວັ່ນໄຫວ
ເໝືອນພຣະອິນຜູ້ເປັນອະທິບໍດີແຫ່ງອະສູນສັນນັ້ນແລ

**ມະຫາໂພທິຊາດົກທີ ໓ ຈົບ**

## ລວມຊາດົກທີ່ມີໃນວັກນີ້



**ປັນຍາສະນິບາດ ຈົບ**

# ໑໙. ສັດຕິນິບາດ

## ໑. ໂສນະກະຊາດົກ (໕໒໙)

## ວ່າດ້ວຍພຣະຣາຊາພຣະຣາດຊະທານລາງວັນແກ່ຜູ້ພົບໂສນະກະກຸມານ

(ພຣະເຈົ້າອະຣິນທະມະຕັດວ່າ)

[໑] ໂສນະກະສະຫາຍຫຼິ້ນຝຸ່ນຂອງເຮົາ
ໃຜໄດ້ສະດັບຂ່າວແລ້ວມາບອກ ເຮົາຈະໃຫ້ຊັບໜຶ່ງຮ້ອຍ
ໃຜໄດ້ພົບເຫັນແລ້ວມາບອກ ເຮົາຈະໃຫ້ຊັບໜຶ່ງພັນ

(ພຣະສາດສະດາໄດ້ຕັດໜຶ່ງຄາຖາເຄິ່ງວ່າ)

[໒] ລຳດັບນັ້ນ ເດັກນ້ອຍໄວ້ຜົມ ໕ ແຍກ ໄດ້ຂາບທູນວ່າ
ຂໍເດຊະ ຂໍພຣະອົງຊົງປະທານຊັບໜຶ່ງຮ້ອຍ
ແກ່ຂ້າພຣະອົງຜູ້ສະດັບຂ່າວແລ້ວມາຂາບທູນ
ແລະຂໍຊົງປະທານຊັບໜຶ່ງພັນ
ແກ່ຂ້າພຣະອົງຜູ້ໄດ້ພົບເຫັນໂສນະກະ
ຂ້າພຣະອົງຈັກຂາບທູນເຖິງໂສນະກະພຣະສະຫາຍຫຼິ້ນຝຸ່ນແກ່ພຣະອົງ

(ພຣະຣາຊາສະດັບດັ່ງນັ້ນແລ້ວຕັດຖາມວ່າ)

[໓] ເຂົາຢູ່ໃນຊົນນະບົດ ແຄວ້ນ ແລະນິຄົມໃດ
ເຈົ້າໄດ້ພົບໂສນະກະ ຢູ່ໄສ
ເຈົ້າຈົ່ງຕອບເນື້ອຄວາມທີ່ເຮົາຖາມນັ້ນເທີ້ນ
(ເດັກນ້ອຍຂາບທູນວ່າ)

[໔] ຂ້າແດ່ ພຣະອົງຜູ້ສົມມຸດຕິເທບ
ໃນແຄວ້ນຂອງພຣະອົງນັ້ນເອງ
ທີ່ພາກພື້ນແຫ່ງພຣະອຸທະຍານຂອງພຣະອົງນັ້ນແລ
ມີຕົ້ນຮັງໃຫຍ່ຫຼາຍຕົ້ນ ເຊິ່ງມີລຳຕົ້ນຊື່
ມີສີຂຽວຊະອຸ່ມ ໜ້າອອນຊອນໃຈ

[໕] ຢືນຕົ້ນປະສານອາໄສກັນແລະກັນ

ສະເໜີຄືກຸ່ມກ້ອນເຟື້ອ ໜ້າອອນຊອນ
ເມື່ອຊາວໂລກມີຄວາມຢຶດໝັ້ນ ຖືກແຜດເຜົາຢູ່
ໂສນະກະບໍ່ມີຄວາມຢຶດໝັ້ນ ເປັນຜູ້ດັບແລ້ວ
ເພ່ງຊານຢູ່ທີ່ເຫງົ້າຕົ້ນຮັງເຫຼົ່ານັ້ນ

[໖] ລຳດັບນັ້ນແລ ພຣະຣາຊາໄດ້ສະເດັດໄປພ້ອມດ້ວຍເສນາ ໔ ເຫຼົ່າ
ຕັດສັ່ງໃຫ້ປັບຫົນທາງໃຫ້ພຽງສະເໝີແລ້ວ
ໄດ້ສະເດັດໄປຈົນຮອດບ່ອນຢູ່ຂອງໂສນະກະປັດເຈກພຸດທະ

[໗] ເມື່ອສະເດັດເຖິງພູມີພາກພຣະອຸທະຍານ
ຈຶ່ງສະເດັດທ່ຽວໄປໃນປ່າໃຫຍ່
ທອດພຣະເນດເຫັນໂສນະກະປັດເຈກພຸດທະ
ຜູ້ນັ່ງສະງົບເຢັນ ໃນເມື່ອຊາວໂລກຮ້ອນຮົນຢູ່

(ພຣະຣາຊາຕັດວ່າ)

[໘] ພິກຂຸນີ້ເປັນຄົນເຂັນໃຈນໍ ມີຫົວໂລ້ນ ຄອງຜ້າສັງຄາຕິ
ບໍ່ມີແມ່ ບໍ່ມີພໍ່ ເພ່ງຊານຢູ່ທີ່ເຫງົ້າຕົ້ນໄມ້

[໙] ພຣະໂສນະກະປັດເຈກພຸດທະເຈົ້າສະດັບພຣະດຳຣັດນີ້ແລ້ວ
ຈຶ່ງທູນແນວນີ້ວ່າ ຂໍຖວາຍພຣະພອນມະຫາບໍພິດ
ບຸກຄົນຜູ້ສຳຜັດທຳດ້ວຍກາຍບໍ່ຈັດວ່າເປັນຄົນເຂັນໃຈ

[໑໐] ບຸກຄົນໃດໃນໂລກນີ້ລັງກຽດທຳ ປະພຶດຕາມອະທຳ
ບຸກຄົນນັ້ນຈັດວ່າເປັນຄົນເຂັນໃຈ ເປັນຄົນຊົ່ວ
ມີບາບຕິດຕາມໄປໃນພາຍໜ້າ

(ພຣະຣາຊາໂພທິສັດຕັດວ່າ)

[໑໑] ຂ້ານ້ອຍມີຊື່ວ່າອະຣິນທະມະ ມະຫາຊົນຮູ້ຈັກຂ້ານ້ອຍວ່າພຣະເຈົ້າກາສີ
ພຣະຜູ້ເປັນເຈົ້າໂສນະກະ ພຣະຜູ້ເປັນເຈົ້າຜູ້ຈະເລີນ
ມາເຖິງສະຖານທີ່ນີ້ ນອນຫຼັບສະບາຍບໍ

(ພຣະໂສນະກະປັດເຈກພຸດທະເຈົ້າ ສະແດງຄວາມຈະເລີນຂອງສະມະນະແດ່ພຣະຣາຊາວ່າ)

[໑໒] ຄວາມຈະເລີນຂໍ້ທີ ໑ ຍ່ອມມີແມ່ນໃນການທຸກເມື່ອ

ແກ່ພິກຂຸຜູ້ບໍ່ມີຊັບ ບໍ່ມີບ້ານເຮືອນ
ຄື ເຂົ້າເປືອກບໍ່ເຂົ້າໄປ(ມີ)ຢູ່ໃນເລົ້າ
ໃນໝໍ້ ໃນກະຕ່າຂອງພິກຂຸເຫຼົ່ານັ້ນ
ພິກຂຸເຫຼົ່ານັ້ນສະແຫວງຫາອາຫານສຳເລັດ
ຍັງອັດຕະພາບໃຫ້ເປັນໄປດ້ວຍອາຫານນັ້ນ ເປັນຜູ້ມີຂໍ້ວັດປະຕິບັດດີງາມ

[໑໓] ຄວາມຈະເລີນຂໍ້ທີ ໘ ຍ່ອມມີແກ່ພິກຂຸຜູ້ບໍ່ມີຊັບ
ບໍ່ມີບ້ານເຮືອນ ຄື ພິກຂຸເພິ່ງສັນກ້ອນເຂົ້າທີ່ບໍ່ມີໂທດ
ແລະກິເລດໃດ ໆ ຈະບໍ່ເຂົ້າໄປລົບກວນທ່ານ

[໑໔] ຄວາມຈະເລີນຂໍ້ທີ ໓ ຍ່ອມມີແກ່ພິກຂຸຜູ້ບໍ່ມີຊັບ
ບໍ່ມີບ້ານເຮືອນ ຄື ພິກຂຸເພິ່ງສັນກ້ອນເຂົ້າທີ່ເຢັນ
ແລະກິເລດໃດ ໆ ຈະບໍ່ເຂົ້າໄປລົບກວນທ່ານ

[໑໕] ຄວາມຈະເລີນຂໍ້ທີ ໔ ຍ່ອມມີແກ່ພິກຂຸຜູ້ບໍ່ມີຊັບ
ບໍ່ມີບ້ານເຮືອນ ຄື ຄວາມກັງວົນຂ້ອງຍ່ອມບໍ່ມີ
ແກ່ທ່ານຜູ້ລຸດພົ້ນແລ້ວ ທ່ຽວຈາຣິກໄປໃນແຄວ້ນ

[໑໖] ຄວາມຈະເລີນຂໍ້ທີ ໕ ຍ່ອມມີແກ່ພິກຂຸຜູ້ບໍ່ມີຊັບ
ບໍ່ມີບ້ານເຮືອນ ຄື ເມື່ອບ້ານເມືອງຖືກໄຟໄໝ້
ທ່ານບໍ່ມີອັນໃດຈະຖືກເຜົາໄໝ້

[໑໗] ຄວາມຈະເລີນຂໍ້ທີ ໖ ຍ່ອມມີແກ່ພິກຂຸຜູ້ບໍ່ມີຊັບ
ບໍ່ມີບ້ານເຮືອນ ຄື ເມື່ອແຄວ້ນຖືກໂຈນປຸ້ນ
ທ່ານກໍບໍ່ມີອັນໃດຈະໃຫ້ໂຈນປຸ້ນ

[໑໘] ຄວາມຈະເລີນຂໍ້ທີ ໗ ຍ່ອມມີແກ່ພິກຂຸຜູ້ບໍ່ມີຊັບ
ບໍ່ມີບ້ານເຮືອນ ຄື ຫົນທາງໃດທີ່ພວກໂຈນຍຶດຄອງກໍດີ
ຫົນທາງອື່ນໃດທີ່ມີອັນຕະລາຍກໍດີ
ພິກຂຸຜູ້ມີຂໍ້ວັດປະຕິບັດດີງາມ ຖືບາດແລະຈີວອນໄປໄດ້ຢ່າງປອດໄພ

[໑໙] ຄວາມຈະເລີນຂໍ້ທີ ໘ ຍ່ອມມີແກ່ພິກຂຸຜູ້ບໍ່ມີຊັບ
ບໍ່ມີບ້ານເຮືອນ ຄື ຈະຫຼີກໄປສູ່ທິດໃດ ໆ
ກໍໄປສູ່ທິດນັ້ນ ໆ ໄດ້ຢ່າງບໍ່ຕ້ອງຫ່ວງໃຍ

(ພຣະຣາຊາຕັດວ່າ)

[໔໐] ພຣະຜູ້ເປັນເຈົ້າໂສນະກະຜູ້ເຫັນໄພ
ພຣະຜູ້ເປັນເຈົ້າສັນເສີນຄວາມຈະເລີນຂອງພິກຂຸເຫຼົ່ານັ້ນຫຼວງຫຼາຍ
ແຕ່ຂ້ານ້ອຍຍັງຕິດຢູ່ໃນກາມທັງຫຼາຍ ຈະເຮັດແນວໃດໄດ້ນໍ

[໔໑] ກາມທັງຫຼາຍອັນເປັນຂອງມະນຸດ ຂ້ານ້ອຍກໍເພິ່ງພໍໃຈ
ເຖິງແມ່ນີກາມທັງຫຼາຍອັນເປັນທິບ ຂ້ານ້ອຍກໍເພິ່ງພໍໃຈ
ເມື່ອເປັນແນວນັ້ນ ເຮັດແນວໃດນໍຂ້ານ້ອຍຈຶ່ງຈະໄດ້ກາມທັງ ໒ ໃນໂລກ

(ພຣະປັດເຈກພຸດທະເຈົ້າທູນວ່າ)

[໔໒] ຄົນທັງຫຼາຍຜູ້ຕິດຢູ່ໃນກາມ ຍິນດີໃນກາມ
ໝົກມຸ້ນຢູ່ໃນກາມທັງຫຼາຍ
ກະທຳບາບແລ້ວຍ່ອມເຂົ້າເຖິງທຸກຄະຕິ

[໔໓] ສ່ວນຄົນເຫຼົ່າໃດລະກາມທັງຫຼາຍ
ເປັນຜູ້ອອກແລ້ວຈາກກາມ ບໍ່ມີໄພແຕ່ບ່ອນໃດ ໆ
ບັນລຸເຖິງຄວາມເປັນສະມາທິອັນແນ່ວແນ່
ຄົນເຫຼົ່ານັ້ນຍ່ອມບໍ່ໄປສູ່ທຸກຄະຕິ

[໔໔] ຂໍຖວາຍພຣະພອນ ພຣະເຈົ້າອະຣິນທະມະ
ອາດຕະມາພາບຈັກຍົກໂຕຢ່າງມາປຽບທຽບ
ໂຜດສະດັບຂໍ້ອຸປະມານັ້ນ
ບັນດິດລາງພວກໃນໂລກນີ້
ຍ່ອມຮູ້ເນື້ອຄວາມໄດ້ດ້ວຍການປຽບທຽບ

[໔໕] ກາໂຕໜຶ່ງມີປັນຍາໜ້ອຍຍ້ອນບໍ່ມີຄວາມຄິດ
ເຫັນຊາກສົບຖືກແມ່ນ້ຳຄົງຄາພັດລອຍໄປໃນແມ່ນ້ຳໃຫຍ່ ຈຶ່ງຄິດວ່າ

[໔໖] ຍານນີ້ເຮົາໄດ້ແລ້ວນໍ ແລະຊາກສົບນີ້ຈັກເປັນອາຫານບໍ່ແມ່ນໜ້ອຍ
ໄດ້ເປັນຜູ້ມີໃຈຍິນດີບໍ່ເສື່ອມຄາຍໃນຊາກສົບນັ້ນທໍ່ນັ້ນ
ຕະຫຼອດຄືນຕະຫຼອດວັນ

[໔໗] ເມື່ອກາຈິກກິນຊີ້ນຊ້າງ ດື່ມນ້ຳໃນແມ່ນ້ຳຄົງຄາຢູ່

ເມື່ອເຫັນຕົ້ນໄມ້ໃຫຍ່ ໆ ໃນປ່າ ກໍບໍ່ໂຜບິນຂຶ້ນໄປ

[໔໘] ກໍແມ່ນ້ຳຄົງຄາໄດ້ໄຫຼພັດພາເອົາກາໂຕຜະໝາດ
ຍິນດີໃນຊາກສົບໂຕນັ້ນໄປສູ່ສະມຸດ
ເຊິ່ງເປັນສະຖານທີ່ທີ່ຝູງນົກບິນໄປບໍ່ໄດ້

[໔໙] ກໍກາໂຕນັ້ນສິ້ນອາຫານແລ້ວຈຶ່ງຕົກລົງໄປໃນນ້ຳ
ຈະບິນໄປທາງຫຼັງກໍບໍ່ໄດ້ ທາງໜ້າກໍບໍ່ໄດ້
ດ້ານເໜືອກໍບໍ່ໄດ້ ດ້ານໃຕ້ກໍບໍ່ໄດ້

[໕໐] ມັນບິນໄປບໍ່ເຖິງເກາະເຊິ່ງເປັນສະຖານທີ່ທີ່ຝູງນົກບິນໄປບໍ່ໄດ້
ແລະມັນກໍຕົກລົງໄປໃນສະມຸດນັ້ນເອງໂດຍອາການໝົດກຳລັງ

[໕໑] ອັນໜຶ່ງ ຝູງປາ ແຂ້ ມັງກອນ ປາຮ້າຍຊື່ສຸສຸ
ທີ່ຢູ່ໃນສະມຸດກໍພາກັນຂົ່ມເຫງຫຸ້ມກິນການັ້ນ
ເຊິ່ງກຳລັງດີ້ນຣົນຈົນຂົນປີກຂາດ

[໕໒] ຂໍຖວາຍພຣະພອນມະຫາບໍພິດ
ພຣະອົງກໍດີ ຄົນເຫຼົ່າອື່ນທີ່ຍັງບໍຣິໂພກການກໍດີ
ຖ້າຈັກຍັງກຳໜັດບໍ່ຄາຍການສາກໍຄືກັນສັນນັ້ນ
ຊົນເຫຼົ່ານັ້ນບັນດິດທັງຫຼາຍຮູ້ວ່າ ມີປັນຍາພຽງດັ່ງກາ

[໕໓] ຂໍຖວາຍພຣະພອນມະຫາບໍພິດ
ນີ້ເປັນອຸປະມາທີ່ສະແດງເນື້ອຄວາມທີ່ຊັດເຈນ
ເຊິ່ງອາດຕະມາພາບກ່າວຖວາຍແດ່ມະຫາບໍພິດ
ມະຫາບໍພິດຈະຊົງກະທຳບໍກໍຕາມ
ມະຫາບໍພິດກໍຈັກຜາກົດຕາມເຫດນັ້ນ

(ພຣະປັດເຈກພຸດທະເຈົ້າກ່າວສະຫຼຸບວ່າ)

[໕໔] ບຸກຄົນຜູ້ມີຄວາມອີດູ
ເພິ່ງກ່າວພຽງຄຳດຽວຫຼືສອງຄຳທໍ່ນັ້ນ
ບໍ່ກ່າວໃຫ້ຍິ່ງໄປກວ່ານັ້ນຄືຂ້າທາດໃນສຳນັກຂອງນາຍ

(ພຣະບໍຣົມມະສາດສະດາຕັດວ່າ)

[໓໕] ພຣະໂສນະກະປັດເຈກພຸດທະຜູ້ມີຄວາມຮູ້ອັນນັບບໍ່ໄດ້
ເມື່ອກ່າວຄຳນີ້ແລ້ວຈຶ່ງເຫາະຂຶ້ນໄປໃນອາກາດ
ພ່ຳສອນບໍຣົມກະສັດແລ້ວເຫາະໄປໃນອາກາດ

(ພຣະຣາຊາຕັດວ່າ)

[໓໖] ບຸກຄົນຜູ້ໄດ້ຮັບການສຶກສາ ເຖິງພ້ອມດ້ວຍຄວາມແຫຼມຄົມ
ທີ່ຈະຄອບຄອງຣາດຊະສົມບັດເຫຼົ່ານີ້ມີຢູ່ທີ່ໃດບໍ
ເຮົາຈັກມອບຣາດຊະສົມບັດໃຫ້ ເຮົາບໍ່ມີຄວາມຕ້ອງການຣາດຊະສົມບັດ

[໓໗] ເຮົາຈັກບວດໃນມື້ນີ້ແລ
ໃຜຈະເພິ່ງຮູ້ໄດ້ວ່າ ຄວາມຕາຍຈັກມີໃນມື້ອື່ນນີ້
ຂໍເຮົາຢ່າໄດ້ຕົກໄປສູ່ອຳນາດແຫ່ງກາມທັງຫຼາຍຄືກາໂງ່ເລີຍ
(ພວກອຳມາດໄດ້ຟັງແລ້ວ ຈຶ່ງຂາບທູນວ່າ)

[໓໘] ພຣະຣາດຊະບຸດອົງນ້ອຍຂອງພຣະອົງຊົງພຣະນາມວ່າ
ທີຄາວຸກຸມານ ຜູ້ຈະຜະດຸງຣັດໃຫ້ຈະເລີນມີຢູ່
ຂໍພຣະອົງຊົງອະພິເສກພຣະຣາດຊະບຸດພຣະອົງນັ້ນໃນຣາດຊະສົມບັດເທີ້ນ
ພຣະອົງຈັກເປັນພຣະຣາຊາຂອງຂ້າພຣະອົງທັງຫຼາຍ

(ພຣະຣາຊາຕັດວ່າ)

[໓໙] ຈົ່ງຟ້າວນຳທີຄາວຸກຸມານຜູ້ຈະຜະດຸງຣັດໃຫ້ຈະເລີນມາເທີ້ນ
ເຮົາຈັກອະພິເສກໃນຣາດຊະສົມບັດ
ທ່ານຈັກເປັນພຣະຣາຊາຂອງທ່ານທັງຫຼາຍ

(ພຣະບໍຣົມມະສາດສະດາຕັດວ່າ)

[໔໐] ລຳດັບນັ້ນ ອຳມາດທັງຫຼາຍໄດ້ເຊີນສະເດັດທີຄາວຸກຸມານ
ຜູ້ຈະຜະດຸງຣັດໃຫ້ຈະເລີນມາເຝົ້າ
ພຣະຣາຊາທອດພຣະເນດເຫັນແລ້ວ
ໄດ້ຕັດກັບພຣະໂອຣົດພຣະອົງດຽວ
ຜູ້ເປັນທີ່ພໍໃຈພຣະອົງນັ້ນວ່າ

[໔໑] ມີເຮືອນຢູ່ຫົກໝື່ນໝູ່ບ້ານສົມບູນທຸກຢ່າງ

ລູກເອີຍ ເຈົ້າຈົ່ງເບິ່ງແຍງໝູ່ບ້ານເຫຼົ່ານັ້ນ
ພໍ່ຂໍມອບຣາດຊະສົມບັດໃຫ້ເຈົ້າ

[໔໒] ພໍ່ຈັກບວດໃນມື້ນີ້ແລ
ໃຜຈະເພິ່ງຮູ້ໄດ້ວ່າ ຄວາມຕາຍຈັກມີໃນມື້ອື່ນນີ້
ຂໍພໍ່ຢ່າໄດ້ຕົກໄປສູ່ອຳນາດແຫ່ງກາມທັງຫຼາຍຄືກາໂງ່ເລີຍ

[໔໓] ມີຊ້າງຢູ່ທົກໝື່ນເຊືອກ ເປັນຊ້າງພາຍ
ປະດັບດ້ວຍເຄື່ອງປະດັບທັງປວງ
ມີສັບຄັບຄຳ ປົກຄຸມດ້ວຍເຄື່ອງປົກຄຸມຄຳ

[໔໔] ມີນາຍຄວານຊ້າງຖືໂຕມອນແລະຂໍຂຶ້ນປະຈຳ
ລູກເອີຍ ເຈົ້າຈົ່ງເບິ່ງແຍງຊ້າງເຫຼົ່ານັ້ນ
ພໍ່ຂໍມອບຣາດຊະສົມບັດໃຫ້ເຈົ້າ

[໔໕] ພໍ່ຈັກບວດໃນມື້ນີ້ແລ
ໃຜຈະເພິ່ງຮູ້ໄດ້ວ່າ ຄວາມຕາຍຈັກມີໃນມື້ອື່ນນີ້
ຂໍພໍ່ຢ່າໄດ້ຕົກໄປສູ່ອຳນາດແຫ່ງກາມທັງຫຼາຍຄືກາໂງ່ເລີຍ

[໔໖] ມີມ້າຢູ່ທົກໝື່ນໂຕປະດັບດ້ວຍເຄື່ອງປະດັບທັງປວງ
ຄື ມ້າສິນທົບເຊິ່ງເປັນມ້າພາຫະນະທີ່ມີການແລ່ນໄວ ຊາດອາຊາໄນ

[໔໗] ມີນາຍສາຣະຖີຜູ້ໃສ່ເກາະ ຖືແລ່ງທະນູຂຶ້ນປະຈຳ
ລູກເອີຍ ເຈົ້າຈົ່ງເບິ່ງແຍງມ້າເຫຼົ່ານັ້ນ
ພໍ່ຂໍມອບຣາດຊະສົມບັດໃຫ້ເຈົ້າ

[໔໘] ພໍ່ຈັກບວດໃນມື້ນີ້ແລ
ໃຜຈະເພິ່ງຮູ້ໄດ້ວ່າ ຄວາມຕາຍຈັກມີໃນມື້ອື່ນນີ້
ຂໍພໍ່ຢ່າໄດ້ຕົກໄປສູ່ອຳນາດແຫ່ງກາມທັງຫຼາຍຄືກາໂງ່ເລີຍ

[໔໙] ມີຣົດຢູ່ທົກໝື່ນຄັນ ເປັນລົດມີໜັງເສືອເຫຼືອງຫຸ້ມກໍມີ
ມີໜັງເສືອໂຄ່ງຫຸ້ມກໍມີ ຍົກທຸງຂຶ້ນປັກແລ້ວ
ປະດັບດ້ວຍເຄື່ອງປະດັບທັງປວງ

[໕໐] ມີນາຍສາຣະຖີຜູ້ໃສ່ເກາະ ຖືແລ່ງທະນູຂຶ້ນປະຈຳ

ລູກເອີຍ ເຈົ້າຈົ່ງເບິ່ງແຍງລົດເຫຼົ່ານັ້ນ
ພໍ່ຂໍມອບຣາດຊະສົມບັດໃຫ້ເຈົ້າ

[໔໑] ພໍ່ຈັກບວດໃນມື້ນີ້ແລ
ໃຜຈະເພິ່ງຮູ້ໄດ້ວ່າ ຄວາມຕາຍຈັກມີໃນມື້ອື່ນນີ້
ຂໍພໍ່ຢ່າໄດ້ຕົກໄປສູ່ອຳນາດແຫ່ງກາມທັງຫຼາຍຄືກາໂງ່ເລີຍ

[໔໒] ມີແມ່ງົວນົມຢູ່ທົກໝື່ນໂຕ ເປັນແມ່ງົວສີແດງ
ພ້ອມທັງງົວຜູ້ໂຕປະເສີດ
ລູກເອີຍ ເຈົ້າຈົ່ງເບິ່ງແຍງງົວເຫຼົ່ານັ້ນ
ພໍ່ຂໍມອບຣາດຊະສົມບັດໃຫ້ເຈົ້າ

[໔໓] ພໍ່ຈັກບວດໃນມື້ນີ້ແລ
ໃຜຈະເພິ່ງຮູ້ໄດ້ວ່າ ຄວາມຕາຍຈັກມີໃນມື້ອື່ນນີ້
ຂໍພໍ່ຢ່າໄດ້ຕົກໄປສູ່ອຳນາດແຫ່ງກາມທັງຫຼາຍຄືກາໂງ່ເລີຍ

[໔໔] ມີຍິງຢູ່ໜຶ່ງໝື່ນຫົກພັນນາງ
ປະດັບດ້ວຍເຄື່ອງປະດັບທັງປວງ
ມີເສື້ອຜ້າອາພອນອັນວິຈິດ ໃສ່ຕຸ້ມຫູແກ້ວມະນີ
ລູກເອີຍ ເຈົ້າຈົ່ງເບິ່ງແຍງຍິງເຫຼົ່ານັ້ນ
ພໍ່ຂໍມອບຣາດຊະສົມບັດໃຫ້ເຈົ້າ

[໔໕] ພໍ່ຈັກບວດໃນມື້ນີ້ແລ
ໃຜຈະເພິ່ງຮູ້ໄດ້ວ່າ ຄວາມຕາຍຈັກມີໃນມື້ອື່ນນີ້
ຂໍພໍ່ຢ່າໄດ້ຕົກໄປສູ່ອຳນາດແຫ່ງກາມທັງຫຼາຍຄືກາໂງ່ເລີຍ

(ພຣະຣາດຊະກຸມານຂາບທູນວ່າ)

[໔໖] ສະເດັດພໍ່ ເມື່ອຂ້ານ້ອຍຍັງເປັນເດັກຢູ່
ຂ້ານ້ອຍໄດ້ສະດັບມາວ່າ ພຣະມານດາສະຫວັນຄົດແລ້ວ
ສະເດັດພໍ່ ຂ້ານ້ອຍເວັ້ນຈາກສະເດັດພໍ່ແລ້ວ
ບໍ່ສາມາດຈະມີຊີວິດຢູ່ໄດ້

[໔໗] ລູກຊ້າງຍ່ອມຕິດຕາມໄປທາງຫຼັງຊ້າງປ່າ
ທີ່ທ່ຽວໄປໃນຮ່ອມພູທີ່ສະເໝີແດ່ ບໍ່ສະເໝີແດ່ສັນໃດ

[໔໗] ຂ້ານ້ອຍກໍຈະພາເອົາບຸດຕິດຕາມສະເດັດພໍ່ໄປທາງຫຼັງສັນນັ້ນ
ຈັກເປັນລູກທີ່ລ້ຽງງ່າຍຂອງສະເດັດພໍ່
ຈັກບໍ່ເປັນລູກທີ່ລ້ຽງຍາກຂອງສະເດັດພໍ່

(ພຣະຣາຊາຕັດຕອບວ່າ)

[໔໙] ອັນຕະລາຍເພິ່ງຢືດເຮືອທີ່ແລ່ນໄປໃນສະມຸດ
ຂອງພໍ່ຄ້າຜູ້ສະແຫວງຫາຊັບໄວ້ໃນສະມຸດນັ້ນ
ພໍ່ຄ້າເພິ່ງພິນາດສັນໃດ

[໕໐] ລູກກາລີຄົນນີ້ເພິ່ງເປັນຄົນກະທຳອັນຕະລາຍແກ່ເຮົາຄືກັນສັນນັ້ນ
ພວກທ່ານຈົ່ງສົ່ງກຸມານນີ້ໄປໃຫ້ເຖິງຜາສາດ
ອັນຈະເລີນໄປດ້ວຍຄວາມຍິນດີເທີ້ນ

[໕໑] ທີ່ຜາສາດນັ້ນ ເຫຼົ່າຍິງສາວ
ຜູ້ມີມືປະດັບດ້ວຍເຄື່ອງປະດັບຄຳ
ຈັກຍັງກຸມານນັ້ນໃຫ້ອອນຊອນໃນຜາສາດນັ້ນ
ຄືນາງອັບປະສອນໃຫ້ທ້າວສັກກະອອນຊອນ
ແລະກຸມານນັ້ນກໍຈັກອອນຊອນດ້ວຍຍິງສາວທັງຫຼາຍເຫຼົ່ານັ້ນ

[໕໒] ລຳດັບນັ້ນ ພວກອຳມາດໄດ້ສົ່ງສະເດັດພຣະກຸມານ
ຈົນເຖິງຜາສາດອັນຈະເລີນໄປດ້ວຍຄວາມຍິນດີ
ເຫຼົ່າຍິງສາວເຫັນທີຄາວຸກຸມານຜູ້ຜະດຸງຣັດໃຫ້ຈະເລີນນັ້ນແລ້ວ
ຈຶ່ງໄດ້ຂາບທູນຖາມວ່າ

[໕໓] ພຣະອົງເປັນເທວະດາຫຼືຄົນທັນ ຫຼືເປັນທ້າວສັກກະປຸຣິນທະທະ
ພຣະອົງເປັນໃຜຫຼືເປັນພຣະຣາດຊະບຸດຂອງໃຜ
ຂ້ານ້ອຍທັງຫຼາຍຈະຮູ້ຈັກພຣະອົງໄດ້ແນວໃດ

(ພຣະຣາດຊະກຸມານຕັດຕອບວ່າ)

[໕໔] ເຮົາບໍ່ແມ່ນເທວະດາ ບໍ່ແມ່ນຄົນທັນ ທັງບໍ່ແມ່ນທ້າວສັກກະປຸຣິນທະທະ
ເຮົາເປັນພຣະໂອຣົດຂອງພຣະເຈົ້າກາສີພຣະນາມວ່າທີຄາວຸກຸມານ
ຜູ້ຈະຜະດຸງຣັດໃຫ້ຈະເລີນ ພວກທ່ານຈົ່ງລ້ຽງດູບຳເລີເຮົາ
ຂໍພວກທ່ານຈົ່ງມີຄວາມຈະເລີນເທີ້ນ ເຮົາຈະເປັນສາມີຂອງພວກທ່ານ

[໖໕] ເຫຼົ່າຍິງສາວໄດ້ຂາບທູນຖາມທີຄາວຸກຸມານ
ຜູ້ຜະດຸງຮັດໃຫ້ຈະເລີນພຣະອົງນັ້ນ ຢູ່ບ່ອນນັ້ນວ່າ
ພຣະຣາຊາສະເດັດເຖິງໃສແລ້ວ ພຣະຣາຊາຈາກບ່ອນນີ້ໄປຢູ່ບ່ອນໃດ

[໖໖] ພຣະຣາຊາສະເດັດລ່ວງເລີຍເປືອກຕົມແລ້ວດຳລົງຢູ່ເທິງບົກ
ຊົງດຳເນີນສູ່ທາງໃຫຍ່ອັນປາສະຈາກໜາມບໍ່ຮົກທຶບ

[໖໗] ສ່ວນເຮົາດຳເນີນໄປສູ່ຫົນທາງຂອງຄົນຜູ້ໄປສູ່ທຸກຄະຕິ
ມີທັງໜາມແລະຮົກທຶບເຊິ່ງເປັນຫົນທາງໄປສູ່ທຸກຄະຕິ

(ເຫຼົ່າຍິງສາວຂາບທູນວ່າ)

[໖໘] ຂ້າແດ່ ພຣະຣາຊາ ພຣະອົງນັ້ນສະເດັດມາດີແລ້ວ
ຄືຣາດຊະສີຄືນສູ່ຖ້ຳ ທີ່ຮ່ອມພູ
ຂ້າແດ່ ພຣະມະຫາຣາດ ຂໍພຣະອົງໂຜດຊົງອະນຸສາດພ່ຳສອນ
ແລະຊົງເປັນໃຫຍ່ແຫ່ງຂ້ານ້ອຍທັງປວງເທີ້ນ

**ໂສນະກະຊາດົກທີ ໑ ຈົບ**

# ໘. ສັງກິດຈະຊາດົກ (໕໓໐)
## ວ່າດ້ວຍສັງກິດຈະລືສີ

(ພຣະສາດສະດາຊົງພາຣົບພຣະເຈົ້າອະຊາດສັດຕູຜູ້ເຮັດປິຕຸຄາດ ຈຶ່ງຕັດສັງກິດຈະຊາດົກນີ້ວ່າ)

[໖໙] ລຳດັບນັ້ນ ຄົນເຝົ້າສວນເຫັນພຣະເຈົ້າພົມມະທັດ
ຜູ້ຊົງເປັນຈອມທັບປະທັບນັ່ງຢູ່
ຈຶ່ງໄດ້ຂາບທູນພຣະອົງໃຫ້ຊົງຮູ້ວ່າ
ພຣະອົງຊົງອີດູທ່ານຜູ້ໃດ

[໗໐] ທ່ານຜູ້ນີ້ ຄື ສັງກິດຈະລືສີ ຜູ້ໄດ້ຮັບສົມມຸດວ່າ
ເປັນຄົນດີກວ່າລືສີທັງຫຼາຍ ໄດ້ມາເຖິງແລ້ວ
ຂໍເຊີນພຣະອົງຟ້າວສະເດັດອອກໄປພົບ
ທ່ານຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ໂດຍດ່ວນເທີ້ນ ຂ້ານ້ອຍ

[໗໑] ລຳດັບນັ້ນ ພຣະຣາຊາຜູ້ຈອມທັບ

ຟ້າວສະເດັດຂຶ້ນປະທັບຣາດຊະລົດທີ່ຫຽມໄວ້ແລ້ວ
ມີໝູ່ມິດແລະອຳມາດຫ້ອມລ້ອມໄດ້ສະເດັດໄປແລ້ວ

[໗໔] ພຣະຣາຊາຜູ້ຊົງຜະດຸງຣັດໃຫ້ຈະເລີນແກ່ຊາວກາສີ
ຊົງເກັບຣາດຊະກະກຸທະພັນ ໕ ປະການ ຄື
໑. ພັດກັບແສ້ ໒. ຂອບພຣະພັກ ໓. ພຣະຂັນ
໔. ສະເທວດຕະສັດ ໕. ສະຫຼອງພຣະບາດ

[໗໓] ພຣະຣາຊາຊົງວາງປັນຈະກະກຸທະພັນໄວ້ຢ່າງປົກປິດແລ້ວ
ສະເດັດລົງຈາກຣາດຊະຍານ ຊົງດຳເນີນເຂົ້າໄປຫາສັງກິດຈະລືສີ
ເຊິ່ງນັ່ງຢູ່ທີ່ທາຍະປັດສະອຸທະຍານ

[໗໔] ພຣະຣາຊາພຣະອົງນັ້ນເມື່ອສະເດັດເຂົ້າໄປຫາແລ້ວ
ຊົງບັນເທີງຢູ່ກັບລືສີສົນທະນາປາໄສ
ພໍໃຫ້ຣະນຶກເຖິງກັນແລະກັນແລ້ວສະເດັດເຂົ້າໄປບ່ອນທີ່ສົມຄວນ

[໗໕] ປະທັບນັ່ງຢູ່ບ່ອນທີ່ສົມຄວນແລ້ວ
ເມື່ອຊົງເຫັນວ່າເປັນການອັນສົມຄວນ
ຈຶ່ງຊົງສອບຖາມເຖິງກຳອັນເປັນບາບວ່າ

[໗໖] ຂ້ານ້ອຍຂໍຖາມທ່ານສັງກິດຈະລືສີຜູ້ໄດ້ຮັບສົມມຸດວ່າ
ເປັນຄົນດີກວ່າລືສີທັງຫຼາຍເຊິ່ງນັ່ງຢູ່ທີ່ທາຍະປັດສະອຸທະຍານ
ຫ້ອມລ້ອມໄປດ້ວຍໝູ່ລືສີວ່າ

[໗໗] ຄົນຜູ້ປະພຶດລ່ວງທຳທັງຫຼາຍ
ຄືຂ້ານ້ອຍຜູ້ປະພຶດລ່ວງທຳ ລະໄປແລ້ວຈະໄປສູ່ຄະຕິແນວໃດ
ຂໍພຣະຜູ້ເປັນເຈົ້າຈົ່ງຕອບເນື້ອຄວາມທີ່ຂ້ານ້ອຍຖາມເທີ້ນ

[໗໘] ສັງກິດຈະລືສີໄດ້ທູນພຣະຣາຊາຜູ້ຊົງຜະດຸງຣັດໃຫ້ຈະເລີນແກ່ຊາວກາສີ
ເຊິ່ງປະທັບນັ່ງທາຍະປັດສະອຸທະຍານວ່າ
ຂໍຖວາຍພຣະພອນມະຫາບໍພິດ ຂໍພຣະອົງຊົງສະດັບຄຳຂອງອາດຕະມາພາບ

[໗໙] ຜູ້ໃດພ່ຳສອນບອກຫົນທາງແກ່ຄົນເດີນທາງຜິດ
ຖ້າເຂົາເພິ່ງເຮັດຕາມຄຳຂອງຜູ້ນັ້ນ ເຂົາກໍບໍ່ເພິ່ງຖືກໜາມປັກສັນໃດ

[໗໐] ຜູ້ໃດພໍ່າສອນທໍາແກ່ຜູ້ປະຕິບັດຜິດທໍາ
ຖ້າເຂົາເພິ່ງເຮັດຕາມຄໍາສອນຂອງທ່ານຜູ້ນັ້ນ
ເຂົາຈຶ່ງຈະບໍ່ໄປສູ່ທຸກຄະຕິຄືກັນສັນນັ້ນ
(ລືສີໂພທິສັດທູນພຣະຣາຊາຕໍ່ໄປວ່າ)

[໗໑] ຂ້າແດ່ ມະຫາຣາດ ທໍາຊື່ວ່າເປັນທາງທີ່ປອດໄພ໌
ສ່ວນອະທໍາຊື່ວ່າເປັນທາງທີ່ບໍ່ປອດໄພ
ຍ້ອນວ່າອະທໍານໍາສັດໄປສູ່ນະຣົກ ສ່ວນທໍາຍັງສັດໃຫ້ເຖິງສຸກຄະຕິ

[໗໒] ຂ້າແດ່ ມະຫາບໍພິດ ຄົນຜູ້ປະພຶດລ່ວງທໍາທັງຫຼາຍ
ມີຊີວິດບໍ່ຣາບຣື່ນ ຕາຍໄປແລ້ວຈະໄປສູ່ຄະຕິໃດໃນນະຣົກ
ຂໍພຣະອົງຊົງສະດັບການກ່າວເຖິງນະຣົກເຫຼົ່ານັ້ນຂອງອາດຕະມາພາບເທີ້ນ

[໗໓] ຄື ໑. ສັນຊີວະນະຣົກ ໒. ກາສຸດຕະນະຣົກ ໓. ສັງຄາຕະນະຣົກ
ໂຣຣຸວະນະຣົກ ໒ ຄື (໔. ຊາລະໂຣຣຸວະນະຣົກ ໕. ທູມະໂຣຣຸວະນະຣົກ)
໖. ຕາປະນະນະຣົກ ໗. ປະຕາປະນະນະຣົກ ໘. ອະເວຈີມະຫານະຣົກ໌

[໗໔] ນະຣົກ ໘ ຂຸມເຫຼົ່ານີ້ບັນດິດກ່າວວ່າ ກ້າວພົ້ນໄດ້ໂດຍຍາກ
ໜາແໜ້ນໄປດ້ວຍເຫຼົ່າສັດຜູ້ມີກໍາຫຍາບຊ້າ
ແຕ່ລະຂຸມ ໆ ມີອຸດສະທະນະຣົກ ໑໖ ຂຸມເປັນບໍລິວານ

[໗໕] ເປັນນະຣົກທີ່ໂຫດຮ້າຍ ເຜົາຜານເຫຼົ່າສັດ
ຜູ້ຂີ້ຖີ່ໜຽວແໜ້ນໃຫ້ຮ້ອນຮົນ
ເປັນມະຫາໄພ ມີແປວໄຟລຸກສະຫວ່າງແຈ້ງ ໜ້າຂົນຫົວລຸກ
ເປັນຕາຢ້ານ ມີໄພສະເພາະໜ້າ ມີແຕ່ທຸກ

[໗໖] ມີ ໔ ແຈ ມີປະຕູ ໔ ດ້ານ ຈັດໄວ້ເໝາະສົມຕາມສັດສ່ວນ
ມີກໍາແພງເຫຼັກອ້ອມຮອບ ມີເຫຼັກຄອບໄວ້ດ້ວຍ

[໗໗] ພາກພື້ນຂອງນະຣົກເຫຼົ່ານັ້ນ ລ້ວນແຕ່ເປັນເຫຼັກ ມີໄຟລຸກໂຊນ
ມີຄວາມຮ້ອນແຜ່ຊ່ານໄປຕະຫຼອດ ໑໐໐ ໂຍດໂດຍຮອບ
ຕັ້ງຢູ່ໃນການທຸກເມື່ອ

[໗໘] ຄົນຜູ້ກ່າວລ່ວງເກີນລືສີທັງຫຼາຍ ຜູ້ສັງລວມ ຜູ້ມີຕະບະເຫຼົ່ານັ້ນ
ຍ່ອມຕົກນະຣົກ ມີຕີນຊີ້ຂຶ້ນເບື້ອງເທິງ ມີຫົວປັກລົງເບື້ອງລ່າງ

[໗໙] ຄົນເຫຼົ່ານັ້ນຜູ້ມີປົກກະຕິກະທຳກຳຫຍາບຊ້າ
ມີຄວາມຈະເລີນຖືກກຳຈັດແລ້ວ ຄືປາທີ່ຖືກປາດອອກເປັນຕ່ອນ ໆ
ຍ່ອມມົກໄໝ້ຢູ່ໃນນະຣົກຕະຫຼອດປີນັບບໍ່ຖ້ວນ

[໙໐] ມີກາຍຖືກໄຟເຜົາໄໝ້ທັງພາຍໃນທັງພາຍນອກຢູ່ປະຈຳ
ສະແຫວງຫາທາງອອກຈາກນະຣົກ ກໍບໍ່ພົ້ປະຕູທີ່ຈະອອກ

[໙໑] ຈຶ່ງແລ່ນໄປທາງປະຕູດ້ານທິດຕາເວັນອອກ
ຈາກນັ້ນກໍແລ່ນກັບໄປທາງປະຕູດ້ານທິດຕາເວັນຕົກ
ແລ່ນໄປແມ່ນທາງປະຕູດ້ານທິດເໜືອ
ຈາກນັ້ນຈຶ່ງແລ່ນກັບໄປສູ່ປະຕູດ້ານທິດໃຕ້
ແລ່ນໄປເຖິງປະຕູໃດ ໆ ປະຕູນັ້ນ ໆ ກໍອັດທັນທີ

[໙໒] ນັບເປັນເວລາຫຼາຍພັນປີ ຊົນທັງຫຼາຍທີ່ຕົກນະຣົກ
ຕ້ອງປະຄອງແຂນຮ່ຳໄຮ ສະເຫວີຍທຸກບໍ່ແມ່ນໜ້ອຍ

[໙໓] ຍ້ອນເຫດນັ້ນ ບຸກຄົນບໍ່ຄວນທຳລາຍຄົນດີ
ຍ້ອນທ່ານມີຄວາມສັງລວມ ມີຕະບະ
ເໝືອນອະສໍຣະພິດມີພິດກ້າທີ່ໂກດແລ້ວຫຼີກຫຼີບໄດ້ຍາກ

[໙໔] ພຣະເຈົ້າອັດຊຸນະຊົງເປັນໃຫຍ່ໃນແຄວ້ນເກດກະ
ມີພຣະວໍຣະກາຍກຳຍຳລ່ຳສັນ
ຊົງເປັນນາຍຂະມັງທະນູຜູ້ຍິ່ງໃຫຍ່ ມີພຣະພາຫາເປັນພັນ
ກໍຫາຍສາບສູນໄປຍ້ອນທຳລາຍໂຄຕະມະລືສີ

[໙໕] ພຣະເຈົ້າທັນທະກີໄດ້ຊົງເອົາທຸລີໂຮຍໃສ່ກິດວັດສະລືສີ
ຜູ້ບໍ່ມີກິເລດພຽງດັ່ງທຸລີ
ພຣະອົງຊົງເຖິງຄວາມພິນາດຄືຕົ້ນຕານຖືກຕັດຮາກ

[໙໖] ພຣະເຈົ້າມັດຊະຄິດຮ້າຍມາຕັງຄະລືສີຜູ້ເຮືອງຍົດ
ຈຶ່ງໄດ້ຫາຍສາບສູນໄປພ້ອມທັງບໍລິສັດ
ແຄວ້ນຂອງພຣະອົງກໍກາຍເປັນປ່າໄມ້ໃນການນັ້ນ

[໙໗] ຊາວເມືອງອັນທະກະເວນທະຍະທຳລາຍກັນຫະທີປາຍະນະລືສີ
ຕ່າງຖືໄມ້ຄ້ອນຕີກັນແລະກັນ

ກໍພາກັນໄປເຖິງສະຖານທີ່ຊໍາຣະໂທດຂອງພະຍາຍົມ

[໙໗] ສ່ວນພຣະເຈົ້າເຈດຈະພຣະອົງນີ້
ແຕ່ກ່ອນຊົງເຫາະໄປໃນອາກາດໄດ້
ຖືກກະບິນລະດາບົດສາບມີອັດຕະພາບເສື່ອມສິ້ນລິດແລ້ວ
ຖືກແຜ່ນດິນສູບເຖິງສິ້ນພະຊົນ

[໙໙] ຍ້ອນເຫດນັ້ນແລ ບັນດິດທັງຫຼາຍຈຶ່ງບໍ່ສັນເສີນ
ການເຖິງຄວາມລໍາອຽງຍ້ອນຄວາມມັກ
ບຸກຄົນບໍ່ເພິ່ງມີຈິດຄິດປະທຸດສະຮ້າຍ
ເພິ່ງກ່າວວາຈາທີ່ປະກອບດ້ວຍຄວາມຈິງ

[໑໐໐] ຖ້າວ່າຄົນໃດມີໃຈປະທຸດສະຮ້າຍ
ເພ່ງເລັງມຸນີຜູ້ເຖິງພ້ອມດ້ວຍວິດຊາແລະຈະຣະນະ
ເຂົາກໍຈະໄປສູ່ນະຮົກເບື້ອງຕໍ່າ

[໑໐໑] ຊົນເຫຼົ່າໃດພະຍາຍາມເວົ້າຄໍາຫຍາບຄາຍ ດ່າວ່າຜູ້ເຖົ້າ
ຊົນເຫຼົ່ານັ້ນຈະບໍ່ມີທີ່ເພິ່ງ ບໍ່ມີທາຍາດ
ເປັນຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າ

[໑໐໒] ອັນໜຶ່ງ ຄົນໃດຂ້າບັນພະຊິດຜູ້ເຮັດກິດສໍາເລັດແລ້ວ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຄົນນັ້ນຍ່ອມມົກໄໝ້ຢູ່ໃນກາລະສຸດຕະນະຮົກຕະຫຼອດຣາຕີດົນ

[໑໐໓] ອັນໜຶ່ງ ພຣະຣາຊາພຣະອົງໃດບໍ່ຕັ້ງຢູ່ໃນທໍາ
ຊົງມີອະຄະຕິ ທ່ຽວກໍາຈັດແຄວັ້ນ ເຮັດຊົນນະບົດໃຫ້ເດືອດຮ້ອນ
ສິ້ນພະຊົນແລ້ວຈະມົກໄໝ້ຢູ່ໃນຕາປະນະນະຮົກ

[໑໐໔] ແລະພຣະອົງຈະຕ້ອງມົກໄໝ້ຢູ່ຕະຫຼອດແສນປີທິບ[໑]
ຈະຖືກກຸ່ມແປວເພີງຫ້ອມລ້ອມສະເຫວີຍທຸກຂະເວທະນາ

[໑໐໕] ແປວເພີງຈະເປ່ງຣັດສະໝີພວຍພຸ່ງອອກຈາກພຣະກາຍຂອງພຣະອົງ
ສັນພາງກາຍພ້ອມທັງຂົນແລະເລັບທັງຫຼາຍຂອງສັດ
ຜູ້ມີໄຟເປັນອາຫານຈະລຸກເປັນແປວເປັນອັນດຽວກັນ

[໑໐໖]	ສັດນະຣົກມີກາຍຖືກໄຟລວກທັງພາຍໃນແລະພາຍນອກຢູ່ປະຈຳ
ຖືກຄວາມທຸກຍໍ່າຍີຮ້ອງຄວນຄາງຢູ່ຄືຊ້າງຖືກສັບດ້ວຍຕະຂໍ

[໑໐໗]	ຄົນໃດເປັນຄົນຕ່ຳຊ້າ ຂ້າບິດາຍ້ອນຄວາມໂລບຫຼືຄວາມໂກດ
ຄົນນັ້ນຍ່ອມມົກໄໝ້ໃນກາລສຸດຕະນະຣົກຕະຫຼອດຮາຕີດົນ

[໑໐໘]	ຄົນຜູ້ຂ້າບິດາເຊັ່ນນັ້ນຈະຕ້ອງມົກໄໝ້ຢູ່ໃນໂລຫະກຸມພີນະຣົກ
ແລະນາຍນິຣະຍະບານທັງຫຼາຍຈະໃຊ້ຫອກແທງເຂົາຜູ້ຖືກຕົ້ມຈົນບໍ່ມີໜັງ
ເຮັດໃຫ້ຕາບອດ ໃຫ້ກິນປັດສາວະແລະອຸດຈາຣະເປັນອາຫານ
ແລ້ວກົດຄົນເຊັ່ນນັ້ນໃຫ້ຈົມລົງໃນນ້ຳກົດ

[໑໐໙]	ນາຍນິຣະຍະບານບັງຄັບໃຫ້ສັດນະຣົກກິນນ້ຳອຸດຈາຣະ
ທີ່ຮ້ອນຈົນເດືອດພົດ ແລະກ້ອນເຫຼັກແດງທີ່ມີໄຟລຸກໂຊນ
ຖືເອົາຜານທີ່ຍາວແລະຮ້ອນຢູ່ຕະຫຼອດຮາຕີດົນ
ງັດປາກ ເມື່ອປາກເປີດອ້າຈຶ່ງໃຊ້ເບັດ
ທີ່ມັດສາຍເຊືອກ(ດຶງລີ້ນອອກມາ) ແລ້ວຈຶ່ງຍັດ(ເຫຼັກແດງ)ເຂົ້າໄປ

[໑໑໐]	ຝູງໝາດຳ ຝູງໝາດ່າງ ຝູງນົກແຮ້ງ ຝູງກາປ່າ
ແລະຝູງນົກປາກເຫຼັກ
ພາກັນຫຸ້ມຈິກກັດສັດນະຣົກຜູ້ກຳລັງດີ້ນທຸຣົນທຸຣາຍ
ແບ່ງກັນກິນເປັນອາຫານພ້ອມທັງເລືອດ

[໑໑໑]	ສັດນະຣົກຜູ້ຂ້າບິດານັ້ນມີຮ່າງກາຍແຕກທະຍະໄປທົ່ວ
ຄືຕົ້ນຕານທີ່ຖືກໄຟໄໝ້
ນາຍນິຣະຍະບານທັງຫຼາຍຈະທ່ຽວຕິດຕາມທຸບຕີ
ຈິງຢູ່ ນາຍນິຣະຍະບານເຫຼົ່ານັ້ນມີຄວາມຍິນດີ
ແຕ່ພວກສັດນະຣົກນອກນີ້ໄດ້ຮັບທຸກທໍລະມານ
ຄົນຜູ້ຂ້າບິດາທຸກຈຳພວກໃນໂລກນີ້ຕ້ອງຕົກຢູ່ໃນນະຣົກເຊັ່ນນັ້ນ

[໑໑໒]	ອັນໜຶ່ງ ບຸດຂ້າມານດາ ຕາຍຈາກໂລກນີ້ໄປແລ້ວ
ເຂົ້າຮອດບ່ອນຢູ່ຂອງພະຍາຍົມ
ຕ້ອງສະເຫວີຍທຸກອັນຮ້າຍແຮງດ້ວຍຜົນກຳຂອງຕົນ

[໑໑໓]	ນາຍນິຣະຍະບານທັງຫຼາຍທີ່ມີພະລະກຳລັງຢ່າງຍິ່ງ

ຈະໃຊ້ຂົນຫາງສັດທີ່ເປັນລວດເຫຼັກແດງ
ມັດບີບຄັ້ນສັດນະຣົກທີ່ຂ້າມານດາຜູ້ໃຫ້ກໍາເນີດຢູ່ສະເໝີ ໆ

[໑໑໔] ບັງຄັບໃຫ້ສັດນະຣົກນັ້ນຜູ້ຂ້າມານດາດື່ມເລືອດທີ່ມີຢູ່ໃນຕົນ
ທີ່ໄຫຼອອກຈາກຮ່າງກາຍຂອງຕົນ
ເຊິ່ງຮ້ອນຄືດັ່ງນ້ໍາທອງແດງທີ່ລະລາຍຄວ້າງ

[໑໑໕] ສັດນະຣົກນັ້ນລົງສູ່ແມ່ນ້ໍາທີ່ຄ້າຍນ້ໍາໜອງນ້ໍາເລືອດ
ມີຕົມ ຄູດອັນໜ້າກຽດຊັງ
ມີກິ່ນເໝັນເນົ່າຄືຊາກສົບ ແລ້ວຢືນຢູ່

[໑໑໖] ທີ່ແມ່ນ້ໍານັ້ນ ໝູ່ໜອນປາກເຫຼັກ
ມີຮ່າງກາຍໃຫຍ່ໂຕເຫຼືອປະມານທໍາລາຍຜິວໜັງ
ຊອນໄຊເຂົ້າໄປໃນຊີ້ນແລະເລືອດ ກັດກິນສັດນະຣົກນັ້ນ

[໑໑໗] ກໍສັດນະຣົກນັ້ນຕົກເຖິງນະຣົກແລ້ວ
ກໍຈົມລົງໄປປະມານ ໑໐໐ ຊົ່ວຄົນ
ຊາກສົບອັນເນົ່າກໍເໝັນຟຸ້ງກະຈາຍໄປໂດຍຮອບຕະຫຼອດ ໑໐໐ ໂຍດ

[໑໑໘] ຈິງຢູ່ ແມ່ນຄົນທີ່ມີຈັກຂຸ
ກໍຈະເສື່ອມຈາກຈັກຂຸທັງ ໔ ໄດ້ຍ້ອນກິ່ນນັ້ນ
ຂໍຖວາຍພຣະພອນພຣະເຈົ້າພົມມະທັດ
ຄົນຂ້າມານດາຍ່ອມໄດ້ຮັບຄວາມທຸກເຊັ່ນນັ້ນແລ

[໑໑໙] ຍິງທີ່ຮີດລູກທັງຫຼາຍຈະຕ້ອງກ້າວຢຽບນະຣົກ
ເທິງຄົມມີດແຖອັນຄົມກິບທີ່ບໍ່ໜ້າອອນຊອນ
ແລ້ວຕົກໄປສູ່ແມ່ນ້ໍາເວດຕະຣະນີເຊິ່ງຂ້າມໄປໄດ້ຍາກ

[໑໒໐] ຕົ້ນງິ້ວທັງຫຼາຍລ້ວນແຕ່ເປັນເຫຼັກ ມີໜາມຍາວ ໑໖ ອົງຄຸລີ
ຫ້ອຍຍ້ອຍປົກຄຸມແມ່ນ້ໍາເວດຕະຣະນີເຊິ່ງຂ້າມໄປໄດ້ຍາກທັງ ໔ ຝັ່ງ

[໑໒໑] ສັດນະຣົກເຫຼົ່ານັ້ນມີແປວເພີງລຸກເປັນແປວຂຶ້ນໄປເບື້ອງເທິງໜຶ່ງໂຍດ
ມີກາຍຮ້ອນຮົນດ້ວຍໄຟທີ່ເກີດເອງ
ຢືນຢູ່ຄືກອງໄຟທີ່ຕັ້ງຢູ່ໃນບ່ອນໄກ

[໑໘໘] ຍິງຜູ້ປະພຶດນອກໃຈສາມີກໍດີ
ຊາຍຜ຺ູ້ຄົບຊູ້ກັບພັນລະຍາຄົນອື່ນກໍດີ
ພວກເຂົາເຫຼົ່ານັ້ນຕ້ອງຕົກຢູ່ໃນນະຮົກອັນຮ້ອນຮົນມີໜາມແຫຼມຄົມ

[໑໘໙] ສັດນະຮົກເຫຼົ່ານັ້ນຖືກອາວຸດສຽບແທງ
ກໍກິ້ງກັບເອົາຫົວລົງເບື້ອງລ່າງ ຕົກລົງໄປເປັນຈຳນວນຫຼາຍ
ຖືກຫຼາວເຫຼັກສຽບແທງຮ່າງກາຍຈົມນອນ
ຕື່ນຢູ່ຕະຫຼອດການອັນຍາວນານ

[໑໘໔] ຕໍ່ແຕ່ນັ້ນ ເມື່ອຣາຕີສະຫວ່າງແລ້ວ
ສັດນະຮົກທັງຫຼາຍກໍຖືກນາຍນິຣະຍະບານຊັດເຂົ້າໄປສູ່ໂລຫະກຸມພີອັນໃຫຍ່
ອຸປະມາດັ່ງພູມີນ້ຳຮ້ອນອັນປຽບໄດ້ກັບໄຟ

[໑໘໕] ບຸກຄົນຜູ້ທຸສີນຖືກໂມຫະຄອບງຳ
ຍ່ອມສະເຫວີຍກຳຂອງຕົນມົກໄໝ້ຢູ່
ທີ່ຕົນກະທຳຊົ່ວໄວ້ແລ້ວໃນປາງກ່ອນຕະຫຼອດວັນຕະຫຼອດຄືນແນວນີ້

[໑໘໖] ອັນໜຶ່ງ ພັນລະຍາທີ່ເຂົາໄຖ່ມາດ້ວຍຊັບ
ດູໝິ່ນສາມີ ຫຼືແມ່ຜົວ ພໍ່ຜົວ
ຫຼືແມ່ນອ້າຍ ເອື້ອຍຂອງສາມີ

[໑໘໗] ນາຍນິຣະຍະບານທັງຫຼາຍຈະເອົາເບັດກ່ຽວປາຍລີ້ນຂອງທ່ານ
ດຶງອອກມາພ້ອມທັງສາຍເບັດ
ທ່ານເຫັນລີ້ນຂອງຕົນຍາວປະມານ ໑ ວາ ເຕັມໄປດ້ວຍໜອນ
ບໍ່ອາດຈະບອກໃຜໃຫ້ຮູ້ໄດ້
ຈຶ່ງຕາຍໄປມົກໄໝ້ຢູ່ໃນຕາປະນະນະຮົກ

[໑໘໘] ພວກຄົນຂ້າແກະ ຂ້າໝູ ຫາປາ ດັກສັດ
ພວກໂຈນ ພວກຄົນຂ້າງົວ ພວກນາຍພານ
ແລະພວກທີ່ກ່າວອ້າງໂທດວ່າເປັນຄຸນ

[໑໘໙] ພວກເຂົາຈະຖືກນາຍນິຣະຍະບານທັງຫຼາຍເຂັ່ນຂ້າດ້ວຍຫອກ
ດ້ວຍຄ້ອນເຫຼັກ ດ້ວຍດາບ ດ້ວຍລູກສອນ
ແລະຫົວຈະປັກດິ່ງລົງໄປສູ່ແມ່ນ້ຳກົດ

[໑໓໐] ສ່ວນຄົນຜູ້ຕັດສິນຄະດີບໍ່ເປັນທຳ
ຈະຖືກພວກນາຍນິຣະຍະບານທຸບຕີດ້ວຍຄ້ອນເຫຼັກທຸກຄ່ຳທຸກເຊົ້າ
ຕໍ່ແຕ່ນັ້ນຈະຕ້ອງກິນອາຈຽນທີ່ສັດນະຮົກເຫຼົ່າອື່ນຮາກອອກ
ທີ່ມີອັດຕະພາບລຳບາກທຸກເມື່ອ

[໑໓໑] ຝູງກາ ຝູງໝາຈອກ ຝູງແຮ້ງ
ແລະຝູງກາປ່າປາກເຫຼັກ
ກໍພາກັນຫຸ້ມຈິກກັດກິນສັດນະຮົກ
ຜູ້ກະທຳກຳຫຍາບຊ້າເຊິ່ງກຳລັງດີ້ນຮົນຢູ່

[໑໓໒] ເຫຼົ່າຊົນຜູ້ເປັນອະສັດຕະບຸຣຸດໃຊ້ທຸລິສາບປົກປິດຮ່າງກາຍ
ຂ້າເນື້ອດ້ວຍເນື້ອຕໍ່ຫຼືຂ້ານົກດ້ວຍນົກຕໍ່
ຊົນເຫຼົ່ານັ້ນຕ້ອງໄປຕົກອຸດສະທະນະຮົກ

[໑໓໓] ສ່ວນສັດຕະບຸຣຸດທັງຫຼາຍຍ່ອມໄປສູ່ເທວະໂລກເບື້ອງເທິງ
ຍ້ອນກຳທີ່ຕົນປະພຶດດີແລ້ວໃນໂລກນີ້
ຂໍມະຫາບໍພິດໂຜດທອດພຣະເນດ
ຜົນກຳທີ່ບຸກຄົນປະພຶດດີແລ້ວເທີ້ນ
ເທບເຈົ້າທັງຫຼາຍພ້ອມທັງພຣະອິນແລະພຣະພົມກໍມີຢູ່

[໑໓໔] ຂ້າແດ່ ມະຫາຣາດ ຍ້ອນເຫດນັ້ນ
ອາດຕະມາພາບຂໍຖວາຍພຣະພອນ
ຂໍພຣະອົງຜູ້ເປັນເຈົ້າແຫ່ງແຄວ້ນ
ຈົ່ງຊົງປະພຶດທຳ
ໂດຍປະການທີ່ບຸກຄົນປະພຶດທຳດີແລ້ວ
ບໍ່ເພິ່ງເດືອດຮ້ອນໃນພາຍຫຼັງເທີ້ນ

**ສັງກິດຈະຊາດົກທີ ໘ ຈົບ**

## ລວມຊາດົກທີ່ມີໃນນິບາດນີ້

໑. ໂສນະກະຊາດົກ ໘. ສັງກິດຈະຊາດົກ

**ສັດຕິນິບາດ ຈົບ**

# ๘๐. ສັດຕະຕິນິບາດ

## ໑. ກຸສະຊາດົກ (๕๓๑)

## ວ່າດ້ວຍພຣະເຈົ້າກຸສະຫຼົງຮູບໂສມນາງປະພາວະດີ

(ພຣະເຈົ້າກຸສະໂພທິສັດຂາບທູນພຣະມານດາວ່າ)

[໑] ສະເດັດແມ່ ນີ້ແຄວ້ນຂອງສະເດັດແມ່
ມີຊັບສົມບັດ ຍານພາຫະນະ ເຄື່ອງປະດັບ
ສົມບູນດ້ວຍສິ່ງທີ່ໜ້າປາຖະໜາທັງປວງ
ຂໍສະເດັດແມ່ຊົງປົກຄອງຣາດຊະສົມບັດຂອງສະເດັດແມ່ນີ້ເທີ້ນ
ຂ້ານ້ອຍຈະໄປສູ່ນະຄອນທີ່ພຣະນາງປະພາວະດີ
ຜູ້ເປັນທີ່ຮັກປະທັບຢູ່

(ພຣະນາງປະພາວະດີຂາບທູນວ່າ)

[໒] ພຣະອົງມີພຣະຫະໄທບໍ່ທ່ຽງທຳ
ຊົງຫາບຄອນຫາບໃຫຍ່ ຈັກຊົງອິດເມື່ອຍ
ທັງກາງເວັນ ກາງຄືນ ແລະດຶກດື່ນທ່ຽງຄືນ
ຂ້າແດ່ ພຣະເຈົ້າກຸສະ ຂໍເຊີນພຣະອົງ
ຟ້າວສະເດັດກັບນະຄອນກຸສາວະດີໂດຍທັນທີເທີ້ນ
ຂ້ານ້ອຍບໍ່ປະສົງຈະໃຫ້ພຣະອົງ
ຜູ້ຊົງມີຜິວພັນຊາມປະທັບຢູ່ບ່ອນນີ້

(ພຣະເຈົ້າກຸສະໂພທິສັດຕັດວ່າ)

[໓] ອ້າຍຈະບໍ່ຈາກບ່ອນນີ້ໄປນະຄອນກຸສາວະດີ
ນ້ອງປະພາວະດີ ອ້າຍລຸ້ມຫຼົງໃນຄວາມງາມຂອງນາງ
ຈຶ່ງຍິນດີຢູ່ໃນທີ່ປະທັບອັນໜ້າອອນຊອນຂອງພຣະເຈົ້າມັດທະ
ອ້າຍຍິນດີພໍໃຈທີ່ຈະເຫັນນາງ ຈຶ່ງລະຖິ້ມແຄວ້ນມາ

[໔] ນ້ອງປະພາວະດີ ອ້າຍລຸ້ມຫຼົງໃນຜິວພັນຂອງນາງ
ຈຶ່ງຂຶ້ນຊານທ່ອງທ່ຽວໄປທົ່ວພາກພື້ນປະຖະພີ

ບໍ່ຮູ້ຈັກທິສາວ່າ ເຮົາມາຈາກໄສ
ມົວແຕ່ມົວເມົາຫຼົງໄຫຼໃນໂຕນາງ
ຜູ້ມີດວງຕາເໝືອນຕາລູກນ້ອຍເນື້ອຊາຍ

[໕] ນ້ອງນາງຜູ້ມີສະໂພກອັນຜຶ່ງຜາຍ
ຊົງຜ້າຂິບຄຳ
ເຄື່ອງປະດັບຄຳ
ອ້າຍບໍ່ມີຄວາມຕ້ອງການຣາດຊະສົມບັດ
ຍ້ອນປາຖະໜາໂຕນາງ

(ພຣະນາງປະພາວະດີຂາບທູນວ່າ)

[໖] ຂ້າແດ່ ພຣະຣາຊາຜູ້ຈະເລີນ
ຜູ້ໃດປາຖະໜາບຸກຄົນທີ່ເຂົາບໍ່ປາຖະໜາ
ຜູ້ນັ້ນຍ່ອມບໍ່ມີຄວາມຈະເລີນ
ພຣະອົງຕ້ອງການບຸກຄົນທີ່ເຂົາບໍ່ຕ້ອງການ
ປາຖະໜາຮັກແພງບຸກຄົນທີ່ເຂົາບໍ່ຮັກແພງ

(ພຣະເຈົ້າກຸສະໂພທິສັດຕັດວ່າ)

[໗] ຄົນໃດໄດ້ຄົນທີ່ບໍ່ຕ້ອງການຕົນກໍຕາມ
ທີ່ຕ້ອງການຕົນກໍຕາມມາເປັນຄົນຮັກ
ເຮົາສັນເສີນການໄດ້ໃນຄວາມຮັກນີ້ຂອງຄົນນັ້ນ
ການບໍ່ໄດ້ໃນຄວາມຮັກນັ້ນເປັນຄວາມໂຊກຮ້າຍ

(ພຣະນາງປະພາວະດີຂາບທູນວ່າ)

[໘] ພຣະອົງຊົງປາຖະໜາຂ້ານ້ອຍຜູ້ບໍ່ປາຖະໜາພຣະອົງ
ປຽບເໝືອນພຣະອົງຊົງໃຊ້ໄມ້ກັນນິກາຂຸດເພັດ
(ຫຼື) ຊົງໃຊ້ຕາໜ່າງດັກລົມ

(ພຣະເຈົ້າກຸສະໂພທິສັດຕັດວ່າ)

[໙] ຫີນຄົງຖືກຝັງໄວ້ໃນພຣະຫະໄທອັນມີລັກສະນະ
ອ່ອນລະມຸນລະໄມຂອງພຣະນາງເປັນແນ່

ຍ້ອນເຮົາມາຈາກຊົນນະບົດບ້ານນອກ
ຍັງບໍ່ໄດ້ປະສົບຄວາມແຊ່ມຊື່ນຈາກພຣະນາງເລີຍ

[໑໐] ເມື່ອໃດ ພຣະຣາດຊະບຸດຕີໜ້າຫຍຸ້ງ
ທອດພຣະເນດເຮົາ
ເມື່ອນັ້ນເຮົາກໍຍັງຄົງເປັນຄົນຄົວພາຍໃນເມືອງຂອງພຣະເຈົ້າມັດທະ

[໑໑] ເມື່ອໃດ ພຣະຣາດຊະບຸດຕີຊົງຍິ້ມແຍ້ມທອດພຣະເນດເຮົາ
ເມື່ອນັ້ນ ເຮົາບໍ່ແມ່ນຄົນຄົວ
ເມື່ອນັ້ນ ເຮົາເປັນພຣະເຈົ້າກຸສະ

(ພຣະນາງປະພາວະດີຂາບທູນວ່າ)

[໑໒] ກໍຖ້າວ່າ ຄຳທຳນາຍຂອງໂຫນທັງຫຼາຍຈັກເປັນຄວາມຈິງວ່າ
ພຣະອົງບໍ່ແມ່ນພຣະສະວາມີຂອງຂ້ານ້ອຍແນ່ນອນ
ຂໍຊົນທັງຫຼາຍຈົ່ງສັບຂ້ານ້ອຍໃຫ້ເປັນ ໆ ທ່ອນເທີ້ນ

(ພຣະເຈົ້າກຸສະໂພທິສັດຕັດວ່າ)

[໑໓] ກໍຖ້າວ່າ ຄຳທຳນາຍຂອງພວກໂຫນອື່ນ
ຫຼືຂອງເຮົາຈັກເປັນຄວາມຈິງແລ້ວ
ຄົນອື່ນນອກຈາກພຣະເຈົ້າກຸສະຜູ້ມີພຣະສຸຣະສຽງດັ່ງຣາດຊະສີ
ບໍ່ແມ່ນພຣະສະວາມີຂອງພຣະນາງແນ່ນອນ

(ພຣະເຈົ້າກຸສະໂພທິສັດຊົງຢອກລໍ້ຍິ່ງຄ່ອມ ພຣະອ້າຍລ້ຽງພຣະນາງປະພາວະດີວ່າ)

[໑໔] ແມ່ຄ່ອມ ເຮົາກັບໄປເຖິງນະຄອນກຸສາວະດີແລ້ວ
ຈັກໃຫ້ຊ່າງຄຳເຮັດສ້ອຍຄໍຄຳແກ່ເຈົ້າ
ຖ້າພຣະນາງປະພາວະດີຜູ້ຊົງມີຂາອ່ອນງົດງາມດັ່ງງາຊ້າງ
ຈະເພິ່ງຫຼຽວແນມເບິ່ງເຮົາ

[໑໕] ແມ່ຄ່ອມ ເຮົາກັບໄປເຖິງນະຄອນກຸສາວະດີແລ້ວ
ຈັກໃຫ້ຊ່າງຄຳເຮັດສ້ອຍຄໍຄຳແກ່ເຈົ້າ
ຖ້າພຣະນາງປະພາວະດີຜູ້ຊົງມີຂາອ່ອນງົດງາມດັ່ງງາຊ້າງ
ຈະເພິ່ງເຈລະຈາກັບເຮົາ

[໑໖] ແມ່ຄ່ອມ ເຮົາກັບໄປເຖິງນະຄອນກຸສາວະດີແລ້ວ
ຈັກໃຫ້ຊ່າງຄຳເຮັດສ້ອຍຄໍຄຳແກ່ເຈົ້າ
ຖ້າພຣະນາງປະພາວະດີຜູ້ຊົງມີຂາອ່ອນງົດງາມດັ່ງງາຊ້າງ
ຈະເພິ່ງຊົງຍິ້ມແຍ້ມໃຫ້ເຮົາ

[໑໗] ແມ່ຄ່ອມ ເຮົາກັບໄປເຖິງນະຄອນກຸສາວະດີແລ້ວ
ຈັກໃຫ້ຊ່າງຄຳເຮັດສ້ອຍຄໍຄຳແກ່ເຈົ້າ
ຖ້າພຣະນາງປະພາວະດີຜູ້ຊົງມີຂາອ່ອນງົດງາມດັ່ງງາຊ້າງ
ຈະເພິ່ງຊົງຫົວກັບເຮົາ

[໑໘] ແມ່ຄ່ອມ ເຮົາກັບໄປເຖິງນະຄອນກຸສາວະດີແລ້ວ
ຈັກໃຫ້ຊ່າງຄຳເຮັດສ້ອຍຄໍຄຳແກ່ເຈົ້າ
ຖ້າພຣະນາງປະພາວະດີຜູ້ຊົງມີຂາອ່ອນງົດງາມດັ່ງງາຊ້າງ
ຈະເພິ່ງຊົງຈັບຕ້ອງເຮົາດ້ວຍພຣະຫັດທັງ ໒

(ນາງຄ່ອມໄປຂາບທູນພຣະນາງປະພາວະດີວ່າ)

[໑໙] ກໍພຣະຣາດຊະບຸດຕີພຣະອົງນີ້ຄົງຈະບໍ່ປະສົບ
ແມ່ນຄວາມສຸກສະບາຍພຣະຫະໄທໃນພຣະເຈົ້າກຸສະ
ຜູ້ເປັນຄົນຄົວ ຄົນຮັບໃຊ້ ຄົນລ້ຽງດູ
ເຊິ່ງບໍ່ຊົງປະສົງຄ່າຈ້າງຢ່າງແນ່ແທ້

(ພຣະນາງປະພາວະດີຕັດວ່າ)

[໒໐] ກໍນາງຄ່ອມຄົນນີ້ຄົງຍັງບໍ່ໄດ້ຖືກມີດຄົມຕັດລີ້ນແນ່ນອນ
ຈຶ່ງຍັງກ່າວຊົ່ວຊ້າແນວນີ້ຢູ່

(ນາງຄ່ອມປະກາດຄວາມດີຂອງພຣະໂພທິສັດວ່າ)

[໒໑] ພຣະແມ່ເຈົ້າປະພາວະດີ ພຣະນາງຢ່າຊົງປຽບທຽບ
ພຣະເຈົ້າກຸສະນັ້ນກັບພຣະຮູບອັນສູງຣະທົງເລີຍ

ແມ່ນາງຈົ່ງຊົງເຮັດ(ພຣະຫະໄທ)ວ່າພຣະອົງຊົງມີພຣະຍົດໃຫຍ່
ແລ້ວທຳຄວາມຮັກໃນຄວາມງາມເທີ້ນ

[໒໒] ພຣະແມ່ເຈົ້າປະພາວະດີ ພຣະນາງຢ່າຊົງປຽບທຽບ

ພຣະເຈົ້າກຸສະນັ້ນກັບພຣະຮູບອັນສູງຣະທົ່ງເລີຍ

ແມ່ນາງຈິ່ງຊິງເຮັດ(ພຣະຫະໄທ)ວ່າພຣະອົງຊິງມີຊັບຫຼວງຫຼາຍ
ແລ້ວທຳຄວາມຮັກໃນຄວາມງາມເທີ້ນ

[໔໓] ພຣະແມ່ເຈົ້າປະພາວະດີ ພຣະນາງຢ່າຊິງປຽບທຽບ
ພຣະເຈົ້າກຸສະນັ້ນກັບພຣະຮູບອັນສູງຣະທົ່ງເລີຍ

ແມ່ນາງຈິ່ງຊິງເຮັດ(ພຣະຫະໄທ)ວ່າພຣະອົງຊິງມີພຣະກຳລັງຫຼາຍ
ແລ້ວກະທຳຄວາມຮັກໃນຄວາມງາມເທີ້ນ

[໔໔] ພຣະແມ່ເຈົ້າປະພາວະດີ ພຣະນາງຢ່າຊິງປຽບທຽບ
ພຣະເຈົ້າກຸສະນັ້ນກັບພຣະຮູບອັນສູງຣະທົ່ງເລີຍ

ແມ່ນາງຈິ່ງຊິງເຮັດ(ພຣະຫະໄທ)ວ່າ
ພຣະອົງຊິງມີພຣະຣາດຊະອານາຈັກກວ້າງໃຫຍ່
ແລ້ວທຳຄວາມຮັກໃນຄວາມງາມເທີ້ນ

[໔໕] ພຣະແມ່ເຈົ້າປະພາວະດີ ພຣະນາງຢ່າຊິງປຽບທຽບ
ພຣະເຈົ້າກຸສະນັ້ນກັບພຣະຮູບອັນສູງຣະທົ່ງເລີຍ

ແມ່ນາງຈິ່ງຊິງເຮັດ(ພຣະຫະໄທ)ວ່າພຣະອົງຊິງເປັນມະຫາຣາດ
ແລ້ວທຳຄວາມຮັກໃນຄວາມງາມເທີ້ນ

[໔໖] ພຣະແມ່ເຈົ້າປະພາວະດີ ພຣະນາງຢ່າຊິງປຽບທຽບ
ພຣະເຈົ້າກຸສະນັ້ນກັບພຣະຮູບອັນສູງຣະທົ່ງເລີຍ

ແມ່ນາງຈິ່ງຊິງເຮັດ(ພຣະຫະໄທ)ວ່າພຣະອົງຊິງມີພຣະສຸຣະສຽງດັ່ງຣາດຊະສີ
ແລ້ວທຳຄວາມຮັກໃນຄວາມງາມເທີ້ນ

[໔໗] ພຣະແມ່ເຈົ້າປະພາວະດີ ພຣະນາງຢ່າຊິງປຽບທຽບ
ພຣະເຈົ້າກຸສະນັ້ນກັບພຣະຮູບອັນສູງຣະທົ່ງເລີຍ

ແມ່ນາງຈິ່ງຊິງເຮັດ(ພຣະຫະໄທ)ວ່າ
ພຣະອົງຊິງມີພຣະສຸຣະສຽງມ່ວນ
ແລ້ວທຳຄວາມຮັກໃນຄວາມງາມເທີ້ນ

[໔໗] ພຣະແມ່ເຈົ້າປະພາວະດີ ພຣະນາງຢ່າຊົງປຽບທຽບ
ພຣະເຈົ້າກຸສະນັ້ນກັບພຣະຮູບອັນສູງຮະຫົງເລີຍ

ແມ່ນາງຈົ່ງຊົງເຮັດ(ພຣະຫະໄທ)ວ່າ
ພຣະອົງຊົງມີພຣະສຸຣະສຽງຍືດຍ້ອຍ
ແລ້ວທຳຄວາມຮັກໃນຄວາມງາມເທີ້ນ

[໔໙] ພຣະແມ່ເຈົ້າປະພາວະດີ ພຣະນາງຢ່າຊົງປຽບທຽບ
ພຣະເຈົ້າກຸສະນັ້ນກັບພຣະຮູບອັນສູງຮະຫົງເລີຍ

ແມ່ນາງຈົ່ງຊົງເຮັດ(ພຣະຫະໄທ)ວ່າ
ພຣະອົງຊົງມີພຣະສຸຣະສຽງຫວານຈັບໃຈ
ແລ້ວທຳຄວາມຮັກໃນຄວາມງາມເທີ້ນ

[໕໐] ພຣະແມ່ເຈົ້າປະພາວະດີ ພຣະນາງຢ່າຊົງປຽບທຽບ
ພຣະເຈົ້າກຸສະນັ້ນກັບພຣະຮູບອັນສູງຮະຫົງເລີຍ

ແມ່ນາງຈົ່ງຊົງເຮັດ(ພຣະຫະໄທ)ວ່າ
ພຣະອົງຊົງມີພຣະສຸຣະສຽງມ່ວນອ່ອນຫວານ
ແລ້ວທຳຄວາມຮັກໃນຄວາມງາມເທີ້ນ

[໕໑] ພຣະແມ່ເຈົ້າປະພາວະດີ ພຣະນາງຢ່າຊົງປຽບທຽບ
ພຣະເຈົ້າກຸສະນັ້ນກັບພຣະຮູບອັນສູງຮະຫົງເລີຍ

ແມ່ນາງຈົ່ງຊົງເຮັດ(ພຣະຫະໄທ)ວ່າ
ພຣະອົງຊົງມີສິລະປະນັບເປັນຮ້ອຍ ໆ ຢ່າງ
ແລ້ວທຳຄວາມຮັກໃນຄວາມງາມເທີ້ນ

[໕໔] ພຣະແມ່ເຈົ້າປະພາວະດີ ພຣະນາງຢ່າຊົງປຽບທຽບ
ພຣະເຈົ້າກຸສະນັ້ນກັບພຣະຮູບອັນສູງຮະຫົງເລີຍ

ແມ່ນາງຈົ່ງຊົງເຮັດ(ພຣະຫະໄທ)ວ່າພຣະອົງຊົງເປັນກະສັດ
ແລ້ວທຳຄວາມຮັກໃນຄວາມງາມເທີ້ນ

[໕໕] ພຣະແມ່ເຈົ້າປະພາວະດີ ພຣະນາງຢ່າຊົງປຽບທຽບ
ພຣະເຈົ້າກຸສະນັ້ນກັບພຣະຮູບອັນສູງຮະຫົງເລີຍ

ແມ່ນາງຈິ່ງຊົງເຮັດ(ພຣະທະໄທ)ວ່າພຣະອົງຊົງພຣະນາມວ່າພຣະເຈົ້າກຸສະ
ແລ້ວທຳຄວາມຮັກໃນຄວາມງາມເທີ້ນ

(ເຫຼົ່າອຳມາດຂາບທູນພຣະເຈົ້າມັດທະວ່າ)

[໓໔] ພຣະຣາຊາຜູ້ປະເສີດເຫຼົ່ານີ້ຊົງກະດ້າງຍິ່ງ
ທັງໝົດໃສ່ເກາະປະທັບຢືນຕະຫງ່ານຢູ່
ກ່ອນທີ່ພຣະຣາຊາເຫຼົ່ານັ້ນຈະຊົງທຳລາຍກຳແພງ
ຂໍພຣະອົງຈົ່ງຊົງສົ່ງພຣະຣາດຊະສານໄປວ່າ
ຂໍພຣະຣາຊາທັງຫຼາຍຈົ່ງນຳເອົາພຣະທິດາປະພາວະດີໄປເທີ້ນ

(ພຣະເຈົ້າມັດທະຕັດວ່າ)

[໓໕] ເຮົາຈັກສັບລູກສາວປະພາວະດີນັ້ນໃຫ້ເປັນ ໗ ທ່ອນແລ້ວ
ຖວາຍໃຫ້ແກ່ພຣະຣາຊາທັງຫຼາຍທີ່ສະເດັດມາເພື່ອຂ້າເຮົາໃນບ່ອນນີ້

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໓໖] ພຣະຣາດຊະບຸດຕີຜູ້ມີຜິວພັນຄືຄຳ ຊົງຜ້າໄໝສີຂິບຄຳ
ພຣະເນດທັງ ໒ ນອງໄປດ້ວຍພຣະອັດສຸຊົນ
ມີໝູ່ນາງທາສີຫ້ອມລ້ອມໄດ້ສະເດັດລຸກຂຶ້ນແລ້ວ

(ພຣະນາງປະພາວະດີຊົງຮ່ຳໄຮວ່າ)

[໓໗] ດວງໜ້າຂ້ານ້ອຍທີ່ລູບທາດ້ວຍແປ້ງ
ແຍງເບິ່ງທີ່ແວ່ນດ້າມງາອັນງົດງາມ
ມີດວງຕາຄົມຄາຍຜຸດຜ່ອງເປັນຍອງໃຍບໍ່ມີໄຝຝ້ານັ້ນ
ຈັກຖືກພວກກະສັດໂຍນຖິ້ມໄວ້ໃນປ່າເປັນແນ່

[໓໘] ເສັ້ນຜົມທັງຫຼາຍຂອງຂ້ານ້ອຍທີ່ດຳປອດ
ມີປາຍງອນ ອ່ອນລະມຸນລະໄມ
ທີ່ລູບທາດ້ວຍນ້ຳມັນແກ່ນຈັນເຫຼົ່ານັ້ນ
ນົກແຮ້ງທັງຫຼາຍຈະພາກັນໃຊ້ຕີນທັງ ໒ ຕະກຸຍຄຸ້ຍເຂ່ຍ
ໃຫ້ຫຍຸ້ງໃນທ່າມກາງປ່າຊ້າເປັນແນ່

[໓໙] ແຂນທັງ ໒ ຂອງຂ້ານ້ອຍອ່ອນນຸ້ມ ມີເລັບມືແດງ

ມີຂົນລະອຽດອ່ອນເຊິ່ງລູບທາດ້ວຍຈຸນແກ່ນຈັນເຫຼົ່ານັ້ນ
ຈະຖືກພວກກະສັດຕັດຖິ້ມໄວ້ໃນປ່າ
ນົກກາກໍຈະຄາບເອົາໄປຕາມຄວາມຕ້ອງການເປັນແນ່

[໔໐] ຖັນທັງ ໘ ຂອງຂ້ານ້ອຍຍັງບໍ່ຢ່ອນຍານ
ປຽບຄືໄດ້ກັບໝາກຕານ
ລູບທາດ້ວຍກະແຈະຈັນແດງຈາກແຄວ້ນກາສີເຫຼົ່ານັ້ນ
ໝາຈອກເຫັນເຂົ້າແລ້ວຈັກຍື້ດຶງຖັນທັງ ໘ ຂອງຂ້ານ້ອຍ
ຄືລູກອ່ອນອັນເກີດແຕ່ຕົນຍື້ດຶງຖັນທັງ ໘ ຂອງມານດາເປັນແນ່

[໔໑] ສະໂພກອັນກົມກ້ຽງເຜິ່ງຜາຍ ທີ່ມັດຫ້ອຍປະດັບ
ດ້ວຍສາຍສ້ອຍຮັດແອວຄຳຂອງຂ້ານ້ອຍເຊິ່ງຖືກຕັດ
ທີ່ພວກກະສັດໂຍນຖິ້ມໄວ້ໃນປ່ານັ້ນ
ຝູງໝາຈອກຈະຍາດແຍ່ງຢ່າງແນ່ນອນ

[໔໘] ຝູງໝາປ່າ ຝູງກາ ຝູງໝາຈອກ
ແລະສັດທີ່ມີແຂ້ວເຫຼົ່າອື່ນໃດທີ່ມີຢູ່
ພວກມັນໄດ້ກັດກິນເຈົ້າຍິງປະພາວະດີເປັນພັກສາຫານແລ້ວ
ຄົງຈັກບໍ່ແກ່ຊະຣາເປັນແນ່

[໔໓] ຂ້າແດ່ທູນຂະໜ່ອມແມ່
ຫາກກະສັດທັງຫຼາຍຜູ້ສະເດັດໄປສູ່ຫົນທາງໄກ
ໄດ້ຊິງນຳເອົາຕ່ອນຊີ້ນຂອງຂ້ານ້ອຍໄປ
ຂໍສະເດັດແມ່ໂຜດຊິງຂໍກະດູກໄວ້ແລ້ວເຜົາມັນຖິ້ມສາໃນລະຫວ່າງທາງ

[໔໔] ທູນຂະໜ່ອມແມ່ ຂໍສະເດັດແມ່ໂຜດໃຫ້ສ້າງເປັນສວນ
ແລ້ວໃຫ້ປຸກຕົ້ນກັນນິກາໄວ້ໃນເຂດນີ້
ເມື່ອໃດ ຕົ້ນກັນນິກາເຫຼົ່ານັ້ນມີດອກບານເດຍລະດາດ
ໃນເວລາຫິມະຕົກແຫ່ງລະດູເຫມັນ
ເມື່ອນັ້ນ ສະເດັດແມ່ເພິ່ງລຳລຶກເຖິງຂ້ານ້ອຍວ່າ
ລູກປະພາວະດີຂອງແມ່ມີຜິວພັນແນວນີ້

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໔໘]　　ນາງກະສັດຜູ້ມີຜິວພັນດັ່ງເທບອັບປະສອນ
ເຊິ່ງເປັນພຣະມານດາຂອງເຈົ້າຍິງປະພາວະດີນັ້ນ
ທອດພຣະເນດເຫັນດາບແລະຊຽງ
ພາຍໃນບຸຣີຂອງພຣະເຈົ້າມັດທະ ຈຶ່ງສະເດັດລຸກຂຶ້ນ

(ພຣະມານດາຂອງພຣະນາງປະພາວະດີ ຊົງຮ່ຳໄຮວ່າ)

[໔໙]　　ຂ້າແດ່ສະເດັດອ້າຍມັດທະ ພຣະອົງຈັກຊົງປະທານ
ພຣະທິດາແອວບາງຮ່າງນ້ອຍເຊິ່ງເປັນທີ່ຮູ້ຈັກກັນເປັນຢ່າງດີ
ດ້ວຍພຣະແສງດາບນີ້ແລ້ວປະທານໃຫ້ແກ່ກະສັດທັງຫຼາຍແທ້ບໍ

[໔໗]　　ລູກສາວ ລູກບໍ່ເຮັດຕາມຄຳຂອງແມ່ຜູ້ຫວັງປະໂຫຍດ
ລູກນັ້ນຈະມີເລືອດໂຊມກາຍໄປສູ່ສຳນັກພະຍາຍົມໃນມື້ນີ້

[໔໘]　　ຄົນໃດແລບໍ່ເຮັດຕາມຄຳຂອງຜູ້ຫວັງເກື້ອກູນ
ແລະບົ່ງຊີ້ປະໂຫຍດທັງຫຼາຍ
ຄົນນັ້ນຍ່ອມຕ້ອງລຳບາກແນວນີ້
ແລະຕ້ອງປະສົບຄວາມຊົ່ວຮ້າຍຍິ່ງກວ່າ

[໔໙]　　ກໍຖ້າມື້ນີ້ລູກສາວມີພຣະກຸມານຊົງໂສມງົດງາມ
ເໝືອນສາບໄວ້ດ້ວຍຄຳ ເປັນກະສັດຊົງກຳເນີດກັບພຣະເຈົ້າກຸສະ
ສວມໃສ່ສ້ອຍສັງວານຄຳປະດັບແກ້ວມະນີ
ທີ່ໝູ່ພຣະຍາດຊົງບູຊາແລ້ວ
ກໍຈະບໍ່ຕ້ອງໄປສູ່ນິເວດພະຍາຍົມ

[໕໐]　　ກອງບັນລືສຽງສະໜັ່ນ
ຊ້າງກໍຮ້ອງສຽງດັງກຶກກ້ອງ
ໃນຕະກູນແຫ່ງກະສັດທັງຫຼາຍ
ລູກສາວເອີຍ ອັນໃດນໍຈະສຸກກວ່ານັ້ນ

[໕໑]　　ມ້າເສີກຄະນອງຮ້ອງຄຳຣາມຢູ່ທີ່ພຣະທະວານ
ກຸມານຮ້ອງລຳທຳເພງຢູ່
ໃນຕະກູນແຫ່ງກະສັດທັງຫຼາຍ
ລູກສາວເອີຍ ອັນໃດນໍຈະສຸກກວ່ານັ້ນ

[໕໘] ຕະກູນຂອງກະສັດທັງຫຼາຍ
ມີສຽງຮ້ອງດັ່ງກຶກກ້ອງຂອງເຫຼົ່ານົກຍູງແລະນົກກະຣຽນ
ແລະມີສຽງຮ້ອງມ່ວນອອນຊອນແຫ່ງເຫຼົ່ານົກກາເວົາ
ລູກສາວເອີຍ ອັນໃດນໍຈະສຸກກວ່ານັ້ນ

(ພຣະມານດາຂອງພຣະນາງປະພາວະດີ ຕັດກັບພຣະນາງປະພາວະດີແລ້ວຕັດວ່າ)

[໕໙] ພຣະເຈົ້າກຸສະພຣະອົງໃດຊົງມີພຣະປີຊາອັນໂອລານ
ຍ່ຳຍີສັດຕູປາບປາມແຄວ້ນຂອງພຣະຣາຊາພຣະອົງອື່ນ
ຈະເພິ່ງປົດເປື້ອງພວກເຮົາຈາກຄວາມທຸກໄດ້
ພຣະເຈົ້າກຸສະພຣະອົງນັ້ນປະທັບຢູ່ບ່ອນໃດນໍ

(ພຣະນາງປະພາວະດີຂາບທູນວ່າ)

[໖໐] ພຣະເຈົ້າກຸສະພຣະອົງໃດຊົງມີພຣະປີຊາອັນໂອລານ
ຍ່ຳຍີສັດຕູ ປາບປາມແຄວ້ນຂອງພຣະຣາຊາພຣະອົງອື່ນ
ຈັກຊົງກຳຈັດກະສັດເຫຼົ່ານັ້ນທັງໝົດໄດ້
ພຣະເຈົ້າກຸສະພຣະອົງນັ້ນປະທັບຢູ່ໃນບ່ອນນີ້ ຂ້ານ້ອຍ

(ພຣະມານດາຕັດວ່າ)

[໖໑] ເຈົ້າເປັນບ້າບໍ ຈຶ່ງເວົ້າອອກມາຄືເດັກອ່ອນໄຮ້ດຽງສາເວົ້າ
ຖ້າພຣະເຈົ້າກຸສະເພິ່ງສະເດັດມາ ເປັນຫຍັງພວກເຮົາຈະບໍ່ຮູ້ຈັກພຣະອົງນໍ

(ພຣະນາງປະພາວະດີຂາບທູນວ່າ)

[໖໒] ພຣະເຈົ້າກຸສະຄືຄົນຄົວນັ້ນ ຊົງຜ້າເໜັບຕຽວຢ່າງໝັ້ນຄົງ
ກຳລັງກົ້ມລ້າງໝໍ້ຢູ່ລະຫວ່າງຕຳໜັກເຈົ້າຍິງທັງຫຼາຍ

(ພຣະມານດາຕັດກ່າວໂທດວ່າ)

[໖໓] ເຈົ້າເປັນຊ່າງຖາກ ເປັນຍິງຈັນທານ
ຫຼືເປັນຄົນທຳລາຍວົງຕະກູນ
ເຈົ້າເກີດໃນວົງຕະກູນຂອງພຣະເຈົ້າມັດທະ
ເປັນຫຍັງຈຶ່ງເຮັດພຣະສະວາມີໃຫ້ເປັນຂ້າທາດ

(ພຣະນາງປະພາວະດີຂາບທູນວ່າ)

[໕໗] ຂ້ານ້ອຍບໍ່ແມ່ນຊ່າງຖາກ ບໍ່ແມ່ນຍິງຈັນທານ
ແລະບໍ່ແມ່ນຄົນທຳລາຍວົງຕະກູນ ຂໍທູນຂະໝ່ອມແມ່ຊົງພຣະຈະເລີນ
ພຣະເຈົ້າກຸສະນັ້ນຄືພຣະຣາດຊະບຸດຂອງພຣະເຈົ້າໂອກກາກະຣາດ
ສະເດັດແມ່ທີ່ນັ້ນຊົງເຂົ້າພຣະທະໄທວ່າເປັນຂ້າທາດ

(ພຣະນາງປະພາວະດີຊົງສັນເສີນພຣະກຽດຕິຍົດຂອງພຣະເຈົ້າກຸສະໂພທິສັດວ່າ)

[໕໘] ພຣະຣາຊາພຣະອົງໃດຊົງເຊື້ອເຊີນພາມ ໒໐,໐໐໐ ຄົນ
ໃຫ້ບໍຣິໂພກທຸກເມື່ອ ຂໍທູນຂະໝ່ອມແມ່ຊົງພຣະຈະເລີນ
ພຣະຣາຊາພຣະອົງນັ້ນຄືພຣະໂອຣົດຂອງພຣະເຈົ້າໂອກກາກະຣາດ
ສະເດັດແມ່ທີ່ນັ້ນຊົງເຂົ້າພຣະທະໄທວ່າເປັນຂ້າທາດ

[໖໐] ເຈົ້າພະນັກງານກະກຽມຊ້າງ ໒໐,໐໐໐ ເຊືອກໄວ້ທຸກເມື່ອ
ເພື່ອພຣະຣາຊາພຣະອົງໃດ ຂໍທູນຂະໝ່ອມແມ່ຊົງພຣະຈະເລີນ
ພຣະຣາຊາພຣະອົງນັ້ນຄືພຣະໂອຣົດຂອງພຣະເຈົ້າໂອກກາກະຣາດ
ສະເດັດແມ່ທີ່ນັ້ນຊົງເຂົ້າພຣະທະໄທວ່າເປັນຂ້າທາດ

[໖໑] ເຈົ້າພະນັກງານກະກຽມມ້າ ໒໐,໐໐໐ ໂຕໄວ້ທຸກເມື່ອ
ເພື່ອພຣະຣາຊາພຣະອົງໃດ ຂໍທູນຂະໝ່ອມແມ່ຊົງພຣະຈະເລີນ
ພຣະຣາຊາພຣະອົງນັ້ນຄືພຣະໂອຣົດຂອງພຣະເຈົ້າໂອກກາກະຣາດ
ສະເດັດແມ່ທີ່ນັ້ນຊົງເຂົ້າພຣະທະໄທວ່າເປັນຂ້າທາດ

[໖໒] ເຈົ້າພະນັກງານກະກຽມຣາດຊະລົດ ໒໐,໐໐໐ ຄັນໄວ້ທຸກເມື່ອ
ເພື່ອພຣະຣາຊາພຣະອົງໃດ ຂໍທູນຂະໝ່ອມແມ່ຊົງພຣະຈະເລີນ
ພຣະຣາຊາພຣະອົງນັ້ນຄືພຣະໂອຣົດຂອງພຣະເຈົ້າໂອກກາກະຣາດ
ສະເດັດແມ່ທີ່ນັ້ນຊົງເຂົ້າພຣະທະໄທວ່າເປັນຂ້າທາດ

[໖໖] ເຈົ້າພະນັກງານຣີດນ້ຳນົມແມ່ງົວ ໒໐,໐໐໐ ໂຕໄວ້ທຸກເມື່ອ
ເພື່ອພຣະຣາຊາພຣະອົງໃດ ຂໍທູນຂະໝ່ອມແມ່ຊົງພຣະຈະເລີນ
ພຣະຣາຊາພຣະອົງນັ້ນຄືພຣະໂອຣົດຂອງພຣະເຈົ້າໂອກກາກະຣາດ
ສະເດັດແມ່ທີ່ນັ້ນຊົງເຂົ້າພຣະທະໄທວ່າເປັນຂ້າທາດ

(ພຣະເຈົ້າມັດທະຊົງຕຳໜິພຣະທິດາວ່າ)

[໖໔]　ໂອ ລູກສາວຜູ້ໂງ່ຈ້າ ເຈົ້ານັ້ນຊົ່ວຊ້າເຫຼືອເກີນ
ທີ່ບໍ່ບອກເຖິງອົງກະສັດຜູ້ຊົງພະລັງມະຫາສານຄືພະຍາຊ້າງ
ແປງເປັນກົບສະເດັດມາໃນບ່ອນນີ້

(ພຣະເຈົ້າມັດທະຊົງສະແດງໂທດຂອງພຣະອົງວ່າ)

[໖໕]　ຂ້າແດ່ ມະຫາຣາດຜູ້ຈອມທັບ
ຂໍພຣະອົງໂຜດງົດໂທດແກ່ຂ້ານ້ອຍ
ທີ່ບໍ່ຮູ້ວ່າຊົງປອມພຣະອົງສະເດັດມາໃນບ່ອນນີ້

(ພຣະເຈົ້າກຸສະໂພທິສັດຕັດວ່າ)

[໖໖]　ການທີ່ຂ້ານ້ອຍເປັນຄົນຄົວນັ້ນບໍ່ເປັນການປົກປິດ
ສຳລັບຄົນເຊັ່ນຂ້ານ້ອຍເລີຍ ຂ້າແດ່ ພຣະອົງຜູ້ສົມມຸດຕິເທບ
ພຣະອົງຊົງເຫຼື້ອມໃສຂ້ານ້ອຍຕ່າງຫາກ
ການກະທຳຜິດຂອງພຣະອົງບໍ່ມີ

(ພຣະເຈົ້າມັດທະສັ່ງພຣະນາງປະພາວະດີໄປຂໍໂທສວ່າ)

[໖໗]　ນີ້ລູກສາວຜູ້ໂງ່ຈ້າ ເຈົ້າຈົ່ງໄປຂໍໃຫ້ພຣະເຈົ້າກຸສະ
ຜູ້ຊົງພະລັງມະຫາສານຊົງງົດໂທດສາ
ພຣະເຈົ້າກຸສະພຣະອົງນັ້ນຜູ້ທີ່ເຈົ້າໃຫ້ງົດໂທດແລ້ວ
ຈະປະທານຊີວິດໃຫ້ເຈົ້າ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໖໘]　ເຈົ້າຍິງປະພາວະດີຜູ້ມີຜິວພັນຄືເທບອັບປະສອນ
ຊົງສະດັບພຣະດຳຣັດຂອງພຣະປິຕຸຣາດແລ້ວຊົງຊົບພຣະສຽນ
ກອດພຣະບາດພຣະເຈົ້າກຸສະຜູ້ຊົງພະລັງມະຫາສານ

(ພຣະນາງປະພາວະດີຂາບທູນວ່າ)

[໖໙]　ຂ້າແດ່ ພຣະອົງຜູ້ສົມມຸດຕິເທບ
ຣາຕີທັງຫຼາຍເຫຼົ່ານີ້ໃດລ່ວງເລີຍໄປ
ຣາຕີທັງຫຼາຍເຫຼົ່ານີ້ນັ້ນເວັ້ນຈາກພຣະອົງລ່ວງເລີຍໄປແລ້ວ
ຂ້ານ້ອຍຂໍຖວາຍບັງຄົມພຣະບາດຂອງພຣະອົງດ້ວຍຂະໝ່ອມ

ຂ້າແດ່ ພຣະຈອມທັບ ຂໍພຣະອົງໂຜດ
ຢ່າຊົງໂກດຂ້ານ້ອຍເລີຍ ຂ້ານ້ອຍ

[໗໐] ຂ້ານ້ອຍຂໍຖວາຍສັດປະຕິຍານຕໍ່ພຣະອົງ
ຂໍເດຊະມະຫາຣາດ ໂຜດສະດັບຄໍາຂອງຂ້ານ້ອຍ
ຂ້ານ້ອຍຈະບໍ່ກະທໍາຄວາມຊິງຊັງຕໍ່ພຣະອົງອີກຕໍ່ໄປ

[໗໑] ຖ້າພຣະອົງບໍ່ຊົງໂຜດກະທໍາຕາມ
ຄໍາຂອງຂ້ານ້ອຍຜູ້ທູນວິງວອນຢູ່ແນວນີ້
ພຣະຣາດຊະບິດາກໍຈັກຊົງເຂັ່ນຂ້າຂ້ານ້ອຍ
ແລ້ວປະທານໃຫ້ແກ່ກະສັດທັງຫຼາຍ ໃນການບັດນີ້

(ພຣະເຈົ້າກຸສະໂພທິສັດໄດ້ສະດັບດັ່ງນັ້ນ ຈຶ່ງຕັດວ່າ)

[໗໒] ເມື່ອພຣະນ້ອງນາງອ້ອນວອນຢູ່ແນວນີ້
ເປັນຫຍັງອ້າຍຈະບໍ່ກະທໍາຕາມຄໍາຂອງພຣະນ້ອງນາງນໍ
ແມ່ປະພາວະດີຜູ້ເລີໂສມ ພຣະນ້ອງນາງຢ່າຊົງຢ້ານໄປເລີຍ
ອ້າຍບໍ່ໂກດພຣະນ້ອງນາງດອກ

[໗໓] ອ້າຍຂໍໃຫ້ສັດປະຕິຍານຕໍ່ພຣະນ້ອງນາງ
ພຣະຣາດຊະບຸດຕີໂຜດຊົງສະດັບຄໍາຂອງອ້າຍເທີ້ນ
ອ້າຍຈະບໍ່ກະທໍາຄວາມຊິງຊັງຕໍ່ພຣະນ້ອງນາງອີກຕໍ່ໄປ

[໗໔] ແມ່ປະພາວະດີຜູ້ມີສະໂພກຜຶ່ງຜາຍ
ຄວາມຈິງ ອ້າຍສາມາດທີ່ຈະຍໍ່າຍີຕະກູນກະສັດມັດທະຣາດຫຼວງຫຼາຍ
ໃຫ້ຍ່ອຍຍັບແລ້ວນໍາພຣະນາງໄປ ແຕ່ຍ້ອນຄວາມຮັກພຣະນາງ
ຈຶ່ງຍອມສູ້ທົນອົດກັ້ນຄວາມທຸກທີ່ລົ້ນເຫຼືອ

(ພຣະເຈົ້າກຸສະໂພທິສັດໃຫ້ຂັດຕິຍະມານະເກີດຂຶ້ນ ແລ້ວຕັດວ່າ)

[໗໕] ຂ້າຫຼວງທັງຫຼາຍ ຈົ່ງກະກຽມຣາດຊະລົດ
ທີ່ວິຈິດໄປດ້ວຍເຄື່ອງປະດັບຕ່າງ ໆ ແລະມ້າທີ່ເຝິກຝົນດີແລ້ວ
ຕໍ່ແຕ່ນັ້ນ ທ່ານທັງຫຼາຍຈົ່ງເບິ່ງຄວາມໄວຂອງເຮົາ
ຜູ້ກໍາລັງກໍາຈັດສັດຕູເທີ້ນ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໗໖] ຍິງທັງຫຼາຍພາຍໃນບຸຣີຂອງພຣະເຈົ້າມັດທະ
ພາກັນແນມເບິ່ງພຣະເຈົ້າກຸສະນັ້ນ
ກຳລັງຊົງເຍື້ອງກາຍຄືຣາດຊະສີ ຕົບພຣະຫັດ
ສະເຫວີຍພຣະກະຍາຫານເປັນສອງເທົ່າ ຢູ່ບ່ອນນັ້ນ

[໗໗] ພຣະເຈົ້າກຸສະສະເດັດຂຶ້ນຊົງຄໍຊ້າງ
ແລະໂຜດໃຫ້ພຣະນາງປະພາວະດີຂຶ້ນປະທັບດ້ວຍ
ຊົງຢັ່ງລົງສູ່ສົງຄາມບັນລືສີຫະນາດ

[໗໘] ກະສັດທັງຫຼາຍນອກນີ້ຊົງສະດັບພຣະສຸຣະສີຫະນາດ
ຂອງພຣະອົງຜູ້ຊົງບັນລືຢູ່
ຖືກຄວາມຢ້ານກົວຕໍ່ພຣະສຸຣະສຽງຂອງພຣະເຈົ້າກຸສະຄຸກຄາມ
ຈຶ່ງພາກັນສະເດັດໜີໄປ
ຄືໝູ່ເນື້ອຢ້ານກົວຕໍ່ສຽງຣາດຊະສີແລ້ວພາກັນໜີໄປ

[໗໙] ກອງພົນຊ້າງ ກອງພົນມ້າ ກອງພົນລົດ ແລະກອງພົນຣາບ
ຖືກຄວາມຢ້ານກົວຕໍ່ພຣະສຸຣະສຽງຂອງພຣະເຈົ້າກຸສະຄຸກຄາມ
ຕ່າງພາກັນຟາດຟັນກັນເອງ

[໘໐] ໃນສົງຄາມສຳຄັນຄັ້ງນັ້ນ
ທ້າວສັກກະຈອມເທບໄດ້ທອດພຣະເນດເຫັນແລ້ວ
ຊົງມີພຣະທະໄທແຈ່ມໃສຊົມຊື່ນຍິນດີ
ຈຶ່ງໄດ້ພຣະຣາດຊະທານແກ້ວມະນີອັນໄພໂຣດວົງໜຶ່ງແດ່ພຣະເຈົ້າກຸສະ

[໘໑] ພຣະຣາຊາພຣະອົງນັ້ນເມື່ອຊົງຊະນະສົງຄາມນັ້ນແລ້ວ
ໄດ້ຮັບພຣະຣາດຊະທານແກ້ວມະນີອັນໄພໂຣດ
ປະທັບເທິງຄໍຊ້າງ ສະເດັດລຽບບຸຣີນະຄອນ

[໘໔] ຊົງຈັບເປັນກະສັດທັງ ໗ ພຣະອົງ ແລ້ວຊົງພັນທະນາການ

ໃຫ້ນ້ອມນຳເຂົ້າໄປຖວາຍຕໍ່ພຣະສັດສຸຣະ (ພໍ່ເຖົ້າ) ດ້ວຍພຣະດຳຣັດວ່າ
ຂ້າແດ່ ພຣະອົງຜູ້ສົມມຸດຕິເທບ ກະສັດເຫຼົ່ານີ້ເປັນສັດຕູຂອງພຣະອົງ

[໗໓] ພວກສັດຕູທັງໝົດທີ່ຈະກຳຈັດພຣະອົງ
ກໍຕົກຢູ່ໃນອຳນາດຂອງພຣະອົງແລ້ວ
ຂໍພຣະອົງຊົງເຮັດຕາມພຣະປະສົງເທີ້ນ
ຈະຊົງປ່ອຍຫຼືຈະຊົງປະຫານກະສັດເຫຼົ່ານັ້ນກໍຕາມພຣະຫະໄທເທີ້ນ

(ພຣະເຈົ້າມັດທະຕັດວ່າ)

[໗໔] ກະສັດເຫຼົ່ານີ້ເປັນສັດຕູຂອງພຣະອົງຕ່າງຫາກ
ບໍ່ແມ່ນເປັນສັດຕູຂອງຂ້ານ້ອຍເລີຍ
ຂ້າແດ່ ມະຫາຣາດ ພຣະອົງທໍ່ນັ້ນຊົງເປັນໃຫຍ່ກວ່າຂ້ານ້ອຍ
ຈະຊົງປ່ອຍຫຼືຈະຊົງປະຫານກະສັດເຫຼົ່ານັ້ນ
ກໍຕາມພຣະຫະໄທເທີ້ນ

(ພຣະເຈົ້າກຸສະໂພທິສັດຕັດວ່າ)

[໗໕] ພຣະທິດາທັງ ໗ ຂອງພຣະອົງເຫຼົ່ານີ້ ຊົງເລີໂສມ
ອຸປະມາດັ່ງເທບກັນຍາ ຂໍພຣະອົງໂຜດພຣະຣາດຊະທານ
ພຣະຣາດຊະທິດາແຕ່ລະພຣະອົງແດ່ກະສັດເຫຼົ່ານັ້ນ
ຂໍກະສັດເຫຼົ່ານັ້ນທັງໝົດຈົ່ງເປັນພຣະຣາດຊະບຸດເຂີຍຂອງພຣະອົງເທີ້ນ

(ພຣະເຈົ້າມັດທະຕັດກັບພຣະເຈົ້າກຸສະໂພທິສັດວ່າ)

[໗໖] ຂ້າແດ່ ມະຫາຣາດ ພຣະອົງທໍ່ນັ້ນຊົງເປັນໃຫຍ່ກວ່າຂ້ານ້ອຍ
ກວ່າທິດາຂອງຂ້ານ້ອຍເຫຼົ່ານັ້ນ ແລະກວ່າຂ້ານ້ອຍທັງປວງ
ຂໍພຣະອົງຊົງພຣະຣາດຊະທານທິດາທັງຫຼາຍຂອງຂ້ານ້ອຍ
ແດ່ກະສັດເຫຼົ່ານັ້ນຕາມທີ່ພຣະອົງຊົງພຣະປະສົງເທີ້ນ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໗໗] ໃນການນັ້ນ ພຣະເຈົ້າກຸສະ
ຜູ້ຊົງມີພຣະສຸຣະສຽງປານດັ່ງຣາດຊະສີ
ໄດ້ພຣະຣາດຊະທານພຣະທິດາຂອງພຣະເຈົ້າມັດທະ
ແດ່ກະສັດເຫຼົ່ານັ້ນພຣະນາງລະອົງ

[໗໘] ກະສັດທັງ ໗ ພຣະອົງຕ່າງພາກັນເອີບອີ່ມພຣະຫະໄທ

ດ້ວຍການໄດ້ນັ້ນ ຊົງມີພຣະຫະໄທຍິນດີໃນພຣະເຈົ້າກຸສະ
ຜູ້ມີພຣະສຸຣະສຽງປານດັ່ງຣາດຊະສີ
ຕ່າງຝ່າຍຕ່າງສະເດັດກັບສູ່ແຄວ້ນຂອງຕົນທັນທີ

[໒໙] ສ່ວນພຣະເຈົ້າກຸສະຜູ້ຊົງພະລັງມະຫາສານ
ຊົງພາເຈົ້າຍິງປະພາວະດີແລະແກ້ວມະນີ
ອັນໄພໂຣດງົດງາມສະເດັດກັບເມືອງກຸສາວະດີ

[໙໐] ເມື່ອພຣະຣາຊາແລະພຣະຣາດຊະເທວີທັງ ໔ ພຣະອົງນັ້ນ
ສະເດັດໄປໃນຣາດຊະລົດຄັນດຽວກັນ ສະເດັດເຂົ້າໄປໃນເມືອງກຸສາວະດີ
ຊົງມີພຣະສະຫວີວັນນະແລະພຣະຣູບໂສມທັດທຽມກັນ
ບໍ່ໄດ້ຊົງຮຸ່ງເຮືອງຍິ່ງກວ່າກັນແລະກັນເລີຍ

[໙໑] ໃນການນັ້ນ ພຣະຣາດຊະມານດາໄດ້ຊົງພົບ
ພຣະຣາດຊະບຸດແລະພຣະຊາຍາ
ພຣະບິດາແລະພຣະໂອຣົດທັງ ໔ ພຣະອົງນັ້ນຊົງສະໜັກສະມານກັນ
ຄອບຄອງແຜ່ນດິນກຸສາວະດີໃຫ້ຮຸ່ງເຮືອງແຜ່ໄພສານສືບມາ

**ກຸສະຊາດົກທີ ໑ ຈົບ**

## ໔. ໂສນະນັນທະຊາດົກ (໕໓໒)
## ວ່າດ້ວຍໂສນະນັນທະດາບົດ

(ພຣະເຈົ້າມະໂນຊະເມື່ອຊົງພິຈາລະນາດາບົດນັ້ນແລ້ວ ຈຶ່ງຕັດວ່າ)

[໙໔] ທ່ານເປັນເທວະດາ ຄົນທັບ ເປັນທ້າວສັກກະປຸຣິນທະທະ
ຫຼືເປັນມະນຸດຜູ້ມີລິດກັນແນ່ນໍ ພວກເຮົາຈະຮູ້ຈັກທ່ານໄດ້ແນວໃດ
(ນັນທະບັນດິດດາບົດທູນວ່າ)

[໙໓] ອາດຕະມາພາບບໍ່ແມ່ນເທວະດາ ບໍ່ແມ່ນຄົນທັບ
ແມ່ນທ້າວສັກກະປຸຣິນທະທະກໍບໍ່ແມ່ນ
ອາດຕະມາພາບເປັນມະນຸດຜູ້ມີລິດ ຂໍຖວາຍພຣະພອນ
ຂໍພຣະອົງຊົງຮູ້ແນວນີ້ເທີ້ນ ພາຣະຖະມະຫາບໍພິດ[¹]

(ພຣະເຈົ້າມະໂນຊະໄດ້ສະດັບດັ່ງນັ້ນ ຈຶ່ງຕັດວ່າ)

[໙໔] ພຣະຜູ້ເປັນເຈົ້າໄດ້ທຳການຂົນຂວາຍຊ່ວຍເຫຼືອບໍ່ແມ່ນໜ້ອຍປານນີ້
ເມື່ອຝົນຕົກ ພຣະຜູ້ເປັນເຈົ້າກໍໄດ້ເຮັດໃຫ້ຝົນຢຸດ

[໙໕] ຈາກນັ້ນເມື່ອລົມແຮງ ແດດກ້າ ພຣະຜູ້ເປັນເຈົ້າກໍໄດ້ເຮັດເງົາອັນຮົ່ມເຢັນ
ຕໍ່ມາພຣະຜູ້ເປັນເຈົ້າກໍໄດ້ທຳການປ້ອງກັນລູກສອນໃນທ່າມກາງສັດຕູ

[໙໖] ຕໍ່ມາພຣະຜູ້ເປັນເຈົ້າກໍໄດ້ເຮັດແຄວ້ນໃຫ້ຈະເລີນຮຸ່ງເຮືອງແຜ່ໄພສານ
ແລະໄດ້ນຳປະຊາຊົນຜູ້ຢູ່ໃນແຄວ້ນເຫຼົ່ານັ້ນໃຫ້ຢູ່ໃນອຳນາດຂອງຂ້ານ້ອຍ
ຕໍ່ມາກໍໄດ້ເຮັດໃຫ້ກະສັດ ໑໐໑ ພຣະອົງໃຫ້ເປັນຜູ້ຕິດຕາມຂ້ານ້ອຍ

[໙໗] ຂ້ານ້ອຍມີຄວາມພໍໃຈຕໍ່ພຣະຜູ້ເປັນເຈົ້າຜູ້ຈະເລີນ
ພຣະຜູ້ເປັນເຈົ້າປະສົງສິ່ງພໍໃຈອັນໃດ ຄື
ຍານພາຫະນະທີ່ທຽມດ້ວຍຊ້າງ ລົດທຽມດ້ວຍມ້າ
ນາຣີທີ່ປະດັບດ້ວຍເຄື່ອງປະດັບ
ແລະຫຼືນິເວດອັນໜ້າອອນຊອນສຸກສະບາຍ
ຂໍພຣະຜູ້ເປັນເຈົ້າອອກປາກຂໍມາເທີ້ນ
ຂ້ານ້ອຍຂໍຖວາຍແດ່ພຣະຜູ້ເປັນເຈົ້າຜູ້ຈະເລີນ

[໙໘] ຫຼືວ່າພຣະຜູ້ເປັນເຈົ້າປະສົງສິ່ງໃດໃນແຄວ້ນອັງຄະກໍຕາມ
ມະຄົດກໍຕາມ ຂ້ານ້ອຍຂໍຖວາຍແດ່ພຣະຜູ້ເປັນເຈົ້າຜູ້ຈະເລີນ
ຫຼືພຣະຜູ້ເປັນເຈົ້າປະສົງແຄວ້ນອັດສະກະຫຼືແຄວ້ນອະວັນຕີ
ຂ້ານ້ອຍກໍເຕັມໃຈຖວາຍສິ່ງນັ້ນແດ່ພຣະຜູ້ເປັນເຈົ້າ

[໙໙] ຫຼືແມ່ນຣາດຊະສົມບັດເຄິ່ງໜຶ່ງ
ຂ້ານ້ອຍກໍຈະຖວາຍແດ່ພຣະຜູ້ເປັນເຈົ້າຜູ້ຈະເລີນ
ຖ້າພຣະຜູ້ເປັນເຈົ້າປະສົງຣາດຊະສົມບັດ
ນິມົນແນະນຳສິ່ງທີ່ພຣະຜູ້ເປັນເຈົ້າປະສົງມາເທີ້ນ
(ນັນທະບັນດິດດາບົດຂາບທູນຊີ້ແຈ່ງຄວາມປະສົງຂອງຕົນວ່າ)

[໑໐໐] ຣາດຊະສົມບັດກໍຕາມ ບ້ານເມືອງກໍຕາມ
ຊັບສົມບັດກໍຕາມ ອາດຕະມາພາບບໍ່ຕ້ອງການ
ແມ່ນເຖິງຊົນນະບົດອາດຕະມາພາບກໍບໍ່ມີຄວາມຕ້ອງການ

[໑໐໑] ໃນພຣະຣາດຊະອານາຈັກຂອງມະຫາບໍພິດຜູ້ຈະເລີນ

ມີອາສົມຫຼັງໜຶ່ງຢູ່ແຄມປ່າ
ບິດາມານດາທັງ ໔ ຂອງອາດຕະມາພາບອາໄສຢູ່ທີ່ອາສົມນັ້ນ

[໑໐໔] ອາດຕະມາພາບບໍ່ໄດ້ເຮັດບຸນໃນທ່ານທັງ ໔
ຜູ້ເປັນບຸຣະພາຈານນັ້ນເລີຍ
ອາດຕະມາພາບຈະທຳການທູນເຊີນມະຫາບໍພິດຜູ້ຊົງພຣະຈະເລີນ
ແລ້ວຈະຂໍການສັງວອນ (ຂໍໂທດ) ກັບໂສນະບັນດິດ

(ພຣະເຈົ້າມະໂນຊະຕັດກັບນັນທະບັນດິດດາບົດນັ້ນວ່າ)

[໑໐໕] ທ່ານພາມ ຂ້ານ້ອຍຈະເຮັດຕາມຄຳຂອງພຣະຜູ້ເປັນເຈົ້າ
ຕາມທີ່ພຣະຜູ້ເປັນເຈົ້າເວົ້າກັບຂ້ານ້ອຍ
ແຕ່ເລື້ອງນັ້ນພຣະຜູ້ເປັນເຈົ້າບອກຂ້ານ້ອຍມາເທີ້ນວ່າ
ຜູ້ວິງວອນຂໍຮ້ອງມີຈຳນວນທໍ່ໃດ
(ນັນທະບັນດິດດາບົດຂາບທູນວ່າ)

[໑໐໔] ຄະຫະບໍດີ ຊາວຊົນນະບົດແລະພາມມະຫາສານກວ່າຮ້ອຍຂຶ້ນໄປ
ກະສັດຜູ້ອະພິຊາດຜູ້ຊົງມີພຣະອິດສະຣິຍະຍົດເຫຼົ່ານີ້ທັງໝົດ
ແລະພຣະອົງຜູ້ຊົງພຣະຈະເລີນຊົງພຣະນາມວ່າ ພຣະເຈົ້າມະໂນຊະ
ຜູ້ວິງວອນຂໍຮ້ອງ ກໍຈັກພຽງພໍ

(ພຣະເຈົ້າມະໂນຊະຕັດກັບນັນທະບັນດິດດາບົດວ່າ)

[໑໐໕] ພະນັກງານທັງຫຼາຍຈົ່ງກະກຽມຊ້າງແລະມ້າ
ນາຍສາຣະຖີຈົ່ງທຽມລົດ ທ່ານທັງຫຼາຍຈົ່ງຖືເອົາເຄື່ອງມັດ
ຈົ່ງຍົກທຸງຂຶ້ນປັກທີ່ແທ່ນປັກທຸງ
ເຮົາຈັກໄປສູ່ອາສົມທີ່ໂກສິຍະດາບົດອາໄສຢູ່

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໑໐໖] ລຳດັບນັ້ນ ພຣະຣາຊາສະເດັດໄປພ້ອມກັບຈາຕຸຣົງຄະເສນາ
ໄດ້ສະເດັດເຖິງອາສົມອັນໜ້າອອນຊອນທີ່ໂກສິຍະດາບົດຢູ່

(ພຣະເຈົ້າມະໂນຊະຊົງເຫັນໂສນະດາບົດໂພທິສັດມາ ຈຶ່ງຕັດວ່າ)

[໑໐໗] ຫາບຂອງໃຜຜູ້ຈະໄປຫາບນ້ຳ ເຮັດດ້ວຍໄມ້ກະທຸ່ມ

ບໍ່ຖືກຕ້ອງບ່າ ລອຍຂຶ້ນສູ່ອາກາດ
(ຫ່າງບ່າ)ປະມານ ๔ ອົງຄຸລີ

(ໂສນະດາບົດໂພທິສັດຂາບທູນວ່າ)

[໑໐໗] ຂ້າແດ່ ມະຫາຣາດ ອາດຕະມາພາບຄືໂສນະດາບົດ
ຜູ້ອົດກັ້ນປະພຶດຂໍ້ວັດປະຕິບັດ ບໍ່ຂີ້ຄ້ານ
ລ້ຽງດູມານດາບິດາຢູ່ທຸກຄືນວັນ

[໑໐໘] ຂໍຖວາຍພຣະພອນ ພຣະອົງຜູ້ເປັນເຈົ້າແຫ່ງທິດ
ອາດຕະມາພາບຣະນຶກເຖິງອຸປະກາຣະທີ່ທ່ານທັງສອງ
ໄດ້ເຮັດໄວ້ແລ້ວໃນການກ່ອນຢູ່ເນືອງ ໆ
ຈຶ່ງນຳເອົາໝາກໄມ້ແລະເຜືອກມັນໃນປ່າມາລ້ຽງດູມານດາບິດາ

(ພຣະເຈົ້າມະໂນຊະຊົງປະສົງຈະທຳຄວາມຄຸ້ນເຄີຍກັບໂສນະບັນດິດດາບົດ ຈຶ່ງຕັດວ່າ)

[໑໑໐] ຂ້ານ້ອຍທັງຫຼາຍປາຖະໜາຈະໄປສູ່ອາສົມທີ່ໂກສິຍະດາບົດຢູ່
ພຣະຜູ້ເປັນເຈົ້າໂສນະ ນິມົນພຣະຜູ້ເປັນເຈົ້າ
ກະລຸນາບອກຫົນທາງແກ່ພວກຂ້ານ້ອຍດ້ວຍ
ພວກຂ້ານ້ອຍຈະໄປເຖິງອາສົມໄດ້ໂດຍຫົນທາງໃດ

(ໂສນະດາບົດໂພທິສັດຂາບທູນວ່າ)

[໑໑໑] ຂໍຖວາຍພຣະພອນພຣະຣາຊາ
ຫົນທາງນີ້ເປັນທາງຍ່າງສຳລັບຄົນຜູ້ດຽວ
ຢູ່ບ່ອນໃດ ມີປ່າສີຂຽວຄາມຄ້າຍກ້ອນເພື້ອ
ເດຍລະດາດໄປດ້ວຍຕົ້ນດອກຈານ
ທ່ານໂກສິຍະດາບົດອາໄສຢູ່ທີ່ປ່າແຫ່ງນີ້

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໑໑໒] ມະຫາລືສີ ເມື່ອກ່າວແນວນີ້ແລ້ວ
ຈຶ່ງເຫາະຂຶ້ນໃນອາກາດພ່ຳສອນກະສັດທັງຫຼາຍ
ແລ້ວຮີບຮ້ອນຫຼີກໄປໃນອາກາດ

[໑໑໓] ປັດກວາດອາສົມ ປູລາດອາສະນະແລ້ວເຂົ້າໄປສູ່ບັນສາລາ

ບອກກ່າວບິດາໃຫ້ຮູ້ໂຕວ່າ

[໑໑໔] ຂ້າແດ່ ມະຫາລືສີ ກະສັດຜູ້ອະພິຊາດ
ຊຶ່ງມີພຣະອິດສະຣິຍະຍົດທັງຫຼາຍເຫຼົ່ານີ້
ກຳລັງສະເດັດມາ ຂໍທ່ານພໍ່ຈົ່ງອອກໄປນັ່ງນອກອາສົມເທີ້ນ

[໑໑໕] ມະຫາລືສີສະດັບຄຳຂອງໂສນະບັນດິດນັ້ນແລ້ວ
ຟ້າວອອກຈາກອາສົມ ນັ່ງຢູ່ໃກ້ປະຕູອາສົມຂອງຕົນ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໑໑໖] ໂກສິຍະດາບົດໄດ້ເຫັນພຣະເຈົ້າມະໂນຊະນັ້ນມີໝູ່ກະສັດຫ້ອມລ້ອມ
ເປັນເໝືອນກອງທັບຮຸ່ງເຮືອງຢູ່ດ້ວຍເດຊານຸພາບ
ກຳລັງສະເດັດມາ ຈຶ່ງໄດ້ກ່າວຄາຖານີ້ວ່າ

[໑໑໗] ຂະບວນກອງ ກອງຕະໂພນ ຫອຍສັງ ບັນເດາະ
ແລະມະໂຫຣະທຶກນຳໜ້າໃຜມາ ຍັງພຣະຣາຊາຜູ້ຈອມທັບໃຫ້ແຈ່ມໃສ

[໑໑໘] ໃຜມີໜ້າຜາກໃສ່ຂອບອຸນນະຫິດຄຳອັນໜາ
ມີວັນນະເໝືອນສາຍຟ້າ
ໃຜນໍຍັງໜຸ່ມແໜ້ນມັດສອດແລ່ງລູກສອນ
ຮຸ່ງເຮືອງຢູ່ດ້ວຍສິຣິກຳລັງມາ

[໑໑໙] ອັນໜຶ່ງ ໃບໜ້າຂອງໃຜງົດງາມຜຸດຜ່ອງ
ຄືຄຳທີ່ລະລາຍຄວ້າງຢູ່ປາກເບົ້າ
ມີສີດັ່ງຖ່ານໄຟໄມ້ແຄນ
ໃຜນໍຮຸ່ງເຮືອງຢູ່ດ້ວຍສິຣິກຳລັງມາ

[໑໒໐] ສະເຫວດຕະສັດມີດີ້ວໜ້າອອນຊອນໃຈ ສຳລັບກັ້ນບັງແສງອາທິດ
ເຂົາປະຄອງກັ້ນແລ້ວເພື່ອໃຜ
ໃຜນໍຮຸ່ງເຮືອງຢູ່ດ້ວຍສິຣິກຳລັງມາ

[໑໒໑] ຊົນທັງຫຼາຍຖືພັດວາລະວິຊະນີເຄື່ອງສູງ
ຍ່າງຫ້ອມລ້ອມເຮືອນຮ່າງຂອງໃຜ
ຜູ້ມີບຸນອັນປະເສີດເຊິ່ງກຳລັງມາເທິງຄໍຊ້າງ

[໑໘໘] ສະເທວດຕະສັດ ມ້າອາຊາໄນ ແລະທະຫານໃສ່ເກາະ
ຂອງໃຜລຽງລາຍຢູ່ໂດຍຮອບ
ໃຜນໍຮຸ່ງເຮືອງຢູ່ດ້ວຍສີຣິກຳລັງມາ

[໑໘໖] ກະສັດ ໑໐໑ ພຣະອົງຜູ້ຊົງມີພຣະອິດສະຣິຍະຍົດ
ກຳລັງຫ້ອມລ້ອມຕິດຕາມໃຜຢູ່ໂດຍຮອບ
ໃຜນໍຮຸ່ງເຮືອງຢູ່ດ້ວຍສີຣິກຳລັງມາ

[໑໘໔] ອັນໜຶ່ງ ເສນາ ໔ ເຫຼົ່າ ຄື ກອງພົນຊ້າງ ກອງພົນມ້າ
ກອງພົນລົດ ແລະກອງພົນຮາບ ຫ້ອມລ້ອມຕາມໃຜຢູ່ໂດຍຮອບ
ໃຜນໍຮຸ່ງເຮືອງຢູ່ດ້ວຍສີຣິກຳລັງມາ

[໑໘໕] ເສນາໝູ່ໃຫຍ່ນັ້ນຂອງໃຜ ນັບບໍ່ຖ້ວນ
ຫ້ອມລ້ອມຕິດຕາມມາທາງຫຼັງເໝືອນຄື້ນແຫ່ງສາຄອນ

[໑໘໖] ພຣະເຈົ້າມະໂນຊະຜູ້ເປັນຣາຊາທິຣາດ
ຄືພຣະອິນຜູ້ເປັນເທບພະເຈົ້າແຫ່ງເທບທັງຫຼາຍ
ຜູ້ມີໄຊກຳລັງສະເດັດມາສູ່ອາສົມຂອງທ່ານຜູ້ປະພຶດພົມມະຈັນ
ເພື່ອຊົງຂໍຂະມາທົດແທນນັນທະດາບົດ

[໑໘໗] ນັ້ນເສນາໝູ່ໃຫຍ່ຂອງພຣະອົງນັບບໍ່ຖ້ວນ
ຫ້ອມລ້ອມຕິດຕາມມາທາງຫຼັງເໝືອນຄື້ນແຫ່ງສາຄອນ

[໑໘໘] ພຣະຣາຊາທັງຫຼາຍມີພຣະວໍຣະກາຍລູບທາດ້ວຍຈຸນແກ່ນຈັນ
ຊົງພຣະພູສາກາສິກະພັດອັນອຸດົມ
ທຸກພຣະອົງຕ່າງປະນົມມືສະເດັດເຂົ້າໄປຫາພຣະລືສີ

(ຕໍ່ແຕ່ນັ້ນ ພຣະເຈົ້າມະໂນຊະຕັດວ່າ)

[໑໘໙] ພຣະຜູ້ເປັນເຈົ້າຜູ້ຈະເລີນມີຄວາມສຸກສຳຣານດີ
ບໍ່ມີພະຍາດບຽດບຽນບໍ
ພຣະຜູ້ເປັນເຈົ້າຍັງອັດຕະພາບໃຫ້ເປັນໄປ
ດ້ວຍການສະແຫວງຫາມູນຜະລາຫານບໍ
ເຜືອກ ມັນ ແລະໝາກໄມ້ຍັງມີຢູ່ຫຼາຍບໍ

[໑໕໐] ເຮືອດ ຍຸງ ແລະສັດເລືອຄານມີໜ້ອຍບໍ
ໃນປ່າທີ່ມີເນື້ອຮ້າຍຢູ່ສາລະວົນບໍ່ມີມາບຽດບຽນບໍ

(ໂສນະດາບົດໂພທິສັດຂາບທູນວ່າ)

[໑໕໑] ຂ້າແດ່ ພຣະຣາຊາ ພວກອາດຕະມາພາບ
ມີຄວາມສຸກສຳຣານດີ ແລະບໍ່ມີພະຍາດບຽດບຽນ
ອັນໜຶ່ງ ອາດຕະມາພາບທັງຫຼາຍຍັງອັດຕະພາບ
ໃຫ້ເປັນໄປດ້ວຍການສະແຫວງຫາມູນຜະລາຫານ
ແລະເຜືອກ ມັນ ໝາກໄມ້ກໍຍັງມີຫຼາຍຢູ່

[໑໕໒] ອັນໜຶ່ງ ເຮືອດຍຸງແລະສັດເລືອຄານກໍມີໜ້ອຍ
ເນື້ອຮ້າຍຢູ່ສາລະວົນໃນປ່າກໍບໍ່ມາບຽດບຽນອາດຕະມາພາບເລີຍ

[໑໕໓] ຫຼາຍປີມາແລ້ວ ອາດຕະມາຢູ່ໃນອາສົມນີ້
ຍັງບໍ່ຮູ້ຈັກຄວາມອາພາດທີ່ບໍ່ເຮັດໃຈໃຫ້ອອນຊອນເຊິ່ງເກີດຂຶ້ນແລ້ວ

[໑໕໔] ຂ້າແດ່ ມະຫາຣາດ ພຣະອົງສະເດັດມາດີແລ້ວ ບໍ່ໄດ້ສະເດັດມາຮ້າຍ
ພຣະອົງຊົງເປັນໃຫຍ່ ສະເດັດມາເຖິງໂດຍລຳດັບ
ສິ່ງໃດທີ່ຊົງພໍພຣະທະໄທ ໂຜດຕັດບອກສິ່ງນັ້ນເທີ້ນ

[໑໕໕] ຂ້າແດ່ ພຣະຣາຊາ ໝາກພັບ ໝາກຫາດ
ໝາກຊາງ ແລະໝາກເມົ່າ ມີຣົດຫວານເລັກໜ້ອຍ
ເຊີນພຣະອົງເລືອກສະເຫວີຍໜ່ວຍດີ ໆ ເທີ້ນ

[໑໕໖] ນ້ຳດື່ມນີ້ກໍເຢັນສະນິດ ຕັກມາຈາກຮ່ອມພູ
ມະຫາບໍພິດຫາກພຣະອົງປະສົງ ຂໍຊົງດື່ມເທີ້ນ

(ພຣະເຈົ້າມະໂນຊະຕັດວ່າ)

[໑໕໗] ສິ່ງທີ່ພຣະຜູ້ເປັນເຈົ້າໃຫ້ຂ້ານ້ອຍກໍຮັບໄວ້ແລ້ວ
ພຣະຜູ້ເປັນເຈົ້າເຮັດໃຫ້ມີຄ່າສຳລັບຄົນທຸກຄົນ
ຂໍພຣະຜູ້ເປັນເຈົ້າທັງຫຼາຍໂຜດງຽງໂສດສະດັບ
ຄຳຂອງນັນທະດາບົດເທີ້ນ ທ່ານຈະກ່າວ

[໑໕໘] ພວກຂ້ານ້ອຍເປັນບໍລິສັດຂອງນັນທະດາບົດ

ພາກັນມາຍັງສຳນັກຂອງພຣະຜູ້ເປັນເຈົ້າຜູ້ຈະເລີນ
ເພື່ອຈະຂໍຂະມາໂທດ ຂໍພຣະຜູ້ເປັນເຈົ້າຜູ້ຈະເລີນ
ໂຜດສະດັບຟັງຄຳຂອງນັນທະດາບົດແລະຂອງບໍລິສັດເທີ້ນ
(ນັນທະບັນດິດເມື່ອເຈລະຈາກັບບໍລິສັດຂອງຕົນ ຈຶ່ງກ່າວວ່າ)

[໑໓໙] ຊາວຊົນນະບົດແລະພາມມະຫາສານກວ່າຮ້ອຍຂຶ້ນໄປ
ກະສັດຜູ້ອະພິຊາດຜູ້ຊົງມີພຣະອິດສະຣິຍະຍົດເຫຼົ່ານີ້ທັງໝົດ
ແລະພຣະຣາຊາຜູ້ຈະເລີນຊົງພຣະນາມວ່າ ມະໂນຊະ
ໂຜດຊົງສະດັບຄຳຂອງອາດຕະມາພາບຈັກເລັກໜ້ອຍ

[໑໔໐] ອັນໜຶ່ງ ຍັກ ພູດ ແລະເທວະດາທັງຫຼາຍໃນປ່າ
ທີ່ພາກັນມາປະຊຸມຢູ່ໃນອາສົມນີ້
ຂໍຈົ່ງຟັງຄຳຂອງຂ້າພະເຈົ້າ

[໑໔໑] ຂ້າພະເຈົ້າຂໍກະທຳຄວາມນອບນ້ອມແກ່ພູດທັງຫຼາຍ
ແລ້ວຈະກ່າວກັບໂສນະລືສີຜູ້ມີຂໍ້ວັດປະຕິບັດດີງາມ
ຂ້າພະເຈົ້ານັ້ນຊາວໂລກສົມມຸດແລ້ວວ່າ
ເປັນຊາວໂກສິຍະໂຄດຮ່ວມກັບທ່ານ
ຈຶ່ງນັບວ່າເປັນແຂນຂວາຂອງທ່ານ

[໑໔໒] ຂ້າແດ່ທ່ານອ້າຍໂກສີຜູ້ກ້າຫານ
ເມື່ອຂ້າພະເຈົ້າມີຄວາມປະສົງ
ຈະລ້ຽງດູມານດາແລະບິດາບັງເກີດເກົ້າຂອງຂ້າພະເຈົ້າ
ຖານະນີ້ຊື່ວ່າເປັນບຸນ ຂໍທ່ານອ້າຍຈົ່ງຢ່າຫ້າມຂ້າພະເຈົ້າເລີຍ

[໑໔໓] ແທ້ຈິງ ການບຳລຸງມານດາແລະບິດານັ້ນ
ສັດຕະບຸຣຸດທັງຫຼາຍສັນເສີນແລ້ວ
ຂໍທ່ານອ້າຍຈົ່ງສະລະການບຳລຸງມານດາບິດານັ້ນໃຫ້ຂ້າພະເຈົ້າເທີ້ນ
ທ່ານອ້າຍໄດ້ກະທຳກຸສົນມາດົນແລ້ວ
ດ້ວຍການລຸກຂຶ້ນເຮັດກິດຂໍ້ວັດປະຕິບັດແລະການບີບນວດ
ບັດນີ້ ຂ້າພະເຈົ້າຕ້ອງການຈະເຮັດບຸນໃນມານດາບິດາທັງຫຼາຍແດ່
ຂໍທ່ານອ້າຍຈົ່ງມອບໂລກສະຫວັນໃຫ້ແກ່ຂ້າພະເຈົ້າເທີ້ນ

[໑໔໔] ຂ້າແດ່ທ່ານອ້າຍຜູ້ເປັນລືສີ ມະນຸດທັງຫຼາຍຜູ້ຮູ້ບົດແຫ່ງທຳ

ໃນທຳວ່າ ເປັນຫົນທາງແຫ່ງໂລກສະຫວັນ
ຄືທີ່ທ່ານອ້າຍຮູ້ ມີຢູ່ໃນບໍລິສັດນີ້ຄືກັນ

[໑໔໕] ທ່ານໂສນະບັນດິດຜູ້ອ້າຍຫ້າມຂ້າພະເຈົ້າ
ຜູ້ຈະບຳລຸງມານດາແລະບິດາໃຫ້ມີຄວາມສຸກດ້ວຍການອຸປັດຖາກ
ແລະການບວດເພັ່ນ ຈາກບຸນນັ້ນ
ຊື່ວ່າເປັນຄົນອັດກັ້ນຫົນທາງອັນປະເສີດ

(ທ້າວນັນທະບັນດິດກ່າວແນວນີ້ແລ້ວ ໂສນະດາບົດໂພທິສັດປະກາດໃຫ້ຮູ້ວ່າ)

[໑໔໖] ຂໍຖວາຍພຣະພອນມະຫາຣາດ ກະສັດຜູ້ຈະເລີນທັງຫຼາຍ
ຜູ້ຈະຂໍຂະມາໂທດແທນນ້ອງຊາຍຂອງອາດຕະມາພາບ ຂໍຊົງສະດັບຄຳ
ຂອງອາດຕະມາພາບ ຜູ້ໃດຍັງສະກຸນວົງອັນເກົ່າແກ່ໃຫ້ເສື່ອມໄປ
ບໍ່ປະພຶດທຳໃນບຸກຄົນຜູ້ຈະເລີນໃນສະກຸນທັງຫຼາຍ
ຜູ້ນັ້ນຍ່ອມເຂົ້າເຖິງນະຮົກ

[໑໔໗] ຂໍຖວາຍພຣະພອນພຣະອົງຜູ້ເປັນເຈົ້າແຫ່ງທິດ
ກໍຊົນເຫຼົ່າໃດເປັນຜູ້ສະຫຼາດໃນທຳອັນເກົ່າແກ່
ເຖິງພ້ອມດ້ວຍປະເພນີ
ຊົນເຫຼົ່ານັ້ນຈະບໍ່ໄປສູ່ທຸກຄະຕິ

[໑໔໘] ມານດາແລະບິດາ ອ້າຍນ້ອງຊາຍ
ເອື້ອຍນ້ອງສາວ ເຄືອຍາດແລະພວກພ້ອງ
ຊົນເຫຼົ່ານັ້ນທັງໝົດເປັນພາຣະຂອງອ້າຍໃຫຍ່
ຂໍພຣະອົງຊົງຮູ້ແນວນີ້ເທີ້ນ ທ່ານພາຣະຖະ

[໑໔໙] ຂໍຖວາຍພຣະພອນພຣະອົງຜູ້ເປັນຈອມທັບ
ອາດຕະມາພາບຕ້ອງຮັບພາຣະອັນໜັກແລະບໍ່ລະເລີຍທຳ
ຄືນາຍເຮືອຕ້ອງຮັບພາຣະອັນໜັກ ພະຍາຍາມນຳເຮືອໄປ
ຍ້ອນວ່າອາດຕະມາພາບເປັນອ້າຍໃຫຍ່

(ພຣະຣາຊາທຸກພຣະອົງຊົງພໍພຣະທະໄທ ຊົງຊົມເຊີຍໂສນະດາບົດໂພທິສັດວ່າ)

[໑໕໐] ເຮົາທັງຫຼາຍໄດ້ບັນລຸຍານຄືປັນຍາໃນຄວາມມືດ
ທ່ານໂສນະໂກສິຍະລືສີຜູ້ຈະເລີນໄດ້ສະແດງທຳທີ່ແຈ່ມແຈ້ງ

ແກ່ເຮົາທັງຫຼາຍຄືແປວໄຟຈາກໄຟປ່າໃນເວລາມືດມິດ

[໑໕໑] ດວງອາທິດເຫຼົ່າກໍແຫ່ງວາສຸເທບເປ່ງຣັດສະໝີອຸໄທຢູ່
ຍ່ອມສ່ອງແສງໃຫ້ເຫັນຮູບທັງດີທັງຊົ່ວຢ່າງແຈ່ມແຈ້ງແກ່ເຫຼົ່າສັດສັນໃດ
ທ່ານໂສມະໂກສິຍະລືສີຜູ້ຈະເລີນກໍຄືກັນສັນນັ້ນ
ໄດ້ສະແດງທໍາຢ່າງແຈ່ມແຈ້ງແກ່ເຮົາທັງຫຼາຍ

(ລໍາດັບນັ້ນ ນັນທະບັນດິດກ່າວວ່າ)

[໑໕໔] ຖ້າທ່ານອ້າຍບໍ່ຍອມຮັບຮູ້
ເຖິງການປະຄອງອັນຊະລີຂອງຂ້າພະເຈົ້າຜູ້ວິງວອນຢູ່ແນວນີ້
ຂ້າພະເຈົ້າຈັກປະພຶດຕາມທ່ານອ້າຍ ຈັກຕັ້ງໃຈປະຕິບັດບໍາລຸງທ່ານອ້າຍ

(ໂສມະດາບົດໂພທິສັດເມື່ອຈະປະກາດຄຸນຂອງນັນທະບັນດິດ ຈຶ່ງກ່າວວ່າ)

[໑໕໓] ນັນທະ ທ່ານຮູ້ແຈ້ງຄັກເຖິງສັດທໍາ
ທີ່ສັດຕະບຸຣຸດທັງຫຼາຍສະແດງໄວ້ແລ້ວຢ່າງແທ້ຈິງ
ທ່ານເປັນຜູ້ປະເສີດ ມີມາຣະຍາດງາມ ອ້າຍພໍໃຈທ່ານຍິ່ງ

[໑໕໔] ອ້າຍຈະບອກທ່ານພໍ່ທ່ານແມ່
ຂໍທ່ານທັງ ໒ ຈົ່ງຟັງຄໍາຂອງຂ້າພະເຈົ້າ
ພາຣະນີ້ເປັນພຽງພາຣະຊົ່ວຄັ້ງຊົ່ວຄາວຂອງຂ້າພະເຈົ້າເປັນໄປບໍ່ໄດ້

[໑໕໕] ນັນທະດາບົດ ກະທໍາການຂໍຂະມາໂທດອ້ອນວອນຂໍກັບຂ້າພະເຈົ້າ
ເພື່ອບໍາລຸງທ່ານທັງ ໒ ອັນເປັນການອຸປັດຖາກ
ທີ່ນໍາຄວາມສຸກມາໃຫ້ແກ່ມານດາບິດານັ້ນແດ່

[໑໕໖] ບັນດາທ່ານທັງ ໒ ຜູ້ສະງົບ ປະພຶດພົມມະຈັນ
ທ່ານຜູ້ໃດປາຖະໜາ ຂໍທ່ານຄົນໜຶ່ງຈົ່ງປາຖະໜານັນທະເທີ້ນ
ຂໍນັນທະຈົ່ງບໍາລຸງໃຜຄົນໜຶ່ງໃນທ່ານທັງ ໒ ຕາມຕ້ອງການເທີ້ນ
(ມານດາຂອງໂສມະດາບົດໂພທິສັດກ່າວວ່າ)

[໑໕໗] ໂສມະ ແມ່ແລະພໍ່ອາໄສທ່ານ ທ່ານອະນຸຍາດແລ້ວ
ແມ່ເພິ່ງໄດ້ຈູບນັນທະຜູ້ປະພຶດພົມມະຈັນທີ່ກະໝ່ອມເທີ້ນ

[໑໕໘] ຍ້ອນດົນເຫຼືອເກີນຈຶ່ງໄດ້ເຫັນນັນທະ

ຫົວໃຈຂອງແມ່ຍ່ອມຫວັ່ນໄຫວ
ຄືໃບອ່ອນຂອງຕົ້ນໂພຖືກລົມພັດແກວ່ງໄປມາ

[໑໕໙] ເມື່ອໃດແມ່ຫຼັບລົງຝັນເຫັນນັນທະມາ
ແມ່ກໍເບີກບານດີໃຈວ່າ ລູກນັນທະຂອງແມ່ມາແລ້ວ

[໑໖໐] ແຕ່ເມື່ອໃດແມ່ຕື່ນຂຶ້ນແລ້ວບໍ່ເຫັນນັນທະມາ
ຄວາມໂສກເສົ້າແລະຄວາມເສຍໃຈບໍ່ແມ່ນໜ້ອຍກັບທັບຖົມໂດຍຍິ່ງ

[໑໖໑] ແມ່ເຫັນນັນທະກັບມາໃນມື້ນີ້
ຂໍນັນທະຜູ້ເປັນທີ່ຮັກຂອງພໍ່ແມ່ຈົ່ງເຂົ້າໄປສູ່ເຮືອນຂອງພວກເຮົາເທີ້ນ

[໑໖໒] ນັນທະເປັນລູກສຸດທີ່ຮັກແມ່ນຂອງບິດາ
ນັນທະບໍ່ຄວນຈາກເຮືອນນີ້ໄປອີກ
ລູກໂສນະ ຂໍນັນທະຈົ່ງໄດ້ສິ່ງທີ່ຕົນປາຖະໜາເທີ້ນ
ຂໍນັນທະຈົ່ງບໍາລຸງແມ່ເທີ້ນ

(ໂສນະດາບົດໂພທິສັດປະກາດພຣະຄຸນຂອງມານດາວ່າ)

[໑໖໓] ທ່ານລືສີ ມານດາເປັນຜູ້ອະນຸເຄາະ ເປັນບ່ອນເພິ່ງ
ແລະເປັນຜູ້ໃຫ້ຣົດ (ຄື ນໍ້ານົມ) ແກ່ພວກເຮົາມາກ່ອນ
ເປັນຫົນທາງແຫ່ງໂລກສະຫວັນ ມານດາປາຖະໜາເຈົ້າ

[໑໖໔] ທ່ານລືສີ ມານດາເປັນຜູ້ໃຫ້ຣົດມາກ່ອນ
ເປັນຜູ້ຄຸ້ມຄອງ ເປັນທີ່ເຂົ້າໄປປະກອບບຸນກຸສົນ
ເປັນຫົນທາງແຫ່ງໂລກສະຫວັນ ມານດາປາຖະໜາເຈົ້າ

(ໂສນະດາບົດໂພທິສັດເມື່ອຈະປະກາດວ່າມານດາເປັນຜູ້ເຮັດກິດທີ່ເຮັດໄດ້ຍາກທີ່ບຸກຄົນອື່ນຈະເຮັດໄດ້ ຈຶ່ງກ່າວວ່າ)

[໑໖໕] ມານດາເມື່ອຫວັງຜົນຄືບຸດຈຶ່ງນອບນ້ອມເທວະດາ
ແລະໄຕ່ຖາມເຖິງເລີກ ລະດູ ແລະປີທັງຫຼາຍ[១]

[໑໖໖] ເມື່ອມານດານັ້ນມີຣະດູ ການຖືພາຈຶ່ງມີໄດ້
ຍ້ອນການຖືພານັ້ນ ມານດາຈຶ່ງມີການແພ້ທ້ອງ
ຍ້ອນເຫດນັ້ນ ບັນດິດຈຶ່ງຮຽກທ່ານວ່າ ສຸຫະທາ ຍິງຜູ້ມີໃຈດີ[២]

[໑໖໗]	ມານດາປະຄັບປະຄອງທ້ອງຢູ່ໜຶ່ງປີຫຼືຍ່ອນກວ່າແດ່
ແລ້ວຈຶ່ງເກີດລູກ ຍ້ອນເຫດນັ້ນ ມານດານັ້ນຈຶ່ງຊື່ວ່າ
ຍິງຜູ້ໃຫ້ກຳເນີດບຸດ ຍ້ອນເຫດນັ້ນ ບັນດິດຈຶ່ງຮຽກທ່ານວ່າ
ຊະເນດຕີ ຍິງຜູ້ຍັງບຸດໃຫ້ເກີດ

[໑໖໘]	ເມື່ອບຸດຮ້ອງໄຫ້ ມານດາກໍປອບໂຍນໃຫ້ຍິນດີໄດ້
ດ້ວຍນ້ຳນົມແດ່ ດ້ວຍການຮ້ອງເພງກ່ອມແດ່
ດ້ວຍການອຶບກອດໄວ້ແນບເອິກແດ່
ຍ້ອນເຫດນັ້ນ ບັນດິດຈຶ່ງຮຽກທ່ານວ່າ
ໂຕເສນຕີ ຍິງຜູ້ຍັງບຸດໃຫ້ແຈ່ມໃສຍິນດີ

[໑໖໙]	ຈາກນັ້ນ ເມື່ອລົມແຮງແລະແດດກ້າ
ມານດາກໍກະທຳຄວາມຮັກຢ່າງຈັບໃຈ
ແນມເບິ່ງບຸດຜູ້ຍັງເປັນເດັກອ່ອນໄຮ້ດຽງສາຢູ່
ຍ້ອນເຫດນັ້ນ ບັນດິດຈຶ່ງຮຽກວ່າ
ໂປເສນຕີ ຍິງຜູ້ລ້ຽງລູກ

[໑໗໐]	ຊັບອັນໃດທີ່ເປັນຊັບຂອງມານດາກໍດີ
ເປັນຊັບຂອງບິດາກໍດີ
ແມ່ນຊັບທັງ ໔ ມານດາກໍຄຸ້ມຄອງຮັກສາໄວ້ເພື່ອບຸດນັ້ນ
ດ້ວຍໝາຍໃຈວ່າ ແມ່ນຊັບທັງ ໔ ນີ້ເພິ່ງເປັນຂອງບຸດຂອງເຮົາ

[໑໗໑]	ມານດາເມື່ອໃຫ້ບຸດໃສ່ໃຈວ່າ
ແນວນີ້ເດີ້ລູກ ແນວນັ້ນເດີ້ລູກ ຍ່ອມລຳບາກ
ແລະຮູ້ວ່າບຸດຂອງຕົນເມື່ອເຖິງເວລາເປັນໜຸ່ມ
ລຸ້ມຫຼົງມົວເມົາໃນພັນລະຍາຂອງຜູ້ອື່ນຢູ່ຈົນດຶກດື່ນທ່ຽງຄືນ
ບໍ່ກັບມາໃນເວລາຄ່ຳ ກໍຍ່ອມເດືອດຮ້ອນ ດ້ວຍປະການດັ່ງນີ້

[໑໗໔]	ບຸດທີ່ມານດາລ້ຽງດູມາແລ້ວດ້ວຍຄວາມລຳບາກແນວນີ້
ບໍ່ບຳລຸງມານດາ ບຸດຄົນນັ້ນຊື່ວ່າ
ປະພຶດຜິດໃນມານດາ ຍ່ອມເຂົ້າເຖິງນະຮົກ

[໑໗໕]	ບຸດທີ່ບິດາລ້ຽງດູມາແລ້ວດ້ວຍຄວາມລຳບາກແນວນີ້
ບໍ່ບຳລຸງບິດາ ບຸດຄົນນັ້ນຊື່ວ່າ

ປະພຶດຜິດໃນບິດາ ຍ່ອມເຂົ້າເຖິງນະຮົກ

[໑໗໔] ຂ້າພະເຈົ້າໄດ້ສະດັບມາວ່າ ແມ່ນຊັບທີ່ເກີດຂຶ້ນ
ແກ່ບຸດທັງຫຼາຍຜູ້ມີຄວາມຕ້ອງການຊັບ ກໍພິນາດໄປແດ່
ບຸດນັ້ນຍ່ອມເຖິງຖານະອັນລຳບາກແດ່ ຍ້ອນບໍ່ບຳລຸງມານດາ

[໑໗໕] ຂ້າພະເຈົ້າໄດ້ສະດັບມາວ່າ ແມ່ນຊັບທີ່ເກີດຂຶ້ນ
ແກ່ບຸດທັງຫຼາຍຜູ້ມີຄວາມຕ້ອງການຊັບ ກໍພິນາດໄປແດ່
ບຸດນັ້ນຍ່ອມເຖິງຖານະອັນລຳບາກແດ່ ຍ້ອນບໍ່ບຳລຸງບິດາ

[໑໗໖] ຄວາມເພີດເພີນຍິນດີ ຄວາມຮື່ນເຣີງບັນເທີງໃຈ
ແລະການຫົວຂວັນຫຼິ້ນຫົວກັນໃນການທຸກເມື່ອນັ້ນ
ບັນດິດຜູ້ຮູ້ແຈ້ງຈະເພິ່ງໄດ້ຍ້ອນບຳລຸງມານດາ

[໑໗໗] ຄວາມເພີດເພີນຍິນດີ ຄວາມຮື່ນເຣີງບັນເທີງໃຈ
ແລະການຫົວຂວັນຫຼິ້ນຫົວກັນໃນການທຸກເມື່ອນັ້ນ
ບັນດິດຜູ້ຮູ້ແຈ້ງຈະເພິ່ງໄດ້ຍ້ອນບຳລຸງບິດາ

[໑໗໘] ສັງຄະຫະວັດຖຸ໑ທັງຫຼາຍ ຄື

໑. ທານ (ການໃຫ້)

໒. ປິຍະວາຈາ (ການເຈລະຈາຄຳເວົ້າທີ່ໜ້າຮັກ)

໓. ອັດຖະຈະຣິຍາ (ການປະພຶດປະໂຫຍດ)

໔. ສະມານັດຕະຕາ (ຄວາມເປັນຜູ້ມີຕົນສະເໝີໃນທຳທັງຫຼາຍຕາມສົມຄວນໃນບ່ອນນັ້ນ ໆ)

ທັງ ໔ ປະການນີ້ຍັງມີຢູ່ໃນໂລກນີ້
ຄືເພົາລົດຍັງມີແກ່ລົດທີ່ກຳລັງແລ່ນໄປ

[໑໗໙] ຫາກວ່າສັງຄະຫະວັດຖຸເຫຼົ່ານີ້ບໍ່ເພິ່ງມີແລ້ວ
ມານດາບໍ່ເພິ່ງໄດ້ການນັບຖືຫຼືການບູຊາຍ້ອນເຫດແຫ່ງບຸດເລີຍ
ຫຼືບິດາບໍ່ເພິ່ງໄດ້ການນັບຖືຫຼືການບູຊາຍ້ອນເຫດແຫ່ງບຸດເລີຍ

[໑໘໐] ກໍຍ້ອນບັນດິດທັງຫຼາຍພິຈາລະນາເຫັນສັງຄະຫະວັດຖຸເຫຼົ່ານີ້ໂດຍຖືກຕ້ອງ
ຍ້ອນແນວນັ້ນ ຈຶ່ງບັນລຸເຖິງຄວາມເປັນຜູ້ໃຫຍ່
ທັງບັນດິດເຫຼົ່ານັ້ນຍັງເປັນຜູ້ໜ້າສັນເສີນອີກດ້ວຍ

[๑๗๑] มานดาและบิดาทั้งหลายบัณฑิตกล่าวว่า
๑. เป็นพรหมของบุตร
๒. เป็นบุรพาจารย์ของบุตร
๓. เป็นผู้ควรของต้อนรับบูชาของบุตร[?]
๔. เป็นผู้อนุเคราะห์หมู่สัตว์คือบุตร

[๑๗๒] ย้อนเหตุนั้น บัณฑิตเพิ่งนอบน้อมและเพิ่งสักการะ
มานดาและบิดาทั้ง ๒ นั้นด้วยเข้าและน้ำ
ด้วยผ้านุ่งผ้าห่มและบ่อนนอน ด้วยการอบโตและอาบน้ำให้
และด้วยการล้างตีนทั้ง ๒ ให้ท่าน

[๑๗๓] ย้อนการบำรุงมานดาและบิดาทั้ง ๒ นั้น
บัณฑิตทั้งหลายจึ่งสันเสินเขาในโลกนี้อย่างแน่นอน
เขาตายไปแล้ว ย่อมบันเทิงในสะหวัน ดังนี้แล

**โสนะนันทะชาดกที่ ๒ จบ**

## ลวมชาดกที่มีในนิบาดนี้

๑. กุสะชาดก ๒. โสนะนันทะชาดก

**สัตตะตินิบาดจบ**

# ๒๑. อะสีตินิบาด

## ๑. จูละหังสะชาดก (๕๓๓)
## ว่าด้วยพะยาหงส์ติดบ้วง

(พะยาหงส์โพธิสัตว์เมื่อจะทดลองใจหงส์สุมุขะ จึ่งกล่าวว่า)

[๑] ท่านสุมุขะ ฝูงหงส์บ่ห่วงแล พากันบินหนีไป
แม่นท่านก็จิ่งหนีไปเทิ้น อย่ามัวกังวนอยู่เลีย
ความเป็นสะหายบ่มีอยู่ในผู้ติดบ้วง

(ທ້າວສຸມຸຂະກ່າວວ່າ)

[໔] ຂ້າພຣະອົງຈະໜີໄປບໍ່ໜີໄປກໍຕາມ
ຍ້ອນການໜີໄປແລະບໍ່ໜີໄປນັ້ນ ຂ້າພຣະອົງຈະບໍ່ຕາຍກໍເປັນໄປບໍ່ໄດ້
ເມື່ອພຣະອົງມີຄວາມສຸກ ຂ້າພຣະອົງໄດ້ເພິ່ງພາອາໄສ
ເມື່ອພຣະອົງມີຄວາມທຸກ ຂ້າພຣະອົງຈະເພິ່ງລະຖິ້ມໄປໄດ້ແນວໃດ

[໕] ການຕາຍພ້ອມກັບພຣະອົງທໍ່ນັ້ນ
ປະເສີດກວ່າການມີຊີວິດຢູ່ໂດຍປາສະຈາກພຣະອົງ
ການມີຊີວິດໂດຍປາສະຈາກພຣະອົງຈະປະເສີດອັນໃດ

[໖] ຂ້າແດ່ ມະຫາຣາດ ການທີ່ຂ້າພຣະອົງລະຖິ້ມພຣະອົງ
ຜູ້ເຖິງຄວາມທຸກແນວນີ້ໄປ ນັ້ນບໍ່ເປັນທຳເລີຍ
ຂ້າແດ່ ພຣະອົງຜູ້ເປັນອະທິບໍດີແຫ່ງໝູ່ວິຫົກ
ຂ້າພຣະອົງພໍໃຈຄະຕິຂອງພຣະອົງ

(ພະຍາຫົງໂພທິສັດກ່າວວ່າ)

[໖] ຄະຕິຂອງເຮົາຜູ້ຕິດບ້ວງຈະເປັນແນວອື່ນໄປ
ຈາກໂຮງຄົວໃຫຍ່ໄດ້ແນວໃດນໍ
ທ່ານມີປັນຍາຄືຄວາມຄິດພົ້ນບ້ວງມາແລ້ວ
ຈະພໍໃຈຄະຕິນັ້ນໄດ້ແນວໃດ

[໗] ດຽວກ່ອນພໍ່ປັກສີ ທ່ານເຫັນປະໂຫຍດຂອງເຮົາ ຂອງທ່ານ
ຫຼືຂອງຍາດທັງຫຼາຍທີ່ເຫຼືອແນວໃດ
ໃນເມື່ອເຮົາທັງ ໔ ຈະສິ້ນຊີວິດ

[໘] ພໍ່ປັກສີຜູ້ມີປີກທັງ ໔ ເໝືອນຄຳ
ເມື່ອທ່ານສະລະຊີວິດ ຍ້ອນຄຸນອັນປະຈັກແນວນີ້
ກໍຄືຄົນຕາບອດ ຕົກຢູ່ໃນຄວາມມືດມິດ
ຈະເພິ່ງເຮັດປະໂຫຍດອັນໃດໃຫ້ສະຫວ່າງສະໄຫວນໍ

(ທ້າວສຸມຸຂະກ່າວຕອບວ່າ)

[໙] ຂ້າແດ່ ພຣະອົງຜູ້ປະເສີດກວ່າໝູ່ຫົງ

ເປັນຫຍັງນໍ ພຣະອົງຈຶ່ງບໍ່ຊົງຮູ້ປະໂຫຍດໃນທໍາ
ທໍາທີ່ມີຄົນບູຊາ ຍ່ອມຊີ້ປະໂຫຍດແກ່ເຫຼົ່າສັດ

[໙] ຂ້າພຣະອົງນັ້ນມຸ້ງທໍາຢູ່ ໄດ້ເຫັນປະໂຫຍດອັນເກີດຂຶ້ນຈາກທໍາ
ແລະຄວາມພັກດີໃນພຣະອົງຈຶ່ງບໍ່ຄໍານຶງເຖິງຊີວິດ

[໑໐] ມິດເມື່ອຣະນຶກເຖິງທໍາ
ບໍ່ເພິ່ງປະຖິ້ມມິດໃນຍາມອັນຕະລາຍແມ່ນຍ້ອນເຫດແຫ່ງຊີວິດ
ນີ້ເປັນທໍາຂອງສັດຕະບຸຣຸດທັງຫຼາຍໂດຍແທ້

(ພະຍາຫົງໂພທິສັດ ຈຶ່ງກ່າວວ່າ)

[໑໑] ທໍານີ້ທ່ານກໍປະພຶດແລ້ວ
ແລະຄວາມພັກດີໃນເຮົາກໍຜາກົດຄັກແລ້ວ
ຂໍທ່ານຈົ່ງເຮັດຕາມຄວາມຕ້ອງການຂອງເຮົາເທີ້ນ
ເຮົາອະນຸຍາດທ່ານແລ້ວຈົ່ງໜີໄປ

[໑໒] ກໍແລເມື່ອເວລາຜ່ານພົ້ນໄປແມ່ນແນວນີ້
ສ່ວນທີ່ບົກຜ່ອງອັນໃດທີ່ເຮົາໄດ້ເຮັດໄວ້ແລ້ວແກ່ໝູ່ຍາດ
ສ່ວນທີ່ບົກຜ່ອງນັ້ນທ່ານເພິ່ງສັງວອນຢ່າງຍິ່ງ
ໃຫ້ເຖິງພ້ອມດ້ວຍປັນຍາເທີ້ນ

[໑໓] ເມື່ອພະຍາຫົງ ໂຕປະເສີດ ຜູ້ມີຄວາມປະພຶດຢ່າງພຣະອະຣິຍະ
ເປີກສາກັນຢູ່ແນວນີ້ ດ້ວຍປະການດັ່ງນີ້
ນາຍພານກໍໄດ້ຜາກົດຕໍ່ໜ້າ
ເໝືອນພະຍາມັດຈຸຣາດຜາກົດແກ່ຄົນໄຂ້

[໑໔] ນົກທັງ ໔ ຜູ້ເກື້ອກູນກັນແລະກັນມາສິ້ນການລະນານເຫຼົ່ານັ້ນ
ເຫັນສັດຕູແລ້ວກໍຈັບມິດເສີຍຢູ່
ບໍ່ເຄື່ອນໄຫວໄປຈາກບ່ອນຈັບ

[໑໕] ສ່ວນນາຍພານສັດຕູຂອງນົກໄດ້ເຫັນເຫຼົ່າພະຍາຫົງທະຕະຣັດຖະ
ກໍາລັງບິນຂຶ້ນໄປຈາກບ່ອນນັ້ນ ໆ
ຈຶ່ງໄດ້ຟ້າວຢ່າງກ້າວເຂົ້າໄປຫາພະຍາຫົງທັງ ໔ ໂດຍໄວ

[๑໖] ກໍນາຍພານນັ້ນເມື່ອຟ້າວຍ່າງກ້າວເຂົ້າໄປໃກ້ພະຍາຫົງທັງ ໔
ຍ່າງກ້າວໄປກໍຄິດໄປຢູ່ວ່າ ຕິດບໍຕິດ

[๑໗] ເຫັນຫົງຕິດບ້ວງຈັບຢູ່ພຽງໂຕດຽວ
ອີກໂຕໜຶ່ງບໍ່ຕິດ ຈັບຢູ່ໃກ້ ໆ
ແຕ່ເພ່ງແນມໂຕທີ່ເປັນທຸກເຊິ່ງຕິດບ້ວງ

[๑໘] ຈາກນັ້ນ ພານນັ້ນກໍເກີດຄວາມສົງໄສ
ຈຶ່ງໄດ້ຖາມຫົງທັງ ໔ ໂຕເຊິ່ງເປັນຫົວໜ້າໝູ່ນົກ
ມີຮ່າງກາຍຈະເລີນເຕີບໃຫຍ່ທີ່ຈັບຢູ່ວ່າ

[๑໙] ຫົງໂຕທີ່ຕິດບ້ວງໃຫຍ່ບໍ່ກຳນົດທິດທາງທີ່ຈະບິນໜີໄປ
ພໍ່ປັກສີ ແຕ່ເຈົ້າບໍ່ຕິດບ້ວງ
ຍັງມີກຳລັງຢູ່ ເປັນຫຍັງຈຶ່ງບໍ່ບິນໜີໄປ

[໔໐] ຫົງໂຕນີ້ເປັນອັນໃດກັບເຈົ້າ
ເຈົ້າພົ້ນແລ້ວຍັງເຝົ້າຫົງໂຕທີ່ຕິດບ້ວງຢູ່ໃກ້ ໆ
ນົກທັງຫຼາຍພາກັນລະຖິ້ມໜີໄປ
ເປັນຫຍັງເຈົ້າຈຶ່ງເຫຼືອຢູ່ແຕ່ຜູ້ດຽວ

(ຫົງສຸມຸຂະຕອບວ່າ)

[໔໑] ນີ້ທ່ານຜູ້ເປັນສັດຕູຂອງນົກ ພະຍາຫົງນັ້ນເປັນຣາຊາຂອງຂ້າພະເຈົ້າ
ແລະເປັນເພື່ອນສະເໝີດ້ວຍຊີວິດຂອງຂ້າພະເຈົ້າ
ຂ້າພະເຈົ້າຈັກບໍ່ລະຖິ້ມພຣະອົງໄປ
ຈົນກວ່າວາຣະແຫ່ງຄວາມຕາຍຈະມາເຖິງ

(ນາຍພານກ່າວວ່າ)

[໔໒] ກໍເປັນຫຍັງພະຍາຫົງນີ້ຈຶ່ງບໍ່ເຫັນບ້ວງທີ່ດັກໄວ້ແລ້ວ
ຄວາມຈິງການຮູ້ເຖິງອັນຕະລາຍເປັນເຫດຂອງຄົນຜູ້ເປັນໃຫຍ່
ຍ້ອນເຫດນັ້ນຜູ້ເປັນໃຫຍ່ເຫຼົ່ານັ້ນຄວນຈະຮູ້ເທົ່າທັນອັນຕະລາຍ

(ຫົງສຸມຸຂະຕອບວ່າ)

[໔໓]	ໃນການໃດຄວາມເສື່ອມຍ່ອມມີເມື່ອເຖິງເວລາຈະສິ້ນຊີວິດ
ໃນການນັ້ນແມ່ນສັດຈະເຂົ້າໃກ້ຕາໜ່າງແລະບ້ວງກໍບໍ່ຮູ້

[໔໔]	ທ່ານຜູ້ມີປັນຍາຫຼາຍ ກໍແລບ້ວງທັງຫຼາຍທີ່ເຂົາດັກໄວ້
ມີຢູ່ຫຼາຍຊະນິດນຳກັນ ໃນເມື່ອເຖິງເວລາຈະສິ້ນຊີວິດແນວນີ້
ສັດທັງຫຼາຍຍ່ອມເຂົ້າໄປຕິດບ້ວງທີ່ເຂົາເຊື່ອງດັກໄວ້

(ຫົງສຸມຸຂະເມື່ອຈະຂໍຊີວິດຂອງພະຍາຫົງໂພທິສັດ ຈຶ່ງກ່າວວ່າ)

[໔໕]	ກໍການຢູ່ຮ່ວມກັບທ່ານນີ້ເພິ່ງມີຄວາມສຸກເປັນກຳໄລນໍ
ອັນໜຶ່ງ ຂໍທ່ານຈົ່ງອະນຸຍາດໃຫ້ຂ້າພະເຈົ້າທັງ ໒ ໄປ
ຂໍທ່ານເພິ່ງໃຫ້ຊີວິດແກ່ຂ້າພະເຈົ້າທັງ ໒ ດ້ວຍເທີ້ນ

(ນາຍພານຈຶ່ງກ່າວວ່າ)

[໔໖]	ທ່ານບໍ່ໄດ້ຕິດບ້ວງຂອງຂ້າພະເຈົ້າ
ແລະຂ້າພະເຈົ້າບໍ່ປະສົງຈະຂ້າທ່ານ
ທ່ານຈົ່ງຟ້າວໄປຈາກບ່ອນນີ້ຕາມຄວາມປາຖະໜາ
ແລະຈົ່ງມີຊີວິດຢູ່ຢ່າງປາສະຈາກຄວາມທຸກຕະຫຼອດການລະນານເທີ້ນ

(ຫົງສຸມຸຂະໄດ້ກ່າວວ່າ)

[໔໗]	ຂ້າພະເຈົ້າບໍ່ປະສົງແນວນັ້ນເລີຍ ນອກຈາກຊີວິດຂອງພະຍາຫົງນີ້
ຫາກທ່ານຍິນດີຫົງໂຕດຽວ ຂໍທ່ານຈົ່ງປ່ອຍພະຍາຫົງນັ້ນ
ແລະຈົ່ງກິນຂ້າພະເຈົ້າແທນເທີ້ນ

[໔໘]	ຂ້າພະເຈົ້າທັງ ໒ ມີຊວດຊົງສັນຖານແລະໄວສະເໝີກັນ
ທ່ານຈະບໍ່ມີລາຍໄດ້ລຸດຄ່າລົງເລີຍ
ຂໍທ່ານຈົ່ງພໍໃຈດ້ວຍການແລກປ່ຽນແນວນີ້

[໔໙]	ເຊີນເທີ້ນເຊີນທ່ານຮິ່ນຕອງເລື້ອງນັ້ນເບິ່ງໃຫ້ດີ
ບັນດາຂ້າພະເຈົ້າທັງ ໒ ຂໍທ່ານຈົ່ງມີຄວາມພໍໃຈ
ທ່ານຈົ່ງໃຊ້ບ້ວງມັດຂ້າພະເຈົ້າໄວ້ກ່ອນ
ຈົ່ງປ່ອຍພະຍານົກໄປໃນພາຍຫຼັງ

[໕໐]	ອັນໜຶ່ງ ເມື່ອທ່ານກະທຳຕາມຄຳຂໍຮ້ອງ

ລາຍໄດ້ຂອງທ່ານກໍຈະມີທີ່ເກົ່າດ້ວຍ
ແລະທ່ານຈະເພິ່ງມີໄມຕີກັບເຫຼົ່າພະຍາຫົງທະຕະຣັດຖະໄປຕະຫຼອດຊີວິດ

(ນາຍພານ ເມື່ອຈະຍົກພະຍາຫົງໂພທິສັດໃຫ້ເປັນລາງວັນແກ່ຫົງສຸມຸຂະ ຈຶ່ງກ່າວວ່າ)

[໘໑] ຂໍມິດອຳມາດຂ້າທາດບໍລິວານບຸດພັນລະຍາ
ແລະພວກພ້ອງເຜົ່າພັນທັງຫຼາຍໝູ່ໃຫຍ່
ຈົ່ງເຫັນພະຍາຫົງຜູ້ພົ້ນໄປແລ້ວຈາກບ່ອນນີ້ຍ້ອນທ່ານເທີ້ນ

[໘໒] ກໍບັນດາມິດທັງຫຼາຍຫຼວງຫຼາຍ
ມິດທັງຫຼາຍເຊັ່ນກັບທ່ານຜູ້ເປັນເພື່ອນຮ່ວມຊີວິດ
ຂອງພະຍາຫົງທະຕະຣັດຖະເຫຼົ່ານັ້ນບໍ່ມີຢູ່ໃນໂລກນີ້

[໘໓] ຂ້າພະເຈົ້າຍອມປ່ອຍສະຫາຍຂອງທ່ານ
ຂໍພະຍາຫົງຈົ່ງບິນຕາມທ່ານໄປ
ທ່ານທັງ ໒ ຈົ່ງຟ້າວໄປຈາກບ່ອນນີ້ຕາມຄວາມປາຖະໜາ
ຈົ່ງຮຸ່ງເຮືອງຢູ່ໃນທ່າມກາງແຫ່ງຍາດເທີ້ນ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໘໔] ຫົງສຸມຸຂະຜູ້ມີຄວາມເຄົາລົບຕໍ່ຜູ້ເປັນນາຍນັ້ນ
ມີຄວາມພໍໃຈຍ້ອນພະຍາຫົງຜູ້ເປັນນາຍພົ້ນຈາກບ້ວງແລ້ວ
ເມື່ອຈະກ່າວວາຈາອັນຣະຣື່ນຫູ ຈຶ່ງກ່າວວ່າ

[໘໕] ນາຍພານ ມື້ນີ້ຂ້າພະເຈົ້າຍິນດີເບີກບານໃຈ
ຍ້ອນໄດ້ເຫັນພະຍານົກພົ້ນຈາກບ້ວງແລ້ວສັນໃດ
ຂໍທ່ານຈົ່ງຍິນດີເບີກບານໃຈພ້ອມກັບໝູ່ຍາດທັງປວງສັນນັ້ນເທີ້ນ

(ພະຍາຫົງສຸມຸຂະກ່າວກັບນາຍພານວ່າ)

[໘໖] ມາເທີ້ນ ຂ້າພະເຈົ້າຈະບອກທ່ານໂດຍວິທີທີ່ທ່ານຈະໄດ້ລາບ
ພະຍາຫົງທະຕະຣັດຖະນີ້ບໍ່ໄດ້ມຸ້ງຮ້າຍອັນໃດຕໍ່ທ່ານເລີຍ

[໘໗] ທ່ານຈົ່ງຟ້າວນຳຂ້າພະເຈົ້າທັງ ໒
ເຊິ່ງຈັບຢູ່ທີ່ຫາບທັງ ໒ ຂ້າງເປັນປົກກະຕິ ບໍ່ຖືກຜູກມັດ
ໄປພາຍໃນເມືອງແລ້ວສະແດງຕໍ່ພຣະຣາຊາວ່າ

[໓໗] ຂ້າແດ່ ມະຫາຣາດ ພະຍາຫົງທະຕະຣັດຖະທັງ ໘ ນີ້
ເປັນອະທິບໍດີແຫ່ງຫົງ ຫົງນີ້ເປັນຣາຊາແຫ່ງຫົງທັງຫຼາຍ
ສ່ວນອີກໂຕໜຶ່ງນີ້ເປັນເສນາບໍດີ

[໓໙] ພຣະຣາຊາຜູ້ຊົງເປັນນະຣາທິບໍດີທອດພຣະເນດເຫັນພະຍາຫົງນີ້ແລ້ວ
ຈະຊົງປຣີດາ ຍິນດີ ພໍພຣະທະໄທ
ຈະພຣະຣາດຊະທານພຣະຣາດຊະຊັບໃຫ້ທ່ານ
ເປັນຈຳນວນຫຼາຍຢ່າງບໍ່ຕ້ອງສົງໄສ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໔໐] ນາຍພານໄດ້ສະດັບຄຳຂອງຫົງສຸມຸຂະນັ້ນແລ້ວ
ໄດ້ຈັດແຈງກິດຈະວຽກງານໃຫ້ສຳເລັດຮຽບຮ້ອຍແລ້ວ
ຟ້າວໄປສູ່ພາຍໃນເມືອງ ໄດ້ສະແດງຫົງທັງ ໘ ເຊິ່ງຈັບຢູ່
ທີ່ຫາບທັງ ໘ ຂ້າງເປັນປົກກະຕິ ບໍ່ຖືກຜູກມັດແດ່ພຣະຣາຊາວ່າ

[໔໑] ຂ້າແດ່ ມະຫາຣາດ ພະຍາຫົງທະຕະຣັດຖະທັງຫຼາຍເຫຼົ່ານີ້
ເປັນອະທິບໍດີແຫ່ງຫົງ ຫົງໂຕນີ້ເປັນຣາຊາແຫ່ງຫົງທັງຫຼາຍ
ສ່ວນອີກໂຕໜຶ່ງນີ້ເປັນເສນາບໍດີ

(ພຣະຣາຊາຣັບສັ່ງຖາມວ່າ)

[໔໘] ກໍວິຫົກເຫຼົ່ານີ້ຕົກຢູ່ໃນເງື້ອມມືຂອງເຈົ້າໄດ້ແນວໃດ
ເຈົ້າເປັນພານຈັບວິຫົກທີ່ເປັນໃຫຍ່ກວ່າວິຫົກທັງຫຼາຍ
ມາໃນບ່ອນນີ້ໄດ້ແນວໃດ

(ນາຍພານຂາບທູນວ່າ)

[໔໓] ຂ້າແດ່ ພຣະອົງຜູ້ເປັນໃຫຍ່ແຫ່ງຊົນ
ບ້ວງເຫຼົ່ານີ້ຂ້າພຣະອົງໄດ້ວາງໄວ້ທີ່ເປືອກຕົມທັງຫຼາຍ
ເຊິ່ງເປັນສະຖານທີ່ທີ່ຂ້າພຣະອົງເຂົ້າໃຈວ່າ
ເປັນສະຖານທີ່ປະຊຸມແຫ່ງນົກ
ເປັນສະຖານທີ່ຕັດຊີວິດນົກທັງຫຼາຍ

[໔໔] ພະຍາຫົງເຂົ້າມາໃກ້ບ້ວງເຊັ່ນນັ້ນແລ້ວກໍບໍ່ຮູ້

ສ່ວນນົກໂຕນີ້ບໍ່ໄດ້ຕິດບ້ວງ ແຕ່ຈັບຢູ່ໃກ້ ໆ ພະຍາຫົງນັ້ນ
ໄດ້ເວົ້າກັບຂ້າພຣະອົງ

[໔໕] ວິຫົກຜູ້ປະກອບແລ້ວໃນທຳ
ເມື່ອບາກບັ່ນໃນປະໂຫຍດຂອງຜູ້ເປັນນາຍ
ໄດ້ປະກາດພາວະອັນອຸດົມເຊິ່ງຄົນຜູ້ບໍ່ແມ່ນອະຣິຍະກະທຳໄດ້ຍາກ

[໔໖] ວິຫົກນີ້ຍັງຄວນທີ່ຈະມີຊີວິດຢູ່ ແຕ່ກັບສະລະຊີວິດຂອງຕົນເອງ
ຈັບຢູ່ຢ່າງບໍ່ທອດຖອນທໍ້ແທ້ໃຈ
ວິງວອນຮ້ອງຂໍຊີວິດຂອງຜູ້ເປັນນາຍ

[໔໗] ຂ້າພຣະອົງສະດັບຄຳຂອງວິຫົກນັ້ນແລ້ວຈຶ່ງກັບເຫຼື້ອມໃສ
ຈາກນັ້ນຈຶ່ງໄດ້ປົດປ່ອຍພະຍາຫົງຈາກບ້ວງ
ແລະອະນຸຍາດໃຫ້ໄປໄດ້ຕາມສະບາຍ

[໔໘] ຫົງສຸຊຸມະນັ້ນມີຄວາມເຄົາລົບຕໍ່ຜູ້ເປັນນາຍ
ມີຄວາມພໍໃຈຍ້ອນພະຍາຫົງຜູ້ເປັນນາຍພົ້ນຈາກບ້ວງ
ເມື່ອຈະກ່າວວາຈາອັນຣະຣື່ນຫູ ຈຶ່ງໄດ້ກ່າວວ່າ

[໔໙] ນາຍພານ ມື້ນີ້ຂ້າພະເຈົ້າຍິນດີເບີກບານໃຈ
ຍ້ອນໄດ້ເຫັນພະຍານົກພົ້ນຈາກບ້ວງແລ້ວສັນໃດ
ຂໍທ່ານຈົ່ງຍິນດີເບີກບານໃຈພ້ອມກັບໝູ່ຍາດທັງປວງສັນນັ້ນເທີ້ນ

[໕໐] ມາເທີ້ນ ຂ້າພະເຈົ້າຈະບອກທ່ານໂດຍວິທີທີ່ທ່ານຈະໄດ້ລາບ
ພະຍາຫົງທະຕະຣັດຖະນີ້ບໍ່ໄດ້ມຸ້ງຮ້າຍອັນໃດຕໍ່ທ່ານເລີຍ

[໕໑] ທ່ານຈົ່ງຟ້າວນຳຂ້າພະເຈົ້າທັງ ໒
ເຊິ່ງຈັບຢູ່ທີ່ຫາບທັງ ໒ ຂ້າງເປັນປົກກະຕິ ບໍ່ຖືກຜູກມັດ
ໄປພາຍໃນເມືອງແລ້ວສະແດງຕໍ່ພຣະຣາຊາວ່າ

[໕໒] ຂ້າແດ່ ມະຫາຣາດ ພະຍາຫົງທະຕະຣັດຖະທັງ ໒ ນີ້
ເປັນອະທິບໍດີແຫ່ງຫົງ ຫົງນີ້ເປັນຣາຊາແຫ່ງຫົງທັງຫຼາຍ
ສ່ວນອີກໂຕໜຶ່ງນີ້ເປັນເສນາບໍດີ

[໕໓] ພຣະຣາຊາຜູ້ຊົງເປັນນະຣາທິບໍດີທອດພຣະເນດເຫັນພະຍາຫົງນີ້ແລ້ວ

ຈະຊົງປຣິດາ ຍິນດີ ພໍພຣະຫະໄທ
ຈະພຣະຣາດຊະທານພຣະຣາດຊະຊັບໃຫ້ທ່ານ
ເປັນຈຳນວນຫຼາຍຢ່າງບໍ່ຕ້ອງສົງໄສ

[໕໔] ຫົງທັງ ໔ ເຫຼົ່ານີ້ຂ້າພຣະອົງນຳມາ
ຕາມຄຳຂອງຫົງສຸຊຸມະນັ້ນ ດ້ວຍປະການດັ່ງນີ້
ຄວາມຈິງ ຂ້າພຣະອົງໄດ້ອະນຸຍາດ
ໃຫ້ຫົງທັງ ໔ ເຫຼົ່ານີ້ຢູ່ທີ່ສະນັ້ນຄືເກົ່າ

[໕໕] ກໍສຸມຸຂະພະຍາປັກສີທິຊາຊາດໂຕນີ້ນັ້ນ
ເປັນຫົງປະກອບຢູ່ໃນທຳຢ່າງຍິ່ງ
ແມ່ນຕົກຢູ່ໃນເງື້ອມມືຂອງສັດຕູແນວນີ້
ກໍຍັງເຮັດນາຍພານເຊັ່ນຂ້າພຣະອົງໃຫ້ເກີດຄວາມອ່ອນໂຍນໄດ້

[໕໖] ຂ້າແດ່ ພຣະອົງຜູ້ເປັນອະທິບໍດີແຫ່ງມະນຸດ
ກໍໃນເຮືອນພານນິກຖຸກແຫ່ງຂ້າພຣະອົງບໍ່ໄດ້ເຫັນ
ເຄື່ອງບັນນາການແນວອື່ນຄືແນວນີ້ສຳລັບພຣະອົງເລີຍ
ຂໍພຣະອົງໂຜດທອດພຣະເນດເຄື່ອງບັນນາການນັ້ນເທີ້ນ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈິ່ງຕັດວ່າ)

[໕໗] ພະຍາຫົງເມື່ອເຫັນພຣະຣາຊາປະທັບນັ່ງ
ເທິງຕັ່ງຄຳອັນສວຍງາມ
ເມື່ອຈະກ່າວວາຈາອັນຣະຣື່ນຫູ ຈິ່ງກ່າວວ່າ

[໕໘] ພຣະອົງຜູ້ຊົງພຣະຈະເລີນ ຊົງສຸກສຳຣານດີຢູ່ບໍ
ບໍ່ມີພະຍາດບຽດບຽນບໍ
ແຄວ້ນອັນຮັ່ງມີນີ້ພຣະອົງຊົງປົກຄອງໂດຍທຳບໍ

(ພຣະຣາຊາຕັດຕອບວ່າ)

[໕໙] ເຮົາສຸກສຳຣານດີພະຍາຫົງ ແລະບໍ່ມີພະຍາດບຽດບຽນ
ອັນໜຶ່ງ ແຄວ້ນອັນຮັ່ງມີນີ້ເຮົາກໍປົກຄອງໂດຍທຳ

(ພະຍາຫົງໂພທິສັດທູນຖາມວ່າ)

[໖໐] ໂທດບາງສິ່ງບາງຢ່າງໃນໝູ່ອຳນາດຂອງພຣະອົງບໍ່ມີບໍ
ອັນໜຶ່ງ ອຳນາດເຫຼົ່ານັ້ນບໍ່ກັງວົນເຖິງຊີວິດ
ຍ້ອນຣາດຊະກິດອັນເປັນປະໂຫຍດຕໍ່ພຣະອົງບໍ

(ພຣະຣາຊາຕັດຕອບວ່າ)

[໖໑] ໂທດບາງສິ່ງບາງຢ່າງໃນໝູ່ອຳນາດຂອງເຮົາກໍບໍ່ມີ
ອັນໜຶ່ງ ແມ່ນອຳນາດເຫຼົ່ານັ້ນກໍບໍ່ກັງວົນເຖິງຊີວິດ
ຍ້ອນຣາດຊະກິດອັນເປັນປະໂຫຍດຕໍ່ເຮົາເລີຍ

(ພະຍາຫົງໂພທິສັດທູນຖາມວ່າ)

[໖໒] ພຣະຣາດຊະເທວີຜູ້ມີພຣະຊາດສະເໝີກັບພຣະອົງ
ຊົງເຊື່ອຟັງ ຕັດພຣະວາຈາອ່ອນຫວານໜ້າຮັກ
ຊົງມີພຣະໂອຣົດປະກອບດ້ວຍພຣະຮູບໂສມແລະອິດສະຣິຍະຍົດ
ຊົງຄວນຕາມພຣະອັດທະຍາໄສຂອງພຣະອົງບໍ

(ພຣະຣາຊາຕັດຕອບວ່າ)

[໖໓] ກໍພຣະເທວີຜູ້ມີພຣະຊາດສະເໝີກັບເຮົາ
ເຊື່ອຟັງ ກ່າວວາຈາອ່ອນຫວານໜ້າຮັກ
ມີພຣະໂອຣົດປະກອບດ້ວຍພຣະຮູບໂສມແລະອິດສະຣິຍະຍົດ
ຍັງຄວນຕາມອັດທະຍາໄສຂອງເຮົາຢູ່

[໖໔] ທ່ານຜູ້ຈະເລີນຕົກຢູ່ໃນເງື້ອມມືຂອງສັດຕູຜູ້ດຸຮ້າຍນັ້ນ
ເຖິງຄວາມລຳບາກຫຼາຍຍ້ອນອັນຕະລາຍເບື້ອງຕົ້ນນັ້ນບໍ

[໖໕] ນາຍພານໄດ້ແລ່ນເຂົ້າໄປໃຊ້ໄມ້ຄ້ອນຄຸ້ຍຸນຕີທ່ານບໍ
ຍ້ອນຄົນຕໍ່າຊາມເຫຼົ່ານີ້ຈະມີປົກກະຕິເປັນແນວນີ້ໃນຂະນະນັ້ນ

(ພະຍາຫົງໂພທິສັດຂາບທູນວ່າ)

[໖໖] ຂໍເດຊະມະຫາຣາດ ໃນເວລາມີອັນຕະລາຍແນວນີ້
ຄວາມປອດໄພໄດ້ມີແລ້ວ ດ້ວຍວ່ານາຍພານຜູ້ນີ້
ບໍ່ໄດ້ດຳເນີນການບາງສິ່ງບາງຢ່າງ
ໃນຂ້າພຣະອົງທັງ ໔ ຄືສັດຕູແຕ່ຢ່າງໃດ

[໖໗] ນາຍພານຄ່ອຍ ໆ ກ້າວເຂົ້າໄປຫາແລະໄດ້ປາໄສຂຶ້ນກ່ອນ
ໃນການນັ້ນສຸມຸຂະບັນດິດຜູ້ນີ້ແລໄດ້ກ່າວຕອບ

[໖໘] ນາຍພານສະດັບຄຳຂອງສຸມຸກວິຫົກນັ້ນແລ້ວຈຶ່ງກັບເຫຼື້ອມໃສ
ຈາກນັ້ນຈຶ່ງໄດ້ປົດປ່ອຍຂ້າພຣະອົງຈາກບ້ວງ
ແລະອະນຸຍາດໃຫ້ໄປໄດ້ຕາມສະບາຍ

[໖໙] ກໍການມາສູ່ສຳນັກຂອງພຣະອົງຜູ້ຊົງພຣະຈະເລີນນີ້
ສຸມຸຂະວິຫົກນັ້ນແລປາຖະໜາຊັບເພື່ອນາຍພານຜູ້ນີ້
ໄດ້ຄິດແລ້ວເພື່ອປະໂຫຍດແກ່ເຂົາ

(ພຣະຣາຊາຕັດວ່າ)

[໗໐] ກໍການມາຂອງທ່ານຜູ້ຈະເລີນນີ້ເປັນການມາດີແລ້ວຢ່າງແນ່ນອນ
ແລະເຮົາກໍຍິນດີຍ້ອນໄດ້ເຫັນທ່ານ
ອັນໜຶ່ງ ແມ່ນນາຍພານນີ້ຈະໄດ້ຊັບເຄື່ອງພໍໃຈຈຳນວນຫຼາຍ
ຕາມທີ່ຕົນປາຖະໜາ

(ພຣະສາດສະດາເມື່ອຈະຊົງເຜີຍຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໗໑] ພຣະຣາຊາຜູ້ເປັນອະທິບໍດີແຫ່ງມະນຸດ
ຊົງຍັງນາຍພານໃຫ້ອີ່ມເອມໃຈດ້ວຍໂພກະທັງຫຼາຍແລ້ວ
ເມື່ອຈະຕັດວາຈາອັນຣະຣື່ນຫູ ຈຶ່ງຕັດກັບພະຍາຫົງວ່າ

[໗໔] ໄດ້ຂ່າວວ່າ ອຳນາດຂອງເຮົາຜູ້ຊົງທຳ
ຍ່ອມເປັນໄປໃນບ່ອນມີປະມານເລັກໜ້ອຍ
ຄວາມເປັນໃຫຍ່ໃນບ່ອນທັງປວງຈົ່ງມີແກ່ທ່ານ
ຂໍທ່ານຈົ່ງປົກຄອງຕາມຄວາມປາຖະໜາເທີ້ນ

[໗໓] ອັນໜຶ່ງ ສິ່ງອື່ນໃດຍ່ອມເຂົ້າໄປສຳເລັດເພື່ອປະໂຫຍດ
ແກ່ການຕ້ານທານຫຼືເພື່ອການສະເຫວີຍຣາດຊະສົມບັດໄດ້
ສິ່ງນັ້ນເຊິ່ງເປັນຊັບເຄື່ອງພໍໃຈເຮົາຂໍຍົກໃຫ້ທ່ານ
ແລະຂໍສະລະອິດສະຣິຍະຍົດໃຫ້ແກ່ທ່ານດ້ວຍ

(ພຣະຣາຊາເມື່ອຈະຊົງສົນທະນາກັບຫົງສຸມຸຂະ ຈຶ່ງຕັດວ່າ)

[໗໔] ກໍຖ້າວ່າທ້າວສຸມຸຂະຜູ້ເປັນບັນດິດເຖິງພ້ອມດ້ວຍປັນຍານີ້
ຈະເພິ່ງເຈລະຈາກັບເຮົາຕາມຄວາມປາຖະໜາແດ່
ຂໍ້ນັ້ນຈະເພິ່ງເປັນທີ່ຮັກຍິ່ງແຫ່ງເຮົາ

(ທ້າວສຸມຸຂະຂາບທູນວ່າ)

[໗໕] ຂ້າແດ່ ມະຫາຣາດ ໄນຍະວ່າ
ຂ້າພຣະອົງຄືກັບພະຍາຊ້າງເຂົ້າໄປລະຫວ່າງລີບທີນ
ບໍ່ອາດຈະເວົ້າສອດແຊກຂຶ້ນໄດ້ ນັ້ນບໍ່ແມ່ນວິໄນຂອງຂ້າພຣະອົງ

[໗໖] ພະຍາທັງນັ້ນເປັນຜູ້ປະເສີດກວ່າຂ້າພຣະອົງທັງຫຼາຍ
ສ່ວນພຣະອົງກໍເປັນຜູ້ສູງສຸດ ເປັນພຣະເຈົ້າແຜ່ນດິນ
ເປັນຍອດແຫ່ງມະນຸດ ພຣະອົງທັງ ໔
ເປັນຜູ້ອັນຂ້າພຣະອົງເພິ່ງບູຊາດ້ວຍເຫດຫຼວງຫຼາຍ

[໗໗] ຂ້າແດ່ ພຣະອົງຜູ້ເປັນອະທິບໍດີແຫ່ງມະນຸດ
ເມື່ອພຣະອົງທັງ ໔ ກຳລັງຕັດປາໄສກັນຢູ່
ເມື່ອການວິນິດໄສກຳລັງເປັນໄປຢູ່ ຂ້າພຣະອົງຜູ້ເປັນຄົນຮັບໃຊ້
ຈຶ່ງບໍ່ຄວນທີ່ຈະເວົ້າສອດແຊກຂຶ້ນໃນລະຫວ່າງ

(ພຣະຣາຊາສະດັບຄຳຂອງທ້າວສຸມຸຂະແລ້ວດີພຣະທະໄທ ຈຶ່ງຕັດວ່າ)

[໗໘] ໄດ້ຂ່າວວ່າ ໂດຍທຳມະດານາຍພານກ່າວວ່າ
ນົກນີ້ເປັນບັນດິດ
ຄວາມຈິງ ໄນຍະແນວນີ້ບໍ່ເພິ່ງມີແກ່ບຸກຄົນຜູ້ບໍ່ໄດ້ອົບຮົມຕົນເລີຍ

[໗໙] ບຸກຄົນຜູ້ມີປົກກະຕິເລີດແນວນີ້ ເປັນສັດອຸດົມແນວນີ້
ເທົ່າທີ່ເຮົາເຫັນມາມີຢູ່ ແຕ່ເຮົາບໍ່ເຫັນສັດອື່ນແນວນີ້ເລີຍ

[໘໐] ເຮົາຍິນດີຕໍ່ທ່ານທັງ ໔ ໂດຍປົກກະຕິ
ແລະຍິນດີດ້ວຍການກ່າວຄຳເວົ້າອັນມ່ວນຂອງທ່ານທັງສອງ
ອັນໜຶ່ງ ຄວາມພໍໃຈຂອງເຮົາອີກແນວໜຶ່ງ
ນັ້ນຄືການທີ່ເຮົາເພິ່ງເຫັນທ່ານທັງ ໔ ເປັນເວລາດົນ

(ພະຍາທັງໂພທິສັດເມື່ອຈະສັນເສີນພຣະຣາຊາ ຈຶ່ງຂາບທູນວ່າ)

[໗໑] ກິດອັນໃດທີ່ບຸກຄົນເພິ່ງກະທຳໃນມິດຜູ້ສູງສັກ
ກິດອັນນັ້ນພຣະອົງຊົງກະທຳແລ້ວໃນຂ້າພຣະອົງທັງ ໔
ຍ້ອນຄວາມພັກດີຕໍ່ພຣະອົງທີ່ມີຢູ່ໃນຂ້າພຣະອົງທັງຫຼາຍ
ຂ້າພຣະອົງຈຶ່ງມີຄວາມພັກດີຕໍ່ພຣະອົງໂດຍບໍ່ຕ້ອງສົງໄສ

[໗໔] ສ່ວນທາງນັ້ນ ຄວາມທຸກຄົງເກີດຂຶ້ນແລ້ວ
ໃນໝູ່ຫົງຈຳນວນຫຼາຍເປັນແນ່
ຍ້ອນບໍ່ໄດ້ພົບເຫັນຂ້າພຣະອົງທັງ ໔
ໃນລະຫວ່າງແຫ່ງໝູ່ຍາດຫຼວງຫຼາຍ

[໗໓] ຂ້າແດ່ ພຣະອົງຜູ້ຊົງຍໍ່າຍີຂ້າເສິກ
ພວກຂ້າພຣະອົງໄດ້ຮັບອະນຸມັດຈາກພຣະອົງແລ້ວ
ຈະຂໍກະທຳປະທັກຂິນພຣະອົງແລ້ວໄປພົບເຫັນໝູ່ຍາດ
ເພື່ອກຳຈັດຄວາມໂສກຂອງຫົງເຫຼົ່ານັ້ນ

[໗໔] ຂ້າພຣະອົງໄດ້ປະສົບປິຕິອັນເຕັມປ່ຽມ
ຍ້ອນໄດ້ມາເຝົ້າພຣະອົງຜູ້ຈະເລີນແນ່ແທ້
ອັນໜຶ່ງ ຄວາມຄຸ້ນກັບໝູ່ຍາດແມ່ນນີ້ກໍເພິ່ງມີປະໂຫຍດໃຫຍ່ຫຼວງ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໗໕] ພະຍາຫົງທະຕະຣັດຖະເມື່ອຂາບທູນຄຳນີ້ກັບນະຣາທິບໍດີແລ້ວ
ອາໄສການບິນໄວຢ່າງສຸດກຳລັງ ໄດ້ເຂົ້າໄປຫາໝູ່ຍາດແລ້ວ

[໗໖] ຫົງທັງຫຼາຍເຫັນພະຍາຫົງທັງ ໔ ນັ້ນ
ມາເຖິງໂດຍລຳດັບຢ່າງປອດໄພ
ຕ່າງພາກັນສົ່ງສຽງວ່າເກກ ໆ ໄດ້ເກີດສຳນຽງສຽງດັງຈົ້ງວຈ້າວ

[໗໗] ຫົງເຫຼົ່ານັ້ນຜູ້ມີຄວາມເຄົາລົບຕໍ່ຜູ້ເປັນນາຍ
ພາກັນປາບປື້ມໃຈຍ້ອນພະຍາຫົງຜູ້ເປັນນາຍພົ້ນຈາກບ້ວງ
ຈຶ່ງພາກັນຫ້ອມລ້ອມຢູ່ໂດຍຮອບ ຫົງທັງຫຼາຍໄດ້ທີ່ເພິ່ງແລ້ວ

(ພຣະສາດສະດາຕັດພຣະຄາຖາສຸດທ້າຍວ່າ)

[໗໘] ປະໂຫຍດທັງປວງຂອງບຸກຄົນຜູ້ມີກັນລະຍານະມິດ

ຍ່ອມສຳເລັດຜົນເປັນຄວາມສຸກຄວາມຈະເລີນ
ຄືພະຍາຫົງທະຕະຣັດຖະທັງ ໔ ໄດ້ຢູ່ໃກ້ໝູ່ຍາດສັນນັ້ນ

**ຈູລະຫັງສະຊາດົກທີ ໑ ຈົບ**

## ໔. ມະຫາຫັງສະຊາດົກ (໕໓໔)
## ວ່າດ້ວຍພະຍາຫົງຕິດບ້ວງ

(ພະຍາຫົງໂພທິສັດໄດ້ກ່າວ ໓ ຄາຖາວ່າ)

[໘໗] ສຸມຸຂະ ພໍ່ເນື້ອເຫຼືອງ ຜູ້ມີຜິວພັນເໝືອນຄຳ
ຫົງທັງຫຼາຍຫວັ່ນໄຫວຕໍ່ໄພອັນຕະລາຍ
ຈຶ່ງພາກັນບິນໜີໄປ
ທ່ານຈົ່ງຫຼີກໜີໄປຕາມຄວາມປາຖະໜາເທີ້ນ

[໗໐] ໝູ່ຍາດທັງຫຼາຍລະຖິ້ມເຮົາ
ຜູ້ຕິດບ້ວງໄວ້ພຽງລຳພັງ
ບໍ່ມີຄວາມເຍື່ອໃຍ ພາກັນບິນໜີໄປ
ເປັນຫຍັງຈຶ່ງເຫຼືອທ່ານຢູ່ໂຕດຽວນໍ

[໗໑] ບິນຂຶ້ນໄປເທີ້ນ ທ່ານຜູ້ປະເສີດກວ່າໝູ່ຫົງ
ຄວາມເປັນສະຫາຍບໍ່ມີໃນຜູ້ຕິດບ້ວງ
ທ່ານຢ່າທຳຄວາມບໍ່ມີທຸກໃຫ້ເສື່ອມໄປເລີຍ
ຈົ່ງໜີໄປຕາມຄວາມປາຖະໜາເທີ້ນ ສຸມຸຂະ

(ຫົງສຸມຸຂະໄດ້ຟັງດັ່ງນັ້ນ ຈຶ່ງໄດ້ກ່າວວ່າ)

[໗໔] ຂ້າແດ່ທ້າວທະຕະຣັດຖະ ຂ້າພຣະອົງ
ແມ່ນຈະມີທຸກເປັນເບື້ອງໜ້າກໍບໍ່ລະຖິ້ມພຣະອົງໄປ
ຄວາມເປັນຫຼືຄວາມຕາຍຂອງຂ້າພຣະອົງ
ຈັກມີພ້ອມກັບພຣະອົງ

[໗໓] ຂ້າແດ່ທ້າວທະຕະຣັດຖະ ຂ້າພຣະອົງ
ແມ່ນຈະມີທຸກເປັນເບື້ອງໜ້າກໍບໍ່ລະຖິ້ມພຣະອົງໄປ
ພຣະອົງບໍ່ຄວນຈະຊັກຊວນໃຫ້ຂ້າພຣະອົງ

ປະກອບກຳທີ່ບຸກຄົນຜູ້ບໍ່ປະເສີດປະກອບກັນເລີຍ

[໗໔] ຂ້າແດ່ ພຣະອົງຜູ້ປະເສີດສູງສຸດກວ່າຝູງຫົງ
ຂ້າພຣະອົງເປັນເດັກລຸ້ນດຽວກັບພຣະອົງ°
ເປັນເພື່ອນຂອງພຣະອົງ ດຳລົງຢູ່ໃນຈິດໃຈຂອງພຣະອົງ
ຂ້າພຣະອົງເປັນທີ່ຮູ້ຈັກກັນດີວ່າເປັນເສນາບໍດີຂອງພຣະອົງ

[໗໕] ຂ້າພຣະອົງໄປຈາກບ່ອນນີ້ແລ້ວ
ຈັກອະທິບາຍໃນທ່າມກາງໝູ່ຍາດໄດ້ແນວໃດ
ຂ້າແດ່ ພຣະອົງຜູ້ປະເສີດ
ຂ້າພຣະອົງລະຖິ້ມພຣະອົງຈາກບ່ອນນີ້ໄປແລ້ວ
ຈະຊີ້ແຈ່ງກັບຝູງຫົງເຫຼົ່ານັ້ນໄດ້ແນວໃດ
ຂ້າພຣະອົງຍອມສະລະຊີວິດຖິ້ມໄວ້ໃນບ່ອນນີ້
ຈະບໍ່ພະຍາຍາມເຮັດກຳອັນບໍ່ປະເສີດ

(ພະຍາຫົງໂພທິສັດເມື່ອຈະສັນເສີນຄຸນຂອງຫົງສຸມຸຂະ ຈຶ່ງກ່າວວ່າ)

[໗໖] ສຸມຸຂະ ການທີ່ທ່ານບໍ່ພະຍາຍາມທີ່ຈະປະຖິ້ມເຮົາ
ຜູ້ເປັນທັງນາຍ ເປັນທັງເພື່ອນ
ຊື່ວ່າດຳລົງຢູ່ໃນທາງຂອງພຣະອະຣິຍະ
ນັ້ນເປັນທຳຂອງໂບຣານະກະບັນດິດ

[໗໗] ກໍແລເມື່ອເຮົາເຫັນທ່ານ ກໍບໍ່ເກີດຄວາມສະດຸ້ງຢ້ານເລີຍ
ແຕ່ທ່ານຈະປະສົບອັນຕະລາຍຄືຊີວິດຂອງເຮົາທີ່ເປັນຢູ່ໃນຂະນະນີ້

(ພຣະບໍຣົມມະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໗໘] ເມື່ອພະຍາຫົງທັງ ໔ ຜູ້ປະເສີດມີຄວາມປະພຶດຢ່າງພຣະອະຣິຍະ
ກ່າວເປີກສາກັນຢູ່ແນວນີ້ ດ້ວຍປະການດັ່ງນີ້
ນາຍພານຖືໄມ້ຄ້ອນແນ້ນໝັ້ນຮີບຮ້ອນເຂົ້າມາເຖິງໂຕ

[໗໙] ຫົງສຸມຸຂະເມື່ອເຫັນນາຍພານກຳລັງຍ່າງເຂົ້າມາ
ຈຶ່ງຈັບຢູ່ເບື້ອງໜ້າພະຍາຫົງ
ເມື່ອຈະປອບພະຍາຫົງຜູ້ຢ້ານກົວໃຫ້ເບົາໃຈ
ຈຶ່ງໄດ້ກ່າວຂຶ້ນດ້ວຍສຽງອັນດັງວ່າ

[໑໐໐] ຢ່າຊົງຢ້ານເລີຍ ພຣະອົງຜູ້ປະເສີດ
ດ້ວຍວ່າ ຄົນທັງຫຼາຍເຊັ່ນກັບພຣະອົງບໍ່ເຄີຍຢ້ານເລີຍ
ຂ້າພຣະອົງຈັກປະກອບຄວາມພຽນອັນເນື່ອງດ້ວຍທຳອັນສົມຄວນ
ດ້ວຍຄວາມພຽນອັນຜ່ອງແຜ້ວນັ້ນ
ພຣະອົງຈັກພົ້ນຈາກບ້ວງໂດຍທັນທີ

(ພຣະບໍຣົມມະສາດສະດາຕັດວ່າ)

[໑໐໑] ນາຍພານໄດ້ສະດັບຄຳສຸພາສິດຂອງຫົງສຸມຸຂະນັ້ນ
ກໍມີໂລມະຊາດຊູຊັນ ຈຶ່ງໄດ້ນ້ອມອັນຊະລີຕໍ່ຫົງສຸມຸຂະນັ້ນ
ດ້ວຍກ່າວວ່າ

[໑໐໒] ເຮົາບໍ່ເຄີຍໄດ້ຍິນຫຼືເຄີຍໄດ້ເຫັນນົກເວົ້າພາສາຄົນໄດ້
ນົກເວົ້າຄຳເວົ້າອັນປະເສີດ ເປ່ງວາຈາພາສາມະນຸດໄດ້

[໑໐໓] ຫົງໂຕນີ້ເປັນອັນໃດກັບເຈົ້າ
ເຈົ້າພົ້ນແລ້ວຍັງເຝົ້າຫົງໂຕຕິດບ້ວງຢູ່ໃກ້ ໆ
ຫົງທັງຫຼາຍພາກັນລະຖິ້ມໜີໄປ
ເປັນຫຍັງເຈົ້າຈຶ່ງເຫຼືອຢູ່ແຕ່ຜູ້ດຽວ

(ຫົງສຸມຸຂະຖືກນາຍພານຖາມແລ້ວ ຈຶ່ງຕອບວ່າ)

[໑໐໔] ທ່ານຜູ້ເປັນສັດຕູຂອງຝູງນົກ
ຫົງນັ້ນເປັນຣາຊາຂອງຂ້າພະເຈົ້າ
ຂ້າພະເຈົ້າຮັບຕຳແໜ່ງເປັນເສນາບໍດີຂອງພຣະອົງ
ເມື່ອມີໄພອັນຕະລາຍ ຂ້າພະເຈົ້າບໍ່ສາມາດຈະລະຖິ້ມພຣະອົງ
ຜູ້ເປັນອະທິບໍດີແຫ່ງຝູງວິຫົກໄປໄດ້

[໑໐໕] ຫົງນັ້ນເປັນນາຍຂອງຫົງຝູງໃຫຍ່ແລະຂອງຂ້າພະເຈົ້າ
ຂໍພຣະອົງຢ່າເຖິງຄວາມພິນາດພຣະອົງດຽວເລີຍ
ນາຍພານເພື່ອນເອີຍ ຫົງນີ້ເປັນນາຍຢ່າງແທ້ຈິງ
ຂ້າພະເຈົ້າຈຶ່ງພໍໃຈທີ່ຈະຢູ່ໃກ້ ໆ ພຣະອົງ

(ນາຍພານຖາມວ່າ)

[໑໐໖] ຫົງສຸມຸຂະເອີຍ ທ່ານນອບນ້ອມຕຳແໜ່ງ
ເໝືອນກ້ອນເຂົ້າທີ່ໄດ້ຮັບ
ຊື່ວ່າປະພຶດທຳອັນປະເສີດ
ຂ້າພະເຈົ້າຍອມປ່ອຍນາຍຂອງທ່ານ
ທ່ານທັງ ໒ ຈົ່ງໄປຕາມສະບາຍເທີ້ນ

(ຫົງສຸມຸຂະຕອບວ່າ)

[໑໐໗] ເພື່ອນເອີຍ ຖ້າທ່ານດັກຫົງແລະນົກທັງຫຼາຍ
ດ້ວຍຄວາມພະຍາຍາມເພື່ອປະໂຫຍດແກ່ຕົນແລ້ວ
ຂ້າພະເຈົ້າທັງ ໒ ຂໍຮັບອະໄພທານນັ້ນຂອງທ່ານ

[໑໐໘] ຖ້າທ່ານບໍ່ດັກຫົງແລະນົກທັງຫຼາຍດ້ວຍຄວາມພະຍາຍາມ
ເພື່ອປະໂຫຍດແກ່ຕົນແລ້ວ ທ່ານຈະບໍ່ມີອິດສະຫຼະ
ເມື່ອປ່ອຍເຮົາທັງ ໒ ໄປ ຈະເພິ່ງເຮັດຕົນໃຫ້ເປັນຂະໂມຍເດີ້ນາຍພານ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນີ້ ຈຶ່ງຕັດພຣະຄາຖາວ່າ)

[໑໐໙] ທ່ານເປັນຄົນຮັບໃຊ້ຂອງພຣະຣາຊາອົງໃດ
ຈົ່ງນຳຂ້າພະເຈົ້າທັງ ໒ ໄປໃຫ້ເຖິງພຣະຣາຊາອົງນັ້ນຕາມພຣະປະສົງ
ພຣະເຈົ້າສັນຍະມະນະຈັກຊົງກະທຳ
ຕາມພຣະປະສົງໃນພຣະຣາດຊະນິເວດນັ້ນ

[໑໑໐] ນາຍພານຖືກຫົງສຸມຸຂະກ່າວແນວນີ້ ດ້ວຍປະການດັ່ງນີ້ແລ້ວ
ຈຶ່ງໃຊ້ມືປະຄອງພະຍາຫົງເນື້ອຄຳ
ໂຕມີຜິວພັນເໝືອນຄຳທັງ ໒ ໃສ່ໄວ້ໃນກົງ

[໑໑໑] ນາຍພານພາພະຍາຫົງທັງ ໒ ເຊິ່ງມີຜິວພັນຜຸດຜ່ອງ
ຄື ຫົງສຸມຸຂະແລະພະຍາຫົງທະຕະຣັດຖະເຊິ່ງຢູ່ໃນກົງຫຼີກໄປ

[໑໑໒] ພະຍາຫົງທະຕະຣັດຖະຖືກນາຍພານນຳໄປຢູ່
ໄດ້ກ່າວເນື້ອຄວາມນີ້ກັບຫົງສຸມຸຂະວ່າ
ເຮົາຢ້ານຫຼາຍ ສຸມຸຂະ
ດ້ວຍນາງພະຍາຫົງໂຕມີຜິວພັນດັ່ງຄຳ
ມີລຳຂາອ່ອນໄດ້ລັກສະນະ

ຮູ້ວ່າເຮົາຖືກຂ້າແລ້ວຈັກຂ້າໂຕຕາຍຕາມ

[໑໑໓]　ສຸມຸຂະ ກໍສຸເໜີນາງພະຍາຫົງ ແມ່ເນື້ອເຫຼືອງ
ຜູ້ເປັນທິດາຂອງພະຍາປາກຫົງຈັກຮ້ອງໄຫ້ຢ່າງແນ່ນອນ
ເໝືອນນາງນິກກະຣຸງບຜູ້ກຳພ້າຮ້ອງໄຫ້ຢູ່ທີ່ແຄມຝັ່ງສະມຸດ

(ຫົງສຸມຸຂະໄດ້ຟັງດັ່ງນັ້ນ ຈຶ່ງກ່າວຄາຖາວ່າ)

[໑໑໔]　ພຣະອົງຜູ້ເປັນໃຫຍ່ແຫ່ງສັດໂລກຄືໝູ່ຫົງ
ມີຄຸນປະມານບໍ່ໄດ້ ເປັນຄູແຫ່ງໝູ່ຄະນະໃຫຍ່
ແຕ່ກັບມົວເສົ້າໂສກຮ່ຳໄຮເຖິງຍິງຄົນດຽວແນວນີ້
ນີ້ເປັນຄືບໍ່ແມ່ນການກະທຳຂອງຄົນມີປັນຍາເລີຍ

[໑໑໕]　ລົມຍ່ອມພັດພາເອົາກິ່ນທັງ ໒ ຢ່າງ
ຄື ກິ່ນຫອມແລະກິ່ນເໝັນໄປ
ເດັກອ່ອນຍ່ອມເກັບເອົາໝາກໄມ້ທັງດິບແລະສຸກ
ຄົນຕາບອດທີ່ໂລເລຍ່ອມຮັບອາມິດສັນໃດ
ທຳມະດາຍິງກໍສັນນັ້ນ

[໑໑໖]　ພຣະອົງບໍ່ຮູ້ຈັກວິນິດໄສໃນເຫດທັງຫຼາຍ
ຜາກົດກັບຂ້າພຣະອົງຄືຄົນຈ້ຳ
ເຖິງເວລາຈະຕາຍຢູ່ແລ້ວ
ກໍຍັງບໍ່ຮູ້ກິດທີ່ຄວນເຮັດບໍຄວນເຮັດ

[໑໑໗]　ພຣະອົງສຳຄັນຍິງວ່າເປັນຜູ້ປະເສີດ
ເຫັນຈະເປັນຄົນເຄິ່ງບ້າ ຈຶ່ງຈົ່ມເພີ້ຮ່ຳໄຮໄປ
ຄວາມຈິງ ຍິງເຫຼົ່ານີ້ສາທາລະນະທົ່ວໄປແກ່ຊົນຫຼວງຫຼາຍ
ຄືໂຮງສຸຣາເປັນສະຖານທີ່ທົ່ວໄປແກ່ນັກເລງສຸຣາ

[໑໑໘]　ອັນໜຶ່ງ ຍິງນີ້ມີມາຍາຄືແປວແດດ
ເປັນເຫດແຫ່ງຄວາມໂສກເສົ້າ
ເປັນເຫດແຫ່ງພະຍາດແລະອັນຕະລາຍ
ອັນໜຶ່ງ ຍິງເຫຼົ່ານີ້ເປັນເຄື່ອງຜູກມັດອັນກ້າແຂງ ເປັນບ້ວງ
ເປັນຖ້ຳ ແລະເປັນບ່ອນຢູ່ອາໄສຂອງມັດຈຸຣາດ

ບຸຣຸດໃດວາງໃຈໃນຍິງເຫຼົ່ານັ້ນ
ບຸຣຸດນັ້ນຊື່ວ່າເປັນຄົນຕໍ່າຊາມໃນບັນດານໍຣະຊົນທັງຫຼາຍ

(ພະຍາຫົງທະຕະຣັດຖະເມື່ອຈະສະແດງທຳແກ່ຫົງສຸມຸຂະ ຈຶ່ງກ່າວວ່າ)

[໑໑໙] ສິ່ງໃດທີ່ທ່ານຜູ້ຈະເລີນຮູ້ຈັກກັນດີ
ໃຜຄວນຈະຕິຕຽນສິ່ງນັ້ນນໍ
ຂຶ້ນຊື່ວ່າຍິງທັງຫຼາຍເປັນຜູ້ມີຄຸນຫຼາຍ ເກີດຂຶ້ນກ່ອນໃນໂລກ°

[໑໘໐] ການຫຼິ້ນຄະນອງອັນບຸກຄົນຕັ້ງໄວ້ແລ້ວໃນຍິງເຫຼົ່ານັ້ນ
ຄວາມຍິນດີໃນຍິງເຫຼົ່ານັ້ນບຸກຄົນກໍຕັ້ງໄວ້ສະເພາະແລ້ວ
ພືດທັງຫຼາຍກໍງອກງາມໃນຍິງເຫຼົ່ານັ້ນ
ຄືສັດທັງຫຼາຍຍ່ອມເກີດໃນຍິງເຫຼົ່ານັ້ນ
ຊີວິດກັບຊີວິດມາກ່ຽວຂ້ອງກັນແລ້ວ
ໃຜນໍຈະເພິ່ງເບື່ອໜ່າຍຍິງເຫຼົ່ານັ້ນ

[໑໘໑] ສຸມຸຂະ ທ່ານເອງນັ້ນແລບໍ່ແມ່ນຄົນອື່ນ
ຍັງຕ້ອງປະກອບຄວາມຕ້ອງການກັບຍິງທັງຫຼາຍ
ມື້ນີ້ເມື່ອເກີດໄພ ຄວາມຄິດຈຶ່ງເກີດແກ່ທ່ານຍ້ອນຄວາມຢ້ານ

[໑໘໒] ຈິງຢູ່ ຜູ້ເຖິງຄວາມສົງໄສໃນຊີວິດທັງປວງ
ເຖິງຈະຢ້ານກົວກໍອົດກັ້ນຄວາມຢ້ານໄວ້
ຍ້ອນບັນດິດທັງຫຼາຍຜູ້ດໍາລົງຢູ່ໃນຖານະເປັນຜູ້ໃຫຍ່
ຍ່ອມປະກອບປະໂຫຍດທີ່ຍາກຈະປະກອບໄດ້

[໑໘໓] ພຣະຣາຊາທັງຫຼາຍຊົງປາຖະໜາຂ້າຣາດຊະການທີ່ກ້າຫານ
ເພື່ອປະສົງທີ່ຈະໃຫ້ຄົນກ້າຫານ
ປ້ອງກັນອັນຕະລາຍແລະເຫດອ້ອມຂ້າງພຣະອົງ

[໑໘໔] ມື້ນີ້ ຂໍພໍ່ຄົວຂອງພຣະຣາຊາ
ຢ່າປາດເຮົາທັງ ໒ ໃນຫ້ອງເຄື່ອງໃຫຍ່ເລີຍ
ຍ້ອນວ່າ ສີຂົນປີກຈະຂ້າທ່ານຄືຂີໄຜ່ຂ້າຕົ້ນໄຜ່

[໑໘໕] ທ່ານແມ່ນພົ້ນແລ້ວກໍບໍ່ປາຖະໜາຈະບິນໄປ
ຕົນເອງກັບຍ່າງເຂົ້າມາຫາເຄື່ອງດັກ

ມື້ນີ້ ແມ່ນທ່ານຜູ້ເຖິງຄວາມສົງໄສໃນຊີວິດ
ຈິ່ງຖືເອົາສິ່ງທີ່ເປັນປະໂຫຍດເທີ້ນ
ຢ່າຍື່ນປາກອອກມາເລີຍ

[໑໘໖] ທ່ານນັ້ນຈິ່ງປະກອບຄວາມພຽນ
ທີ່ເນື່ອງດ້ວຍທຳອັນສົມຄວນນັ້ນເທີ້ນ
ຈິ່ງທ່ຽວສະແຫວງຫາຫົນທາງລອດຊີວິດໃຫ້ແກ່ເຮົາ
ດ້ວຍຄວາມພຽນອັນຜ່ອງແຜ້ວຂອງທ່ານ

(ຫົງສຸມຸຂະກ່າວວ່າ)

[໑໘໗] ຢ່າຊົງຢ້ານເລີຍ ພຣະອົງຜູ້ປະເສີດ
ດ້ວຍວ່າ ບຸກຄົນທັງຫຼາຍເຊັ່ນກັບພຣະອົງບໍ່ເຄີຍຢ້ານເລີຍ
ຂ້າພຣະອົງຈັກປະກອບຄວາມພຽນອັນເນື່ອງດ້ວຍທຳອັນສົມຄວນ
ດ້ວຍຄວາມພຽນອັນຜ່ອງແຜ້ວນັ້ນ
ພຣະອົງຈັກພົ້ນຈາກບ້ວງໂດຍທັນທີ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນີ້ ຈຶ່ງຕັດພຣະຄາຖາວ່າ)

[໑໘໘] ນາຍພານນັ້ນເຂົ້າໄປສູ່ປະຕູພະຣາດຊະວັງພ້ອມທັງຫາບຫົງ
ດ້ວຍກ່າວວ່າ ທ່ານທັງຫຼາຍຈົ່ງຂາບທູນເຖິງເຮົາ
ໃຫ້ພຣະຣາຊາຊົງຮູ້ວ່າ ພະຍາຫົງທະຕະຣັດຖະນີ້ມາແລ້ວ

[໑໘໙] ໄດ້ຂ່າວວ່າ ພຣະເຈົ້າສັນຍະມະນະທອດພຣະເນດເຫັນ
ພະຍາຫົງທັງ ໒ ນັ້ນເຊັ່ນກັບຜູ້ມີບຸນ
ຮູ້ໄດ້ດ້ວຍລັກສະນະ ຈຶ່ງໄດ້ຮັບສັ່ງກັບພວກອຳມາດວ່າ

[໑໙໐] ທ່ານທັງຫຼາຍຈົ່ງໃຫ້ຜ້າ ເຂົ້າ ນໍ້າ ແລະຂອງບໍຣິໂພກ
ແກ່ນາຍພານ ເງິນເປັນບໍ່ເກີດຄວາມພໍໃຈໆ ໃຫ້ເຂົາ
ຈົ່ງໃຫ້ແກ່ເຂົາຕາມທີ່ເຂົາຕ້ອງການ

(ພຣະບໍຣົມມະສາດສະດາຕັດວ່າ)

[໑໙໑] ພຣະເຈົ້າກາສີທອດພຣະເນດເຫັນນາຍພານຜູ້ມີອາການແຈ່ມໃສ
ຈຶ່ງໄດ້ຕັດຄຳນີ້ວ່າ ເຂມະກະ ເພື່ອນຮັກ

ຜີວ່າສະໂບກຂະຣະນີນີ້ມີຝູງຫົງຈັບຢູ່ເຕັມໄປໝົດແລ້ວ

[໑໓໔] ເປັນຫຍັງທ່ານຈຶ່ງຖືບ້ວງເຂົ້າໄປໃກ້ພະຍາຫົງ
ຜູ້ງົດງາມເຊິ່ງຢູ່ທີ່ທ່າມກາງ
ໄດ້ຈັບພະຍາຫົງຜູ້ມີໝູ່ຍາດໜາແໜ້ນ
ເຊິ່ງບໍ່ແມ່ນຫົງຊັ້ນກາງໄດ້ແນວໃດ

(ນາຍພານເຂມະກະນັ້ນຂາບທູນພຣະຣາຊາວ່າ)

[໑໓໓] ມື້ນີ້ເປັນຣາຕີທີ ກ ຂອງຂ້າພຣະອົງ
ຂ້າພຣະອົງບໍ່ຜະໝາດ ແອບເຊື່ອງຢູ່ໃນໄຫ
ຖ້າສະແຫວງຫາຮອຍຕີນຂອງພະຍາຫົງຄໍາໂຕນັ້ນ
ໂຕເຂົ້າໄປໃກ້ສະຖານທີ່ທີ່ຈັບເຫຍື່ອ

[໑໓໔] ຕໍ່ມາຂ້າພຣະອົງໄດ້ເຫັນຮອຍຕີນຂອງພະຍາຫົງນັ້ນ
ໂຕກໍາລັງທ່ຽວສະແຫວງຫາເຫຍື່ອ ຈຶ່ງໄດ້ດັກບ້ວງລົງໄວ້ຢູ່ບ່ອນນັ້ນ
ແລ້ວຈັບພະຍາຫົງນັ້ນໄດ້ດ້ວຍວິທີແນວນີ້

(ພຣະຣາຊາໄດ້ສະດັບດັ່ງນັ້ນ ຈຶ່ງຕັດຖາມວ່າ)

[໑໓໕] ພໍ່ພານ ນົກເຫຼົ່ານີ້ມີຢູ່ ໔ ໂຕ
ແຕ່ເປັນຫຍັງທ່ານຈຶ່ງກ່າວວ່າໂຕດຽວ
ຈິດຂອງທ່ານປັ່ນປ່ວນແລ້ວບໍ
ຫຼືວ່າທ່ານປາຖະໜາປະໂຫຍດອັນໃດກັນບໍ

(ນາຍພານຂາບທູນວ່າ)

[໑໓໖] ຫົງໂຕທີ່ມີລາຍສີແດງຮອດຫວ່າງເອິກ ງົດງາມເໝືອນຄໍາ
ທີ່ກໍາລັງຖືກຫຼໍ່ຫຼອມນັ້ນ ໄດ້ເຂົ້າມາຕິດບ້ວງຂອງຂ້າພຣະອົງ

[໑໓໗] ສ່ວນຫົງໂຕມີຜິວພັນຜ່ອງໃສໂຕນີ້ບໍ່ໄດ້ຕິດບ້ວງ
ຍືນເປ່ງວາຈາເປັນພາສາມະນຸດ ກ່າວຄໍາເວົ້າອັນປະເສີດ
ກັບພະຍາຫົງໂຕຕິດບ້ວງ ເຊິ່ງກໍາລັງກະສັບກະສ່າຍຢູ່

(ພຣະຣາຊາຊົງປະສົງຈະໃຫ້ຫົງສຸມຸຂະສະແດງທໍາ ຈຶ່ງຕັດວ່າ)

[໑໓໗]  ສຸມຸຂະ ເປັນຫຍັງບໍເວລານີ້ທ່ານຈຶ່ງຢືນທົດຄາງຢູ່
ຫຼືທ່ານມາເຖິງບໍລິສັດຂອງເຮົາແລ້ວ ຢ້ານໄພຈຶ່ງບໍ່ເວົ້າ

(ທົ່ງສຸມຸຂະໄດ້ຟັງດັ່ງນັ້ນ ເມື່ອຈະສະແດງຄວາມທີ່ຕົນບໍ່ຢ້ານໄພ ຈຶ່ງຂາບທູນວ່າ)

[໑໓໙]  ຂ້າແດ່ ພຣະອົງຜູ້ເປັນເຈົ້າແຫ່ງແຄວັນກາສີ
ຂ້າພຣະອົງຢັ່ງລົງສູ່ບໍລິສັດຂອງພຣະອົງແລ້ວຈະເກງກົວເປັນໄປບໍ່ໄດ້
ຂ້າພຣະອົງບໍ່ເວົ້າຍ້ອນ ຄວາມເກງກົວກໍເປັນໄປບໍ່ໄດ້
ຂ້າພຣະອົງຈັກກ່າວຄຳເວົ້າໃນເມື່ອມີເລື້ອງເຊັ່ນນັ້ນເກີດຂຶ້ນ

(ພຣະຣາຊາສະດັບດັ່ງນັ້ນແລ້ວຊົງແຍ້ມຫົວ ຕັດວ່າ)

[໑໔໐]  ເຮົາບໍ່ເຫັນບໍລິສັດທີ່ຖືອາວຸດເລີຍ ບໍ່ເຫັນພົນລົດ ພົນຣາບ
ເກາະຫຼືໂລ່ໜັງ ແລະນາຍຂະມັງທະນູຜູ້ດລວມເກາະຂອງທ່ານເລີຍ

[໑໔໑]  ເງິນ ຄຳ ຫຼືນະຄອນທີ່ສ້າງໄວ້ແລ້ວຢ່າງດີ
ມີຄູລຽງລາຍ ຍາກທີ່ຈະຂ້າມໄດ້
ມີຫໍຮົບແລະປ້ອມອັນໝັ້ນຄົງ ເຊິ່ງເປັນສະຖານທີ່ທີ່ທ່ານເຂົ້າໄປ
ບໍ່ຢ້ານສິ່ງທີ່ຄວນຢ້ານ ເຮົາຍັງບໍ່ເຫັນເລີຍ ສຸມຸຂະ

(ທົ່ງສຸມຸຂະເມື່ອຈະທູນເຫດນັ້ນ ຈຶ່ງຂາບທູນວ່າ)

[໑໔໒]  ຂ້າພຣະອົງບໍ່ຕ້ອງການບໍລິວານທີ່ຖືອາວຸດ ນະຄອນ ຫຼືຊັບ
ຍ້ອນຂ້າພຣະອົງທັງຫຼາຍມີປົກກະຕິທ່ຽວໄປໃນອາກາດ
ຍ່ອມໄປສູ່ຫົນທາງອັນເປັນສະຖານທີ່ບໍ່ແມ່ນຫົນທາງ

[໑໔໓]  ກໍພຣະອົງໄດ້ຊົງສະດັບມາວ່າ
ຂ້າພຣະອົງເປັນບັນດິດ ມີປັນຍາລະອຽດອ່ອນ
ເປັນນັກຄິດແຕ່ສິ່ງທີ່ເປັນປະໂຫຍດ
ຂ້າພຣະອົງຈະກ່າວວາຈາທີ່ມີປະໂຫຍດ
ຂໍພຣະອົງເພິ່ງດຳລົງຢູ່ໃນຄວາມສັດເທີ້ນ

[໑໔໔]  ດ້ວຍວ່າຄຳເວົ້າທີ່ພວກຂ້າພຣະອົງກ່າວແລ້ວ
ແມ່ນຈະເປັນສຸພາສິດ ຈະເຮັດຫຍັງແກ່ພຣະອົງຜູ້ຫາຄວາມສັດບໍ່ໄດ້
ຜູ້ບໍ່ແມ່ນຄົນປະເສີດມັກກ່າວຄຳຕົວະແລະຫຍາບຊ້າ

[໑໔໕] ພຣະອົງຮັບສັ່ງໃຫ້ຂຸດສະອັນກະເສມນີ້ຕາມຄຳຂອງພວກພານ
ແລະພຣະອົງຮັບສັ່ງໃຫ້ປະກາດອະໄພທານໄປທົ່ວທິດທັງ ໑໐ ນີ້

[໑໔໖] ນົກທັງຫຼາຍຈຶ່ງລົງສູ່ສະໂບກຂະຣະນີຂອງພຣະອົງ
ເຊິ່ງມີນ້ຳໃສສະອາດ ທີ່ສະບົວນັ້ນມີຂອງກິນພຽງພໍ
ແລະບໍ່ມີການບຽດບຽນນົກທັງຫຼາຍທີ່ສະນັ້ນ

[໑໔໗] ພວກຂ້າພຣະອົງໄດ້ຍິນຄຳປະກາດນີ້ແລ້ວ
ຈຶ່ງພາກັນມາໃກ້ສະໂບກຂະຣະນີຂອງພຣະອົງ
ພວກຂ້າພຣະອົງນັ້ນຈຶ່ງຖືກບ້ວງຂອງພຣະອົງຮັດ
ຄຳປະກາດນັ້ນເປັນພາສິດຕົວະຂອງພຣະອົງ

[໑໔໘] ບຸກຄົນມຸ້ງການກ່າວຕົວະແລະຄວາມໂລບ
ຄືຄວາມຕ້ອງການອັນຊົ່ວຊ້າແລ້ວລ່ວງເລີຍສິນທີທັງ ໔ໄປ
ຍ່ອມເຂົ້າເຖິງນະຮົກອັນບໍ່ມີຄວາມສຸກສະບາຍ

(ພຣະຣາຊາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໑໔໙] ສຸມຸຂະ ເຮົາບໍ່ໄດ້ປະພຶດຜິດທີ່ຈັບທ່ານມາບ່ອນນີ້
ຍ້ອນຄວາມໂລບກໍເປັນໄປບໍ່ໄດ້ ເຮົາຮູ້ມາວ່າ ທ່ານທັງຫຼາຍ
ເປັນບັນດິດ ມີປັນຍາລະອຽດອ່ອນ
ເປັນນັກຄິດແຕ່ສິ່ງທີ່ເປັນປະໂຫຍດ

[໑໕໐] ເຮັດແນວໃດພະຍາຫົງທັງ ໔
ຈຶ່ງຈະມາກ່າວວາຈາອັນມີປະໂຫຍດຢູ່ບ່ອນນີ້
ສຸມຸຂະເພື່ອນຮັກ ນາຍພານຖືກເຮົາສັ່ງ
ຈຶ່ງໄດ້ຈັບທ່ານດ້ວຍເຫດນັ້ນ

(ຫົງສຸມຸຂະໄດ້ຟັງດັ່ງນັ້ນ ຈຶ່ງຂາບທູນວ່າ)

[໑໕໑] ຂ້າແດ່ ພຣະອົງຜູ້ເປັນເຈົ້າແຫ່ງແຄວັນກາສີ
ຂ້າພຣະອົງທັງຫຼາຍເມື່ອຊີວິດໃກ້ເຂົ້າມາເຖິງເວລາໃກ້ຕາຍ
ຈຶ່ງຈະກ່າວວາຈາທີ່ມີປະໂຫຍດເປັນໄປບໍ່ໄດ້ເລີຍ

[໑໕໔] ຜູ້ໃດຂ້າເນື້ອດ້ວຍເນື້ອຕໍ່ ຫຼືວ່າຂ້ານົກດ້ວຍນົກຕໍ່

ຫຼືບຽດບຽນຜູ້ເປັນພະຫູສູດດ້ວຍສຸຕະ
ຈະມີອັນໃດບໍ່ຊົ່ວຊາມໄປກວ່ານັ້ນ

[໑໕໓] ກໍຜູ້ໃດກ່າວຄຳເວົ້າອັນປະເສີດ
ແຕ່ອີງອາໄສທຳອັນບໍ່ປະເສີດ
ຜູ້ນັ້ນຊື່ວ່າຍ່ອມພາດຈາກໂລກທັງ ໔
ຄື ທັງໂລກນີ້ແລະໂລກໜ້າ

[໑໕໔] ບຸກຄົນໄດ້ຍົດແລ້ວບໍ່ເພິ່ງມົວເມົາ
ເຖິງຄວາມສົງໄສໃນຊີວິດ᷊ແລ້ວບໍ່ເພິ່ງເດືອດຮ້ອນ
ເພິ່ງພະຍາຍາມໃນກິດຈະວຽກງານທັງຫຼາຍບໍ່ສິ້ນສຸດ
ແລະເພິ່ງອັດປ່ອງໂທວ່າທັງຫຼາຍ᷊ສາ

[໑໕໕] ບັນດິດຜູ້ຈະເລີນເຫຼົ່າໃດຜ່ານຊີວິດໂລກນີ້ໄປ
ເຖິງເວລາໃກ້ຕາຍ ປະພຶດທຳໃນໂລກນີ້
ບັນດິດເຫຼົ່ານັ້ນຍ່ອມໄປສູ່ສະຫວັນຊັ້ນໄຕຣທິບແລ້ວດ້ວຍປະການດັ່ງນີ້

[໑໕໖] ຂ້າແດ່ ພຣະອົງຜູ້ເປັນເຈົ້າແຫ່ງແຄວັນກາສີ
ພຣະອົງຊົງສະດັບຄຳນີ້ແລ້ວ
ຂໍຊົງຮັກສາທຳໄວ້ໃນພຣະອົງເທີ້ນ
ແລະຂໍຊົງປ່ອຍພະຍາທົງທະຕະຣັດຖະ
ຜູ້ປະເສີດສູງສຸດກວ່າທົງທັງຫຼາຍເທີ້ນ

(ພຣະຣາຊາເມື່ອສະດັບດັ່ງນັ້ນ ຈຶ່ງຕັດວ່າ)

[໑໕໗] ພະນັກງານທັງຫຼາຍຈົ່ງນຳນ້ຳມັນທາຕີນ
ແລະອາສະນະອັນມີຄ່າຫຼາຍມາ
ເຮົາຈະປ່ອຍພະຍາທົງທະຕະຣັດຖະຜູ້ມີຍົດອອກຈາກກົງ

[໑໕໘] ແລະເຮົາຈະປ່ອຍພະຍາທົງ
ໂຕທີ່ເມື່ອທົງຜູ້ເປັນພຣະຣາຊາມີສຸກກໍເປັນສຸກດ້ວຍ
ເມື່ອມີທຸກກໍເປັນທຸກດ້ວຍ
ເຊິ່ງເປັນທົງເສນາບໍດີ ເປັນນັກປາດ
ມີປັນຍາລະອຽດອ່ອນ ເປັນນັກຄິດແຕ່ສິ່ງທີ່ເປັນປະໂຫຍດ

[໑໕໙] ບຸກຄົນແນວນີ້ແລສົມຄວນທີ່ຈະບໍຣິໂພກກ້ອນເຂົ້າຂອງນາຍໄດ້
ຄືຫົງສຸມຸຂະຜູ້ເປັນເພື່ອນຮ່ວມຊີວິດຂອງພຣະຣາຊາ

(ພຣະບໍຣົມມະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໑໖໐] ກໍພະຍາຫົງທະຕະຣັດຖະໄດ້ບິນເຂົ້າໄປຈັບຕັ່ງຄໍາລ້ອນ
ເຊິ່ງມີຕີນ ໗ ໜ້າອອນຊອນ ກ້ຽງເກົາ ປູລາດດ້ວຍຜ້າແຄວ້ນກາສີ

[໑໖໑] ສ່ວນຫົງສຸມຸຂະໄດ້ບິນເຂົ້າໄປເກາະຕັ່ງຄໍາລ້ອນ
ເຊິ່ງບຸດ້ວຍໜັງເສືອໂຄ່ງ ຖັດຈາກພະຍາຫົງທະຕະຣັດຖະ

[໑໖໒] ຊາວແຄວ້ນກາສີຈໍານວນຫຼາຍພາກັນເອົາອາຫານອັນເລີດ
ທີ່ພຣະເຈົ້າກາສີຊົງສົ່ງໄປດ້ວຍຖາດຄໍາໃຫ້ແກ່ພະຍາຫົງເຫຼົ່ານັ້ນ

[໑໖໓] ພະຍາຫົງທະຕະຣັດຖະຜູ້ສະຫຼາດໃນທໍານຽມການປະຕິສັນຖານ
ເຫັນອາຫານອັນເລີດທີ່ເຂົານໍາມາແລ້ວ
ເຊິ່ງພຣະເຈົ້າກາສີຊົງປະທານສົ່ງໄປ
ຕໍ່ຈາກນັ້ນຈຶ່ງໄດ້ທູນຖາມເປັນລໍາດັບໄປວ່າ

[໑໖໔] ພຣະອົງຜູ້ຊົງພຣະຈະເລີນ ຊົງສຸກສໍາຣານດີຢູ່ບໍ
ບໍ່ມີພະຍາດບຽດບຽນບໍ
ແຄວ້ນອັນຮັ່ງມີນີ້ພຣະອົງຊົງປົກຄອງໂດຍທໍາບໍ

(ພຣະຣາຊາຕັດວ່າ)

[໑໖໕] ເຮົາສຸກສໍາຣານດີພະຍາຫົງ ແລະບໍ່ມີພະຍາດບຽດບຽນ
ອັນໜຶ່ງ ແຄວ້ນອັນຮັ່ງມີນີ້ເຮົາກໍປົກຄອງໂດຍທໍາ

(ພະຍາຫົງໂພທິສັດທູນຖາມວ່າ)

[໑໖໖] ໂທດບາງສິ່ງບາງຢ່າງໃນໝູ່ອໍາມາດຂອງພຣະອົງບໍ່ມີບໍ
ອັນໜຶ່ງ ອໍາມາດເຫຼົ່ານັ້ນບໍ່ກັງວົນເຖິງຊີວິດ
ຍ້ອນຣາດຊະກິດອັນເປັນປະໂຫຍດຕໍ່ພຣະອົງບໍ

(ພຣະຣາຊາຕັດຕອບວ່າ)

[໑໖໗] ໂທດບາງສິ່ງບາງຢ່າງໃນໝູ່ອໍາມາດຂອງເຮົາກໍບໍ່ມີ

ອັນໜຶ່ງ ແມ່ນອຳນາດເຫຼົ່ານັ້ນກໍບໍ່ກັງວົນເຖິງຊີວິດ
ຍ້ອນຣາດຊະກິດອັນເປັນປະໂຫຍດຕໍ່ເຮົາເລີຍ

(ພະຍາຫົງໂພທິສັດທູນຖາມວ່າ)

[໑໒໗] ພຣະເທວີຜູ້ມີພຣະຊາດສະເໝີກັບພຣະອົງ
ຊົງເຊື່ອຟັງ ຕັດພຣະວາຈາອ່ອນຫວານໜ້າຮັກ
ຊົງມີພຣະໂອຣົດປະກອບດ້ວຍພຣະຮູບໂສມແລະອິດສະຣິຍະຍົດ
ຊົງຄ້ອຍຕາມພຣະອັດທະຍາໄສຂອງພຣະອົງບໍ

(ພຣະຣາຊາຕັດຕອບວ່າ)

[໑໒໘] ກໍພຣະເທວີຜູ້ມີພຣະຊາດສະເໝີກັບເຮົາ
ເຊື່ອຟັງ ກ່າວວາຈາອ່ອນຫວານໜ້າຮັກ
ມີພຣະໂອຣົດປະກອບດ້ວຍພຣະຮູບໂສມແລະອິດສະຣິຍະຍົດ
ຍັງຄ້ອຍຕາມອັດທະຍາໄສຂອງເຮົາຢູ່

(ພະຍາຫົງໂພທິສັດ ທູນຖາມວ່າ)

[໑໓໐] ແຄວັນບໍ່ໄດ້ຖືກບຽດບຽນ
ບໍ່ໄດ້ມີອັນຕະລາຍແຕ່ບ່ອນໃດ ໆ ບໍ
ພຣະອົງຊົງປົກຄອງໂດຍທຳຢ່າງສະໝ່ຳສະເໝີ
ໂດຍບໍ່ໄດ້ກັງວົນກາດບໍ

(ພຣະຣາຊາຕັດຕອບວ່າ)

[໑໓໑] ແຄວັນກໍບໍ່ໄດ້ຖືກບຽດບຽນ
ບໍ່ໄດ້ມີອັນຕະລາຍແຕ່ບ່ອນໃດ ໆ ເລີຍ
ເຮົາປົກຄອງໂດຍທຳຢ່າງສະໝ່ຳສະເໝີ
ໂດຍບໍ່ໄດ້ກັງວົນກາດເລີຍ

(ພະຍາຫົງໂພທິສັດທູນຖາມວ່າ)

[໑໓໔] ສັດຕະບຸຣຸດພຣະອົງຊົງຢຳເກງ
ຊົງເວັ້ນອະສັດຕະບຸຣຸດຫ່າງໄກບໍ
ພຣະອົງບໍ່ໄດ້ຊົງຫ່າງເຫີນທຳ

ປະພຶດຄວນຕາມອະທຳບໍ

(ພຣະຣາຊາຕັດຕອບວ່າ)

[໑໗໓]　ສັດຕະບຸຣຸດເຮົາກໍຢຳເກງ
ອະສັດຕະບຸຣຸດເຮົາກໍເວັ້ນຫ່າງໄກ
ເຮົາປະພຶດຄວນຕາມທຳເຫຼົ່ານັ້ນ
ສ່ວນອະທຳເຮົາໄດ້ຫ່າງເຫີນໄປແລ້ວ

(ພະຍາຫົງທູນຖາມວ່າ)

[໑໗໔]　ຂ້າແດ່ ພຣະອົງຜູ້ເປັນກະສັດ
ພຣະອົງບໍ່ໄດ້ຊົງພິຈາລະນາເຫັນອະນາຄົດອັນຍາວນານບໍ
ຊົງມົວເມົາໃນອາລົມອັນເປັນບ່ອນຕັ້ງແຫ່ງຄວາມມົວເມົາ
ບໍ່ຊົງສະດຸ້ງຢ້ານປະຣະໂລກບໍ

(ພຣະຣາຊາຕັດຕອບວ່າ)

[໑໗໕]　ເຮົາພິຈາລະນາເຫັນອະນາຄົດອັນຍາວນານກໍບໍ່ມີ
ພະຍາຫົງ ເຮົາດຳລົງຢູ່ໃນທຳ ໑໐ ປະການ໑
ຈຶ່ງບໍ່ສະດຸ້ງຢ້ານປະຣະໂລກ

[໑໗໖]　ຄື ໑. ທານ　　໒. ສີນ
໓. ການບໍລິຈາກ　　໔. ຄວາມທ່ຽງທຳ
໕. ຄວາມອ່ອນໂຍນ　　໖. ຄວາມພຽນ
໗. ຄວາມບໍ່ໂກດ　　໘. ຄວາມບໍ່ບຽດບຽນ
໙. ຄວາມອົດທົນ　　໑໐. ຄວາມບໍ່ຄາດເຄື່ອນທຳ໑

[໑໗໗]　ເຮົາເຫັນກຸສົນທຳເຫຼົ່ານີ້ດຳລົງຢູ່ແລ້ວໃນຕົນດ້ວຍປະການດັ່ງນີ້
ຕໍ່ຈາກນັ້ນປີຕິແລະໂສມະນັດມີປະມານບໍ່ໜ້ອຍຈຶ່ງເກີດແກ່ເຮົາ

[໑໗໘]　ສ່ວນຫົງສຸມຸຂະນີ້ບໍ່ທັນຄິດ
ບໍ່ຮູ້ຄວາມປະທຸດສະຮ້າຍແຫ່ງຈິດຕໍ່ຂ້າພຣະອົງ
ຈຶ່ງໄດ້ເປ່ງວາຈາອັນຫຍາບຄາຍອອກມາ

[໑໗໙]　ຫົງສຸມຸຂະນັ້ນໂກດ

ຈຶ່ງໄດ້ເປ່ງວາຈາອັນຫຍາບຄາຍໂດຍບໍ່ຮີ່ນຕອງ
ກ່າວຫາໂທດທີ່ບໍ່ມີຢູ່ໃນຂ້າພຣະອົງ
ການເປ່ງນີ້ເບິ່ງຄືວ່າບໍ່ແມ່ນຂອງຜູ້ມີປັນຍາ

(ທົງສຸມຸຂະໄດ້ຟັງດັ່ງນັ້ນ ຈຶ່ງຂາບທູນວ່າ)

[໑໗໐] ຂ້າແດ່ ພຣະອົງຜູ້ຊົງເປັນອະທິບໍດີແຫ່ງມະນຸດ
ຄວາມຜິດພາດນັ້ນຍ່ອມມີແກ່ຂ້າພຣະອົງຍ້ອນຄວາມຮີບຟ້າວ
ອັນໜຶ່ງ ເມື່ອພະຍາທົງທະຕະຣັດຖະຕິດບ້ວງ
ຂ້າພຣະອົງຈຶ່ງໄດ້ມີທຸກຫຼາຍກວ່າ

[໑໗໑] ພຣະອົງເປັນເໝືອນພຣະບິດາຂອງພຣະໂອຣົດທັງຫຼາຍ
ເປັນຄືແຜ່ນດິນເປັນບ່ອນເພິ່ງຂອງພູດທັງຫຼາຍ
ຂ້າແດ່ ພຣະອົງຜູ້ເປັນຄືພະຍາຊ້າງ ຂໍພຣະອົງໂຜດຊົງງົດໂທດ
ແກ່ຂ້າພຣະອົງຜູ້ຖືກຄວາມຜິດຄອບງຳດ້ວຍເທີ້ນ

(ພຣະຣາຊາຊົງສວມກອດທົງສຸມຸຂະນັ້ນເມື່ອຈະຮັບການຂໍໂທດ ຈຶ່ງຕັດວ່າ)

[໑໗໔] ເມື່ອເປັນແນວນີ້ ເຮົາຂໍອະນຸໂມທະນາຕໍ່ທ່ານ
ຍ້ອນທ່ານບໍ່ປົກປິດຄວາມຈິງ
ພະຍາທົງ ທ່ານຍ່ອມທຳລາຍຕະປູຕຶງຈິດ°
ຈຶ່ງນັບໄດ້ວ່າທ່ານເປັນທົງຜູ້ທ່ຽງທຳ

[໑໗໓] ຣັດຕະນະແນວໃດແນວໜຶ່ງມີຢູ່ຫຼວງຫຼາຍ
ໃນຣາດຊະນິເວດແຫ່ງແຄວ້ນກາສີ
ຄື ເງິນ ຄຳ ແກ້ວມຸກດາ ແລະແກ້ວໄພທູນ

[໑໗໔] ແກ້ວມະນີ ຫອຍສັງ ໄຂ່ມຸກ ຜ້າ ຈັນເຫຼືອງ
ໜັງສັດ ເຄື່ອງງາຊ້າງ ທອງແດງ ແລະເຫຼັກ
ເຮົາຂໍມອບຊັບເຄື່ອງພໍໃຈທຸກຊະນິດນັ້ນໃຫ້ແກ່ທ່ານທັງ ໔
ແລະຂໍປ່ອຍທ່ານທັງ ໔ ໃຫ້ເປັນອິດສະຫຼະ

(ພະຍາທົງໂພທິສັດຂາບທູນວ່າ)

[໑໗໕] ຂ້າແດ່ ພຣະອົງຜູ້ຈອມທັບ ຂ້າພຣະອົງທັງ ໔

ຜູ້ອັນພຣະອົງຊົງຢຳເກງແລະຊົງສັກກາຣະແລ້ວໂດຍແນ່ແທ້
ຂໍພຣະອົງໂຜດຊົງເປັນພຣະອາຈານຂອງຂ້າພຣະອົງທັງ ໔
ຜູ້ປະພຶດໃນທຳທັງຫຼາຍເທີ້ນ

[໑໗໖] ຂ້າແດ່ ພຣະອາຈານຜູ້ຊົງຍ່ຳຍີຂ້າເສິກ ຂ້າພຣະອົງທັງ ໔
ຜູ້ອັນພຣະອົງຊົງອະນຸຍາດແລ້ວ ຊົງອະນຸມັດແລ້ວ
ຈະຂໍກະທຳປະທັກຂິນພຣະອົງແລ້ວກັບໄປພົບຍາດທັງຫຼາຍ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໑໗໗] ພຣະເຈົ້າກາສີຊົງດຳຣິແລະຊົງເປີກສາ
ອັດຖະຄະດີຕາມທີ່ກ່າວມາຕະຫຼອດຣາຕີທັງປວງແລ້ວ
ຊົງອະນຸຍາດພະຍາຫົງທັງ ໔ ໂຕປະເສີດສູງສຸດກວ່າຫົງທັງຫຼາຍ

[໑໗໘] ຕໍ່ຈາກນັ້ນ ເມື່ອຣາຕີຮຸ່ງສະຫວ່າງ ດວງອາທິດຂຶ້ນມາ
ຂະນະພຣະເຈົ້າກາສີກຳລັງທອດພຣະເນດຢູ່
ພະຍາຫົງທັງ ໔ ໄດ້ໂຜບິນໄປສູ່ອາກາດຈາກພຣະຣາດຊະນິເວດ

[໑໗໙] ຫົງທັງຫຼາຍເຫັນພະຍາຫົງທັງ ໔ ນັ້ນ
ມາເຖິງໂດຍລຳດັບຢ່າງປອດໄພ
ຕ່າງພາກັນສົ່ງສຽງວ່າເກກ ໆ ໄດ້ເກີດສຳນຽງສຽງດັງຈົ້ວຈ້າວ

[໑໘໐] ຫົງເຫຼົ່ານັ້ນຜູ້ມີຄວາມເຄົາລົບຕໍ່ຜູ້ເປັນນາຍ
ພາກັນປາບປື້ມໃຈຍ້ອນພະຍາຫົງຜູ້ເປັນນາຍພົ້ນຈາກບ້ວງ
ຈຶ່ງພາກັນຫ້ອມລ້ອມຢູ່ໂດຍຮອບ ຫົງທັງຫຼາຍໄດ້ບ່ອນເພິ່ງແລ້ວ

[໑໘໑] ປະໂຫຍດທັງປວງຂອງບຸກຄົນຜູ້ມີກັນລະຍານະມິດ
ຍ່ອມສຳເລັດຜົນເປັນຄວາມສຸກຄວາມຈະເລີນ
ຄືພະຍາຫົງທະຕະຣັດຖະທັງ ໔ ໄດ້ຢູ່ໃກ້ໝູ່ຍາດສັນນັ້ນ

**ມະຫາຫັງສະຊາດົກທີ ໔ ຈົບ**

## ໓. ສຸທາໂພຊະນະຊາດົກ (໕໓໕)
## ວ່າດ້ວຍອາຫານທິບ

(ໂກສິຍະເສດຖີຂາບທູນທ້າວສັກກະວ່າ)

[໑໗໘] ຂອງນີ້ຂ້າພະເຈົ້າກໍບໍ່ໄດ້ຊື້ມາ
ທັງບໍ່ໄດ້ຂາຍແລະບໍ່ໄດ້ສະສົມໄວ້ໃນບ່ອນນີ້
ມີຢູ່ພຽງໜ້ອຍໜຶ່ງ ໄດ້ມາແສນຍາກ
ເຂົ້າສຸກແລ່ງໜຶ່ງບໍ່ພຽງພໍສຳລັບຄົນສອງຄົນ

(ທ້າວສັກກະໄດ້ສະດັບດັ່ງນັ້ນ ຈຶ່ງຕັດວ່າ)

[໑໗໙] ບຸກຄົນຄວນໃຫ້ແຕ່ໜ້ອຍຈາກຂອງທີ່ມີໜ້ອຍ
ຄວນໃຫ້ພໍປານກາງຈາກຂອງທີ່ມີພໍປານກາງ
ຄວນໃຫ້ຫຼາຍຈາກຂອງທີ່ມີຫຼາຍ ຊື່ວ່າການບໍ່ໃຫ້ຍ່ອມບໍ່ຄວນ

[໑໘໐] ທ່ານໂກສິຍະເສດຖີ ຍ້ອນເຫດນັ້ນ
ຂ້າພະເຈົ້າຂໍບອກທ່ານວ່າ ທ່ານຈົ່ງໃຫ້ທານແລະຈົ່ງບໍລິໂພກ
ຈົ່ງຂຶ້ນສູ່ທາງຂອງພຣະອະຣິຍະ ຜູ້ກິນຄົນດຽວຍ່ອມບໍ່ໄດ້ຄວາມສຸກ

(ທ້າວທ້າວສັກກະປະທັບນັ່ງ ຈັນທະເທບພະບຸດຈຶ່ງເຂົ້າໄປຫາໂກສິຍະເສດຖີແລ້ວ ກ່າວວ່າ)

[໑໘໑] ຜູ້ໃດເມື່ອແຂກນັ່ງຢູ່ແລ້ວຍັງບໍລິໂພກອາຫານແຕ່ຜູ້ດຽວ
ການບູຊາຂອງຜູ້ນັ້ນເປັນໂມຄະ
ແມ່ນຄວາມບາກບັ່ນສະແຫວງຫາຊັບຂອງເຂົາກໍເປັນໂມຄະ

[໑໘໒] ທ່ານໂກສິຍະເສດຖີ ຍ້ອນເຫດນັ້ນ
ຂ້າພະເຈົ້າຂໍບອກທ່ານວ່າ ທ່ານຈົ່ງໃຫ້ທານແລະຈົ່ງບໍລິໂພກ
ຈົ່ງຂຶ້ນສູ່ທາງຂອງພຣະອະຣິຍະ ຜູ້ກິນຄົນດຽວຍ່ອມບໍ່ໄດ້ຄວາມສຸກ

(ຕໍ່ຈາກນັ້ນສຸຣິຍະເທບພະບຸດເຂົ້າໄປຫາແລ້ວກ່າວວ່າ)

[໑໘໓] ຜູ້ໃດເມື່ອແຂກນັ່ງຢູ່ແລ້ວບໍ່ບໍລິໂພກອາຫານແຕ່ຜູ້ດຽວ
ການບູຊາຂອງຜູ້ນັ້ນຍ່ອມມີຜົນ
ແມ່ນຄວາມບາກບັ່ນສະແຫວງຫາຊັບຂອງເຂົາກໍມີຜົນ

[໑໙໗] ທ່ານໂກສິຍະເສດຖີ ຍ້ອນເຫດນັ້ນ
ຂ້າພະເຈົ້າຂໍບອກທ່ານວ່າ ທ່ານຈົ່ງໃຫ້ທານແລະຈົ່ງບໍຣິໂພກ
ຈົ່ງຂຶ້ນສູ່ທາງຂອງພຣະອະຣິຍະ ຜູ້ກິນຄົນດຽວຍ່ອມບໍ່ໄດ້ຄວາມສຸກ

(ຕໍ່ຈາກນັ້ນ ມາຕະລີເທບພະບຸດເຂົ້າໄປຫາແລ້ວກ່າວວ່າ)

[໑໙໙] ກໍບຸກຄົນໃດເຂົ້າໄປສູ່ແຫຼ່ງນ້ຳບາງແຫ່ງ
ແລ້ວບູຊາທີ່ແມ່ນ້ຳຫຼາຍສາຍແດ່
ທີ່ສະໂບກຂະຣະນີຊື່ວ່າຄະຍາແດ່
ທີ່ທ່ານ້ຳຊື່ໂທນະແລະທ່ານ້ຳຊື່ຕິມພະຣຸແດ່
ທີ່ແມ່ນ້ຳໃຫຍ່ອັນມີກະແສໄຫຼແຮງແດ່

[໒໐໐] ຜູ້ໃດເມື່ອແຂກນັ່ງຢູ່ແລ້ວບໍ່ບໍຣິໂພກອາຫານແຕ່ຜູ້ດຽວ
ການບູຊາຂອງເຂົາໃນບ່ອນນັ້ນ
ແລະຄວາມບາກບັ່ນສະແຫວງຫາຊັບຂອງເຂົາໃນບ່ອນນັ້ນຍ່ອມມີຜົນ

[໒໐໑] ທ່ານໂກສິຍະເສດຖີ ຍ້ອນເຫດນັ້ນ
ຂ້າພະເຈົ້າຂໍບອກທ່ານວ່າ ທ່ານຈົ່ງໃຫ້ທານແລະຈົ່ງບໍຣິໂພກ
ຈົ່ງຂຶ້ນສູ່ທາງຂອງພຣະອະຣິຍະ ຜູ້ກິນຄົນດຽວຍ່ອມບໍ່ໄດ້ຄວາມສຸກ

(ຕໍ່ຈາກນັ້ນ ປັນຈະສິຂະເທບພະບຸດເຂົ້າໄປຫາແລ້ວກ່າວວ່າ)

[໒໐໒] ສ່ວນຜູ້ໃດເມື່ອແຂກນັ່ງຢູ່ແລ້ວຍັງບໍຣິໂພກອາຫານແຕ່ຜູ້ດຽວ
ຜູ້ນັ້ນຊື່ວ່າກືນເບັດພ້ອມທັງເຫຍື່ອທີ່ມີສາຍຍາວ

[໒໐໓] ທ່ານໂກສິຍະເສດຖີ ຍ້ອນເຫດນັ້ນ
ຂ້າພະເຈົ້າຂໍບອກທ່ານວ່າ ທ່ານຈົ່ງໃຫ້ທານແລະຈົ່ງບໍຣິໂພກ
ຈົ່ງຂຶ້ນສູ່ທາງຂອງພຣະອະຣິຍະ ຜູ້ກິນຄົນດຽວຍ່ອມບໍ່ໄດ້ຄວາມສຸກ

(ໂກສິຍະເສດຖີເຫັນລິດຂອງພາມເຫຼົ່ານັ້ນ ຈຶ່ງຖາມວ່າ)

[໒໐໔] ພາມເຫຼົ່ານີ້ມີຜິວພັນງາມແທ້ນໍ
ຍ້ອນເຫດອັນໃດ ໝາຂອງພວກທ່ານຈຶ່ງປ່ຽນສີໄດ້ຕ່າງ ໆ ນານາ
ຂ້າແດ່ທ່ານພາມທັງຫຼາຍ
ຂໍທ່ານຈົ່ງບອກຂ້າພະເຈົ້າ ພວກທ່ານເປັນໃຜກັນ

(ທ້າວສັກກະເທວະຣາດຕັດວ່າ)

[໔໐໕] ເຫຼົ່າເທບທີ່ມາໃນບ່ອນນີ້ ຄື ຈັນທະເທບພະບຸດ
ແລະສຸຣິຍະເທບພະບຸດທັງ ໔ ສ່ວນຜູ້ນີ້ຄືມາຕະລິເທບສາຣະຖີ
ເຮົາຄືທ້າວສັກກະຜູ້ເປັນຈອມແຫ່ງເທບຊັ້ນໄຕຣທິດ
ແລະຜູ້ນີ້ຊື່ວ່າປັນຈະສິຂະເທບພະບຸດ

(ທ້າວສັກກະເທວະຣາດເມື່ອຈະຊົງສັນເສີນຍົດຂອງປັນຈະສິຂະເທບພະບຸດນັ້ນ ຈຶ່ງຕັດວ່າ)

[໔໐໖] ສຽງຕົບມື ໑ ກອງຕະໂພນ ໑ ກອງ ໑ ເປີງມາງ ໑
ຍ່ອມປຸກເທບພະບຸດຜູ້ຫຼັບແລ້ວນັ້ນໃຫ້ຕື່ນຂຶ້ນ
ເທບພະບຸດຜູ້ຕື່ນຂຶ້ນແລ້ວຍ່ອມແຈ່ມໃສຍິນດີ

[໔໐໗] ຄົນຜູ້ຂີ້ຖີ່ເຫັນແກ່ໂຕເຫຼົ່ານີ້
ລາງພວກມັກດ່າວ່າສະມະນະແລະພາມ
ເມື່ອປະຖິ້ມຮ່າງກາຍໄວ້ໃນໂລກນີ້
ຫຼັງຈາກຕາຍແລ້ວຍ່ອມໄປສູ່ນະຮົກ

[໔໐໘] ຄົນຜູ້ຫວັງສຸກຄະຕິເຫຼົ່ານີ້ ລາງພວກດຳລົງຢູ່ໃນທຳ
ຄື ຄວາມສັງລວມແລະການຈຳແນກທານ
ເມື່ອປະຖິ້ມຮ່າງກາຍໄວ້ໃນໂລກນີ້
ຫຼັງຈາກຕາຍແລ້ວຍ່ອມໄປສູ່ສຸກຄະຕິ

[໔໐໙] ທ່ານເປັນຍາດຂອງພວກເຮົາເມື່ອຊາດກ່ອນ
ແຕ່ທ່ານນັ້ນເປັນຄົນຂີ້ຖີ່ ມັກໂກດ ມີທຳຊົ່ວຊາມ
ພວກເຮົາມາທີ່ນີ້ກໍເພື່ອປະໂຫຍດແກ່ທ່ານນັ້ນເອງ
ທ່ານຢ່າມີທຳອັນຊົ່ວຊາມໄປຕົກນະຮົກເລີຍ

(ໂກສິຍະເສດຖີໄດ້ຟັງດັ່ງນັ້ນມີຈິດຍິນດີ ຈຶ່ງກ່າວວ່າ)

[໔໑໐] ພວກທ່ານຫວັງເກື້ອກູນຂ້າພະເຈົ້າຢ່າງແນ່ນອນ
ຈຶ່ງໄດ້ພ່ຳສອນຂ້າພະເຈົ້າ ຂ້າພະເຈົ້ານັ້ນ
ຈະເຮັດຕາມທີ່ພວກທ່ານຜູ້ຫວັງເກື້ອກູນກ່າວທຸກປະການ

[໔໑໑] ຕັ້ງແຕ່ມື້ນີ້ໄປ ຂ້າພະເຈົ້ານັ້ນຈະຂໍງົດເວັ້ນ

ຈະບໍ່ກະທຳບາບອັນໃດ ໆ ອີກ
ອັນໜຶ່ງ ວັດຖຸອັນໃດ ໆ ທີ່ບໍ່ໃຫ້ຈະບໍ່ມີແກ່ຂ້າພະເຈົ້າ
ແມ່ນແຕ່ນ້ຳຂ້າພະເຈົ້າຍັງບໍ່ໄດ້ໃຫ້ແລ້ວ ກໍຈະບໍ່ຍອມດື່ມ

[໔໑໒] ຂ້າແດ່ທ້າວວາສະວະ ກໍເມື່ອຂ້າພະເຈົ້າໃຫ້ຢູ່ຕະຫຼອດການທັງປວງແນວນີ້ ເຖິງໂພກະທັງຫຼາຍຂອງຂ້າພະເຈົ້າຈັກໝົດສິ້ນໄປ ຂ້າແດ່ທ້າວສັກກະ ຕໍ່ຈາກນັ້ນ ຂ້າພະເຈົ້າຈະລະການທັງຫຼາຍຕາມທີ່ມີຢູ່ແລ້ວຈັກບວດ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໔໑໓] ເທບທິດາເຫຼົ່ານັ້ນອັນທ້າວສັກກະຜູ້ປະເສີດກວ່າເທວະດາ ຊົງອະພິບານແລ້ວບັນເທີງຢູ່ທີ່ພູຄັນທະມາດ
ເຊິ່ງເປັນພູອັນປະເສີດສູງສຸດ
ຄັ້ງນັ້ນ ລືສີຜູ້ປະເສີດສາມາດຈະໄປໄດ້ທົ່ວໂລກ
ໄດ້ຖືເອົາຊໍ່ດອກໄມ້ອັນປະເສີດມີດອກບານເດຍລະດາດຍ່າງມາ

[໔໑໔] ກໍດອກໄມ້ນັ້ນສະອາດ ມີກິ່ນຫອມ
ອັນເຫຼົ່າເທບຊັ້ນໄຕຣທົດສັກກາຣະ ເປັນດອກໄມ້ສູງສຸດ
ອັນທ້າວສັກກະຜູ້ປະເສີດກວ່າອະມອນເທບຊົງໃຊ້ສອຍ
ເຊິ່ງພວກມະນຸດຫຼືພວກອະສູນບໍ່ໄດ້ແລ້ວ ເວັ້ນໄວ້ແຕ່ພວກເທວະດາ
ເປັນດອກໄມ້ທີ່ສົມຄວນແກ່ເທວະດາເຫຼົ່ານັ້ນ

[໔໑໕] ລຳດັບນັ້ນ ເທບນາຣີທັງ ໔ ນາງຜູ້ມີຜິວພັນເໝືອນຄຳ
ເປັນໃຫຍ່ກວ່າເທບທິດາທັງຫຼາຍ ຄື ໑. ເທບທິດາອາສາ
໒. ເທບທິດາສັດທາ ໓. ເທບທິດາຊິຣີ ໔. ເທບທິດາຫິຣີ
ຕ່າງລຸກຂຶ້ນກ່າວກັບພຣະນາຣະທະມຸນີເທວະພາມວ່າ

[໔໑໖] ຂ້າແດ່ ພຣະມະຫາມຸນີຜູ້ປະເສີດ ຖ້າດອກປາຣິສັດຕະກະນີ້
ພຣະຜູ້ເປັນເຈົ້າບໍ່ໄດ້ເຈາະຈົງຈະໃຫ້ແກ່ຜູ້ໃດ
ຂໍພຣະຜູ້ເປັນເຈົ້າຈົ່ງໃຫ້ແກ່ພວກເຮົາເທີ້ນ
ຂໍຄະຕິທັງປວງຈົ່ງສຳເລັດແດ່ພຣະຜູ້ເປັນເຈົ້າ
ແມ່ນພຣະຜູ້ເປັນເຈົ້າກໍຈົ່ງໃຫ້ແກ່ພວກເຮົາຄືທ້າວວາສະວະທໍ່ນັ້ນເທີ້ນ

[໔໑໗] ນາຣະທະດາບົດເພ່ງເບິ່ງເທບທິດາທັງ ໔ ນາງພາກັນຂໍດອກໄມ້ນັ້ນຢູ່

ຈຶ່ງເປ່ງຄໍາເວົ້າຊວນຜິດຖຽງແລ້ວກ່າວວ່າ
ອາດຕະມາບໍ່ມີຄວາມຕ້ອງການດອກໄມ້ເຫຼົ່ານີ້ແມ່ນຈັກໜ້ອຍໜຶ່ງ
ບັນດາພວກທ່ານທັງ ໔ ຜູ້ໃດປະເສີດກວ່າ
ຜູ້ນັ້ນຈຶ່ງປະດັບດອກໄມ້ນັ້ນເທີ້ນ

(ເທບທິດາທັງ ໔ ນາງນັ້ນກ່າວວ່າ)

[໔໑໗] ຂ້າແດ່ທ່ານນາຣະທະຜູ້ອຸດົມ ພຣະຜູ້ເປັນເຈົ້ານັ້ນແລ
ໂຜດຈົ່ງພິຈາລະນາເບິ່ງພວກເຮົາ
ພຣະຜູ້ເປັນເຈົ້າປາຖະໜາຈະໃຫ້ແກ່ນາງໃດກໍຈົ່ງໃຫ້ແກ່ນາງນັ້ນ
ຂ້າແດ່ທ່ານນາຣະທະ ກໍບັນດາເຮົາທັງຫຼາຍ
ພຣະຜູ້ເປັນເຈົ້າຈັກມອບໃຫ້ແກ່ນາງໃດ
ນາງນັ້ນທີ່ນັ້ນຈັກເປັນຜູ້ທີ່ພວກເຮົາຍ້ອງຍໍວ່າປະເສີດທີ່ສຸດ

(ນາຣະທະດາບົດກ່າວວ່າ)

[໔໑໙] ແມ່ເທບທິດາຜູ້ມີເຮືອນຮ່າງອັນງົດງາມ ຄໍານັ້ນບໍ່ສົມຄວນເລີຍ
ພາມຄົນໃດ ໃຜນໍຈະເພິ່ງເປ່ງຄໍາເວົ້າຊວນຜິດຖຽງໄດ້
ຈົ່ງໄປທູນຖາມທ້າວສັກກະຜູ້ເປັນໃຫຍ່ກວ່າພູດເບິ່ງເທີ້ນ
ຖ້າພວກທ່ານໃນບ່ອນນີ້ບໍ່ຮູ້ວ່າຕົນສູງສຸດຫຼືຕໍ່າຊາມ

(ຕໍ່ຈາກນັ້ນ ພຣະສາດສະດາຕັດພຣະຄາຖາວ່າ)

[໔໒໐] ເທບທິດາເຫຼົ່ານັ້ນຖືກນາຣະທະດາບົດກ່າວແນະນໍາ
ມີຄວາມແຄ້ນເຄືອງຢ່າງຍິ່ງ ເປັນຜູ້ມົວເມົາແລ້ວ
ດ້ວຍຄວາມມົວເມົາໃນຜິວພັນ ຈຶ່ງໄປສູ່ ສໍານັກທ້າວສະຫັດສະໄນ
ແລ້ວທູນຖາມທ້າວສັກກະຜູ້ເປັນໃຫຍ່ກວ່າພູດວ່າ
ບັນດາຂ້ານ້ອຍ ໃຜນໍປະເສີດກວ່າ

(ເທບທິດາທັງ ໔ ນາງໄດ້ຢືນທູນຖາມແນວນັ້ນແລ້ວ ພຣະສາດສະດາ ຈຶ່ງຕັດວ່າ)

[໔໒໑] ທ້າວປຸຣິນທະທະຜູ້ປະເສີດກວ່າເທວະດາ
ຜູ້ອັນເທບທິດາທັງ ໔ ກະທໍາອັນຊະລີແລ້ວ
ທອດພຣະເນດເຫັນເທບທິດາທັງ ໔ ຜູ້ກະຕືລືລົ້ນ
ຈຶ່ງຕັດວ່າ ລູກສາວມີຄວາມງາມເປັນເລີດ ມີໃບໜ້າຜ່ອງໃສ

ພວກເຈົ້າທັງປວງລ້ວນທັດທຽມກັນ
ໃຜເດ່ບໍ່ຈະກ່າວຄຳເວົ້າຜິດຖຽງກັນຂຶ້ນໄດ້

(ລຳດັບນັ້ນ ເທບທິດາເຫຼົ່ານັ້ນເມື່ອຈະຂາບທູນທ້າວສັກກະ ຈຶ່ງກ່າວຄາຖາວ່າ)

[໘໘໘] ພຣະນາຣະທະມະຫາມຸນີອົງໃດຜູ້ທ່ອງທ່ຽວໄປໄດ້ທົ່ວໂລກ
ດຳລົງຢູ່ໃນທຳ ມີຄວາມບາກບັ່ນຢ່າງຈິງຈັງ
ທ່ານນັ້ນໄດ້ກ່າວແກ່ພວກຂ້ານ້ອຍທີ່ພູຄັນທະມາດ
ເຊິ່ງເປັນພູອັນປະເສີດວ່າ
ຈົ່ງໄປທູນຖາມທ້າວສັກກະຜູ້ເປັນໃຫຍ່ກວ່າພູດເບິ່ງເທີ້ນ
ຖ້າພວກທ່ານໃນບ່ອນນີ້ບໍ່ຮູ້ວ່າຕົນສູງສຸດຫຼືຕ່ຳຊາມ

(ທ້າວສັກກະເມື່ອຈະຕັດບອກເຫດ ຈຶ່ງຕັດຄາຖາວ່າ)

[໘໘໙] ລູກສາວຜູ້ມີເຮືອນຮ່າງອັນງົດງາມ
ມີມະຫາມຸນີຜູ້ທ່ອງທ່ຽວຢູ່ໃນປ່າໃຫຍ່ນາມວ່າໂກສີຍະ
ທ່ານບໍ່ໃຫ້ແລ້ວຈະບໍ່ຍອມບໍຣິໂພກອາຫານ
ທ່ານພິຈາລະນາແລ້ວຈຶ່ງຈະໃຫ້ທານ ກໍທ່ານຈັກໃຫ້ແກ່ລູກສາວຜູ້ໃດ
ຜູ້ນັ້ນແລປະເສີດກວ່າ

(ທ້າວສັກກະເມື່ອຈະສົ່ງເທບທິດາທັງ ໔ ໄປສຳນັກໂກສີຍະດາບົດ ໃຫ້ຮຽກມາຕະລີເທບພະບຸດ
ມາແລ້ວ ຈຶ່ງຕັດຄາຖາວ່າ)

[໘໘໔] ກໍໂກສີຍະດາບົດນັ້ນຢູ່ທາງທິດໃຕ້ແຄມຝັ່ງແມ່ນ້ຳຄົງຄາ
ຂ້າງຫິມະວັນຕະບັນພົດ ໂກສີຍະດາບົດນັ້ນມີນ້ຳແລະໂພຊະນາຫາໄດ້ຍາກ
ທ່ານເທບສາຣະຖີ ທ່ານຈົ່ງນຳອາຫານທິບໄປຖວາຍໃຫ້ເຖິງແກ່ທ່ານ

(ຕໍ່ຈາກນັ້ນ ພຣະສາດສະດາຈຶ່ງຕັດວ່າ)

[໘໘໕] ມາຕະລີເທບພະບຸດນັ້ນຖືກທ້າວສັກກະຜູ້ປະເສີດກວ່າເທວະດາ
ຊົງສົ່ງໄປ ຈຶ່ງຂຶ້ນລົດທຽມດ້ວຍມ້າ ໑,໐໐໐ ໂຕ
ໄດ້ໄປເຖິງອາສົມຢ່າງທັນທີນັ້ນແລ ບໍ່ຜາກົດກາຍ
ໄດ້ຖວາຍອາຫານທິບແກ່ພຣະມຸນີແລ້ວ

(ໂກສີຍະດາບົດຮັບໂພຊະນະແລ້ວຢືນຢູ່ນັ້ນແລ ກ່າວວ່າ)

[໔໔໖] ກໍເມື່ອເຮົາຢືນບຳເລີການບູຊາໄຟຢູ່ຕໍ່ໜ້າດວງອາທິດ
ເຊິ່ງບັນເທົາຄວາມມືດໃນໂລກອັນອຸດົມ
ທ້າວວາສະວະຜູ້ຊົງຄອບງຳພູດທັງປວງ
ຫຼືໃຜກັນແນ່ມາວາງອາຫານທິບໄວ້ໃນຝາມືຂອງເຮົາ

[໔໔໗] ອາຫານທິບນີ້ຂາວອຸປະມາດັ່ງຫອຍສັງ ບໍ່ມີສິ່ງປຽບຄື
ໜ້າເບິ່ງ ສະອາດ ມີກິ່ນຫອມ ໜ້າພໍໃຈ ບໍ່ເຄີຍມີມາ
ຍັງບໍ່ເຄີຍໄດ້ເຫັນດ້ວຍຕາຂອງເຮົາຜູ້ເປັນຄົນ
ເທວະດາຕົນໃດວາງອາຫານທິບໄວ້ໃນຝາມືຂອງເຮົາບໍ

(ມາຕະລີເທບສາຣະຖີກ່າວວ່າ)

[໔໔໘] ຂ້າແດ່ ພຣະມະຫາມຸນີ ຂ້າພະເຈົ້າຖືກທ້າວສັກກະ
ຜູ້ເປັນຈອມແຫ່ງເທບ ຜູ້ຍິ່ງໃຫຍ່ໃຊ້ມາ
ຈຶ່ງໄດ້ຟ້າວນຳອາຫານທິບມາ ຂ້າແດ່ ພຣະມະຫາມຸນີ
ຂໍພຣະຜູ້ເປັນເຈົ້າຈົ່ງຮູ້ຈັກຂ້າພະເຈົ້າວ່າ ມາຕະລີເທບສາຣະຖີ
ຂໍພຣະຜູ້ເປັນເຈົ້າຈົ່ງບໍຣິໂພກພັດອັນອຸດົມ ຢ່າຫ້າມເລີຍ

[໔໔໙] ກໍອາຫານທິບນັ້ນບຸກຄົນຜູ້ບໍຣິໂພກແລ້ວ
ຍ່ອມກຳຈັດບາບທຳໄດ້ ໑໔ ປະການ ຄື
໑. ຄວາມຫິວ ໒. ຄວາມຢາກ
໓. ຄວາມບໍ່ຍິນດີ ໔. ຄວາມກະວົນກະວາຍ
໕. ຄວາມອິດເມື່ອຍ ໖. ຄວາມໂກດ
໗. ຄວາມຜູກໂກດ ໘. ຄວາມຜິດຖຽງ
໙. ຄວາມສັບສໍ່ ໑໐. ຄວາມໜາວ
໑໑. ຄວາມຮ້ອນ ໑໔. ຄວາມຂີ້ຄ້ານ
ອາຫານທິບນີ້ຣົດຢ້ຽມ

(ໂກສິຍະດາບົດເມື່ອຈະເປີດເຜີຍການສະມາທານຂໍ້ວັດປະຕິບັດຂອງຕົນ ຈຶ່ງກ່າວຄາຖາວ່າ)

[໔໕໐] ມາຕະລີ ການບໍ່ໃຫ້ກ່ອນແລ້ວບໍຣິໂພກບໍ່ສົມຄວນແກ່ອາດຕະມາ
ຂໍ້ວັດປະຕິບັດອັນອຸດົມຂອງອາດຕະມາເປັນດັ່ງນີ້
ອັນໜຶ່ງ ການບໍຣິໂພກຄົນດຽວພຣະອະຣິຍະບໍ່ບູຊາ
ແລະບຸກຄົນຜູ້ບໍ່ຈຳແນກແຈກຈ່າຍຍ່ອມບໍ່ປະສົບຄວາມສຸກ

(ໂກສິຍະດາບົດຖືກມາຕະລີເທບພະບຸດຖາມ ຈຶ່ງຕອບວ່າ)

[໔໓໑] ຊົນທັງຫຼາຍເຫຼົ່ານີ້ ລາງພວກເປັນຜູ້ຂ້າຍິງ
ຄົບຊູ້ພັນລະຍາຊາຍອື່ນ ປະທຸດສະຮ້າຍມິດ
ແລະດ່າວ່າສະມະນະແລະພາມຜູ້ມີຂໍ້ວັດປະຕິບັດດີງາມ
ຊົນເຫຼົ່ານັ້ນທັງໝົດມີຄວາມຂີ້ຖີ່ເປັນປະການທີ ໕
ຊື່ວ່າເປັນຄົນຊົ່ວຊາມ ຍ້ອນເຫດນັ້ນ
ແມ່ນແຕ່ນ້ຳອາດຕະມາບໍ່ໃຫ້ແລ້ວຈະບໍ່ຍອມດື່ມ

[໔໓໒] ອັນໜຶ່ງ ອາດຕະມາຈັກໃຫ້ທານທີ່ທ່ານຜູ້ຮູ້ສັນເສີນແກ່ຍິງຫຼືຊາຍ
ຍ້ອນວ່າທ່ານເຫຼົ່ານັ້ນເປັນຜູ້ມີສັດທາ
ຮູ້ຄຳເວົ້າຂອງຜູ້ຂໍ ປາສະຈາກຄວາມຂີ້ຖີ່
ຍ່ອມເປັນຜູ້ຊື່ວ່າສະອາດແລະຊື່ສັດໃນໂລກນີ້

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໔໓໓] ລຳດັບນັ້ນ ເທບກັນຍາທັງ ໔ ນາງຜູ້ມີຜິວພັນເໝືອນຄຳ
ເຊິ່ງທ້າວສັກກະຜູ້ປະເສີດກວ່າເທບທັງຫຼາຍ
ຊົງອະນຸມັດແລ້ວ ຊົງສົ່ງໄປແລ້ວ ຄື
໑. ເທບທິດາອາສາ ໒. ເທບທິດາສັດທາ
໓. ເທບທິດາຊິຣີ ໔. ເທບທິດາຫິຣີ
ໄດ້ມາເຖິງອາສົມເຊິ່ງເປັນບ່ອນຢູ່ຂອງໂກສິຍະດາບົດນັ້ນ

[໔໓໔] ໂກສິຍະດາບົດເມື່ອເຫັນເທບກັນຍາເຫຼົ່ານັ້ນ
ມີຄວາມປາໂມດຢ່າງຍິ່ງ ຈຶ່ງໄດ້ກ່າວກັບເທບກັນຍາທັງ ໔
ຜູ້ມີຜິວພັນງົດງາມເໝືອນແປວໄຟທັງ ໔ ທິດ
ຕໍ່ໜ້າມາຕະລີເທບພະບຸດວ່າ

[໔໓໕] ແມ່ເທບທິດາ ທ່ານມີນາມໃດ ປະດັບຕົບແຕ່ງຮ່າງກາຍງົດງາມ
ເໝືອນດາວປະກາຍພຶກເຊິ່ງປະເສີດກວ່າດວງດາວທັງຫຼາຍ
ມີຜິວພັນຜຸດຜ່ອງຢູ່ທາງທິດຕາເວັນອອກ
ອາດຕະມາຂໍຖາມທ່ານຜູ້ມີເຮືອນຮ່າງເໝືອນຫຸ່ນຄຳ
ໂຜດບອກອາດຕະມາເທີ້ນວ່າ ທ່ານເປັນເທບຊັ້ນໃດ

(ຊິຣິເທບກັນຍາຕອບວ່າ)

[໔໓໖] ເຮົາຊື່ຊິຣິເທວີ ໄດ້ຮັບການບູຊາຈາກໝູ່ມະນຸດ
ມີປົກກະຕິບໍ່ຄົບຫາສັດຜູ້ມີໃຈຊົ່ວທຸກເມື່ອ
ມາຍັງສຳນັກພຣະຜູ້ເປັນເຈົ້າຍ້ອນຜິດຖຽງກັນດ້ວຍເລື້ອງອາຫານທິບ
ພຣະຜູ້ເປັນເຈົ້າຜູ້ມີປັນຍາອັນປະເສີດ
ຂໍພຣະຜູ້ເປັນເຈົ້າໂຜດແບ່ງອາຫານທິບໃຫ້ເຮົາແດ່ເທີ້ນ

[໔໓໗] ທ່ານມະຫາມຸນີ ເຮົາປາຖະໜາອາຫານທິບຂອງນໍຣະຊົນໃດ
ນໍຣະຊົນນັ້ນຍ່ອມບັນເທີງໃຈດ້ວຍການມະຄຸນທັງປວງ ຂ້າແດ່ ພຣະຜູ້ເປັນເຈົ້າ
ຜູ້ມີປັນຍາອັນປະເສີດ ອຸດົມກວ່າຜູ້ບູຊາໄຟທັງຫຼາຍ
ພຣະຜູ້ເປັນເຈົ້າຈົ່ງຮູ້ຈັກເຮົາວ່າ ຊິຣິເທວີ
ຂໍພຣະຜູ້ເປັນເຈົ້າໂຜດແບ່ງອາຫານທິບໃຫ້ເຮົາແດ່ເທີ້ນ

(ໂກສິຍະດາບົດກ່າວວ່າ)

[໔໓໘] ນໍຣະຊົນທັງຫຼາຍຜູ້ປະກອບດ້ວຍສິລະປະວິທະຍາ ມາຣະຍາດ
ແລະຄວາມຮູ້ ເປັນຜູ້ຊ່ຽວຊານວຽກງານຂອງຕົນ
ຖືກທ່ານປະຖິ້ມໃຫ້ເຫີນຫ່າງ ຍ່ອມບໍ່ໄດ້ອັນໃດແມ່ນແຕ່ໜ້ອຍ
ຄວາມຂາດແຄນທີ່ທ່ານກະທຳແລ້ວນັ້ນບໍ່ດີເລີຍ

[໔໓໙] ແມ່ນາງຊິຣິເທວີ ອາດຕະມາເຫັນຄົນຜູ້ຂີ້ຄ້ານ ກິນຫຼາຍ
ທັງເປັນຄົນມີຕະກູນຕ່ຳ ມີຮູບຮ່າງແປກປະຫຼາດ
ຄົນນັ້ນຜູ້ອັນທ່ານເຝົ້າຄຸ້ມຄອງຮັກສາ
ກັບກາຍເປັນຄົນມີໂພກະ ມີຄວາມສຸກ
ແມ່ນຄົນຜູ້ສົມບູນດ້ວຍຊາດຕະກູນ
ກໍໃຊ້ສອຍໄດ້ຄືກັບຂ້າທາດ

[໔໔໐] ຍ້ອນແນວນັ້ນ ອາດຕະມາຈຶ່ງຮູ້ຈັກທ່ານວ່າ ບໍ່ມີສັດຈະ
ບໍ່ແຍກຄົບຄົນ ເປັນຄົນງົມງວາຍ ເຮັດຜູ້ຮູ້ໃຫ້ຕົກຕ່ຳ
ເທບທິດາເຊັ່ນທ່ານຈຶ່ງບໍ່ສົມຄວນແກ່ອາສະນະແລະນ້ຳ
ອາຫານທິບຢູ່ໄສຈັກມີ ຈົ່ງໄປສາເທີ້ນ
ອາດຕະມາບໍ່ພໍໃຈທ່ານ

(ໂກສິຍະດາບົດສົນທະນາກັບນາງອາສາເທບທິດາວ່າ)

[໔໔໑] ໃຜກັນນັ້ນ ມີແຂ້ວຂາວສະອາດ
ສວມໃສ່ຕຸ້ມຫູ ມີເຮືອນຮ່າງງາມວິຈິດ
ຊົງເຄື່ອງປະດັບຄໍາເນື້ອກັ່ງ ນຸ່ງຫົ່ມພູສາສີລາຍນ້ຳ
ປະດັບຊໍ່ດອກໄມ້ສີແດງປານດັ່ງແປວໄຟທີ່ໄໝ້ຫຍ້າຄາ
ເບິ່ງຊ່າງງົດງາມ

[໔໔໒] ທ່ານຄືນາງເນື້ອຊາຍຜູ້ຕື່ນຢ້ານ
ທີ່ຖືກນາຍພານຍິງພາດແລ້ວແນມເບິ່ງຢ່າງງຸນງົງ
ແມ່ເທບທິດາຜູ້ມີດວງຕາຊື່ ໃນບ່ອນນີ້ໃຜເປັນເພື່ອນຂອງທ່ານ
ທ່ານທ່ຽວໄປຜູ້ດຽວໃນປ່າໃຫຍ່ ບໍ່ຢ້ານບໍ
(ອາສາເທບທິດາກ່າວວ່າ)

[໔໔໓] ຂ້າແດ່ທ່ານໂກສິຍະ ໃນບ່ອນນີ້ເຮົາບໍ່ມີເພື່ອນ
ເຮົາເປັນເທບທິດາເກີດໃນຕາວະຕິງສາໂລກ ຊື່ເທບທິດາອາສາ
ມາຍັງສໍານັກຂອງພຣະຜູ້ເປັນເຈົ້າຍ້ອນຫວັງຈະໄດ້ອາຫານທິບ
ພຣະຜູ້ເປັນເຈົ້າຜູ້ມີປັນຍາອັນປະເສີດ
ຂໍພຣະຜູ້ເປັນເຈົ້າໂຜດແບ່ງອາຫານທິບໃຫ້ເຮົາແດ່ເທີ້ນ

(ໂກສິຍະດາບົດກ່າວວ່າ)

[໔໔໔] ພໍ່ຄ້າທັງຫຼາຍຜູ້ສະແຫວງຫາຊັບມີຄວາມຫວັງຈຶ່ງຈະໄປ
ຍ່ອມຂຶ້ນເຮືອແລ່ນໄປໃນທ້ອງທະເລ
ບາງເທື່ອພວກເຂົາຍ່ອມຈົມລົງໃນທ້ອງທະເລນັ້ນແດ່
ບາງເວລາພວກເຂົາຍ່ອມສູນສິ້ນຊັບຂາດທຶນກັບມາແດ່

[໔໔໕] ຊາວນາທັງຫຼາຍມີຄວາມຫວັງຈຶ່ງໄຖນາ
ຫວ່ານພືດ ກະທໍາຕາມວິທີການ
ແຕ່ຍ້ອນສັດຕູພືດລົງແດ່ ຝົນແລ້ງແດ່
ພວກເຂົາຈຶ່ງບໍ່ໄດ້ປະສົບຜົນອັນໃດ ໆ ອັນຈະມີມາຈາກເຂົ້າກ້ານັ້ນ

[໔໔໖] ອັນໜຶ່ງ ນໍຣະຊົນທັງຫຼາຍຜູ້ສະແຫວງຫາຄວາມສຸກ
ຕັ້ງຄວາມຫວັງໄວ້ເບື້ອງໜ້າ

ຍ່ອມກະທຳການຢ່າງບຸຣຸດຂອງຕົນໃນກິດໜ້າທີ່ຂອງຫົວໜ້າ
ແຕ່ພວກເຂົາກັບຖືກບີບຄັ້ນຢ່າງໜັກ
ບໍ່ໄດ້ອັນໃດ ໆ ແມ່ນແຕ່ໜ້ອຍເລີຍ
ກໍຕະເຫຼີດໜີໄປທົ່ວທິດເພື່ອປະໂຫຍດແກ່ຫົວໜ້າ

[໔໔໗] ນໍຣະຊົນທັງຫຼາຍຜູ້ສະແຫວງຫາຄວາມສຸກ
ມີໃຈມຸ້ງຫວັງທີ່ຈະໄປສະຫວັນ
ຈຶ່ງສະລະທັນຍະຊາດ ຊັບສົມບັດ ແລະເຄືອຍາດ
ພໍ່າເພັງຕະບະອັນເສົ້າໝອງແມ່ນຕະຫຼອດການລະນານ
ຂຶ້ນສູ່ທາງຜິດ ຈຶ່ງແລ່ນໄປສູ່ທຸກຄະຕິ

[໔໔໘] ຄວາມຫວັງຊື່ວ່າກໍ່ເລື້ອງຄາດເຄື່ອນ
ນໍຣະຊົນເຫຼົ່ານີ້ພາກັນຕົກນະຮົກກໍຍ້ອນຫວັງ
ແນ່ະແມ່ອາສາ ທ່ານຈຶ່ງເຊີາອາຫານທິບໃນໂຕທ່ານສາ
ຄືນເຊັ່ນທ່ານບໍ່ລືມຄວນແກ່ອາສະນະແລະນໍ້າ
ອາຫານທິບຢູ່ໄສຈັກມີ ຈົ່ງໄປສາເທີ້ນ ອາດຕະມາບໍ່ພໍໃຈທ່ານ

(ໂກສິຍະດາບົດສົນທະນາກັບນາງສັດທາເທບທິດາວ່າ)

[໔໔໙] ທ່ານຜູ້ມີຍົດຮຸ່ງເຮືອງ ຢູ່ດ້ວຍຍົດ ເປັນເຈົ້າປະຈຳທິດ
ອາດຕະມາຂໍຖາມທ່ານຜູ້ມີນາມອັນໜ້າກຽດຊັງ
ແມ່ເທບທິດາຜູ້ມີເຮືອນຮ່າງເໝືອນຫຸ່ນຄຳ
ໂຜດບອກອາດຕະມາເທີ້ນວ່າ ທ່ານເປັນເທບຊັ້ນໃດ

(ຕໍ່ຈາກນັ້ນ ນາງສັດທາເທບທິດາກ່າວວ່າ)

[໔໕໐] ເຮົາຊື່ສັດທາເທວີ ໄດ້ຮັບການບູຊາຈາກໝູ່ມະນຸດ
ມີປົກກະຕິບໍ່ຄົບຫາສັດຜູ້ມີໃຈຊົ່ວທຸກເມື່ອ
ມາຍັງສຳນັກຂອງພຣະຜູ້ເປັນເຈົ້າຍ້ອນຜິດຖຽງກັນດ້ວຍເລື້ອງອາຫານທິບ
ພຣະຜູ້ເປັນເຈົ້າຜູ້ມີປັນຍາອັນປະເສີດ
ຂໍພຣະຜູ້ເປັນເຈົ້າໂຜດແບ່ງອາຫານທິບໃຫ້ເຮົາແດ່ເທີ້ນ

(ໂກສິຍະດາບົດກ່າວວ່າ)

[໔໕໑] ກໍໃນການບາງເວລາ ມະນຸດທັງຫຼາຍຢຶດຖືການໃຫ້ທານແດ່

ການເຝິກຝົນຕົນແດ່ ການບໍລິຈາກແດ່ ຄວາມສັງລວມແດ່
ກະທຳໄປດ້ວຍສັດທາ ແຕ່ມະນຸດພວກໜຶ່ງກັບຖືກທ່ານ
ນຳພາຜິດທາງ ຈຶ່ງກະທຳການລັກແດ່ ເວົ້າຕົວະແດ່
ຄົດໂກງແດ່ ເວົ້າສັບສໍ່ແດ່

[໔໕໔] ບຸຣຸດຜູ້ມີຄວາມເພ່ງເລັງພັນລະຍາທັງຫຼາຍຂອງຊາຍອື່ນ
ຜູ້ສະເໝີຄືກັນ ປະກອບດ້ວຍສິນແດ່ ມີຂໍ້ວັດປະຕິບັດຕໍ່ສາມີແດ່
ກຳຈັດຄວາມພໍໃຈແມ່ນໃນຍິງທັງຫຼາຍທີ່ເປັນກຸນລະສະຕີອອກສາແລ້ວ
ກັບທຳຄວາມສັດທາໃນນາງກຸມພະທາສີ

[໔໕໓] ແມ່ນາງສັດທາເທບທິດາ ທ່ານນັ້ນແລປະພຶດນອກໃຈ
ກະທຳຄວາມຊົ່ວ ລະຖິ້ມຄວາມດີ
ເທບທິດາເຊັ່ນທ່ານຈຶ່ງບໍ່ສົມຄວນແກ່ອາສະນະແລະນ້ຳ
ອາຫານທິບຢູ່ໄສຈັກມີ ຈົ່ງໄປສາເທີ້ນ ອາດຕະມາບໍ່ພໍໃຈທ່ານ

(ໂກສິຍະດາບົດສົນທະນາກັບນາງທິຣິເທບທິດາວ່າ)

[໔໕໔] ໃນບ່ອນສຸດແຫ່ງຣາຕີ ເມື່ອຍາມອາລຸນ
ເທບທິດາຜູ້ຜາກົດຮູບປະພັນອັນອຸດົມ
ທ່ານຜາກົດກັບອາດຕະມາປຽບໄດ້ກັບເທບທິດາຜູ້ນັ້ນ
ໂຜດບອກອາດຕະມາເທີ້ນວ່າ ທ່ານເປັນເທບອັບປະສອນຊັ້ນໃດ

[໔໕໕] ທ່ານນັ້ນເປັນໃຜ ຄືເຄືອເຂົາດຳໃນລະດູຮ້ອນ
ຄືແປວໄຟ ຄືດອກໄມ້ມີກີບສີແດງ
ທີ່ໂອນເອນໄປມາຍ້ອນຖືກລົມພັດ
ຄ້າຍແມ່ເນື້ອໂຕງ່ວມເຫງົາກຳລັງຊະເງີ້ແນມ
ເບິ່ງຄືວ່າມີຄວາມປະສົງຈະກ່າວ ແຕ່ກໍບໍ່ເປ່ງວາຈາ

(ທິຣິເທບທິດາກ່າວວ່າ)

[໔໕໖] ເຮົາຊື່ທິຣິເທວີ ໄດ້ຮັບການບູຊາຈາກໝູ່ມະນຸດ
ມີປົກກະຕິບໍ່ຄົບຫາສັດຜູ້ມີໃຈຊົ່ວທຸກເມື່ອ
ມາຍັງສຳນັກຂອງພຣະຜູ້ເປັນເຈົ້າຍ້ອນຜິດຖຽງກັນດ້ວຍເລື້ອງອາຫານທິບ
ເຮົາບໍ່ອາດຈະຂໍແມ່ນອາຫານທິບໄດ້

ສໍາລັບຍິງ ການຂໍເປັນຄືການເປີດເຜີຍອະໄວຍະວະທີ່ໜ້າລະອາຍ

(ໂກສິຍະດາບົດເມື່ອໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໘໕໗] ແມ່ເທບທິດາຜູ້ມີເຮືອນຮ່າງອັນງົດງາມ
ທ່ານຈັກໄດ້ຕາມທໍາ ຕາມເຫດ ຍ້ອນວ່າອາຫານທິບ
ໃຜ ໆ ຈະໄດ້ຍ້ອນການຂໍເປັນໄປບໍ່ໄດ້ ນີ້ເປັນທໍານຽມ
ຍ້ອນແນວນັ້ນ ອາດຕະມາເພິ່ງເຊື່ອທ່ານຜູ້ບໍ່ຂໍ
ທ່ານປາຖະໜາອາຫານທິບໃດ
ອາດຕະມາຈະໃຫ້ແມ່ນອາຫານທິບນັ້ນແກ່ທ່ານ

[໘໕໘] ແມ່ເທບທິດາຜູ້ມີເຮືອນຮ່າງເໝືອນຫຸ່ນຄໍາ
ມື້ນີ້ ອາດຕະມາຂໍເຊີນທ່ານໃນອາສົມຂອງອາດຕະມາ
ຂໍບູຊາທ່ານດ້ວຍຣົດທຸກຊະນິດ ແມ່ນອາຫານທິບນັ້ນ
ອາດຕະມາເມື່ອບູຊາທ່ານແລ້ວຈຶ່ງຈັກບໍຣິໂພກ

(ພຣະບໍຣົມມະສາດສະດາຕັດພຣະຄາຖາຕໍ່ໄປວ່າ)

[໘໕໙] ຫິຣິເທວີເທບທິດານັ້ນໄດ້ຮັບອະນຸມັດຢ່າງແນ່ນອນ
ຈາກໂກສິຍະດາບົດຜູ້ມີອານຸພາບຮຸ່ງເຮືອງ
ຈຶ່ງໄດ້ເຂົ້າໄປສູ່ອາສົມອັນໜ້າອອນຊອນ
ມີນໍ້າມີໝາກໄມ້ອັນທ່ານຜູ້ປະເສີດບູຊາແລ້ວ
ເປັນສະຖານທີ່ທີ່ສັດຜູ້ມີໃຈຊົ່ວບໍ່ເຂົ້າໄປຄົບຫາທຸກເມື່ອ

[໘໖໐] ຢູ່ບ່ອນໃກ້ອາສົມນີ້ມີໝູ່ໄມ້ນານາຊະນິດ
ແຕກດອກອອກຜົນຈໍານວນຫຼາຍ ຄື
ໝາກມ່ວງ ໝາກຫາດ ໝາກມີ້ ດອກຈານ ໝາກອີຮຸມ
ອີກທັງໂລດທະນົງ ບົວບົກ ກາຣະເກດ ຈັນກະພໍ້
ແລະໝາກຫອມກໍແຕກດອກບານເດຍລະດາດ

[໘໖໑] ໃນປ່ານີ້ມີຕົ້ນໄມ້ຈໍານວນຫຼາຍ ຄື
ຕົ້ນສາລະ ຕົ້ນກຸ່ມ ຕົ້ນຫວ້າ ຕົ້ນໂພ ຕົ້ນໄຮ ໝາກຊາງ ຕົ້ນໂສກ
ດອກຄູນ ແຄຝອຍ ໄຮຍອຍ ຕົ້ນຈິກ ແລະລໍາຈຽກ
ມີກິ່ນຫອມຫວນໜ້າຍວນໃຈ

[໔໖໔] ຖົ່ວແປບ ອ້ອຍເລົາ ຖົ່ວປ່າ ໝາກພັບ ເຂົ້າຟ່າງ ໝາກເດືອຍ
ຖົ່ວເຫຼືອງເມັດນ້ອຍ ກ້ອຍມີເມັດ ກ້ອຍບໍ່ມີເມັດ
ເຂົ້າສາລີ ເຂົ້າເປືອກ ຣາດຊະດັດ ແລະເຂົ້າສານ
ກໍມີຈຳນວນຫຼາຍໃນອາສົມນີ້

[໔໖໓] ອັນໜຶ່ງ ດ້ານເໜືອແຫ່ງອາສົມນີ້ມີສະໂບກຂະຣະນີເກີດຂຶ້ນເອງ
ໜ້າກະເສມສຸກສຳຣານ ນ້ຳບໍ່ຂຸ່ນ ມີທ່າຣາບພຽງ
ນ້ຳໃສສະອາດ ຈືດສະນິດດີ ບໍ່ມີກິ່ນປະຕິກູນ

[໔໖໔] ໃນສະໂບກຂະຣະນີນັ້ນມີປານານາຊະນິດ ຄື
ປາດຸກ ປາກະທິງ ປາຕອງ ກຸ້ງ
ປາວຽນໄຟ ປານາງ ແລະປາກ່າ
ຕ່າງພາກັນລ່ອງລອຍສືບແສ່ວຢູ່ໃນສະທີ່ມີຂອບຄັນ
ຢ່າງມ່ວນຊື່ນສຸກສຳຣານ ທັງມີອາຫານຫຼວງຫຼາຍ

[໔໖໕] ທີ່ສະໂບກຂະຣະນີນັ້ນມີນົກນານາຊະນິດ ຄື
ຫົງ ນົກກະຮຽນ ນົກຍູງ ນົກຈັກພາກ
ນົກອອກ ນົກກາເວົາ ນົກທີ່ມີປີກສວຍງາມ
ນົກມີຫອນ ແລະນົກໂພຣະດົກຈຳນວນຫຼວງຫຼາຍ
ຕ່າງພາກັນມ່ວນຊື່ນສຸກສຳຣານ ທັງມີອາຫານຫຼວງຫຼາຍ

[໔໖໖] ໝູ່ເນື້ອນານາຊະນິດຈຳນວນຫຼາຍ ຄື
ສິງ ເສືອໂຄ່ງ ຊ້າງ ໝີ ໝາປ່າ ແລະເສືອດາວ
ຕ່າງພາກັນມາດື່ມນ້ຳທີ່ສະໂບກຂະຣະນີນັ້ນ

[໔໖໗] ໃນບ່ອນນັ້ນມີທັງແຮດ ງົວລານ ຄວາຍ ລະມັ່ງ ກວາງ
ເນື້ອຊາຍ ໝູປ່າ ສູ້ ໝູບ້ານ ຊະມົດ ເສືອປາ
ກະຕ່າຍ ແລະງົວກະທິງເປັນຈຳນວນຫຼາຍ

[໔໖໘] ພາກພື້ນແລະຊຸນເຂົາເດຍລະດາດໄປດ້ວຍດອກໄມ້ອັນງາມວິຈິດ
ກຶກກ້ອງຣະງົມໄປດ້ວຍສຽງຝູງນົກຂານຂັບ
ເປັນສະຖານທີ່ຝູງນົກຢູ່ອາໄສ

(ພຣະບໍຣົມມະສາດສະດາ ເພື່ອຈະຊົງສະແດງອາການທີ່ທິຣິເທບທິດາເຂົ້າໄປໃນອາສົມນັ້ນ
ຈຶ່ງຕັດວ່າ)

[໘໖໙] ເທບທິດານັ້ນຜູ້ມີຜິວພັນງົດງາມ ທັດຊົງດອກໄມ້ສີຂຽວ
ເຍື້ອງກາຍເຂົ້າໄປສູ່ອາສົມ
ເໝືອນສາຍຟ້າໃນລະຫວ່າງກຸ່ມມະຫາເມກ
ໂກສິຍະດາບົດໄດ້ຈັດຕັ້ງຕັ່ງທີ່ເຮັດດ້ວຍຫຍ້າຄາ
ມີພະນັກອີງຖັກໄວ້ຢ່າງດີ ສະອາດ ມີກິ່ນຫອມ
ປູລາດດ້ວຍໜັງສັດເພື່ອເທບທິດານັ້ນ
ແລ້ວໄດ້ກ່າວຄຳນີ້ກັບທິຣິເທວີເທບທິດາວ່າ
ເຊີນນັ່ງໃຫ້ສະບາຍເທີ້ນ ແມ່ໂສມງາມ ນີ້ອາສະນະ

[໘໗໐] ໃນການນັ້ນ ເມື່ອນາງທິຣິເທວີນັ້ນນັ່ງເທິງຕັ່ງແລ້ວ
ໂກສິຍະມະຫາມຸນີຜູ້ໃສ່ຊະດາແລະໜັງເສືອເຫຼືອງ
ໄດ້ຟ້າວນຳອາຫານທິບພ້ອມກັບໃຊ້ໃບບົວສົດຕັກນ້ຳມາ
ເພື່ອນາງເທບທິດາຜູ້ປາຖະໜາຕາມຄວາມຕ້ອງການດ້ວຍຕົນເອງ

[໘໗໑] ທິຣິເທວີເທບທິດານັ້ນມີໃຈເບີກບານ
ປະຄອງຮັບອາຫານທິບນັ້ນດ້ວຍມືທັງ ໒
ແລ້ວໄດ້ກ່າວກັບໂກສິຍະດາບົດຜູ້ເກົ້າຊະດາວ່າ
ຖ້າຈັ່ງຊັ້ນ ພຣະມຸນີຜູ້ປະເສີດ ບັດນີ້
ເຮົາເປັນຜູ້ທີ່ພຣະຜູ້ເປັນເຈົ້າຍ່ອມບູຊາ ໄດ້ຮັບໄຊຊະນະແລ້ວ
ຈະເພິ່ງກັບໄປສູ່ສະຫວັນຊັ້ນໄຕຣທິບ

[໘໗໒] ເທບທິດານັ້ນຜູ້ມົວເມົາແລ້ວດ້ວຍຄວາມມົວເມົາໃນຜິວພັນ
ອັນໂກສິຍະດາບົດຜູ້ມີອານຸພາບຮຸ່ງເຮືອງອະນຸຍາດແລ້ວ
ໄດ້ໄປໃນສຳນັກຂອງທ້າວສະຫັດສະໄນແລ້ວຂາບທູນວ່າ
ຂ້າແດ່ທ້າວວາສະວະ ນີ້ອາຫານທິບ
ຂໍພຣະອົງຊົງປະທານໄຊຊະນະໃຫ້ແກ່ຂ້ານ້ອຍເທີ້ນ ຂ້ານ້ອຍ

[໘໗໓] ແມ່ນທ້າວສັກກະກໍໄດ້ຊົງບູຊາທິຣິເທວີເທບທິດານັ້ນ
ໃນການນັ້ນ ເທວະດາທັງຫຼາຍພ້ອມທັງພຣະອິນ
ຕ່າງພາກັນບູຊານາງສຸຣະກັນຍາຜູ້ສູງສຸດ
ເທບທິດານັ້ນເປັນຜູ້ອັນເທວະດາແລະມະນຸດທັງຫຼາຍປະນົມມືບູຊາ
ໃນການທີ່ຕົນເຂົ້າໄປນັ່ງຕັ່ງໂຕໃໝ່

(ພຣະບໍຣົມມະສາດສະດາເມື່ອຈະຊົງກະທຳຂໍ້ຄວາມນັ້ນໃຫ້ແຈ່ມແຈ້ງ ຈຶ່ງຕັດວ່າ)

[໘໗໔] ທ້າວສະຫັດສະໄນຜູ້ເປັນຈອມແຫ່ງເທບຊັ້ນໄຕຣທິດ
ໄດ້ຕັດກັບມາຕະລີເທບສາຣະຖີນັ້ນອີກວ່າ
ທ່ານຈົ່ງໄປຖາມໂກສິຍະລືສີຕາມຄຳຂອງເຮົາວ່າ
ຂ້າແດ່ທ່ານໂກສິຍະ ເວັ້ນເທບທິດາອາສາ ເທບທິດາສັດທາ
ແລະເທບທິດາຊິຣິສາ ເທບທິດາຫິຣິຜູ້ດຽວ
ໄດ້ອາຫານທິບແລ້ວຍ້ອນເຫດໃດ

[໘໗໕] ມາຕະລີເທບສາຣະຖີໄດ້ຂຶ້ນສູ່ເວຊະຍັນຕະຣາດຊະລົດອັນຮຸ່ງເຮືອງ
ເຊັ່ນກັບເຄື່ອງອຸປະກອນ ມີຫອນອັນສຳເລັດດ້ວຍຄຳຊົມພູນຸດ
ສະຫວ່າງສະໄຫວຄືດວງຕາເວັນ ປະດັບຕົບແຕ່ງຢ່າງງົດງາມ
ມີປະກາຍວິຈິດດັ່ງຄຳເລື່ອນລອຍໄປໄດ້ໂດຍສະດວກສະບາຍ

[໘໗໖] ທີ່ຣາດຊະລົດນີ້ມີຮູບດວງຈັນ ຮູບຊ້າງ ຮູບງົວ ຮູບມ້າ ຮູບກິນນະຣະ
ຮູບເສືອໂຄ່ງ ຮູບເສືອເຫຼືອງ ຮູບເນື້ອຊາຍເຮັດດ້ວຍຄຳ
ປະຊຸມກັນຫຼວງຫຼາຍ ມີຮູບນົກເຮັດທ່າທາງໂຜບິນຢູ່ໃນຣາດຊະລົດນີ້
ຮູບມະຣິຄາເຮັດດ້ວຍແກ້ວໄພທູນປະຊຸມກັນເປັນຝູງ ໆ ໃນຣາດຊະລົດນີ້

[໘໗໗] ທີ່ຣາດຊະລົດນັ້ນ ເທບພະບຸດທັງຫຼາຍໄດ້ທຽມອັດສະວະຣາດທີ່ມີຜິວກາຍ
ຄ້າຍຄຳ ມີພະລັງເຊັ່ນກັບຊ້າງໜຸ່ມປະມານ ໑,໐໐໐ ເຊືອກ
ປະດັບຕົບແຕ່ງແລ້ວ ມີເຄື່ອງເອ້ທີ່ເອິກຄືຕາໜ່າງຄຳ
ມີຍອຍຫູທັງ ໘ ຂ້າງ ແລ່ນໄປໄດ້ດ້ວຍສຽງວ່ອງໄວບໍ່ຕິດຂັດ

[໘໗໘] ມາຕະລີເທບສາຣະຖີຂຶ້ນສູ່ຣາດຊະຍານອັນປະເສີດນັ້ນ
ໄດ້ບັນລືໄປຕະຫຼອດທິດທັງ ໑໐ ເຫຼົ່ານີ້
ຍັງທ້ອງຟ້າ ພູ ຕົ້ນໄມ້ໃຫຍ່ອັນເປັນເຈົ້າແຫ່ງປ່າໃນເຂດປ່າ
ແລະແຜ່ນດິນພ້ອມທັງສະມຸດສາຄອນໃຫ້ສັ່ນສະເທືອນເລື່ອນລັ່ນ

[໘໗໙] ມາຕະລີເທບສາຣະຖີນັ້ນໄດ້ໄປເຖິງອາສົມໂດຍທັນທີ
ກະທຳຜ້າປາວານບ່ຽງບ່າຂ້າງໜຶ່ງ
ປະນົມມືແລ້ວໄດ້ກ່າວກັບໂກສິຍະເທວະພາມຜູ້ເປັນພະຫູສູດ
ມີຄຸນອັນຈະເລີນ ມີຂໍ້ວັດປະຕິບັດອັນເຝິກຝົນດີແລ້ວວ່າ

[໔໗໐] ທ່ານໂກສິຍະ ຂໍພຣະຜູ້ເປັນເຈົ້າຈົ່ງສະດັບຄຳເວົ້າຂອງພຣະອິນ
ຂ້າພະເຈົ້າເປັນທູດ ທ້າວປຸຣິນທະທະຕັດຖາມພຣະຜູ້ເປັນເຈົ້າວ່າ
(ທ່ານໂກສິຍະ) ເວັ້ນພຣະນາງອາສາເທວີ
ພຣະນາງສັດທາເທວີ ແລະພຣະນາງຊີຣີເທວີສາ
ພຣະນາງຫິຣີເທວີຜູ້ດຽວໄດ້ອາຫານທິບແລ້ວຍ້ອນເຫດໃດ

(ໂກສິຍະດາບົດຟັງຄຳຂອງມາຕະລີເທບພະບຸດນັ້ນແລ້ວ ຈຶ່ງກ່າວວ່າ)

[໔໗໑] ມາຕະລີເທບສາຣະຖີ ກໍພຣະນາງຊີຣີເທວີ
ຜາກົດກັບອາດຕະມາວ່າເປັນຄົນຕາບອດ
ພຣະນາງສັດທາເທວີເປັນຄົນບໍ່ແນ່ນອນ
ສ່ວນພຣະນາງອາສາເທວີອາດຕະມາຮູ້ໄດ້ວ່າເປັນຄົນເວົ້າຈາບໍ່ໄວ້ວາງໃຈ
ແຕ່ພຣະນາງຫິຣີເທວີດຳລົງຢູ່ໃນຄຸນອັນປະເສີດ

(ໂກສິຍະດາບົດເມື່ອຈະສັນເສີນຄຸນຂອງຫິຣີເທບທິດານັ້ນ ຈຶ່ງກ່າວວ່າ)

[໔໗໒] ຍິງໃດ ໆ ລາງພວກ ຄື
໑. ຍິງສາວ
໒. ຍິງທີ່ໂຄດຕະກູນຮັກສາ
໓. ແມ່ໝ້າຍ
໔. ຍິງມີສາມີ ເຫຼົ່ານີ້ຮູ້ສັນທະຣາຄະຂອງຕົນທີ່ເກີດຂຶ້ນຢ່າງແຮງກ້າ
ໃນບຸຣຸດທັງຫຼາຍແລ້ວຫັກຫ້າມຈິດຂອງຕົນໄດ້ດ້ວຍຄວາມລະອາຍ

[໔໗໓] ເມື່ອເຫຼົ່ານັກຮົບຜູ້ປຣາໄຊໃນສົງຄາມ
ທີ່ກຳລັງສູ້ຮົບດ້ວຍລູກສອນແລະຫອກ
ລາງພວກກຳລັງລົ້ມຕາຍ ລາງພວກກຳລັງໜີໄປ
ນັກຮົບເຫຼົ່າໃດສະລະຊີວິດແລ້ວຍ່ອມຫວນກັບມາດ້ວຍຄວາມລະອາຍ
ນັກຮົບຜູ້ມີຄວາມລະອາຍໃຈເຫຼົ່ານັ້ນ
ຈຶ່ງກັບມາຮັບໃຊ້ຫົວໜ້າໄດ້ອີກ (ກ້າສູ້ໜ້າຫົວໜ້າ)

[໔໗໔] ກໍຫິຣີເທວີເທບທິດານີ້ມີປົກກະຕິຫ້າມຊົນຜູ້ມີໃຈບາບຍ້ອນມີຫິຣີ
ປຽບຄືທຳນົບມີປົກກະຕິກັ້ນກະແສແຫ່ງສາຄອນ
ເທບສາຣະຖີ ຍ້ອນເຫດນັ້ນ ທ່ານຈົ່ງຂາບທູນຫິຣີເທວີເທບທິດາ
ເຊິ່ງທ່ານຜູ້ປະເສີດບູຊາແລ້ວໃນໂລກທັງປວງນັ້ນໃຫ້ພຣະອິນຮູ້

(ມາຕະລິເທບພະບຸດໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໘໗໕] ທ່ານໂກສິຍະດາບົດ ພຣະພົມກໍຕາມ
ພຣະອິນຜູ້ເປັນໃຫຍ່ກໍຕາມ ທ້າວປະຊາບໍດີກໍຕາມ
ໃຜນໍຈະຍັ່ງເຖິງຄວາມເຫັນຂອງພຣະຜູ້ເປັນເຈົ້ານີ້ໄດ້
ພຣະຜູ້ເປັນເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ກໍພຣະທິດາຂອງພຣະອິນຜູ້ເປັນໃຫຍ່ເກີດໄດ້ຮັບຍ້ອງຍໍວ່າ
ປະເສີດສຸດໃນໝູ່ເທບຍ້ອນມີຫິຣິ

(ມາຕະລິເທບພະບຸດປະສົງຈະນໍາໂກສິຍະດາບົດໄປສູ່ເທວະໂລກ ຈຶ່ງກ່າວວ່າ)

[໘໗໖] ເຊີນເທີ້ນ ເຊີນພຣະຜູ້ເປັນເຈົ້າມາຂຶ້ນລົດເທາະໄປ
ສູ່ສະຫວັນຊັ້ນໄຕຣທົດ ໃນບັດນີ້ເທີ້ນ
ລົດຄັນນີ້ໝ້າພໍໃຈພຣະຜູ້ເປັນເຈົ້າຜູ້ມີໂຄດສະເໝີກັບພຣະອິນ
ແມ່ນພຣະອິນກໍຊົງຈໍານົງຫວັງພຣະຜູ້ເປັນເຈົ້າຢູ່
ຂໍພຣະຜູ້ເປັນເຈົ້າຈົ່ງເຖິງຄວາມເປັນສະຫາຍກັບພຣະອິນໃນມື້ນີ້ເທີ້ນ

(ພຣະບໍຣົມມະສາດສະດາຕັດວ່າ)

[໘໗໗] ສັດທັງຫຼາຍທີ່ບໍ່ເຮັດບາບຍ່ອມມົດຈົດດ້ວຍອາການແນວນີ້
ອັນໜຶ່ງ ຜົນກໍາທີ່ປະພຶດດີແລ້ວຈະບໍ່ສູນຫາຍ
ສັດເຫຼົ່າໃດເຫຼົ່າໜຶ່ງໄດ້ເຫັນອາຫານທິບ
ສັດເຫຼົ່ານັ້ນທັງໝົດໄດ້ເຖິງຄວາມເປັນສະຫາຍກັບພຣະອິນ

[໘໗໘] ຫິຣິເທວີເທບທິດາຄືພຣະອຸບົນວັນນາເຖຣີ
ໂກສິຍະລືສີຄືພິກຂຸທານະບໍດີ
ປັນຈະສິຂະເທບພະບຸດຄືອະນຸຣຸດທະເຖຣະ
ສ່ວນມາຕະລິເທບສາຣະຖີຄືພຣະອານົນເຖຣະ

[໘໗໙] ສຸຣິຍະເທບພະບຸດຄືພຣະມະຫາກັດສະປະເຖຣະ
ຈັນທະເທບພະບຸດຄືພຣະມະຫາໂມກຄັນລານະເຖຣະ
ນາຣະທະດາບົດຄືພຣະສາຣີບຸດເຖຣະ
ສ່ວນທ້າວສັກກະຄືຕະຖາຄົດສໍາມາສໍາພຸດທະເຈົ້າ ດັ່ງນີ້ແລ

**ສຸທາໂພຊະນະຊາດົກທີ ໖ ຈົບ**

# ໘. ກຸນາລະຊາດົກ (໕໓໖)
## ວ່າດ້ວຍນົກກາເວົາ

ເລົ່າກັນມາແນວນີ້ ໄດ້ຟັງນຳກັນມາແນວນີ້ວ່າ ທີ່ປະເທດຫິມະພານອັນຊົງໄວ້ເຊິ່ງແຜ່ນດິນມີໂອສົດທຸກຊະນິດເດຍລະດາດໄປດ້ວຍດອກໄມ້ແລະພວງດອກໄມ້ຫຼວງຫຼາຍຫຼາຍຊະນິດເປັນທີ່ສັນຈອນໄປມາແຫ່ງຊ້າງ ງົວລານ ຄວາຍ ກວາງ ຈາມະຣີ ໂຕຟານ ແຮດ ສູ້ ສິງ ເສືອໂຄ່ງ ເສືອເຫຼືອງ ໝີ ໝາ ປ່າ ເສືອດາວ ນາກ ຊະມົດ ເສືອປາ ກະຕ່າຍ ງົວກະທິງ ເປັນບ່ອນອາໄສແຫ່ງຝູງຊ້າງໃຫຍ່ແລະຊ້າງພາຍຕະກູນມະຫານາຄະ ອັ່ງອໍຢູ່ທົ່ວປະຣິມົນທົນອັນຮາບພຽງ ມີຄ່າງ ລິງ ອີເຫັນ ລະມັ່ງ ເນື້ອສະມັນ ອີເກ້ງ ຍັກສີນີ ໜ້າລາ ກິນນະຣະ ຍັກ ແລະຮາກສົດອາໄສຢູ່ຮ່ວມກັນ ເດຍລະດາດໄປດ້ວຍໝູ່ໄມ້ຫຼວງຫຼາຍຫຼາຍພັນມີທັງດອກຍັງຕູມ ທັງກຳລັງອອກຊໍ່ ທັງດອກທີ່ບານເດຍລະດາດ ແລະດອກທີ່ບານຕະຫຼອດຍອດ ມີຝູງນົກເຂົາ ນົກໂພຣະດົກ ນົກທັດສະດີລິງ ນົກຍູງ ນົກກາເວົາ ນົກຍາງ ນົກກະສາ ສົ່ງສຽງຮ້ອງກຶກກ້ອງຮະງົມໄພເປັນພູມປະເທດປະດັບແໜ້ນໄປດ້ວຍແຮ່ທາດຫຼາຍຮ້ອຍຊະນິດເປັນຕົ້ນວ່າອັນຊັນ ມະໂນສີລາ ຫໍຣະດານ ມະຫາທິງຄ ທອງ ເງິນ ແລະຄຳ ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ທີ່ເຂດປ່າອັນໜ້າອອນຊອນແນວນີ້ ມີນົກກາເວົາໂຕໜຶ່ງຊື່ ກຸນາລະ ອາໄສຢູ່ ເປັນນົກທີ່ສວຍງາມ ມີຂົນແລະປີກງົດງາມຫຼາຍ

ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ນົກກາເວົາໂຕນັ້ນມີນາງນົກກາເວົາເປັນນາງບຳເລີເຖິງ ໓,໕໐໐ ໂຕ ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ຄັ້ງນັ້ນ ນາງນົກກາເວົາ ໒ ໂຕໃຊ້ປາກຄາບງ່າໄມ້ໃຫ້ນົກກຸນາລະນັ້ນຈັບເຄິ່ງກາງ ພາບິນໄປດ້ວຍປະສົງວ່າ ຄວາມອິດເມື່ອຍອ່ອນແຮງໃນການເດີນທາງໄກຢ່າໄດ້ບຽດບຽນນົກກຸນາລະນັ້ນເລີຍ ນາງນົກກາເວົາ ໕໐໐ ໂຕບິນຢູ່ຂ້າງລຸ່ມດ້ວຍປະສົງວ່າ ຖ້ານົກກຸນາລະນີ້ພາດຕົກຈາກຄອນ ພວກເຮົາຈັກໃຊ້ປີກປະຄອງຮັບໄວ້

ນາງນົກ ໕໐໐ ໂຕບິນຢູ່ຂ້າງເທິງດ້ວຍປະສົງວ່າ ແສງແດດຢ່າໄດ້ແຜດເຜົານົກກຸນາລະນັ້ນເລີຍ

ນາງນົກຝູງລະ ໕໐໐ ໂຕບິນຂະນາບຢູ່ທັງ ໒ ຂ້າງດ້ວຍປະສົງວ່າ ຄວາມໜາວກໍຕາມ ຄວາມຮ້ອນກໍຕາມ ຫຍ້າກໍຕາມ ລະອອງກໍຕາມ ລົມກໍຕາມ ນ້ຳຄ້າງກໍຕາມ ຢ່າໄດ້ຖືກຕ້ອງນົກກຸນາລະນັ້ນເລີຍ

ນາງນົກ ໕໐໐ ໂຕບິນຢູ່ທາງໜ້າດ້ວຍປະສົງວ່າ ຄົນລ້ຽງງົວກໍຕາມ ຄົນລ້ຽງສັດກໍຕາມ ຄົນຫາບຫຍ້າກໍຕາມ ຄົນຫາຟືນກໍຕາມ ຄົນທຳງານໃນປ່າກໍຕາມ ຢ່າໄດ້ໃຊ້ດຸ້ນຟືນ ກະເບື້ອງ

ຝາມື ກ້ອນດິນ ໄມ້ຄ້ອນ ອາວຸດ ຫຼືກ້ອນຫີນ ທຳຮ້າຍນົກກຸນາລະນັ້ນເລີຍ ນົກກຸນາລະນີ້ຢ່າໄດ້ກະທົບກໍໄມ້ ເຄືອເຂົາ ຕົ້ນໄມ້ ງ່າໄມ້ ເສົາ ຫີນ ແລະພວກນົກທີ່ມີກຳລັງກວ່າເລີຍ

ນາງນົກ ໕໐໐ ໂຕບິນປະກົບຢູ່ທາງຫຼັງ ອອກສຽງອັນມ່ວນ ອ່ອນຫວານ ເພາະພິ້ງ ຈັບໃຈ ດ້ວຍປະສົງວ່າ ນົກກຸນາລະນີ້ຢ່າໄດ້ງຽບເຫງົາຢູ່ເທິງຄອນເລີຍ

ນາງນົກ ໕໐໐ ໂຕພາກັນບິນໄປສູ່ທິດຕ່າງ ໆ ນຳເອົາໝາກໄມ້ຊະນິດຕ່າງ ໆ ຈາກຕົ້ນໄມ້ ຫຼາຍຊະນິດມາດ້ວຍປະສົງວ່າ ນົກກຸນາລະນີ້ຢ່າໄດ້ລຳບາກຍ້ອນຄວາມຫິວເລີຍ

ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ຄັ້ງນັ້ນ ນາງນົກກາເວົາເຫຼົ່ານັ້ນພາເອົານົກກຸນາລະນັ້ນຈາກສວນດອກໄມ້ໄປສູ່ສວນດອກໄມ້ ຈາກອຸທະຍານໄປສູ່ອຸທະຍານ ຈາກທ່ານ້ຳໄປສູ່ທ່ານ້ຳ ຈາກຈອມພູໄປສູ່ຈອມພູ ຈາກສວນໝາກມ່ວງໄປສູ່ສວນໝາກມ່ວງ ຈາກສວນຕົ້ນຫວ້າໄປສູ່ສວນຕົ້ນຫວ້າ ຈາກສວນໝາກມີ້ສຳປະລໍໄປສູ່ສວນໝາກມີ້ສຳປະລໍ ຈາກສວນໝາກພ້າວໄປສູ່ສວນໝາກພ້າວໂດຍທັນທີ ກໍພາກັນມີຄວາມຍິນດີ

ທ່ານຜູ້ຈະເລີນທັງຫຼາຍໄດ້ຂ່າວວ່າ ຄັ້ງນັ້ນນົກກຸນາລະຜູ້ມີນາງນົກເຫຼົ່ານັ້ນຫ້ອມລ້ອມຢູ່ ຕະຫຼອດ ວັນ ກໍຍັງດ່າແນວນີ້ວ່າ ຖອຍອອກໄປ ພວກເຈົ້າອີນົກຖ່ອຍ ພວກເຈົ້າ ຈົ່ງສູນຫາຍ ອີຖ່ອຍ ອີໂຈນ ອີນັກເລງ ອີເຜີເຣີ ອີໃຈເບົາ ອີເນລະຄຸນຄົນ ອີຕາມໃຈຕົນເອງຄືລົມ[๑]

ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ທາງດ້ານທິດຕາເວັນອອກແຫ່ງພູຫິມະພານນັ້ນແລ ມີແມ່ນ້ຳທີ່ເກີດແຕ່ພູອັນສຸຂຸມລະອຽດອ່ອນ ມີສີຂຽວ ໄຫຼບ່າອອກມາ ເປັນພູມປະເທດທີ່ສົມຄວນອອນຊອນໃຈ ຊື່ນໃຈ ດ້ວຍກິ່ນຫອມແຫ່ງດອກບົວ ດອກບົວຫຼວງ ດອກໂກມຸດ ດອກບົວຂາວ ດອກສັດຕະບຸດ ດອກຈົ່ງກົນນີ ແລະດອກບົວເຜື່ອນ ເຊິ່ງງອກງາມຂຶ້ນໃນບັດນັ້ນ ເປັນດັ່ງປ່າໝູ່ໄມ້ນານາພັນ ຄື ຕົ້ນໂກດຄຳ ຕົ້ນຈິກ ຕົ້ນລຳຈຽກ ເຄືອເຂົາຍ້ອຍ ຕົ້ນອ້ອຍຊ້າງ ຕົ້ນບຸນນາກ ຕົ້ນພິກຸນ ຕົ້ນໝາກຫອມ ຕົ້ນດູ່ ຕົ້ນຂີ້ມີ້ນ ຕົ້ນຮັງ ຕົ້ນສົບ ຕົ້ນຈຳປາ ຕົ້ນອະໂສກ ຕົ້ນກາກະທິງ ຕົ້ນຫອນໄກ່ ຕົ້ນຜັກເມັກ ຕົ້ນໂລດທະນົງ ແລະຕົ້ນຈັນແດງ ເປັນປ່າຮົກທີ່ດາດດື່ນໄປດ້ວຍຕົ້ນເກດສະໜາດຳ ຕົ້ນບົວບົກ ຕົ້ນປະຍົງ ຕົ້ນເທບພາຣຸ ແລະຕົ້ນກ້ວຍ ເປັນພູມພາກທີ່ສະພັ່ງໄປດ້ວຍພວງຊໍ່ດອກໄມ້ແຫ່ງຕົ້ນຮັກຟ້າ ຕົ້ນອັນຊັນ ຕົ້ນປະຣູ ຕົ້ນຈັກ ຕົ້ນຄົນທີສໍ ຕົ້ນກັນນິກາ ຕົ້ນຫາງຊ້າງ ຕົ້ນຄັດເຄົ້າ ຕົ້ນທອງຫຼາງ ຕົ້ນດອກຈານ ຕົ້ນໂຍທະກາ ຕົ້ນມະລິປ່າ ຕົ້ນຫອນໄກ່ ອັນປາສະຈາກມົນທິນ ບໍ່ມີໂທດ ແລະຕົ້ນຂານາງອັນສວຍງາມຍິ່ງ ອັນເດຍລະດາດໄປດ້ວຍຟຸ່ມແລະກໍແຫ່ງຕົ້ນມະລິຊ້ອນ ຕົ້ນນົມແມວ ຕົ້ນແຄທະນູ ຕົ້ນເປາະຫອມ ຕົ້ນເກດສະໜາ ແລະຕົ້ນແຝກຫອມ ເປັນປະເທດ ທີ່ເດຍລະດາດປະດັບໄປດ້ວຍເຄືອດອກໄມ້ທີ່ເບິ່ງບານສວຍງາມໜ້າພໍໃຈຍິ່ງ ມີຝູງຫົງ ນົກນາງນວນ ນົກການ້ຳ ແລະນົກເປັດນ້ຳສົ່ງສຽງກຶກກ້ອງຮ້ອງຣະງົມ

ເປັນທີ່ສະຖິດຢູ່ແຫ່ງໝູ່ວິທະຍາທອນ ນັກສິດ ສະມະນະ ແລະດາບົດ ເປັນປະເທດທີ່ສັນຈອນໄປ
ມາເປັນອາຈິນແຫ່ງ ໝູ່ເທພະຍະດາ ຍັກ ຮາກສົດ ທານົບ ຄົນທັນ ກິນນະຣະ ແລະພະຍານາກ

ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ຢູ່ເຂດປ່າອັນໜ້າອອນຊອນແນວນີ້ ມີນົກກາເວົາ
ຂາວອີກໂຕໜຶ່ງຊື່ປຸນນະມຸຂະ ອາໄສຢູ່ ມີສຳນຽງມ່ວນຫຼາຍ ມີໜ່ວຍຕາງົດງາມ ມີດວງຕາແດງຄື
ຄົນເມົາ

ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ປຸນນະມຸຂະນົກກາເວົາຂາວນັ້ນແລມີນາງນົກເປັນ
ບໍລິວານ ໓໕໐ ໂຕ ໄດ້ຂ່າວວ່າ ຄັ້ງນັ້ນ ນາງນົກ ໒ ໂຕໃຊ້ປາກຄາບງ່າໄມ້ໃຫ້ປຸນນະມຸຂະນົກ
ກາເວົາຂາວນັ້ນຈັບເຄິ່ງກາງ ພາບິນໄປດ້ວຍປະສົງວ່າ ຄວາມອິດເມື່ອຍອ່ອນແຮງໃນການ
ເດີນທາງໄກຢ່າໄດ້ບຽດບຽນປຸນນະມຸຂະນົກກາເວົາຂາວນັ້ນເລີຍ

ນາງນົກ ໕໐ ໂຕບິນຢູ່ຂ້າງລຸ່ມດ້ວຍປະສົງວ່າ ຖ້າປຸນນະມຸຂະນົກກາເວົາຂາວນີ້ພາດຕົກ
ຈາກຄອນ ພວກເຮົາຈັກໃຊ້ປີກປະຄອງຮັບໄວ້

ນາງນົກ ໕໐ ໂຕບິນຢູ່ຂ້າງເທິງດ້ວຍປະສົງວ່າ ແສງແດດຢ່າໄດ້ແຜດເຜົາ ປຸນນະມຸຂະ
ນົກກາເວົາຂາວນັ້ນເລີຍ

ນາງນົກຝູງລະ ໕໐ ໂຕບິນຂະນາບຢູ່ທັງ ໒ ຂ້າງດ້ວຍປະສົງວ່າ ຄວາມໜາວກໍຕາມ
ຄວາມຮ້ອນກໍຕາມ ຫຍ້າກໍຕາມ ລະອອງກໍຕາມ ລົມກໍຕາມ ນ້ຳຄ້າງກໍຕາມ ຢ່າໄດ້ ຖືກຕ້ອງປຸນ
ນະມຸຂະນົກກາເວົາຂາວນັ້ນເລີຍ

ນາງນົກ ໕໐ ໂຕບິນຢູ່ທາງໜ້າດ້ວຍປະສົງວ່າ ຄົນລ້ຽງງົວກໍຕາມ ຄົນລ້ຽງສັດກໍຕາມ
ຄົນຫາບຫຍ້າກໍຕາມ ຄົນຫາຟືນກໍຕາມ ຄົນທຳງານໃນປ່າກໍຕາມ ຢ່າໄດ້ໃຊ້ດົ້ນຟືນ ກະເບື້ອງ
ຝາມື ກ້ອນດິນ ໄມ້ຄ້ອນ ອາວຸດ ຫຼືກ້ອນຫີນທຳຮ້າຍປຸນນະມຸຂະນົກກາເວົາຂາວນັ້ນເລີຍ ປຸນນະ
ມຸຂະນົກກາເວົາຂາວນີ້ຢ່າໄດ້ກະທົບກໍໄມ້ ເຄືອເຂົາ ຕົ້ນໄມ້ ງ່າໄມ້ ເສົາ ຫີນ ແລະພວກນົກທີ່ມີ
ກຳລັງກວ່າເລີຍ

ນາງນົກ ໕໐ ໂຕບິນປະກົບຢູ່ທາງຫຼັງ ອອກສຽງອັນມ່ວນ ອ່ອນຫວານ ເພາະພິ້ງ ຈັບໃຈ
ດ້ວຍປະສົງວ່າ ປຸນນະມຸຂະນົກກາເວົາຂາວນີ້ ຢ່າງຽບເຫງົາຢູ່ເທິງຄອນເລີຍ

ນາງນົກ ໕໐ ໂຕພາກັນບິນໄປສູ່ທິດຕ່າງ ໆ ນຳເອົາໝາກໄມ້ຊະນິດຕ່າງ ໆ ຈາກຕົ້ນໄມ້
ຫຼາຍຊະນິດມາດ້ວຍປະສົງວ່າ ປຸນນະມຸຂະນົກກາເວົາຂາວນີ້ຢ່າໄດ້ລຳບາກຍ້ອນຄວາມຫິວເລີຍ

ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ຄັ້ງນັ້ນ ນາງນົກເຫຼົ່ານັ້ນພາເອົາປຸນນະມຸຂະນົກກາເວົາຂາວນັ້ນຈາກສວນດອກໄມ້ໄປສູ່ສວນດອກໄມ້ ຈາກອຸທະຍານໄປສູ່ອຸທະຍານ ຈາກທ່ານໍ້າໄປສູ່ທ່ານໍ້າ ຈາກຈອມພູໄປສູ່ຈອມພູ ຈາກສວນໝາກມ່ວງໄປສູ່ສວນໝາກມ່ວງ ຈາກສວນ ຕົ້ນຫວ້າໄປສູ່ສວນຕົ້ນຫວ້າ ຈາກສວນໝາກມີ້ສຳປະລໍໄປສູ່ສວນໝາກມີ້ສຳປະລໍ ຈາກສວນໝາກພ້າວໄປສູ່ສວນໝາກພ້າວໂດຍທັນທີ ກໍພາກັນມີຄວາມຍິນດີ

ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ຄັ້ງນັ້ນ ປຸນນະມຸຂະນົກກາເວົາຂາວຜູ້ມີນາງນົກເຫຼົ່ານັ້ນຫ້ອມລ້ອມຢູ່ຕະຫຼອດວັນ ຈຶ່ງສັນເສີນແນວນີ້ວ່າ ດີແລ້ວ ດີແລ້ວ ແມ່ນາງທັງຫຼາຍ ການທີ່ພວກທ່ານເພິ່ງປະຕິບັດບຳເລີສາມີ ນັ້ນເປັນການສົມຄວນແກ່ທ່ານທັງຫຼາຍຜູ້ເປັນກຸນລະທິດາ

ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ໃນການຕໍ່ມາ ປຸນນະມຸຂະນົກກາເວົາຂາວໄດ້ເຂົ້າໄປຫາພະຍານົກກຸນາລະຈົນຮອດບ່ອນຢູ່ ພວກນາງນົກຜູ້ເປັນນາງບຳເລີຂອງພະຍານົກກຸນາລະໄດ້ເຫັນປຸນນະມຸຂະນົກກາເວົາຂາວໂຕນັ້ນກຳລັງບິນມາແຕ່ໄກ ຈຶ່ງພາກັນເຂົ້າໄປຫາແລ້ວກ່າວວ່ານົກປຸນນະມຸຂະເພື່ອນຮັກ ນົກກຸນາລະໂຕນີ້ເປັນນົກຫຍາບຊ້າ ມີວາຈາຫຍາບຄາຍເຫຼືອເກີນເປັນຫຍັງພວກຂ້າພະເຈົ້າຈະເພິ່ງໄດ້ວາຈາອັນໜ້າຮັກຍ້ອນອາໄສທ່ານແດ່ ນົກປຸນນະມຸຂະຈຶ່ງກ່າວຕອບວ່າ ບາງເທື່ອຈະໄດ້ແດ່ ນາງທັງຫຼາຍ ແລ້ວຈຶ່ງເຂົ້າໄປຫານົກກຸນາລະຈົນຮອດບ່ອນຢູ່ເມື່ອເຂົ້າໄປຫາແລ້ວ ກ່າວສັມໂມທະນີຍະກະຖາກັບນົກກຸນາລະແລ້ວຈັບຢູ່ບ່ອນທີ່ສົມຄວນແລ້ວປຸນນະມຸຂະນົກກາເວົາຂາວ ຈຶ່ງໄດ້ກ່າວກັບນົກກຸນາລະນັ້ນວ່າ ກຸນາລະເພື່ອນເອີຍ ຍ້ອນເຫດໃດເພື່ອນຈຶ່ງປະຕິບັດແນວຜິດ ໆ ຕໍ່ນາງນົກຜູ້ມີຊາດສະເໝີກັນ ເປັນກຸນລະທິດາປະຕິບັດດີປະຕິບັດຊອບນໍ ກຸນາລະເພື່ອນເອີຍ ໄດ້ຂ່າວວ່າ ຍິງທັງຫຼາຍ ແມ່ນຈະເວົ້າຄຳເວົ້າທີ່ບໍ່ໜ້າພໍໃຈ ບຸກຄົນກໍຄວນຈະເວົ້າຄຳເວົ້າທີ່ໜ້າພໍໃຈແກ່ພວກນາງ ຈະເວົ້າຫຍັງເຖິງພວກຍິງທີ່ເວົ້າຄຳເວົ້າທີ່ໜ້າພໍໃຈນໍ

ເມື່ອນົກປຸນນະມຸຂະກ່າວແນວນີ້ແລ້ວ ນົກກຸນາລະໄດ້ຮຸກຮານປຸນນະມຸຂະນົກກາເວົາຂາວ ນັ້ນແນວນີ້ວ່າ ຈົ່ງສູນຫາຍ ຈົ່ງພິນາດສາເຫີ້ນເຈົ້າ ເຈົ້າເພື່ອນລາມົກ ເຈົ້າເພື່ອນຖ່ອຍ ຈະມີໃຜທີ່ສະຫຼາດຄືຜູ້ຜາບເມຍໄດ້ນໍ

ປຸນນະມຸຂະນົກກາເວົາຂາວຖືກຮຸກຮານແນວນີ້ແລ້ວຈຶ່ງໄດ້ກັບຈາກບ່ອນນັ້ນ

ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ໂດຍສະໄໝອື່ນຕໍ່ມາ ໂດຍການລ່ວງໄປບໍ່ດົນປານໃດ ປຸນນະມຸຂະນົກກາເວົາຂາວໄດ້ເກີດຄວາມບໍ່ສະບາຍຢ່າງໜັກຂຶ້ນ ຖ່າຍເປັນເລືອດ ເກີດເວທະນາກ້າແຂງປາງຕາຍ

ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ຄັ້ງນັ້ນ ນາງນົກທັງຫຼາຍຜູ້ເປັນນາງບຳເລີຂອງປຸນນະມຸຂະນົກກາເວົາຂາວໄດ້ມີຄວາມວິຕົກແນວນີ້ວ່າ ປຸນນະມຸຂະນົກກາເວົາຂາວນີ້ບໍ່ສະບາຍຫຼາຍ

ຈັ່ງໃດຈະເພິ່ງຫາຍຈາກຄວາມບໍ່ສະບາຍນີ້ໄດ້ ຈຶ່ງພາກັນລະຖິ້ມໄວ້ໂຕດຽວບໍ່ມີເພື່ອນແລ້ວເຂົ້າໄປຫານົກກຸນາລະຈົນຮອດບ່ອນຢູ່

ນົກກຸນາລະໄດ້ເຫັນນາງນົກເຫຼົ່ານັ້ນກຳລັງໂຜບິນມາແຕ່ໄກ ຈຶ່ງໄດ້ກ່າວກັບນາງນົກເຫຼົ່ານັ້ນແນວນີ້ວ່າ ນາງນົກຖ່ອຍທັງຫຼາຍ ຜົວຂອງພວກເຈົ້າໄປໃສສານໍ

ກຸນາລະເພື່ອນເອີຍ ປຸນນະມຸຂະນົກກາເວົ້າຂາວບໍ່ສະບາຍຫຼາຍ ຈັ່ງໃດຈະເພິ່ງຫາຍຈາກຄວາມບໍ່ສະບາຍນັ້ນໄດ້ນໍ

ເມື່ອນາງນົກເຫຼົ່ານັ້ນກ່າວແນວນີ້ແລ້ວ ນົກກຸນາລະໄດ້ຮຸກຮານນາງນົກເຫຼົ່ານັ້ນແນວນີ້ວ່າ ອີນົກຖ່ອຍ ພວກເຈົ້າຈົ່ງສູນຫາຍ ຈົ່ງພິນາດ ອີຖ່ອຍ ອີໂຈນ ອີນັກເລງ ອີເຜີເຣີ ອີໃຈເບົາ ອີເນລະຄຸນຄົນ ອີຕາມໃຈຕົນເອງຄືລົມ ເມື່ອກ່າວແລ້ວຈຶ່ງໄດ້ເຂົ້າໄປຫາປຸນນະມຸຂະນົກກາເວົ້າຂາວຈົນຮອດບ່ອນຢູ່ ເມື່ອເຂົ້າໄປຫາແລ້ວຈຶ່ງໄດ້ກ່າວກັບປຸນນະມຸຂະນົກດຸເຫວົ້າຂາວໂຕນັ້ນແນວນີ້ວ່າ ຍັງຢູ່ດີບໍ ປຸນນະມຸຂະເພື່ອນ

ຍັງຢູ່ດີ ກຸນາລະເພື່ອນ

ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ລຳດັບນັ້ນ ນົກກຸນາລະໄດ້ໃຊ້ປີກທັງ ໔ ແລະຈະງອຍ ປາກປະຄອງໃຫ້ປຸນນະມຸຂະນົກກາເວົ້າຂາວໂຕນັ້ນລຸກຂຶ້ນແລ້ວກອກເພສັດຕ່າງ ໆ ໃຫ້ດື່ມ

ໄດ້ຂ່າວວ່າ ຄັ້ງນັ້ນ ຄວາມບໍ່ສະບາຍຂອງປຸນນະມຸຂະນົກກາເວົ້າຂາວໂຕນັ້ນກໍລະງັບໄປແລ້ວແລ

ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ລຳດັບນັ້ນ ນົກກຸນາລະໄດ້ກ່າວກັບປຸນນະມຸຂະ

ນົກກາເວົ້າຂາວໂຕຫາຍຈາກໄຂ້ເຊິ່ງຫາຍຈາກຄວາມປ່ວຍໄຂ້ບໍ່ດົນນັ້ນແນວນີ້ວ່າ ເຮົາໄດ້ເຫັນມາແລ້ວ ປຸນນະມຸຂະເພື່ອນເອີຍ ເຮົາໄດ້ເຫັນນາງກັນຫາ ມີບິດາ ໔ ຄົນ[១] ມີຜົວ ໕ ຄົນ[២] ຍັງມີ ຈິດປະຕິພັດໃນຊາຍຄົນທີ ໖ ເຊິ່ງເປັນຄົນເປ້ຍ ຄືຜີຫົວຂາດ ກໍແລໃນເລື້ອງນີ້ ຍັງມີຄຳກ່າວເປັນຄາຖາໄວ້ອີກສ່ວນໜຶ່ງວ່າ

[໔໗໐] ຄັ້ງນັ້ນ ນາງລ່ວງລະເມີດ (ນອກໃຈ) ສາມີທັງ ໕ ຄົນເຫຼົ່ານີ້ ຄື

໑. ທ້າວອັດຊຸນະ[៣] ໒. ທ້າວນະກຸລະ

໓. ທ້າວພີມະເສນະ ໔. ທ້າວຍຸທິດຖິລະ ໕. ທ້າວສະຫະເທບ

ແລ້ວໄດ້ກະທຳລາມົກກັບຊາຍເຕ້ຍຄ່ອມ

ເຮົາໄດ້ເຫັນມາແລ້ວ ປຸນນະມຸຂະເພື່ອນເອີຍ ນາງສະມະນີຊື່ປັນຈະຕະປາວີ ອາໄສຢູ່ທ່າມກາງປ່າຊ້າ ຍັງພິດຄືການອົດອາຫານ ໔ ມື້ແລ້ວຈຶ່ງຈະບໍຣິໂພກໃຫ້ຜັນແປໄປ ໄດ້ ກະທຳລາມົກກັບນັກເລງສຸຣາ[໑]

ເຮົາໄດ້ເຫັນມາແລ້ວ ປຸນນະມຸຂະເພື່ອນເອີຍ ພຣະເທວີນາມວ່າກາກະວະດີ ຢູ່ທ່າມກາງມະຫາສະມຸດ ເປັນພັນລະຍາຂອງພະຍາຄຸດນາມວ່າເວນເຕີຍຍະ[໒] ໄດ້ກະທຳລາມົກກັບຄົນທັນນາມວ່ານະຕະກຸເວຣະ

ເຮົາໄດ້ເຫັນມາແລ້ວ ປຸນນະມຸຂະເພື່ອນເອີຍ ເຈົ້າຍິງຂົນງາມນາມວ່າກຸຣຸງຄະເທວີ ຜູ້ເຮັດໃຫ້ເອລິກະກຸມານ[໓] ມີຄວາມຮັກແພງ ໄດ້ກະທຳລາມົກກັບສະລັງຄະກຸມານເສນາບໍດີແລະທະນັນເຕວາສີ

ຄວາມຈິງ ເລື້ອງນັ້ນເຮົາໄດ້ຮູ້ມາແນວນີ້ ພຣະມານດາຂອງພຣະເຈົ້າພົມມະທັດຊົງປະຖິ້ມພຣະເຈົ້າໂກສົນແລ້ວໄດ້ຊົງກະທຳລາມົກກັບປັນຈາລະຈັນທະພານ[໔]

[໔໗໑] ຍິງທັງ ໕ ຄົນເຫຼົ່ານີ້ກໍດີ ຍິງເຫຼົ່າອື່ນກໍດີ
ໄດ້ກະທຳກຳອັນລາມົກແລ້ວ
ຍ້ອນເຫດນັ້ນ ເຮົາຈຶ່ງບໍ່ວາງໃຈ ບໍ່ສັນເສີນຍິງທັງຫຼາຍ
ແຜ່ນດິນຄືພູມເປັນທີ່ເປັນໄປແຫ່ງເຫຼົ່າສັດ
ອັນຊົງໄວ້ເຊິ່ງຣັດຕະນະຕ່າງ ໆ
ເປັນທີ່ຮອງຮັບທັງສິ່ງດີແລະສິ່ງບໍ່ດີ ມີຄວາມຍິນດີສະເໝີກັນ
ທົນທານໄດ້ທຸກຢ່າງ ບໍ່ດີ້ນຣົນ ບໍ່ໂກດ ສັນໃດ
ຍິງທັງຫຼາຍກໍຄືກັນສັນນັ້ນ
ຍ້ອນແນວນັ້ນ ນໍຣະຊົນບໍ່ຄວນວາງໃຈຍິງທັງຫຼາຍເຫຼົ່ານັ້ນ

[໔໗໔] ສິງເຊິ່ງເປັນສັດດຸຮ້າຍ ກິນເລືອດແລະຊີ້ນເປັນອາຫານ
ມີອາວຸດ ໕ ຢ່າງ[໑] ເປັນສັດຫຍາບຊ້າ
ມັກໃນການບຽດບຽນສັດອື່ນ ຂົ່ມຂີ່ສັດທັງຫຼາຍກິນສັນໃດ
ຍິງທັງຫຼາຍກໍຄືກັນສັນນັ້ນ[໒]
ຍ້ອນແນວນັ້ນ ນໍຣະຊົນບໍ່ຄວນວາງໃຈຍິງທັງຫຼາຍເຫຼົ່ານັ້ນ

ປຸນນະມຸຂະຜູ້ສະຫາຍ ໄນຍະວ່າ ຍິງທັງຫຼາຍບໍ່ແມ່ນຍິງແພດສະຫຍາ ບໍ່ແມ່ນຍິງງາມເມືອງ ບໍ່ແມ່ນຍິງຄະນິກາ ຍ້ອນຍິງເຫຼົ່ານັ້ນຈະຊື່ວ່າເປັນຍິງບໍລິສຸດກໍບໍ່ໄດ້ ແທ້ທີ່ຈິງ ຍິງເຫຼົ່ານີ້ເປັນຍິງເພດຊະຄາດ

ຍິງທັງຫຼາຍໂພກຜົນຄືພວກໂຈນ ມີພິດຮ້າຍຄືສຸຣາໃສ່ຢາພິດ ເວົ້າໂອ້ອວດຄືພໍ່ຄ້າ ກັບກອກບິດພົ້ວຄືນໍແຮດ ລີ້ນມີສອງແສກຄືງູ ປົກປິດຄວາມຊົ່ວຄືຂຸມຄູດ ໃຫ້ເຕັມໄດ້ຍາກຄືບາດານ ໃຫ້ຍິນດີໄດ້ຍາກຄືນາງຣາກສົດ ນໍາໄປສ່ວນດຽວຄືພະຍາຍົມ ກິນທຸກຢ່າງຄືແປວໄຟ ພັດພາໄປທຸກຢ່າງຄືແມ່ນໍ້າ ປະພຶດຕາມໃຈຕົນເອງຄືລົມ ບໍ່ເຮັດຫຍັງໃຫ້ວິເສດຄືພູສິເນຣຸ ຜະລິດຕະຜົນຢູ່ປະຈໍາຄືຕົ້ນໄມ້ມີພິດ ກໍໃນເລື້ອງນີ້ຍັງມີຄໍາກ່າວເປັນຄາຖາໄວ້ອີກສ່ວນໜຶ່ງວ່າ

[໔໗໓] ຍິງທັງຫຼາຍຄືໂຈນ ຄືສຸຣາມີພິດຮ້າຍ
ເວົ້າໂອ້ອວດຄືພໍ່ຄ້າ ກັບກອກບິດພົ້ວຄືນໍແຮດ
ມີລີ້ນສອງແສກຄືງູ

[໔໗໔] ປົກປິດຄວາມຊົ່ວຄືຂຸມຄູດ
ໃຫ້ເຕັມໄດ້ຍາກຄືບາດານ
ໃຫ້ຍິນດີໄດ້ຍາກຄືນາງຣາກສົດ
ນໍາໄປສ່ວນດຽວຄືພະຍາຍົມ

[໔໗໕] ກິນທຸກຢ່າງຄືແປວໄຟ ພັດພາໄປຄືແມ່ນໍ້າ
ມີຄວາມປະພຶດຕາມຂອບເຂດແຫ່ງຄວາມຕ້ອງການຄືລົມ
ບໍ່ມີຄວາມວິເສດອັນໃດຄືພູສິເນຣຸ
ຜະລິດຕະຜົນຢູ່ປະຈໍາຄືຕົ້ນໄມ້ມີພິດ
ຍິງທັງຫຼາຍມັກກະທໍາອັນຕະລາຍແກ່ຣັດຕະນະທັງຫຼາຍ
ຍັງໂພກະສົມບັດໃນເຮືອນໃຫ້ພິນາດ

ປຸນນະມຸຂະເພື່ອນເອີຍ ຊັບ ໔ ຢ່າງເຫຼົ່ານີ້ບັນດິດບໍ່ຄວນໃຫ້ຢູ່ໃນສະກຸນອື່ນ ຄື ໑. ງົວຜູ້ ໒. ແມ່ງົວນົມ ໓. ຍານພາຫະນະ ໔. ພັນລະຍາ ບັນດິດບໍ່ຄວນໃຫ້ຊັບທັງ ໔ ຢ່າງເຫຼົ່ານີ້ພັດພາກໄປຈາກເຮືອນ

[໔໗໖] ໑. ງົວຜູ້ ໒. ແມ່ງົວນົມ
໓. ຍານພາຫະນະ ໔. ພັນລະຍາ
ບັນດິດບໍ່ຄວນໃຫ້ຢູ່ໃນສະກຸນແຫ່ງຍາດ
ຍ້ອນຍາດທັງຫຼາຍຜູ້ບໍ່ມີຍານພາຫະນະຈະໃຊ້ສອຍລົດ
ຈະຂ້າງົວເຖິກຍ້ອນການໃຊ້ລາກແກ່ຈົນເກີນກໍາລັງ
ຈະຂ້າງົວນ້ອຍຍ້ອນການຣີດນົມງົວ

ແລະພັນລະຍາຈະປະທຸດສະຮ້າຍ (ນອກໃຈ) ໃນສະກຸນແຫ່ງຍາດ ປຸນນະມຸຂະເພື່ອນເອີຍ ຂອງ ໖ ຢ່າງເຫຼົ່ານີ້ ເມື່ອມີກິດທຸລະເກີດຂຶ້ນແລ້ວ ຍ່ອມໃຊ້ປະໂຫຍດອັນໃດບໍ່ໄດ້ ຄື

[໔໗]　໑. ທະນູບໍ່ມີສາຍ　໒. ພັນລະຍາຢູ່ໃນສະກຸນແຫ່ງຍາດ
໓. ເຮືອຢູ່ຝັ່ງນັ້ນ　໔. ຍານເພົາຫັກ
໕. ມິດຢູ່ແດນໄກ　໖. ເພື່ອນຊົ່ວ

ເມື່ອມີກິດທຸລະເກີດຂຶ້ນແລ້ວ ຍ່ອມໃຊ້ປະໂຫຍດອັນໃດບໍ່ໄດ້ ປຸນນະມຸຂະເພື່ອນເອີຍ ໄດຂ່າວວ່າ ຍິງທັງຫຼາຍ ຍ່ອມດູໝິ່ນສາມີດ້ວຍເຫດ ໘ ປະການ ຄື

໑. ຍ້ອນຄວາມເປັນທຸກຍາກ
໒. ຍ້ອນຄວາມເປັນຄົນປ່ວຍກະເສາະກະແສະ
໓. ຍ້ອນຄວາມເປັນຄົນແກ່ຊະຣາ
໔. ຍ້ອນຄວາມເປັນນັກເລງສຸຣາ
໕. ຍ້ອນຄວາມເປັນຄົນໂງ່ປືກ
໖. ຍ້ອນຄວາມເປັນຄົນມົວເມົາໃນກາມມະຄຸນ
໗. ຍ້ອນຄວນຕາມກິດຈະວຽກງານທັງປວງ
໘. ຍ້ອນຫາຊັບທັງປວງເພີ່ມເຕີມບໍ່ໄດ້

ປຸນນະມຸຂະເພື່ອນເອີຍ ໄດ້ຂ່າວວ່າ ຍິງທັງຫຼາຍຍ່ອມດູໝິ່ນສາມີດ້ວຍເຫດ ໘ ປະການເຫຼົ່ານີ້ ກໍໃນເລື້ອງນີ້ ຍັງມີຄຳກ່າວເປັນຄາຖາໄວ້ອີກສ່ວນໜຶ່ງວ່າ

[໔໘]　ຍິງຍ່ອມດູໝິ່ນສາມີ
໑. ຜູ້ທຸກຍາກ　໒. ຜູ້ປ່ວຍກະເສາະກະແສະ
໓. ຜູ້ແກ່ຊະຣາ　໔. ຜູ້ເປັນນັກເລງສຸຣາ
໕. ຜູ້ມົວເມົາໃນກາມມະຄຸນ　໖. ຜູ້ເປັນຄົນໂງ່ປືກ
໗. ຜູ້ໂງ່ຈ້ຳໃນກິດຈະວຽກງານທັງປວງ
໘. ຜູ້ຫຍ່ອນຍານຍ້ອນຫາຊັບທີ່ໃຫ້ຄວາມຕ້ອງການທັງປວງເພີ່ມເຕີມບໍ່ໄດ້

ປຸນນະມຸຂະເພື່ອນເອີຍ ໄດ້ຂ່າວວ່າ ຍິງຍ່ອມນຳຄວາມເດືອດຮ້ອນໃຈມາໃຫ້ສາມີດ້ວຍເຫດ ໙ ປະການ ຄື

໑. ໄປສວນດອກໄມ້ເປັນປະຈຳ
໒. ໄປອຸທະຍານເປັນປະຈຳ

໓. ໄປທ່ານ້ຳເປັນປະຈຳ

໔. ໄປຕະກູນຍາດເປັນປະຈຳ

໕. ໄປຕະກູນຄົນອື່ນເປັນປະຈຳ

໖. ແຍງແວ່ນແລະປະກອບການຕົບແຕ່ງຮ່າງກາຍດ້ວຍເສື້ອຜ້າເປັນປະຈຳ

໗. ຊອບດື່ມນ້ຳເມົາເປັນປະຈຳ

໘. ເຍື້ອງແນມທາງປ່ອງຢ້ຽມເປັນປະຈຳ

໙. ມັກຢືນອວດຊວດຊິງຢູ່ທີ່ປະຕູເປັນປະຈຳ

ປຸນນະມຸຂະເພື່ອນເອີຍ ໄດ້ຂ່າວວ່າ ຍິງຍ່ອມນຳຄວາມເດືອດຮ້ອນໃຈມາໃຫ້ສາມີດ້ວຍເຫດ ໙ ປະການເຫຼົ່ານີ້ ກໍໃນເລື້ອງນີ້ ຍັງມີຄຳກ່າວເປັນຄາຖາໄວ້ອີກສ່ວນໜຶ່ງວ່າ

[໔໙໙] ກໍຍິງໃດ ໑. ໄປສວນດອກໄມ້ ໒. ໄປອຸທະຍານ ໓. ໄປທ່ານ້ຳ ໔. ໄປຕະກູນຍາດ ໕. ໄປຕະກູນຄົນອື່ນເປັນປະຈຳ ໖. ແຍງແວ່ນແລະປະກອບການຕົບແຕ່ງຮ່າງກາຍດ້ວຍເສື້ອຜ້າເປັນປະຈຳ ໗. ມັກດື່ມນ້ຳເມົາເປັນປະຈຳ

[໓໐໐] ໘. ເຍື້ອງແນມທາງປ່ອງຢ້ຽມເປັນປະຈຳ
໙. ມັກຢືນອວດຊວດຊິງຢູ່ທີ່ປະຕູເປັນປະຈຳ

ຍິງທັງຫຼາຍເຫຼົ່ານັ້ນຍ່ອມນຳຄວາມເດືອດຮ້ອນໃຈມາໃຫ້ສາມີ ດ້ວຍເຫດ ໙ ປະການເຫຼົ່ານີ້ ປຸນນະມຸຂະເພື່ອນເອີຍ ໄດ້ຂ່າວວ່າ ຍິງຍ່ອມຍົວະຍຸຊາຍດ້ວຍເຫດ ໔໐ ປະການ ຄື

| | |
|---|---|
| ໑. ບິດກາຍ | ໒. ກົ້ມລົງ |
| ໓. ເຍື້ອງກາຍ | ໔. ເຮັດລະອາຍ |
| ໕. ເອົາເລັບຖູກັນ | ໖. ເອົາຕີນຢຽບກັນ |
| ໗. ເອົາໄມ້ຂີດແຜ່ນດິນ | ໘. ໃຫ້ເດັກໂດນ |
| ໙. ຫຼິ້ນເອງ ໃຫ້ເດັກຫຼິ້ນ | ໑໐. ຈູບເດັກ ໃຫ້ເດັກຈູບ |
| ໑໑. ບໍຣິໂພກເອງ ໃຫ້ເດັກບໍຣິໂພກ | ໑໒. ໃຫ້ຂອງເດັກ |
| ໑໓. ຂໍຂອງເດັກ | ໑໔. ເຮັດຕາມທີ່ເດັກເຮັດ |
| ໑໕. ເຮັດສຽງສູງ | ໑໖. ເຮັດສຽງຕ່ຳ |
| ໑໗. ເວົ້າເປີດເຜີຍ | ໑໘. ເວົ້າປົກປິດ |
| ໑໙. ເຮັດຊິກຊີ້ດ້ວຍການຟ້ອນລຳ | ໒໐. ດ້ວຍການຂັບຮ້ອງ |
| ໒໑. ດ້ວຍການເສບດົນຕີ | ໒໒. ດ້ວຍການຮ້ອງໄຫ້ |
| ໒໓. ດ້ວຍການເຍື້ອງກາຍ | ໒໔. ດ້ວຍການແຕ່ງກາຍ |
| ໒໕. ຈ້ອງແນມ | ໒໖. ສ່າຍສະແອວ |

໒໗. ສ່າຍຂອງລັບ
໒໘. ເປີດຂາອ່ອນ
໒໙. ປົກຂາອ່ອນ
໓໐. ເປີດຖັນໃຫ້ເບິ່ງ
໓໑. ເປີດຂີ້ແຮ້ໃຫ້ເບິ່ງ
໓໒. ເປີດສາຍບືໃຫ້ເບິ່ງ
໓໓. ຫຼີ່ວຕາ
໓໔. ຍັກຄິ້ວ
໓໕. ເມັ້ມປາກ
໓໖. ແລບລີ້ນ
໓໗. ເຮັດຜ້ານຸ່ງລຸດ
໓໘. ກັບນຸ່ງຜ້າ
໓໙. ສະຫຍາຍຜົມ
໔໐. ຫວີຜົມ

ປຸນນະມຸຂະເພື່ອນເອີຍ ໄດ້ຂ່າວວ່າ ຍິງຍ່ອມຍົວະຍຸຊາຍດ້ວຍເຫດ ໔໐ ປະການເຫຼົ່ານີ້

ປຸນນະມຸຂະເພື່ອນເອີຍ ໄດ້ຂ່າວວ່າ ຍິງປະທຸດສະຮ້າຍສາມີ ບັນດິດເພິ່ງຮູ້ໄດ້ດ້ວຍເຫດ ໒໕ ປະການ ຄື

໑. ສັນເສີນການຈາກໄປຂອງສາມີ
໒. ສາມີຈາກໄປແລ້ວບໍ່ຣະນຶກເຖິງ
໓. ສາມີກັບມາກໍບໍ່ຍິນດີ
໔. ເວົ້າຕິຕຽນສາມີ
໕. ບໍ່ເວົ້າສັນເສີນສາມີ
໖. ປະພຶດສິ່ງທີ່ບໍ່ເປັນປະໂຫຍດຕໍ່ສາມີ
໗. ບໍ່ປະພຶດສິ່ງທີ່ເປັນປະໂຫຍດຕໍ່ສາມີ
໘. ກະທຳກິດອັນບໍ່ສົມຄວນຕໍ່ສາມີ
໙. ບໍ່ກະທຳກິດອັນສົມຄວນຕໍ່ສາມີ
໑໐. ນອນຄຸມປົກຫົວ
໑໑. ນອນຫັນຫຼັງໃຫ້
໑໒. ນອນພິກໄປພິກມາເປັນໂກລາຫົນ
໑໓. ທອດຖອນຫັນໃຈຍາວ
໑໔. ນອນກະສັບກະສ່າຍເປັນທຸກ
໑໕. ໄປຖ່າຍອຸດຈາຣະປັດສາວະຢູ່ເລື້ອຍ ໆ
໑໖. ປະພຶດກົງກັນຂ້າມ
໑໗. ໄດ້ຍິນສຽງຊາຍອື່ນງ່ຽງຫູຟັງ
໑໘. ລ້າງຜານໂພຄະຊັບ
໑໙. ທຳຄວາມສະໜິດສະໜົມກັບຊາຍບ້ອນໃກ້ເຮືອນຄຽງ
໒໐. ມັກອອກນອກເຮືອນ
໒໑. ມັກທ່ຽວຕາມຮ່ອມຊອກຊອຍ
໒໒. ປະພຶດນອກໃຈ ບໍ່ເຄົາລົບສາມີ ຄິດປະທຸດສະຮ້າຍຢູ່ປະຈຳ
໒໓. ຢືນຢູ່ທີ່ປະຕູເນືອງ ໆ
໒໔. ເປີດຂີ້ແຮ້ ອະໄວຍະວະແລະຖັນໃຫ້ເບິ່ງ
໒໕. ທ່ຽວສອດສ່ອງເພ່ງແນມໄປສູ່ທິດຕ່າງ ໆ

ປຸນນະມຸຂະເພື່ອນເອີຍ ໄດ້ຂ່າວວ່າ ຍິງປະທຸດສະຮ້າຍສາມີ ບັນດິດເພິ່ງຮູ້ໄດ້ດ້ວຍເຫດ ໒໕ ປະການເຫຼົ່ານີ້ ກໍໃນເລື້ອງນີ້ ຍັງມີຄຳກ່າວເປັນຄາຖາໄວ້ອີກສ່ວນໜຶ່ງວ່າ

[໓໐໑] ໑. ສັນເສີນການຈາກໄປຂອງສາມີ
໒. ບໍ່ໂສກເສົ້າເຖິງການຈາກໄປຂອງສາມີ

໓. ເຫັນສາມີກັບມາບໍ່ຍິນດີ

໔. ບໍ່ເຄີຍກ່າວຄຳສັນເສີນສາມີຈັກເທື່ອເລີຍ

ຍິງປະທຸດສະຮ້າຍສາມີມີລັກສະນະເຫຼົ່ານີ້

[໓໐໔] ໕. ບໍ່ມີຄວາມສັງລວມ ປະພຶດແຕ່ສິ່ງທີ່ບໍ່ເປັນປະໂຫຍດຕໍ່ສາມີ

໖. ເຮັດສິ່ງທີ່ເປັນປະໂຫຍດຕໍ່ສາມີໃຫ້ເສື່ອມສູນ

໗. ກະທຳກິດອັນບໍ່ສົມຄວນຕໍ່ສາມີ

໘. ນອນຄຸມປົກຫົວ

໙. ນອນຫັນຫຼັງໃຫ້

ຍິງປະທຸດສະຮ້າຍສາມີມີລັກສະນະເຫຼົ່ານີ້

[໓໐໓] ໑໐. ນອນພິກໄປພິກມາເປັນໂກລາຫົນ

໑໑. ຖອນຫັນໃຈຍາວ

໑໔. ນອນກະສັບກະສ່າຍເປັນທຸກ

໑໓. ໄປຖ່າຍອຸດຈາຣະປັດສາວະຢູ່ເລື້ອຍ ໆ

ຍິງປະທຸດສະຮ້າຍສາມີມີລັກສະນະເຫຼົ່ານີ້

[໓໐໔] ໑໔. ປະພຶດກົງກັນຂ້າມ

໑໕. ບໍ່ກະທຳກິດອັນສົມຄວນຕໍ່ສາມີ

໑໖. ເມື່ອຊາຍອື່ນເວົ້າງ່ຽງຫູຟັງ

໑໗. ລ້າງຜານໂພຄະຊັບ

໑໘. ກະທຳຄວາມເຊີຍຊົມກັບຊາຍຊູ້

ຍິງປະທຸດສະຮ້າຍສາມີມີລັກສະນະເຫຼົ່ານີ້

[໓໐໕] ໑໙. ເຮັດຊັບເຄື່ອງພໍໃຈທີ່ສາມີຫາມາໄດ້ດ້ວຍຄວາມລຳບາກ

ຫາມາໄດ້ດ້ວຍຄວາມຝືດເຄືອງ

ເກັບຮິບໂຮມສະສົມໄວ້ດ້ວຍຄວາມຍາກໃຫ້ພິນາດ

໔໐. ທຳຄວາມສະໜິດສະໜົມກັບຊາຍບ້ານໃກ້ເຮືອນຄຽງ

ຍິງປະທຸດສະຮ້າຍສາມີມີລັກສະນະເຫຼົ່ານີ້

[໓໐໖] ໔໑. ມັກອອກນອກເຮືອນ ຊອບທ່ຽວຕາມຮ່ອມຊອກຊອຍ

໔໔. ປະພຶດນອກໃຈ ບໍ່ເຄົາລົບສາມີ ຄິດປະທຸດສະຮ້າຍຢູ່ປະຈຳ

ຍິງປະທຸດສະຮ້າຍສາມີມີລັກສະນະເຫຼົ່ານີ້

[໓໐໗]	໔໓. ຢືນຢູ່ໃກ້ປະຕູເມືອງ ໆ
໔໔. ເປີດຖັນແລະຂີ້ແຮ້ໃຫ້ເຫັນ
໔໕. ມີຈິດສາລະວົນເພ່ງແນມໄປສູ່ທິດຕ່າງ ໆ
ຍິງປະທຸດສະຮ້າຍສາມີມີລັກສະນະເຫຼົ່ານີ້

[໓໐໘]	ແມ່ນ້ຳທຸກສາຍໄຫຼໄປຄົດຄ້ຽວ
ປ່າໄມ້ທຸກແຫ່ງລ້ວນດາດດື່ນໄປດ້ວຍຕົ້ນໄມ້
ຍິງທັງປວງເພິ່ງກະທຳຄວາມຊົ່ວ
ເມື່ອໄດ້ໂອກາດຫຼືທີ່ລັບ

[໓໐໙]	ຖ້າວ່າ ເພິ່ງໄດ້ໂອກາດຫຼືທີ່ລັບ
ຫຼືວ່າເພິ່ງໄດ້ສະຖານທີ່ປິດບັງເຊັ່ນນັ້ນ
ຍິງທັງປວງເພິ່ງກະທຳຄວາມຊົ່ວແນ່ນອນ
ບໍ່ໄດ້ຊາຍອື່ນທີ່ສົມບູນ
ກໍເພິ່ງກະທຳກັບຊາຍງ່ອຍເປ້ຍ

[໓໑໐]	ກໍໃນບັນດານາຣີທີ່ຫຼາຍໃຈ ບໍ່ມີໃຜຂົ່ມຂີ່ໄດ້
ຜູ້ສ້າງຄວາມອະພິຣົມຍິນດີໃຫ້ແກ່ຊາຍທັງຫຼາຍ
ແມ່ນຫາການາງຜູ້ໃດຈຶ່ງຈະບໍ່ເພິ່ງກະທຳຄວາມປີ້ນໃຈໃນທີ່ທັງປວງ
ບັນດິດກໍບໍ່ຄວນວາງໃຈ ຍ້ອນນາຣີປຽບສະເໝີທ່ານ້ຳ

[໓໑໑]	ກໍບັນດິດເຫັນເຫດການຂອງເຈົ້າກິນນະຣີ
ແລະພຣະນາງກິນນະຣາເທວີແລ້ວເພິ່ງຮູ້ເທີ້ນວ່າ
ຍິງທັງປວງຈະຍິນດີໃນເຮືອນຂອງສາມີທີ່ນັ້ນກໍບໍ່ມີ
ພຣະນາງກິນນະຣາເທວີໄດ້ເຫັນຊາຍອື່ນ ເຖິງເປັນຄົນງ່ອຍເປ້ຍ
ກໍຍັງຊົງປະຖິ້ມຄົນເຊັ່ນກັບເຈົ້າກິນນະຣີນັ້ນໄປໄດ້

[໓໑໒]	ພຣະມະເຫສີຂອງພຣະເຈົ້າພະກະແລະພຣະເຈົ້າພາວະຣິຍະ
ຜູ້ຊົງໝົກມຸ້ນໃນການຈົມເກີນໄປ
ໄດ້ຊົງປະພຶດອະນາຈານກັບຄົນໃຊ້ໃກ້ຊິດ
ຜູ້ຕົກຢູ່ໃນອຳນາດແຫ່ງຄວາມປາຖະໜາ
ຊາຍຄົນອື່ນນັ້ນ ໃຜຫຼືຍິງຈະບໍ່ເພິ່ງປະພຶດນອກໃຈດ້ວຍ

[໓໑໓]	ພຣະນາງປິງຄິຍານີ ຜູ້ເປັນພຣະມະເຫສີສຸດທີ່ຮັກ

ຂອງພຣະເຈົ້າພົມມະທັດຜູ້ເປັນໃຫຍ່ໃນໂລກທັງປວງ
ໄດ້ຊີງປະພຶດອະນາຈານກັບຄົນລ້ຽງມ້າ
ຜູ້ຕົກຢູ່ໃນອຳນາດແຫ່ງຄວາມປາຖະໜາ
ນາງຜູ້ມີຄວາມຕ້ອງການໃນການບໍ່ໄດ້ປະສົບຄວາມຕ້ອງການທັງ ໔ ແມ່ນນັ້ນ

[໓໑໔] ບຸຣຸດຜູ້ບໍ່ຖືກຜີສິງ ບໍ່ຄວນຈະເຊື່ອຖືຍິງທັງຫຼາຍ
ຜູ້ຫຍາບຊ້າ ໃຈເບົາ ບໍ່ຮູ້ຄຸນຄົນ ມັກປະທຸດສະຮ້າຍມິດເລີຍ

[໓໑໕] ຍິງເຫຼົ່ານັ້ນບໍ່ຮູ້ອຸປະກາຣະທີ່ຄົນອື່ນກະທຳແລ້ວແກ່ຕົນ
ບໍ່ຮູ້ກິດທີ່ຕົນຄວນກະທຳ ບໍ່ຮູ້ຈັກມານດາບິດາຫຼືອ້າຍນ້ອງ
ເປັນຜູ້ບໍ່ປະເສີດ ລ່ວງລະເມີດທຳຢູ່ສະເໝີ
ເປັນໄປຕາມອຳນາດຈິດຂອງຕົນຢ່າງດຽວ

[໓໑໖] ສາມີສຸດທີ່ຮັກ ທີ່ໜ້າພໍໃຈ ແມ່ນຢູ່ນຳກັນມາດົນ
ເປັນຜູ້ອະນຸເຄາະ ແມ່ນສະເໝີຄືກັບຊີວິດ
ພວກນາງຍັງພາກັນປະຖິ້ມໄປໄດ້ໃນເວລາເກີດອັນຕະລາຍ
ແລະໃນເວລາມີກິດຈະຕ້ອງກະທຳ
ຍ້ອນເຫດນັ້ນ ເຮົາຈຶ່ງບໍ່ວາງໃຈຍິງທັງຫຼາຍ

[໓໑໗] ຍ້ອນວ່າຈິດຂອງຍິງທັງຫຼາຍຄືຈິດຂອງວານອນ
ຫຼຸບ ໆ ໂນນ ໆ ຄືເງົາຕົ້ນໄມ້
ດວງໃຈຂອງຍິງທັງຫຼາຍນັ້ນຫວັ່ນໄຫວໄປມາ
ກັບກອກຄືກົງລໍ້

[໓໑໘] ເມື່ອໃດ ພວກນາງເມື່ອເພ່ງເລັງເຫັນຊັບ
ຂອງບຸຣຸດທີ່ຄວນຈະຖືເອົາໄດ້
ເມື່ອນັ້ນ ພວກນາງຈະໃຊ້ວາຈາອັນອ່ອນຫວານດຶງພາເອົາບຸຣຸດນັ້ນໄປ
ຄືຊາວກຳໂພຊະໃຊ້ອາຫານລວງມ້າ[១]

[໓໑໙] ເມື່ອໃດ ພວກນາງເມື່ອເພ່ງເລັງບໍ່ເຫັນຊັບ
ຂອງບຸຣຸດທີ່ຄວນຈະຖືເອົາໄດ້
ເມື່ອນັ້ນ ພວກນາງຈະເຫີນຫ່າງປະຖິ້ມບຸຣຸດນັ້ນໄປທຸກດ້ານ
ຄືຄົນຂ້າມຟັ່ງພໍເຖິງຟັ່ງແມ່ນ້ຳແລ້ວ
ກໍລະຖິ້ມແພສຳລັບຂ້າມໄປ

[໓໔໐] ຈິງຢູ່ ຍິງທັງຫຼາຍເຫຼົ່ານັ້ນອຸປະມາໄດ້ກັບສິ່ງຜູກພັນ
ກິນທຸກຢ່າງຄືໄຟ
ມີມາຍາກ້າແຂງຄືແມ່ນໍ້າທີ່ມີກະແສໄຫຼແຮງ
ຍ່ອມຄົບຫາໄດ້ທັງຊາຍທີ່ເປັນຄົນຮັກ ແລະບໍ່ແມ່ນຄົນຮັກ
ຄືເຮືອຈອດໄດ້ທັງຝັ່ງນີ້ແລະຝັ່ງນັ້ນ

[໓໔໑] ຍິງເຫຼົ່ານັ້ນບໍ່ແມ່ນເປັນສົມບັດຊາຍຄົນດຽວຫຼືສອງຄົນ
ຄືຮ້ານຕະຫຼາດທີ່ແບຂອງວາງຂາຍ
ຊາຍໃດເພິ່ງສຳຄັນຍິງເຫຼົ່ານັ້ນວ່າເປັນຂອງເຮົາ
ຊາຍນັ້ນຊື່ວ່າດັກລົມດ້ວຍຕາໜ່າງ

[໓໔໒] ໑. ແມ່ນໍ້າ ໒. ທາງເດີນ ໓. ຮ້ານເຄື່ອງດື່ມ
໔. ສະພາ ໕. ນໍ້າສ້າງ ເປັນສັນໃດ
ຂຶ້ນຊື່ວ່າຍິງທັງຫຼາຍໃນໂລກນີ້ກໍສັນນັ້ນ
ຂອບເຂດຍ່ອມບໍ່ມີສຳລັບພວກນາງ

[໓໔໓] ຍິງທັງຫຼາຍເຫຼົ່ານີ້ສະເໝີກັບໄຟທີ່ກິນນໍ້າມັນງົວ
ອຸປະມາໄດ້ກັບທົວງູເຫົ່າ° ຍ່ອມເລືອກກິນແຕ່ຂອງດີ ໆ
ຄືພວກງົວເລືອກເລັມແຕ່ຫຍ້າດີ ໆ ໃນພາຍນອກທົ່ງນັ້ນ

[໓໔໔] ໑. ໄຟກິນນໍ້າມັນງົວ ໒. ຊ້າງສານ
໓. ງູເຫົ່າ ໔. ພຣະຣາຊາຜູ້ໄດ້ຮັບມຸດທາພິເສກແລ້ວ
໕. ຍິງທັງປວງ
ບຸກຄົນທັງ ໕ ເຫຼົ່ານີ້ ນໍຣະຊົນເພິ່ງຄົບຫາໂດຍຄວາມລະມັດລະວັງຢູ່ສະເໝີ
ຍ້ອນວ່າພາວະທີ່ເປັນຈິງຂອງບຸກຄົນເຫຼົ່ານັ້ນຮູ້ໄດ້ຍາກຫຼາຍ

[໓໔໕] ຊາຍບໍ່ເພິ່ງຄົບຫາ
໑. ຍິງຜູ້ມີຜິວພັນງົດງາມຍິ່ງ
໒. ຍິງຜູ້ທີ່ຊາຍສ່ວນຫຼາຍຮັກແພງ
໓. ຍິງຜູ້ສະຫຼາດໃນການຟ້ອນລຳຂັບຮ້ອງ
໔. ຍິງຜູ້ເປັນພັນລະຍາຂອງຊາຍອື່ນ
໕. ຍິງຜູ້ຄົບຫາຍ້ອນເຫດແຫ່ງຊັບ
ຍິງທັງ ໕ ປະເພດເຫຼົ່ານີ້ຊາຍບໍ່ເພິ່ງຄົບຫາເລີຍ

ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ຄັ້ງນັ້ນ ພະຍານົກແຮ້ງຊື່ອານົນ ຮູ້ແຈ້ງຄັກເຊິ່ງຄາຖາທັງເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດ ຂອງນົກກຸນາລະ ຈຶ່ງໄດ້ກ່າວຄາຖາເຫຼົ່ານີ້ໃນເວລານັ້ນວ່າ

[໓໘໗] ຖ້າບຸຣຸດຈະເພິ່ງຍົກແຜ່ນດິນແມ່ນທີ່ເຕັມໄປດ້ວຍຊັບຜືນນີ້
ໃຫ້ແກ່ຍິງຜູ້ທີ່ຕົນຍ້ອງຍໍແລ້ວ
ຍິງນັ້ນໄດ້ໂອກາດແລ້ວກໍຈະເພິ່ງດູໝິ່ນບຸຣຸດແມ່ນນັ້ນ ຍ້ອນເຫດນັ້ນ
ເຮົາຈຶ່ງບໍ່ຍອມຕົກໄປສູ່ອຳນາດຂອງຍິງເຫຼົ່ານັ້ນຜູ້ທີ່ບໍ່ແມ່ນຄົນດີ

[໓໘໘] ສາມີໜຸ່ມຜູ້ມີຄວາມດຸໝັ່ນຂະຫຍັນພຽນ ມີພຶດຕິການບໍ່ຫົດຫູ່
ໜ້າຮັກ ແລະໜ້າພໍໃຈ
ພວກນາງຍັງພາກັນປະຖິ້ມເຂົາໄປໄດ້ໃນເວລາເກີດອັນຕະລາຍ
ແລະໃນເວລາມີກິດທີ່ຕ້ອງກະທຳ
ຍ້ອນເຫດນັ້ນ ເຮົາຈຶ່ງບໍ່ວາງໃຈຍິງທັງຫຼາຍ

[໓໘໙] ບຸຣຸດບໍ່ເພິ່ງວາງໃຈວ່າ ຍິງນີ້ຕ້ອງການເຮົາ
ບໍ່ເພິ່ງວາງໃຈວ່າ ຍິງນີ້ຮ້ອງໄຫ້ຢູ່ໃນບ່ອນຢູ່ຂອງເຮົາ
ຈິງຢູ່ ຍິງທັງຫຼາຍເຫຼົ່ານັ້ນຍ່ອມຄົບຫາໄດ້
ທັງຊາຍທີ່ເປັນຄົນຮັກແລະບໍ່ແມ່ນຄົນຮັກ
ຄືເຮືອຈອດໄດ້ທັງຝັ່ງນີ້ແລະຝັ່ງນັ້ນ

[໓໘໐] ໑. ບຸກຄົນບໍ່ເພິ່ງວາງໃຈເຄື່ອງປູລາດທີ່ເຮັດດ້ວຍງ່າໄມ້ເກົ່າ
໒. ບໍ່ເພິ່ງວາງໃຈໂຈນຜູ້ເຄີຍເປັນມິດເກົ່າແກ່
໓. ບໍ່ເພິ່ງວາງໃຈພຣະຣາຊາວ່າ ເປັນເພື່ອນຂອງເຮົາ
໔. ບໍ່ເພິ່ງວາງໃຈຍິງເຊິ່ງເປັນແມ່ຂອງລູກຕັ້ງ ໑໐ ຄົນ

[໓໓໐] ບໍ່ເພິ່ງວາງໃຈໃນນາຣີທັງຫຼາຍ ຜູ້ສ້າງຄວາມອອນຊອນຍິນດີໃຫ້
ຜູ້ລ່ວງລະເມີດສິນ ບໍ່ມີຄວາມສັງລວມ
ເຖິງພັນລະຍາຈະເພິ່ງມີຄວາມຮັກຢ່າງແໜ້ນແຟ້ນ ກໍບໍ່ເພິ່ງວາງໃຈ
ຍ້ອນວ່ານາຣີທັງຫຼາຍສະເໝີຄືກັບທ່ານ້ຳ

[໓໓໑] ຍິງທັງຫຼາຍເພິ່ງຂ້າຊາຍສາເອງກໍມີ
ຕັດອະໄວຍະວະຂອງຊາຍສາເອງກໍມີ
ໃຫ້ຜູ້ອື່ນຕັດກໍມີ ປາດລຳຄໍແລ້ວດື່ມເລືອດກິນກໍມີ

ຍ້ອນເຫດນັ້ນ ຊາຍຢ່າເພິ່ງທຳຄວາມສະໜິດສະໜົມໃນຍິງທັງຫຼາຍ
ຜູ້ມີຄວາມຕ້ອງການອັນຊົ່ວຊາມ ຜູ້ບໍ່ສັງລວມ
ປຽບໄດ້ກັບທ່ານ້ຳທີ່ແມ່ນ້ຳຄົງຄາ

[໓໓໒] ຍິງເຫຼົ່ານັ້ນກ່າວຄຳຕົວະຄືກັບຄຳສັດ
ກ່າວຄຳສັດຄືກັບຄຳຕົວະ ພວກນາງເລືອກກິນແຕ່ຂອງດີ ໆ
ຄືພວກງົວເລືອກເລັມແຕ່ຫຍ້າດີ ໆ ໃນພາຍນອກທົ່ງນັ້ນ

[໓໓໓] ພວກນາງປະເລົ້າປະໂລມະຊາຍ
ດ້ວຍການຍ່າງແດ່ ດ້ວຍການຈ້ອງແນມແດ່
ດ້ວຍການຫົວຂວນແດ່ ດ້ວຍການນຸ່ງຫົ່ມບໍ່ຮຽບຮ້ອຍແດ່
ແລະດ້ວຍການກ່າວຄຳເວົ້າອ່ອນຫວານແດ່

[໓໓໔] ຍ້ອນວ່າຍິງທັງຫຼາຍເຫຼົ່ານັ້ນ
ເປັນນາງໂຈນ ມີຈິດໃຈຫຍາບກະດ້າງ
ໂຫດຮ້າຍ ເຈລະຈາອ່ອນຫວານຄືນ້ຳຕານກ້ອນ
ການລໍ້ລວງແນວໃດແນວໜຶ່ງໃນໝູ່ມະນຸດ
ພວກນາງຈະບໍ່ຮູ້ບໍ່ມີເລີຍ

[໓໓໕] ຂຶ້ນຊື່ວ່າຍິງທັງຫຼາຍໃນໂລກ
ເປັນຄົນຊົ່ວຮ້າຍ ບໍ່ມີຂອບເຂດ ກຳໜັດຈັດ
ແລະຄືກຄະນອງ ກິນທຸກຢ່າງຄືແປວໄຟ

[໓໓໖] ທຳມະດາວ່າບຸຣຸດເປັນທີ່ຮັກຂອງຍິງບໍ່ມີ ບໍ່ເປັນທີ່ຮັກກໍບໍ່ມີ
ຍ້ອນວ່າຍິງທັງຫຼາຍຍ່ອມຄົບບຸຣຸດໄດ້
ທັງທີ່ເປັນຄົນຮັກແລະບໍ່ແມ່ນຄົນຮັກ
ຄືເຮືອຈອດໄດ້ທັງຝັ່ງນີ້ແລະຝັ່ງນັ້ນ

[໓໓໗] ທຳມະດາວ່າບຸຣຸດເປັນທີ່ຮັກຂອງຍິງບໍ່ມີ ບໍ່ເປັນທີ່ຮັກກໍບໍ່ມີ
ຍ້ອນວ່າຍິງທັງຫຼາຍມີຄວາມຕ້ອງການຊັບ
ຈຶ່ງຍອມພົວພັນດ້ວຍ ຄືເຄືອເຂົາທີ່ກ່ຽວພັນຕົ້ນໄມ້

[໓໓໘] ຊາຍທີ່ມີຊັບຈະເປັນຄວານຊ້າງ ຄົນລ້ຽງມ້າ
ຄົນລ້ຽງງົວ ຄົນຈັນທານ ສັບປະເລີ
ຫຼືຄົນລ້າງສ້ວມກໍຕາມ ນາຣີທັງຫຼາຍຈະຕິດຕາມເຂົາໄປ

[໓໓໗] ຍິງສາວທັງຫຼາຍຍ່ອມປະຖິ້ມຊາຍ
ແມ່ນທີ່ເປັນບຸດຄົນມີຕະກູນ
ເຊິ່ງບໍ່ມີຊັບອັນໃດ ໆ ໄປ ຄືເຊັ່ນກັບຊາກສົບ
ແຕ່ກັບຖ້າຕິດຕາມຊາຍໄປເລື້ອຍ ໆ ຍ້ອນເຫດແຫ່ງຊັບ
ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ຄັ້ງນັ້ນ ນາຣະທະເທວະພາມຮູ້ແຈ້ງຄັກເຊິ່ງ
ຄາຖາທັງເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດຂອງອານົນພະຍາແຮ້ງ ຈຶ່ງໄດ້ກ່າວ
ຄາຖາເຫຼົ່ານີ້ ໃນເວລານັ້ນວ່າ

[໓໔໐] ດຽວກ່ອນ ພະຍານົກ ທ່ານຈົ່ງຟັງຄຳຂອງຂ້າພະເຈົ້າ
ຜູ້ຈະກ່າວເຖິງສິ່ງ ໔ ຢ່າງ ທີ່ບໍ່ຮູ້ຈັກເຕັມເຫຼົ່ານີ້ ຄື
໑. ທະເລ ໒. ພາມ
໓. ພຣະຣາຊາ ໔. ຍິງ

[໓໔໑] ແມ່ນ້ຳສາຍໃດສາຍໜຶ່ງເຊິ່ງອາໄສແຜ່ນດິນ
ຍ່ອມໄຫຼໄປສູ່ສາຄອນ
ແມ່ນ້ຳເຫຼົ່ານັ້ນກໍເຮັດສະມຸດໃຫ້ເຕັມບໍ່ໄດ້
ຍ້ອນແນວນັ້ນ ຈຶ່ງຊື່ວ່າບໍ່ເຕັມ ຍ້ອນຍັງຂາດຢູ່

[໓໔໒] ສ່ວນພາມສາທະຍາຍພຣະເວດ
ມີປະຫວັດສາດເປັນທີ ໕ ໄດ້ແລ້ວ
ກໍຍັງປາຖະໜາການສຶກສາແມ່ນໃຫ້ຍິ່ງຂຶ້ນໄປ
ຍ້ອນແນວນັ້ນ ຈຶ່ງຊື່ວ່າບໍ່ເຕັມ ຍ້ອນຍັງຂາດຢູ່

[໓໔໓] ສ່ວນພຣະຣາຊານັ້ນຊິງຊະນະແລ້ວ
ຄອບຄອງແຜ່ນດິນທັງໝົດພ້ອມທັງສະມຸດ
ແລະພູອັນສັ່ງສົມຣັດຕະນະໄວ້ຫາບ່ອນສຸດບໍ່ໄດ້
ກໍຍັງຊົງປາຖະໜາສະມຸດຝັ່ງນັ້ນ
ຍ້ອນແນວນັ້ນ ຈຶ່ງຊື່ວ່າບໍ່ເຕັມ ຍ້ອນຍັງຂາດຢູ່

[໓໔໔] ແຕ່ຍິງເຖິງແມ່ນຈະເພິ່ງມີສາມີຄົນລະ ໗ ຄົນ
ເຊິ່ງເປັນຄົນແກ່ກ້າມີພະລັງ
ສາມາດນຳຣົດແຫ່ງຄວາມຕ້ອງການທັງປວງມາໃຫ້ໄດ້
ນາງກໍຍັງຄົງທຳຄວາມພໍໃຈໃນຊາຍຄົນທີ ໘
ຍ້ອນແນວນັ້ນ ຈຶ່ງຊື່ວ່າບໍ່ເຕັມ ຍ້ອນຍັງຂາດຢູ່

[ມ໔໕] ຍິງທັງປວງກິນທຸກຢ່າງຄືແປວໄຟ
ພັດພາເອົາທຸກສິ່ງທຸກຢ່າງໄປຄືແມ່ນ້ຳ
ເກາະກ່ຽວຄືຮຽວໜາມ
ຍ່ອມຄົບຫາຊາຍຍ້ອນເຫດແຫ່ງຊັບ

[ມ໔໖] ກໍນໍຣະຊົນໃດປົງໃຈເຊື່ອຍິງທຸກສິ່ງທຸກຢ່າງ
ນໍຣະຊົນນັ້ນຊື່ວ່າດັກລົມດ້ວຍຕາໜ່າງ
ກວັກນ້ຳທະເລດ້ວຍຝາມືຂ້າງດຽວ
ຕົບມືຂ້າງດຽວຂອງຕົນໃຫ້ເກີດສຽງ ກໍຮູ້ໄດ້ຍາກ

[ມ໔໗] ພາວະຂອງຍິງທີ່ເປັນນາງໂຈນ
ຮູ້ຫຼາຍ ຫາຄວາມຈິງໄດ້ຍາກ
ເປັນການລຳບາກທີ່ຈະຢັ່ງຮູ້ຄືຮອຍທາງປາໃນນ້ຳ

[ມ໔໘] ຍິງທັງຫຼາຍເຫຼົ່ານັ້ນບໍ່ຮູ້ຈັກພໍ
ເວົ້າຈາມ່ວນອ່ອນຫວານ ເຕັມໄດ້ຍາກ
ຄືແມ່ນ້ຳຍ່ອມເຮັດໃຫ້ລົ້ມຈົມ
ຊາຍຮູ້ແຈ້ງຄັກແລ້ວເພິ່ງເວັ້ນສາໃຫ້ຫ່າງໄກ

[ມ໔໙] ຍິງທັງຫຼາຍຍົວະຍຸໃຫ້ລຸ້ມຫຼົງ
ມີມາຍາຫຼາຍ ເຮັດພົມມະຈັນໃຫ້ກຳເຣີບ
ຍ່ອມເຮັດໃຫ້ລົ້ມຈົມເສຍຫາຍ
ຊາຍຮູ້ແຈ້ງຄັກແລ້ວເພິ່ງເວັ້ນສາໃຫ້ຫ່າງໄກ

[ມ໕໐] ກໍຍິງທັງຫຼາຍເຫຼົ່ານັ້ນເຂົ້າໄປຄົບຫາຊາຍໃດ
ດ້ວຍຄວາມພໍໃຈຫຼືດ້ວຍຊັບກໍຕາມ
ກໍຕິດຕາມເຜົາຜານຊາຍນັ້ນໂດຍທັນທີ
ຄືໄຟປ່າເຜົາຜານສະຖານທີ່ຂອງຕົນ

ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ຄັ້ງນັ້ນ ພະຍານົກກຸນາລະຮູ້ແຈ້ງຊັດເຊິ່ງຄາຖາທັງເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດຂອງນາຣະທະເທວະພານ ຈຶ່ງໄດ້ກ່າວຄາຖາເຫຼົ່ານີ້ໃນເວລານັ້ນວ່າ

[ມ໕໑] ບັນດິດເພິ່ງເຈລະຈາກັບຄົນຜູ້ຖືດາບອັນຄົມກິບ

ເພິ່ງເຈລະຈາແມ່ນກັບຜີສາດຜູ້ດຸຮ້າຍ
ເພິ່ງເຂົ້າໄປນັ່ງໃກ້ງູໂຕທີ່ມີພິດຮ້າຍແຮງ
ແຕ່ຢ່າເພິ່ງເຈລະຈາກັບຍິງໂຕຕໍ່ໂຕ

[໓໕໔] ຍ້ອນວ່ານາຣີທັງຫຼາຍເປັນຜູ້ຍໍ່າຍີຈິດຂອງຊາວໂລກ
ມີການຟ້ອນລໍາຂັບຮ້ອງ ເຈລະຈາ
ແລະການແຍ້ມຍິ້ມເປັນອາວຸດ
ຍ່ອມບຽດບຽນຊາຍຜູ້ມີສະຕິບໍ່ໝັ້ນຄົງ
ຄືໝູ່ນາງຣາກາສົດເທິງເກາະບຽດບຽນພວກພໍ່ຄ້າ

[໓໕໓] ຍິງເຫຼົ່ານັ້ນບໍ່ມີວິໄນ ບໍ່ສັງວອນ
ພວກນາງຍິນດີໃນນໍ້າເມົາແລະຊີ້ນສັດ ບໍ່ມີຄວາມສັງລວມ
ຍ່ອມຮຸບເອົາຊັບທີ່ຊາຍຫາມາໄດ້
ຄືປາຕິມິງຄະລະກືນກິນມັງກອນໃນສາຄອນ

[໓໕໔] ຍິງທັງຫຼາຍມີການມະຄຸນທັງ ໕ ອັນໜ້າພໍໃຈເປັນເຫຍື່ອລໍ່
ມີຈິດຟຸ້ງຊ່ານບໍ່ແນ່ນອນ ບໍ່ມີຄວາມສັງລວມ
ຍ່ອມແລ່ນເຂົ້າໄປຫາຊາຍຜູ້ມີຄວາມມົວເມົາ
ຄືແມ່ນໍ້າທັງຫຼາຍຍ່ອມໄຫຼໄປສູ່ທະເລ

[໓໕໕] ຍິງທັງຫຼາຍປະເລົ້າປະໂລມຊາຍໃດຍ້ອນຄວາມພໍໃຈ
ຍ້ອນຄວາມຍິນດີຫຼືຍ້ອນຊັບກໍຕາມ
ຊື່ວ່າເປັນຜູ້ຂ້າຊາຍນັ້ນດ້ວຍຣາຄະ ໂທສະ
ຍ່ອມເຜົາຜານຊາຍເຊັ່ນນັ້ນໃຫ້ເປັນແມ່ນຄືດັ່ງໄຟ

[໓໕໖] ຍິງທັງຫຼາຍຮູ້ວ່າ ຊາຍໃດເປັນຜູ້ຮັ່ງມີ
ມີຊັບຫຼາຍ ຍ່ອມແລ່ນເຂົ້າໄປຫາ
ຍ່ອມຜູກມັດຊາຍນັ້ນຜູ້ມີຈິດກໍາໜັດຍິນດີໄວ້ດ້ວຍເຮືອນຮ່າງຂອງຕົນ
ຄືເຄືອເຂົາຮ້ອຍຮັດຕົ້ນສາລະໃນປ່າ

[໓໕໗] ຍິງທັງຫຼາຍເຫຼົ່ານັ້ນປະດັບຮ່າງກາຍແລະໃບໜ້າ
ຈົນງາມວິຈິດແລ້ວເຂົ້າໄປຫາຊາຍ
ດ້ວຍຄວາມພໍໃຈມີປະການຕ່າງ ໆ ເຮັດຍິ້ມນ້ອຍຍິ້ມໃຫຍ່
ມີຄວາມສະຫຼາດໃນມາຍາຕັ້ງຮ້ອຍຄືນັກມາຍາກົນ

[໓໔໘] ຍິງທັງຫຼາຍປະດັບສອມໃສ່ຄໍາ ແກ້ວມະນີ
ແກ້ວມຸກດາ ມີຄົນສັກກາຣະແລະຮັກສາຢູ່ແລ້ວໃນຕະກູນສາມີ
ກໍຍັງປະພຶດນອກໃຈສາມີ
ຄືຍິງຜູ້ຊົບຢູ່ແນບເພີ້ງເອີກປະພຶດນອກໃຈອະສູນ

[໓໔໙] ຈິງຢູ່ ນໍຣະຊົນເຖິງຈະມີອໍານາດ ມີປັນຍາເຫັນປະຈັກ
ເປັນທີ່ສັກກາຣະບູຊາຂອງຊົນຫຼວງຫຼາຍ
ຕົກຢູ່ໃນອໍານາດຂອງຍິງທັງຫຼາຍ
ກໍຈະບໍ່ຮຸ່ງເຮືອງ ຄືດວງຈັນທີ່ຖືກຣາຫູເຂົ້າໄປບົດບັງ

[໓໕໐] ຈອມໂຈນຜູ້ມີຈິດໂຫດຮ້າຍ ໂກດຂຶ້ນແລ້ວ ເພິ່ງກະທໍາ
ຄວາມພິນາດອັນໃດໃຫ້ຈອມໂຈນຜູ້ເປັນຄູ່ອະຣິ ເຊິ່ງມາປະຈັນໜ້າກັນ
ນໍຣະຊົນຜູ້ຍັງມີການເພ່ງເລັງ ມີຕັນຫາ
ຕົກຢູ່ໃນອໍານາດຍິງທັງຫຼາຍ
ຍ່ອມປະສົບຄວາມພິນາດຍິ່ງກວ່ານັ້ນ

[໓໕໑] ຈິງຢູ່ ຍິງເຫຼົ່ານັ້ນເຖິງຈະຖືກຊາຍທີ່ຊົ່ວຊາມ
ຄຸກຄາມດ້ວຍການຈິກຜົມຈົນຫຍຸ້ງຫຍອງ
ແລະການຢົກຂ່ວນດ້ວຍເລັບ ທຸບຕີດ້ວຍຕີນ ຝາມື ແລະໄມ້ຄ້ອນ
ກໍຍັງເຂົ້າໄປຫາຊາຍຄົນຊົ່ວຊາມນັ້ນແລ
ຄືໝູ່ແມງວັນຍ່ອມຍິນດີໃນຊາກສົບ

[໓໕໒] ນໍຣະຊົນຜູ້ມີດວງຕາຄືປັນຍາ ປາຖະໜາຄວາມສຸກ
ເພິ່ງເວັ້ນຍິງເຫຼົ່ານັ້ນເຊິ່ງເປັນເໝືອນບ້ວງແລະຕາໜ່າງຂອງມານ
ທີ່ເຂົາຂຶງດັກໄວ້ໃນຕະກູນໃນລະຫວ່າງທາງເດີນ
ໃນຣາດຊະທານີຫຼືວ່າໃນນິຄົມທັງຫຼາຍ

[໓໕໓] ຜູ້ໃດກໍາຈັດຖິ້ມຄຸນຄືຕະບະອັນເປັນກຸສົນແລ້ວ
ປະພຶດການປະພຶດອັນບໍ່ແມ່ນຂອງພຣະອະຣິຍະ
ຜູ້ນັ້ນຈາກເທວະໂລກຍ່ອມເຂົ້າເຖິງນະຣົກ ຄືພໍ່ຄ້າຖືໝໍ້ແຕກ

[໓໕໔] ເຂົາຜູ້ນັ້ນຖືກຕິຕຽນທັງໃນໂລກນີ້ແລະໂລກໜ້າ
ມີຄວາມຄິດທີ່ຊົ່ວ ຖືກກໍາຂອງຕົນເຂົ້າໄປບັ່ນທອນ
ຍ່ອມພັດພາກຈາກເທວະໂລກແດ່

ມະນຸດສາໂລກແດ່ ໂດຍບໍ່ແນ່ນອນ
ຄືລົດທີ່ທຽມດ້ວຍລາໂກງຍ່ອມພາໄປນອກທາງ

[໓໓໕] ເຂົາຜູ້ນັ້ນຈຶ່ງເຂົ້າເຖິງນະຮົກອັນຮ້ອນຮົນແລະນະຮົກປ່າໄມ້ງີ້ວ
ມີໜາມແຫຼມຄືຫອກເປັນຫຼັກແລ້ວ
ມາຢູ່ໃນກຳເນີດສັດເດຍຣັດສານ ແລະບໍ່ພົ້ນເຜດແລະຈອມອະສູນ

[໓໓໖] ຍິງທັງຫຼາຍຍ່ອມທຳລາຍການຫຼິ້ນຫົວ
ແລະຄວາມອອນຊອນຍິນດີອັນເປັນທິບໃນນັນທະວັນເທວະອຸທະຍານ
ແລະຈັກກະພັດສົມບັດໃນໝູ່ມະນຸດຂອງຊາຍຜູ້ມົວເມົາທັງຫຼາຍ
ໃຫ້ພິນາດແລະຍັງເຂົາໃຫ້ເຖິງທຸກຄະຕິອີກດ້ວຍ

[໓໓໗] ການຫຼິ້ນຫົວແລະຄວາມອອນຊອນຍິນດີກໍດີ
ຈັກກະພັດສົມບັດໃນມະນຸດກໍດີ
ນາງເທບອັບປະສອນຜູ້ຢູ່ວິມານຄຳກໍດີ
ອັນຊາຍຜູ້ບໍ່ມີຄວາມຕ້ອງການຍິງປະພຶດພົມມະຈັນຢູ່
ຫາໄດ້ບໍ່ຍາກເລີຍ

[໓໓໘] ຄະຕິທີ່ລ່ວງເລີຍກາມະພູມກໍດີ
ການສົມພົບໃນຮູບພູມກໍດີ
ການເຂົ້າເຖິງວິໄສແຫ່ງຜູ້ປາສະຈາກຣາຄະກໍດີ
ອັນຊາຍຜູ້ບໍ່ມີຄວາມຕ້ອງການຍິງປະພຶດພົມມະຈັນຢູ່
ຫາໄດ້ບໍ່ຍາກເລີຍ

[໓໓໙] ນິບພານອັນປອດໂປ່ງພົ້ນທຸກທັງປວງ
ບໍ່ຫວັ່ນໄຫວຢ່າງແທ້ຈິງ ບໍ່ມີປັດໄຈປຸງແຕ່ງ
ອັນຊາຍຜູ້ບໍ່ມີຄວາມຕ້ອງການຍິງປະພຶດພົມມະຈັນຢູ່
ມີກິເລດອັນດັບໄດ້ແລ້ວ ເປັນຜູ້ສະອາດ
ຫາໄດ້ບໍ່ຍາກເລີຍ ດັ່ງນີ້

(ພຣະສາດສະດາຊົງປະມວນພຣະທຳມະເທດສະໜາ ໄດ້ຕັດພຣະຄາຖາປະຊຸມຊາດົກວ່າ)

[໓໔໐] ໃນການນັ້ນ ເຮົາຜູ້ຕະຖາຄົດໄດ້ເປັນພະຍານົກກຸນາລະ
ອຸທາຍີໄດ້ເປັນພະຍານົກກາເວົາຂາວ

ອານົນໄດ້ເປັນພະຍານົກແຮ້ງ
ສາຣີບຸດໄດ້ເປັນນາທະຣະດາບິດ
ແລະພຸດທະບໍລິສັດໄດ້ເປັນບໍລິສັດນົກທັງຫຼາຍ
ທ່ານທັງຫຼາຍຈົ່ງຊົງຈຳຊາດົກໄວ້ດ້ວຍປະການດັ່ງນີ້ແລ

**ກຸນາລະຊາດົກທີ ໔ ຈົບ**

## ໕. ມະຫາສຸຕະໂສມະຊາດົກ (໕໓໗)
## ວ່າດ້ວຍພຣະເຈົ້າມະຫາສຸຕະໂສມຊົງທໍລະມານໂຈນໂປຣິສາດ[១]

(ການະທັດຖິເສນາບໍດີຖາມພໍ່ຄົວວ່າ)

[໓໗໑] ພໍ່ຄົວ ຍ້ອນເຫດໃດ
ທ່ານຈຶ່ງເຮັດກຳທາລຸນໂຫດຮ້າຍແນວນີ້
ທ່ານຫຼົງຂ້າຍິງແລະຊາຍທັງຫຼາຍ
ຍ້ອນເຫດແຫ່ງຊີ້ນຫຼືແຫ່ງຊັບ

(ພໍ່ຄົວຈຶ່ງຕອບເສນາບໍດີວ່າ)

[໓໗໒] ທ່ານຜູ້ຈະເລີນ ບໍ່ແມ່ນຍ້ອນເຫດແຫ່ງຕົນ
ບໍ່ແມ່ນຍ້ອນເຫດແຫ່ງຊັບ
ບໍ່ແມ່ນຍ້ອນເຫດແຫ່ງບຸດພັນລະຍາ
ບໍ່ແມ່ນຍ້ອນເຫດແຫ່ງສະຫາຍແລະຍາດທັງຫຼາຍ
ແຕ່ພຣະຈອມພູມິບານເຊິ່ງເປັນນາຍຂອງຂ້າພະເຈົ້າ
ພຣະອົງສະເຫວີຍມັງສະແນວນີ້

(ການະທັດຖິເສນາບໍດີກ່າວວ່າ)

[໓໗໓] ຖ້າທ່ານຂົນຂວາຍໃນກິດຂອງຫົວໜ້າ
ເຮັດກຳອັນໂຫດຮ້າຍທາລຸນແນວນີ້ໄດ້
ເວລາເຊົ້າມືດ ທ່ານຄວນຈະເຂົ້າໄປໃນພະຣາດຊະວັງ
ແລ້ວຖະແຫຼງເຫດນັ້ນແກ່ເຮົາຕໍ່ພຣະພັກພຣະຣາຊາ

(ພໍ່ຄົວກ່າວວ່າ)

[໓໗໔] ທ່ານການະທັດຖີ ຂ້າພະເຈົ້າຈັກກະທຳຕາມທີ່ທ່ານສັ່ງ
ເວລາເຊົ້າມືດ ຂ້າພະເຈົ້າຈະເຂົ້າໄປໃນພະຣາດຊະວັງ
ຈະຖະແຫຼງເຫດນັ້ນແກ່ທ່ານຕໍ່ພຣະພັກພຣະຣາຊາ

(ພຣະບໍຣົມມະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໓໗໕] ລຳດັບນັ້ນ ເມື່ອຣາຕີສະຫວ່າງແລ້ວ ດວງອາທິດອຸໄທ
ການະເສນາບໍດີໄດ້ພາຄົນເຮັດຄົວເຂົ້າໄປເຝົ້າພຣະຣາຊາ
ແລ້ວໄດ້ຂາບທູນພຣະຣາຊາດັ່ງນີ້ວ່າ

[໓໗໖] ຂ້າແດ່ ມະຫາຣາດ ໄດ້ຮູ້ດ້ວຍຂະໜ່ອມວ່າ
ພຣະອົງຊົງໃຊ້ພໍ່ຄົວໃຫ້ຂ້າຍິງແລະຊາຍທັງຫຼາຍ
ພຣະອົງສະເຫວີຍຊີ້ນມະນຸດແມ່ນບໍ? ຂ້ານ້ອຍ

(ພຣະຣາຊາຕັດວ່າ)

[໓໗໗] ແນ່ນອນ ເປັນຄວາມຈິງ ທ່ານການະ
ເຮົາໃຊ້ພໍ່ຄົວ ເມື່ອເຂົາເຮັດປະໂຫຍດໃຫ້ແກ່ເຮົາ
ທ່ານຈະດ່າເຂົາເຮັດຫຍັງ

(ການະເສນາບໍດີ ເມື່ອຈະນຳເລື້ອງມາສະແດງ ຈຶ່ງຂາບທູນວ່າ)

[໓໗໘] ປາໃຫຍ່ຊື່ອານົນ ຕິດໃຈໃນຣົດປາທຸກຊະນິດ
ເມື່ອຝູງປາໝົດສິ້ນໄປ ກໍກັບມາກິນໂຕເອງຕາຍ

[໓໗໙] ພຣະອົງຊົງຜະໝາດໄປແລ້ວ
ມີພຣະທະໄທຍິນດີຍິ່ງໃນຣົດ(ຊີ້ນມະນຸດ)
ຖ້າເປັນຄົນພານຕໍ່ໄປ ຍັງບໍ່ຊົງຮູ້ສຶກແນວນີ້
ຈະຕ້ອງມາລະຖິ້ມພຣະໂອຣົດ ພຣະມະເຫສີ ແລະພຣະຍາດ
ຈະກັບມາສະເຫວີຍໂຕພຣະອົງເອງ

[໓໘໐] ຍ້ອນໄດ້ຊົງສະດັບອຸທາຫອນທີ່ຂ້າພຣະອົງນຳມາຂາບທູນນີ້
ຂໍຄວາມພໍພຣະທະໄທທີ່ຈະສະເຫວີຍຊີ້ນມະນຸດຈົ່ງຄາຍອອກເທີ້ນ
ຂ້າແດ່ ພຣະຣາຊາຜູ້ເປັນໃຫຍ່ແຫ່ງໝູ່ມະນຸດ
ພຣະອົງຢ່າໄດ້ສະເຫວີຍຊີ້ນມະນຸດເລີຍ

ຢ່າໄດ້ຊີງເຮັດແຄວັນນີ້ໃຫ້ວ່າງເປົ່າ
ຄືປາອານົບເຮັດມະຫາສະມຸດໃຫ້ວ່າງເປົ່າ

(ພຣະຣາຊາໄດ້ສະດັບດັ່ງນັ້ນ ເມື່ອຈະນໍາເລື້ອງເກົ່າມາສະແດງ ຈຶ່ງຕັດວ່າ)

[໓໗໑] ກຸດຸມພີຊື່ວ່າສຸຊາຕະ ລູກທີ່ເກີດກັບໂຕເຂົາ
ບໍ່ໄດ້ໜ່ວຍໝາກຫວ້າເຂົາກໍຕາຍ
ຍ້ອນໜ່ວຍໝາກຫວ້ານັ້ນໝົດສິ້ນໄປ

[໓໗໒] ທ່ານກາລະ ເຮົາກໍຄືກັນ
ບໍຣິໂພກອາຫານທີ່ມີຣົດແຊບທີ່ສຸດ
ຖ້າບໍ່ໄດ້ຊີ້ນມະນຸດ ເຂົ້າໃຈວ່າ ຄົງເສຍຊີວິດແນ່

(ພາມໄດ້ກ່າວກັບມານພວ່າ)

[໓໗໓] ມານົບ ເຈົ້າເປັນຜູ້ມີຮູບງາມ
ເກີດໃນຕະກູນໂສດຖິຍະພາມ
ເຈົ້າບໍ່ຄວນກິນອາຫານທີ່ບໍ່ຄວນກິນເດີ້

(ມານົບກ່າວວ່າ)

[໓໗໔] ບັນດາຣົດທັງຫຼາຍ ນໍ້າເມົານີ້ມີຣົດແຊບທີ່ສຸດແນວໜຶ່ງ
ຍ້ອນເຫດໃດ ພໍ່ຈຶ່ງຫ້າມລູກ
ລູກຈັກໄປໃນສະຖານທີ່ທີ່ລູກຈັກໄດ້ຣົດແນວນີ້

[໓໗໕] ລູກຈັກອອກໄປກ່ອນເດີ້ ຈັກບໍ່ຢູ່ໃນສໍານັກຂອງພໍ່
ຍ້ອນພໍ່ບໍ່ຍິນດີທີ່ຈະໄດ້ເຫັນລູກ

(ລໍາດັບນັ້ນ ພາມຈຶ່ງກ່າວວ່າ)

[໓໗໖] ມານົບ ເຮົາຄົງຈະໄດ້ລູກຄົນອື່ນ ໆ ເປັນທາຍາດເປັນແນ່
ເຈົ້າຄົນຕໍ່າຊາມ ເຈົ້າຈົ່ງສູນຫາຍສາເຫີ້ນ
ຈົ່ງໄປໃນບ່ອນທີ່ເຮົາຈຶ່ງຈະບໍ່ໄດ້ຂ່າວເຈົ້າຜູ້ໄປແລ້ວ

(ກາມະຫັດຖີເສນາບໍດີປະມວນເຫດນີ້ມາສະແດງແກ່ພຣະຣາຊາ ແລ້ວຂາບທູນວ່າ)

[໓໗໗] ຂ້າແດ່ ພຣະຣາຊາຜູ້ເປັນຈອມແຫ່ງໝູ່ມະນຸດ

ພຣະອົງກໍເປັນແນວນັ້ນຄືກັນ ໂຜດສະດັບຄຳຂອງຂ້າພຣະອົງ
ພະສົກນິກອນທັງຫຼາຍຈັກພາກັນເນຣະເທດພຣະອົງໄປຈາກແຄວ້ນ
ຄືພາມເນຣະເທດມານົບຜູ້ເປັນນັກເລງສຸຣາ

(ພຣະຣາຊາເມື່ອບໍ່ອາດຈະງົດຊີ້ນນັ້ນໄດ້ ຕັດສະແດງເຫດແມ່ນແນວອື່ນອີກວ່າ)

[໕໗໗] ສາວົກຂອງພວກລືສີຜູ້ອົບຮົມແລ້ວຊື່ວ່າສຸຊາຕະ
ເຂົາຕ້ອງການນາງອັບປະສອນທີ່ນັ້ນ ຈົນບໍ່ກິນເຂົ້າແລະບໍ່ດື່ມນໍ້າ

[໕໗໘] ບຸກຄົນເພິ່ງເອົານໍ້າທີ່ຕິດຢູ່ກັບປາຍຫຍ້າຄາ
ມານັບປຽບກັນເບິ່ງກັບນໍ້າທີ່ມີຢູ່ໃນສະມຸດສັນໃດ
ກາມທັງຫຼາຍຂອງພວກມະນຸດໃນສຳນັກຂອງກາມທິບກໍສັນນັ້ນ

[໕໘໐] ທ່ານກາລະ ເຮົາກໍຄືກັນ
ບໍຣິໂພກອາຫານທີ່ມີຣົດແຊບທີ່ສຸດແລ້ວ
ຖ້າບໍ່ໄດ້ຊີ້ນມະນຸດ ເຂົ້າໃຈວ່າ ຄົງເສຍຊີວິດແນ່

(ກາມະເສນາບໍດີເມື່ອໄດ້ຟັງດັ່ງນັ້ນ ຈຶ່ງຂາບທູນວ່າ)

[໕໘໑] ປຽບເໝືອນພວກຫົງຊື່ທະຕະຣັດຖະ ເຫີນບິນໄປໃນທ້ອງຟ້າ
ເຖິງຄວາມຕາຍໄປຈົນໝົດຍ້ອນກິນອາຫານທີ່ບໍ່ຄວນກິນ ສັນໃດ

[໕໘໘] ຂ້າແດ່ ພຣະຣາຊາຜູ້ເປັນຈອມແຫ່ງໝູ່ມະນຸດ
ພຣະອົງກໍເປັນແນວນັ້ນຄືກັນ ໂຜດສະດັບຄຳຂອງຂ້າພຣະອົງ
ພຣະອົງສະເຫວີຍເນື້ອທີ່ບໍ່ຄວນ
ດັ່ງນັ້ນ ພະສົກນິກອນທັງຫຼາຍຈຶ່ງພາກັນເນຣະເທດພຣະອົງ

(ໂຈນໂປຣິສາດ ກ່າວກັບຣຸກຂະເທວະດານັ້ນວ່າ)

[໕໘໕] ເຮົາໄດ້ຫ້າມທ່ານແລ້ວວ່າ ຈົ່ງຢຸດ ທ່ານນັ້ນກໍຍັງຍ່າງດຸ່ມ ໆ ໄປ
ທ່ານຜູ້ປະພຶດພົມມະຈັນ ທ່ານບໍ່ໄດ້ຢຸດ
ແຕ່ບອກວ່າຢຸດ ທ່ານສະມະນະ ນີ້ຄວນແກ່ທ່ານແລ້ວບໍ
ທ່ານສຳຄັນດາບຂອງເຮົາວ່າເປັນຂົນປີກນົກກະຊຸມບໍ

(ລຳດັບນັ້ນ ເທວະດາກ່າວວ່າ)

[໓໙໔] ມະຫາບໍພິດ ອາດຕະມາພາບຢຸດແລ້ວໃນທຳຂອງຕົນ
ບໍ່ໄດ້ປຸ່ງນຊື່ແລະໂຄດ
ສ່ວນໂຈນບັນດິດກ່າວວ່າ ບໍ່ຢຸດໃນໂລກ
ຈຸຕິຈາກໂລກນີ້ແລ້ວຈະຕ້ອງໄປເກີດໃນອະບາຍຫຼືນະຮົກ
ມະຫາບໍພິດ ຖ້າຊົງເຊື່ອອາດຕະມາພາບ
ຂໍມະຫາບໍພິດຈົ່ງຈັບພຣະເຈົ້າສຸຕະໂສມຜູ້ເປັນກະສັດເທີ້ນ
ມະຫາບໍພິດຊົງຈັບພຣະເຈົ້າສຸຕະໂສມນັ້ນບູຊາຍັນແລ້ວ
ຈັກສະເດັດໄປສະຫວັນໄດ້ແນວນີ້

(ພຣະເຈົ້າສຸຕະໂສມໂພທິສັດທອດພຣະເນດເຫັນພາມຢືນຖວາຍພຣະພອນຢູ່ຂ້າງທາງ ຈຶ່ງຕັດຖາມວ່າ)

[໓໙໕] ຊາດພູມຂອງທ່ານຢູ່ໃນແຄວັນໃດນໍ
ທ່ານມາເຖິງນະຄອນນີ້ໄດ້ດ້ວຍປະໂຫຍດອັນໃດ
ທ່ານພາມ ຂໍທ່ານຈົ່ງບອກປະໂຫຍດນີ້ແກ່ຂ້າພະເຈົ້າ
ທ່ານຕ້ອງການອັນໃດ ຂ້າພະເຈົ້າຈະໃຫ້ຕາມທີ່ທ່ານຕ້ອງການ ໃນມື້ນີ້

(ພາມໄດ້ຂາບທູນພຣະເຈົ້າສຸຕະໂສມໂພທິສັດນັ້ນວ່າ)

[໓໙໖] ພຣະພູມິບານ ຄາຖາທັງ ໔ ມີອັດຖະທີ່ເລິກ
ປຽບດ້ວຍສາຄອນອັນປະເສີດ
ຂ້ານ້ອຍມານະຄອນນີ້ເພື່ອປະໂຫຍດແກ່ພຣະອົງທ່ານັ້ນ
ຂໍພຣະອົງໂຜດສະດັບຄາຖາ
ທີ່ປະກອບດ້ວຍປະໂຫຍດຢ່າງຍິ່ງເທີ້ນ

(ໂຈນໂປຣິສາດຈັບພຣະເຈົ້າສຸຕະໂສມໂພທິສັດໄດ້ແລ້ວ ຈຶ່ງທູນຖາມວ່າ)

[໓໙໗] ຊົນເຫຼົ່າໃດມີຄວາມຮູ້ ມີປັນຍາ ເປັນພະຫູສູດ
ຄິດເຫດການໄດ້ຫຼາຍ ຊົນເຫຼົ່ານັ້ນຍ່ອມບໍ່ຮ້ອງໄຫ້
ການທີ່ເຫຼົ່າບັນດິດເປັນຜູ້ບັນເທົາຄວາມໂສກໄດ້
ນີ້ແລ້ວເປັນບ່ອນເພິ່ງອັນປະເສີດຂອງເຫຼົ່ານໍຣະຊົນ

[໓໙໘] ທ່ານສຸຕະໂສມ ພຣະອົງຊົງເສົ້າໂສກຍ້ອນເຫດໃດ
ຍ້ອນເຫດແຫ່ງພຣະອົງເອງ ພຣະຍາດ ພຣະໂອຣົດ

ພຣະມະເຫສີ ເຂົ້າເປືອກ ຊັບ ເງິນ ຫຼືວ່າຄຳບໍ
ທ່ານໂກຣັບພະຍະຜູ້ປະເສີດ ຂ້ານ້ອຍຂໍຟັງພຣະດຳຣັດຂອງພຣະອົງ

(ພຣະເຈົ້າສຸຕະໂສມໂພທິສັດຕັດວ່າ)

[໔໐໐] ຂ້ານ້ອຍບໍ່ໄດ້ທອດຖອນ ບໍ່ໄດ້ເສົ້າໂສກເພື່ອປະໂຫຍດແກ່ຕົນ
ແກ່ໂອຣົດ ມະເຫສີ ຊັບ ແລະແຄວັ້ນ
ແຕ່ທຳຂອງເຫຼົ່າສັດຕະບຸຣຸດທີ່ເຄີຍປະພຶດມາເກົ່າກ່ອນ
ຂ້ານ້ອຍນັດໝາຍໄວ້ກັບພາມ
ຂ້ານ້ອຍທອດຖອນເສົ້າໂສກເຖິງການນັດໝາຍນັ້ນ
[໔໐໑] ຂ້ານ້ອຍດຳລົງຢູ່ໃນຄວາມເປັນໃຫຍ່ໃນແຄວັ້ນຂອງຕົນເອງ
ໄດ້ທຳການນັດໝາຍໄວ້ກັບພາມ
ເພື່ອຈະປົດການນັດໝາຍນັ້ນກັບພາມ
ກໍຈັກເປັນຜູ້ຮັກສາຄວາມສັດທວນກັບມາອີກ

(ໂຈນໂປຣິສາດຂາບທູນພຣະເຈົ້າສຸຕະໂສມໂພທິສັດວ່າ)

[໔໐໒] ນໍຣະຊົນຜູ້ມີຄວາມສຸກ ລຸດພົ້ນໄປຈາກປາກຂອງຄວາມຕາຍແລ້ວ
ຈະເພິ່ງກັບມາສູ່ເງື້ອມມືຂອງສັດຕູອີກ
ຂໍ້ນີ້ຂ້ານ້ອຍຍັງບໍ່ເຊື່ອ ທ່ານໂກຣັບພະຍະຜູ້ປະເສີດທີ່ສຸດ
ພຣະອົງບໍ່ສະເດັດເຂົ້າໄປຫາຂ້ານ້ອຍເລີຍ
[໔໐໓] ພຣະອົງຊົງລຸດພົ້ນຈາກເງື້ອມມືຂອງໂຈນໂປຣິສາດແລ້ວ
ສະເດັດໄປເຖິງພຣະຣາດຊະມົນທຽນຂອງພຣະອົງ
ຈະມົວຊົງເພີດເພີນໃນການມະຄຸນ ຂ້າແດ່ ພຣະຣາຊາ
ພຣະອົງຊົງໄດ້ພະຊົນຊີບອັນເປັນທີ່ຮັກແສນຫວານແລ້ວ
ເປັນຫຍັງຈັກສະເດັດກັບມາຍັງສຳນັກຂອງຂ້ານ້ອຍເດ

(ພຣະເຈົ້າສຸຕະໂສມໂພທິສັດໄດ້ສະດັບດັ່ງນັ້ນ ບໍ່ຊົງຫວາດຣະແວງ ຈຶ່ງຕັດວ່າ)

[໔໐໔] ຄົນຜູ້ມີສິນບໍລິສຸດເພິ່ງປາຖະໜາຄວາມຕາຍ
ຜູ້ມີທຳລາມົກທີ່ນັກປາດຕິຕຽນກໍບໍ່ປາຖະໜາຊີວິດ
ນໍຣະຊົນໃດເພິ່ງກ່າວຕົວະຍ້ອນເພື່ອປະໂຫຍດຂອງຕົນໃດເປັນເຫດ
ເຫດເພື່ອປະໂຫຍດຂອງຕົນນັ້ນ
ຍ່ອມປ້ອງກັນນໍຣະຊົນນັ້ນຈາກທຸກຄະຕິບໍ່ໄດ້

[໔໐໕] ແມ່ນຖ້າລົມຈະເພິ່ງພັດພາພູມາໄດ້
ດວງຈັນແລະດວງອາທິດກໍຈະເພິ່ງຕົກລົງເທິງແຜ່ນດິນໄດ້
ແລະແມ່ນ້ຳທຸກສາຍກໍຈະເພິ່ງໄຫຼທວນກະແສ
ຖ້າເປັນໄປໄດ້ແນວນັ້ນ
ຂ້ານ້ອຍກໍຈຶ່ງຈະບໍ່ເວົ້າຕົວະເລີຍ ຂ້ານ້ອຍ

[໔໐໖] ຟ້າເພິ່ງທະລາຍຮົ່ວໄດ້ ທະເລກໍເພິ່ງແຫ້ງໄດ້
ແຜ່ນດິນທີ່ຊົງຮອງຮັບສັດໄວ້ກໍຈະເພິ່ງຫຼີກກັບໄດ້
ພູພຣະສຸເມຣຸກໍຈະເພິ່ງເພີກຖອນຂຶ້ນໄດ້ພ້ອມທັງເຫງົ້າ
ຖ້າເປັນໄປໄດ້ແນວນັ້ນ
ຂ້ານ້ອຍກໍຈຶ່ງຈະບໍ່ເວົ້າຕົວະເລີຍ ຂ້ານ້ອຍ

(ພຣະເຈົ້າສຸຕະໂສມໂພທິສັດຕັດສາບານວ່າ)

[໔໐໗] ສະຫາຍ ຂ້ານ້ອຍຈະຈັບດາບແລະຫອກ
ຈະເຮັດແມ່ນແຕ່ການສາບານຕໍ່ພຣະອົງກໍໄດ້
ຂ້ານ້ອຍຜູ້ທີ່ພຣະອົງປ່ອຍແລ້ວ
ຈັກເປັນຜູ້ໝົດໜີ້ ຮັກສາຄວາມສັດ ທວນກັບມາອີກ

(ໂຈນໂປຣິສາດຂາບທູນພຣະເຈົ້າສຸຕະໂສມໂພທິສັດວ່າ)

[໔໐໘] ທ່ານຜູ້ດຳລົງຢູ່ແລ້ວໃນຄວາມເປັນໃຫຍ່ໃນແຄວ້ນຂອງພຣະອົງ
ໄດ້ທຳການນັດໝາຍໃດໄວ້ກັບພາມ
ເພື່ອຈະປົດການນັດໝາຍນັ້ນກັບພາມ
ພຣະອົງກໍຈັກເປັນຜູ້ຮັກສາຄວາມສັດທວນກັບມາອີກ

(ພຣະເຈົ້າສຸຕະໂສມໂພທິສັດຕັດວ່າ)

[໔໐໙] ຂ້ານ້ອຍຜູ້ດຳລົງຢູ່ແລ້ວໃນຄວາມເປັນໃຫຍ່ໃນແຄວ້ນຂອງຕົນ
ໄດ້ທຳການນັດໝາຍໃດໄວ້ກັບພາມ
ເພື່ອຈະປົດເປື້ອງການນັດໝາຍນັ້ນກັບພາມ
ກໍຈັກເປັນຜູ້ຮັກສາຄວາມສັດທວນກັບມາອີກ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໔໑໐] ພຣະເຈົ້າສຸຕະໂສມນັ້ນຊົງພົ້ນຈາກເງື້ອມມືຂອງໂຈນໂປຣິສາດແລ້ວ
ໄດ້ສະເດັດໄປຕັດກັບພາມນັ້ນດັ່ງນີ້ວ່າ
ທ່ານພາມ ຂ້າພະເຈົ້າຂໍຟັງສະຕາຣະຫະຄາຖາ
ທີ່ຂ້າພະເຈົ້າໄດ້ຟັງແລ້ວ ຈະເພິ່ງເປັນປະໂຫຍດແກ່ຂ້າພະເຈົ້າ

(ພາມເບິ່ງຄຳພີ ຂາບທູນວ່າ)

[໔໑໑] ທ່ານສຸຕະໂສມ ການສະມາຄົມກັບສັດຕະບຸຣຸດ
ເທື່ອດຽວທີ່ນັ້ນກໍຄຸ້ມຄອງຜູ້ນັ້ນໄດ້
ການສະມາຄົມກັບອະສັດຕະບຸຣຸດແມ່ນຫຼາຍຄັ້ງກໍຄຸ້ມຄອງບໍ່ໄດ້

[໔໑໒] ບຸກຄົນເພິ່ງຢູ່ຮ່ວມກັບສັດຕະບຸຣຸດທີ່ນັ້ນ
ເພິ່ງທຳຄວາມສະໜິດສະໜົມກັບສັດຕະບຸຣຸດທັງຫຼາຍ
ຍ້ອນຮູ້ທົ່ວເຖິງທຳຂອງສັດຕະບຸຣຸດທັງຫຼາຍ
ບຸກຄົນຈຶ່ງມີແຕ່ຄວາມຈະເລີນ ບໍ່ມີຄວາມເສື່ອມເລີຍ

[໔໑໓] ຣາດຊະລົດທີ່ວິຈິດດີທັງຫຼາຍຍັງຊຸດໂຊມໄດ້
ອັນໜຶ່ງ ແມ່ນສະຣີຣະກໍຍັງເຂົ້າເຖິງຄວາມແກ່ຊະຣາ
ສ່ວນທຳຂອງສັດຕະບຸຣຸດຍ່ອມບໍ່ເຂົ້າເຖິງຄວາມຊຸດໂຊມ
ສັດຕະບຸຣຸດກັບສັດຕະບຸຣຸດທີ່ນັ້ນຍ່ອມຮູ້ກັນໄດ້

[໔໑໔] ຟ້າກັບແຜ່ນດິນຫ່າງໄກກັນ
ຝັ່ງນັ້ນກັບຝັ່ງນີ້ຂອງສະມຸດກໍກ່າວກັນວ່າໄກກັນ
ຂ້າແດ່ ພຣະຣາຊາ ທຳຂອງສັດຕະບຸຣຸດແລະອະສັດຕະບຸຣຸດ
ນັກປາດທັງຫຼາຍກ່າວວ່າ ໄກຍິ່ງກວ່ານັ້ນໂດຍແທ້

(ພຣະເຈົ້າສຸຕະໂສມໂພທິສັດຕັດກັບພາມນັ້ນວ່າ)

[໔໑໕] ຄາຖາເຫຼົ່ານີ້ມີຄ່າ ໑,໐໐໐
ບໍ່ແມ່ນມີຄ່າພຽງ ໑໐໐
ທ່ານພາມ ເຊີນທ່ານຟ້າວມາຮັບເອົາຊັບ ໔,໐໐໐ ເທີ້ນ

(ພຣະຣາດຊະບິດາຂອງພຣະເຈົ້າສຸຕະໂສມໂພທິສັດຕັດວ່າ)

[໔໑໖] ຄາຖາມີຄ່າ ໗໐ ໘໐ ແລະ ໑໐໐ ກໍຍັງມີ

ລູກສຸຕະໂສມ ລູກຈຶ່ງເຂົ້າໃຈເອົາເອງເທີ້ນ
ມີຄາຖາອັນໃດທີ່ຊື່ວ່າ ມີຄ່າຕັ້ງ ໑,໐໐໐

(ພຣະເຈົ້າສຸຕະໂສມໂພທິສັດຂາບທູນໃຫ້ພຣະຣາດຊະບິດາຍິນຍອມວ່າ)

[໔໑໗] ຂ້ານ້ອຍຍ່ອມປາຖະໜາຄວາມຈະເລີນທາງການສຶກສາຂອງຕົນ
ສັດຕະບຸຣຸດຄືຜູ້ສະງົບທັງຫຼາຍເພິ່ງຄົບຫາຂ້ານ້ອຍ
ຂ້າແດ່ສະເດັດພໍ່ ຂ້ານ້ອຍບໍ່ອິ່ມດ້ວຍສຸພາສິດ
ຄືມະຫາສະມຸດບໍ່ອິ່ມດ້ວຍນໍ້າ

[໔໑໘] ຂ້າແດ່ ພຣະຣາຊາຜູ້ປະເສີດ ໄຟໄໝ້ຫຍ້າແລະໄມ້ຍ່ອມບໍ່ອິ່ມ
ສາຄອນກໍບໍ່ອິ່ມດ້ວຍແມ່ນໍ້າທັງຫຼາຍສັນໃດ
ແມ່ນບັນດິດເຫຼົ່ານັ້ນຟັງແລ້ວກໍບໍ່ອິ່ມດ້ວຍສຸພາສິດສັນນັ້ນ

[໔໑໙] ຂ້າແດ່ ພຣະອົງຜູ້ຈອມຊົນ
ເມື່ອໃດ ຂ້ານ້ອຍຟັງຄາຖາທີ່ມີປະໂຫຍດໃນສຳນັກແຫ່ງຂ້າທາດຂອງຕົນ
ເມື່ອນັ້ນ ຂ້ານ້ອຍຍ່ອມຕັ້ງໃຈຟັງຄາຖານັ້ນທໍ່ນັ້ນໂດຍເຄົາລົບ
ຂ້າແດ່ສະເດັດພໍ່
ຍ້ອນຂ້ານ້ອຍ ບໍ່ມີຄວາມອິ່ມໃນທຳເລີຍ

[໔໒໐] ແຄວ້ນຂອງສະເດັດພໍ່ນີ້ສົມບູນດ້ວຍສິ່ງທີ່ໜ້າປາຖະໜາທຸກຢ່າງ
ມີທັງຊັບ ຍວດຍານ ແລະເຄື່ອງປະດັບ
ສະເດັດພໍ່ຊົງກ່າວໂທດຂ້ານ້ອຍຍ້ອນເຫດແຫ່ງການເຮັດຫຍັງ
ຂ້ານ້ອຍຂໍທູນລາໄປໃນສຳນັກຂອງໂປຣິສາດ

(ພຣະບິດາຕັດວ່າ)

[໔໒໑] ກອງພົນຊ້າງ ກອງພົນມ້າ ກອງພົນລົດ ແລະກອງພົນຣາບ
ລ້ວນແຕ່ຊ່ຽວຊານໃນການທະນູພໍທີ່ຈະປົກປ້ອງໂຕເອງໄດ້
ເຮົາຈະຍົກກອງທັບໄປຂ້າສັດຕູເສຍ

(ພຣະເຈົ້າສຸຕະໂສມໂພທິສັດຟັງຄຳຂອງພຣະຣາດຊະບິດາແລະພຣະຣາດຊະມານດາແລ້ວ
ຈຶ່ງຕັດວ່າ)

[໔໒໒] ໂຈນໂປຣິສາດໄດ້ເຮັດກິດທີ່ເຮັດໄດ້ແສນຍາກ

ຈັບຂ້ານ້ອຍໄດ້ທັງເປັນແລ້ວປ່ອຍມາ
ຂ້າແດ່ ພຣະອົງຜູ້ຈອມຊົນ ຂ້ານ້ອຍຣະນຶກເຖິງອຸປະການະ
ທີ່ມີມາກ່ອນເຊັ່ນນັ້ນທີ່ໂຈນໂປຣິສາດນັ້ນເຮັດແລ້ວ
ຈະເພິ່ງປະທຸດສະຮ້າຍຕໍ່ໂປຣິສາດນັ້ນໄດ້ແນວໃດ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໔໘໓] ພຣະເຈົ້າສຸຕະໂສມນັ້ນຖວາຍບັງຄົມພຣະບິດາ
ແລະພຣະມານດາແລ້ວ
ຊົງພ່ຳສອນຊາວນິຄົມແລະພົນນິກາຍ
ເປັນຜູ້ຕັດຄວາມສັດ ແລະຊົງຮັກສາຄຳສັດ
ໄດ້ສະເດັດໄປສູ່ທີ່ເປັນບ່ອນຢູ່ຂອງໂປຣິສາດແລ້ວ

(ພຣະເຈົ້າສຸຕະໂສມໂພທິສັດຕັດກັບໂຈນໂປຣິສາດວ່າ)

[໔໘໔] ຂ້ານ້ອຍຜູ້ດຳລົງຢູ່ໃນຄວາມເປັນໃຫຍ່ໃນແຄວ້ນຂອງຕົນ
ໄດ້ທຳການນັດໝາຍໄວ້ກັບພາມ
ເພື່ອປົດເປື້ອງການນັດໝາຍນັ້ນກັບພາມ
ຈຶ່ງເປັນຜູ້ຮັກສາຄວາມສັດທວນກັບມາອີກ
ທ່ານໂປຣິສາດ ຂໍເຊີນທ່ານບູຊາຍັນກິນເຮົາສາເທີ້ນ

(ໂຈນໂປຣິສາດໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໔໘໕] ການຫຍໍ້າກິນທ່ານໃນພາຍຫຼັງ
ບໍ່ເສຍຫາຍສຳລັບຂ້າພະເຈົ້າ
ແທ້ຈິງກອງໄຟນີ້ກໍຍັງມີຄວັນ
ຊີ້ນທີ່ຢ້າງໃນກອງໄຟອັນບໍ່ມີຄວັນຈະສຸກດີ
ຂ້ານ້ອຍຈະຂໍຟັງຄາຖາເຊິ່ງມີຄ່າຕັ້ງ ໑໐໐

(ພຣະເຈົ້າສຸຕະໂສມໂພທິສັດໄດ້ຟັງດັ່ງນັ້ນ ຈຶ່ງຕັດວ່າ)

[໔໘໖] ທ່ານໂປຣິສາດ ທ່ານປະພຶດບໍ່ຊອບທຳ
ຕ້ອງພັດພາກຈາກແຄວ້ນ ຍ້ອນເຫດແຫ່ງ(ປາກ)ທ້ອງ
ສ່ວນຄາຖາເຫຼົ່ານີ້ຍ່ອມກ່າວສັນເສີນທຳ
ທຳແລະອະທຳຈະລົງກັນໄດ້ຢູ່ໃສ໑

[໔໘໗] ຄົນຜູ້ປະພຶດບໍ່ຊອບທຳ ຫຍາບຊ້າ
ມີຝາມືເປື້ອນເລືອດເປັນປະຈຳ ຍ່ອມບໍ່ມີສັດຈະ
ທຳຈະມີໄດ້ແຕ່ບ່ອນໃດ
ທ່ານຈັກຊົງເຮັດປະໂຫຍດອັນໃດດ້ວຍການສະດັບ[១]

(ໂຈນໂປຣິສາດໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໔໘໘] ຜູ້ໃດທ່ຽວລ່າເນື້ອ (ລ່າສັດ) ຍ້ອນເຫດແຫ່ງຊີ້ນ
ຫຼືຂ້າຄົນຍ້ອນເຫດແຫ່ງຕົນ
ຄົນທັງ ໒ ນັ້ນລະໂລກນີ້ໄປແລ້ວກໍສະເໝີກັນ (ພໍກັນ)
ຍ້ອນເຫດໃດນໍ ພຣະອົງຈຶ່ງຊົງກ່າວຫາຂ້ານ້ອຍວ່າ
ເປັນຜູ້ປະພຶດບໍ່ຊອບທຳ

(ພຣະເຈົ້າສຸຕະໂສມໂພທິສັດເມື່ອຈະແກ້ລັດທິຂອງໂຈນໂປຣິສາດ ຈຶ່ງຕັດວ່າ)

[໔໘໙] ພຣະມະຫາກະສັດຜູ້ຊົງຮູ້ທຳນຽມກະສັດ
ບໍ່ຄວນສະເຫວີຍຊີ້ນສັດ ໑໐ ຊະນິດມີຊີ້ນຊ້າງເປັນຕົ້ນ
ຂ້າແດ່ ພຣະຣາຊາ ພຣະອົງສະເຫວີຍຊີ້ນມະນຸດທີ່ບໍ່ຄວນສະເຫວີຍ
ຍ້ອນແນວນັ້ນ ພຣະອົງຈຶ່ງເປັນຜູ້ປະພຶດບໍ່ຊອບທຳ

(ໂຈນໂປຣິສາດເມື່ອຈະໃຫ້ພຣະໂພທິສັດຮັບບາບແດ່ ຈຶ່ງຂາບທູນວ່າ)

[໔໙໐] ພຣະອົງຊົງພົ້ນຈາກເງື້ອມມືຂອງໂຈນໂປຣິສາດແລ້ວ
ສະເດັດໄປເຖິງພຣະຣາດຊະມົນທຽນຂອງພຣະອົງ
ຊົງເພີດເພີນຢູ່ໃນກາມ
ສະເດັດຫວນກັບມາສູ່ເງື້ອມມືຂອງຂ້ານ້ອຍຜູ້ເປັນສັດຕູອີກ
ພຣະອົງຊ່າງເປັນຜູ້ບໍ່ສະຫຼາດ
ໃນທຳຂອງກະສັດ[២]ເລີຍເນາະ ຂ້ານ້ອຍ

(ພຣະເຈົ້າສຸຕະໂສມໂພທິສັດ ຈຶ່ງຕັດວ່າ)

[໔໙໑] ຊົນເຫຼົ່າໃດສະຫຼາດໃນທຳຂອງກະສັດ
ຊົນເຫຼົ່ານັ້ນຕ້ອງຕົກນະຮົກສາສ່ວນຫຼາຍ
ຍ້ອນແນວນັ້ນ ຂ້ານ້ອຍຈຶ່ງລະທຳຂອງກະສັດ
ແລ້ວເປັນຜູ້ຮັກສາຄວາມສັດ ຫວນກັບມາອີກ

ທ່ານໂປຣິສາດ ຂໍເຊີນພຣະອົງບູຊາຍັນສະເຫວີຍຂ້ານ້ອຍເທີ້ນ

(ໂຈນໂປຣິສາດຂາບທູນວ່າ)

[໔໓໘] ພຣະຕຳໜັກທີ່ປະທັບ ແຜ່ນດິນ ງົວ ມ້າ
ສະຕີຜູ້ໜ້າຮັກແພງ ຜ້າແຄວ້ນກາສີ ແລະແກ່ນຈັນ
ພຣະອົງຊົງໄດ້ທຸກສິ່ງໃນພຣະນະຄອນນັ້ນ
ກໍພຣະອົງຊົງເປັນພຣະເຈົ້າແຜ່ນດິນ
ພຣະອົງຊົງເຫັນອານິສົງອັນໃດດ້ວຍຄວາມສັດ

(ພຣະເຈົ້າສຸຕະໂສມໂພທິສັດຕັດວ່າ)

[໔໓໙] ຣົດເຫຼົ່າໃດເຫຼົ່າໜຶ່ງມີຢູ່ໃນແຜ່ນດິນ
ສັດຈະເປັນຣົດດີກວ່າຣົດເຫຼົ່ານັ້ນ
ກໍຍ້ອນສະມະນະແລະພາມຜູ້ດຳລົງຢູ່ໃນສັດຈະ
ຍ່ອມຂ້າມຝັ່ງແຫ່ງຊາດແລະມໍລະນະໄດ້

(ໂຈນໂປຣິສາດຂາບທູນວ່າ)

[໔໔໐] ພຣະອົງຊົງພົ້ນຈາກເງື້ອມມືຂອງໂຈນໂປຣິສາດແລ້ວ
ສະເດັດໄປເຖິງພຣະຣາດຊະມົນທຽນຂອງພຣະອົງ
ຊົງເພີດເພີນຢູ່ໃນກາມ
ຍັງສະເດັດຫວນກັບມາສູ່ເງື້ອມມືຂອງສັດຕູອີກ
ຂ້າແດ່ ພຣະອົງຜູ້ຈອມຊົນ
ພຣະອົງບໍ່ຊົງຢ້ານຄວາມຕາຍແນ່ບໍ
ແລະພຣະອົງເປັນຜູ້ຕັດຄຳສັດບໍ່ມີພຣະຫະໄທທໍ້ແທ້ເລີຍບໍ

(ພຣະເຈົ້າສຸຕະໂສມໂພທິສັດຕັດຕອບວ່າ)

[໔໔໑] ຂ້ານ້ອຍໄດ້ພ່ຳເພັງຄວາມດີໄວ້ຫຼວງຫຼາຍ
ໄດ້ບູຊາຍັນທີ່ບັນດິດສັນເສີນອັນໄພບູນ
ໄດ້ຊຳຣະທາງໄປປະຣະໂລກໄວ້ແລ້ວ
ຜູ້ຕັ້ງຢູ່ໃນທຳ ໃຜນໍຈະຕ້ອງຢ້ານຕາຍ

[໔໔໒] ຂ້ານ້ອຍໄດ້ພ່ຳເພັງຄວາມດີໄວ້ຫຼວງຫຼາຍ

ໄດ້ບູຊາຍັນທີ່ບັນດິດສັນເສີນແນວໄພບູນໄວ້ແລ້ວ
ຈຶ່ງບໍ່ເດືອດຮ້ອນໃຈທີ່ຈະໄປສູ່ປະຣະໂລກ
ທ່ານໂປຣິສາດ ຂໍເຊີນພຣະອົງບູຊາຍັນສະເຫວີຍຂ້ານ້ອຍເທີ້ນ

[໔໓໗] ຂ້ານ້ອຍໄດ້ບຳລຸງພຣະບິດາແລະພຣະມານດາແລ້ວ
ໄດ້ປົກຄອງຣາດຊະສົມບັດໂດຍທຳ
ໄດ້ຊຳຣະທາງໄປປະຣະໂລກໄວ້ແລ້ວ
ຜູ້ຕັ້ງຢູ່ໃນທຳ ໃຜບໍ່ຈະເພິ່ງຢ້ານຕາຍ

[໔໓໘] ຂ້ານ້ອຍໄດ້ບຳລຸງພຣະບິດາແລະພຣະມານດາແລ້ວ
ໄດ້ປົກຄອງຣາດຊະສົມບັດໂດຍທຳ
ຈຶ່ງບໍ່ເດືອດຊື້ນຮ້ອນໃຈທີ່ຈະໄປສູ່ປະຣະໂລກ
ທ່ານໂປຣິສາດ ຂໍເຊີນພຣະອົງບູຊາຍັນສະເຫວີຍຂ້ານ້ອຍເທີ້ນ

[໔໓໙] ຂ້ານ້ອຍໄດ້ທຳອຸປະກາຣະໄວ້ໃນໝູ່ພຣະຍາດ
ແລະມິດທັງຫຼາຍແລ້ວ ໄດ້ປົກຄອງຣາດຊະສົມບັດໂດຍທຳ
ໄດ້ຊຳຣະທາງໄປປະຣະໂລກໄວ້ແລ້ວ
ຜູ້ຕັ້ງຢູ່ໃນທຳ ໃຜບໍ່ຈະເພິ່ງຢ້ານຕາຍ

[໔໔໐] ຂ້ານ້ອຍໄດ້ທຳອຸປະກາຣະໄວ້ໃນໝູ່ພຣະຍາດ
ແລະມິດທັງຫຼາຍແລ້ວ
ໄດ້ປົກຄອງຣາດຊະສົມບັດໂດຍທຳຈຶ່ງບໍ່ເດືອດຮ້ອນໃຈທີ່ຈະໄປສູ່ປະຣະໂລກ
ທ່ານໂປຣິສາດ ຂໍເຊີນພຣະອົງບູຊາຍັນສະເຫວີຍຂ້ານ້ອຍເທີ້ນ

[໔໔໑] ຂ້ານ້ອຍໄດ້ໃຫ້ທານຫຼວງຫຼາຍແກ່ຄົນຫຼວງຫຼາຍ
ແລະໄດ້ບຳລຸງລ້ຽງສະມະນະແລະພາມໃຫ້ອີ່ມໜຳ
ໄດ້ຊຳຣະທາງໄປສູ່ປະຣະໂລກໄວ້ແລ້ວ
ຜູ້ຕັ້ງຢູ່ໃນທຳ ໃຜບໍ່ຈະເພິ່ງຢ້ານຕາຍ

[໔໔໔] ຂ້ານ້ອຍໄດ້ໃຫ້ທານຫຼວງຫຼາຍແກ່ຄົນຫຼວງຫຼາຍ
ແລະໄດ້ບຳລຸງລ້ຽງສະມະນະແລະພາມໃຫ້ອີ່ມໜຳ
ຈຶ່ງບໍ່ເດືອດຮ້ອນໃຈທີ່ຈະໄປສູ່ປະຣະໂລກ
ທ່ານໂປຣິສາດ ຂໍເຊີນພຣະອົງບູຊາຍັນສະເຫວີຍຂ້ານ້ອຍເທີ້ນ

(ໂຈນໂປຣິສາດໄດ້ຟັງດັ່ງນັ້ນ ຈຶ່ງຂາບທູນວ່າ)

[໔໔໓] ບຸຣຸດໃດເພິ່ງກິນຄົນຜູ້ມີອາຈາສັດເຊັ່ນທ່ານ
ບຸຣຸດນັ້ນຊື່ວ່າບໍຣິໂພກຢາພິດທັງ ໆ ທີ່ຮູ້
ຊື່ວ່າຈັບອະສໍຣະພິດທີ່ຮ້າຍແຮງ ມີອໍານາດກ້າ
ແມ່ນຫົວຂອງເຂົາກໍຕ້ອງແຕກເປັນ ໗ ສ່ຽງ

[໔໔໔] ນໍຣະຊົນທັງຫຼາຍໄດ້ຟັງທໍາແລ້ວ
ຍ່ອມຮູ້ແຈ້ງທັງບຸນແລະບາບ
ໃຈຂອງຂ້ານ້ອຍຍ່ອມຍິນດີໃນທໍາ ຍ້ອນໄດ້ຟັງຄາຖາແລ້ວ

(ພຣະເຈົ້າສຸຕະໂສມໂພທິສັດຊົງສະແດງທໍາແກ່ໂຈນໂປຣິສາດວ່າ)

[໔໔໕] ຂ້າແດ່ ມະຫາຣາດ
ການສະມາຄົມກັບສັດຕະບຸຣຸດພຽງເທື່ອດຽວທໍ່ນັ້ນ
ການສະມາຄົມນັ້ນຍ່ອມຄຸ້ມຄອງຜູ້ນັ້ນໄດ້
ການສະມາຄົມກັບອະສັດຕະບຸຣຸດຫຼາຍຄັ້ງກໍຄຸ້ມຄອງບໍ່ໄດ້

[໔໔໖] ບຸກຄົນເພິ່ງຢູ່ຮ່ວມກັບສັດຕະບຸຣຸດທໍ່ນັ້ນ
ເພິ່ງທໍາຄວາມສະໜິດສະໜົມກັບສັດຕະບຸຣຸດ
ຍ້ອນຮູ້ທົ່ວເຖິງທໍາຂອງສັດຕະບຸຣຸດທັງຫຼາຍ
ບຸກຄົນຈຶ່ງມີຄວາມຈະເລີນ ບໍ່ມີຄວາມເສື່ອມເລີຍ

[໔໔໗] ຣາດຊະລົດທີ່ວິຈິດດີທັງຫຼາຍຍັງຊຸດໂຊມໄດ້
ອັນໜຶ່ງ ແມ່ນສະຣີຣະກໍຍັງເຂົ້າເຖິງຄວາມແກ່ຊະຣາ
ສ່ວນທໍາຂອງສັດຕະບຸຣຸດຍ່ອມບໍ່ເຂົ້າເຖິງຄວາມຊຸດໂຊມ
ສັດຕະບຸຣຸດກັບສັດຕະບຸຣຸດທໍ່ນັ້ນຍ່ອມຮູ້ກັນໄດ້

[໔໔໘] ຟ້າກັບແຜ່ນດິນຫ່າງໄກກັນ
ຝັ່ງນັ້ນກັບຝັ່ງນີ້ຂອງສະມຸດກໍກ່າວກັນວ່າໄກກັນ
ຂ້າແດ່ ພຣະຣາຊາ ທໍາຂອງສັດຕະບຸຣຸດແລະອະສັດຕະບຸຣຸດ
ນັກປາດທັງຫຼາຍກ່າວວ່າ ໄກຍິ່ງກວ່ານັ້ນໂດຍແທ້

(ໂຈນໂປຣິສາດຂາບທູນວ່າ)

[໔໔໙] ຂ້າແດ່ ພຣະອົງຜູ້ຈອມຊົນ ຄາຖາເຫຼົ່ານີ້ມີອັດຖະແລະພະຍັນຊະນະດີ
ພຣະອົງຕັດໄວ້ຖືກຕ້ອງດີແລ້ວ
ຂ້ານ້ອຍໄດ້ສະດັບແລ້ວເພີດເພີນ ພໍໃຈ ດີໃຈ ອີ່ມໃຈ
ຂ້າແດ່ ພຣະສະຫາຍ ຂ້ານ້ອຍຂໍຖວາຍພອນ ໔ ປະການແດ່ພຣະອົງ

(ພຣະເຈົ້າສຸຕະໂສມໂພທິສັດເມື່ອຈະຣຸກຕ້ອນໂຈນໂປຣິສາດ ຈຶ່ງຕັດວ່າ)

[໔໕໐] ທ່ານຜູ້ມີບາບທຳ ພຣະອົງບໍ່ຮູ້ສຶກວ່າຕົນຈະຕາຍ
ບໍ່ຮູ້ສຶກປະໂຫຍດແລະບໍ່ແມ່ນປະໂຫຍດ ວິນິບາດແລະສະຫວັນ
ເປັນຜູ້ຕິດໃຈໃນຣົດ ຕັ້ງໝັ້ນໃນທຸດຈະຣິດ ຈະປະທານພອນອັນໃດໄດ້

[໔໕໑] ຫາກຂ້ານ້ອຍຈະກ່າວກັບພຣະອົງວ່າ ໂຜດໃຫ້ພອນເທີ້ນ
ຝ່າຍພຣະອົງເມື່ອປະທານແລ້ວຈະເພິ່ງກັບຄຳ
ບັນດິດຄົນໃດບໍຮູ້ຢູ່ຈະເພິ່ງກໍ່ການຜິດກັນຖຽງກັນນີ້ທີ່ເຫັນຢູ່ແທ້ ໆ

(ໂຈນໂປຣິສາດຂາບທູນວ່າ)

[໔໕໒] ຄົນເຮົາແມ່ນໃຫ້ພອນໃດແລ້ວເພິ່ງກັບຄຳ
ເຂົາບໍ່ສົມຄວນໃຫ້ພອນນັ້ນ
ສະຫາຍ ທ່ານຈົ່ງຂໍພອນເທີ້ນ ຢ່າຫວັ່ນວິຕົກໄປເລີຍ
ແມ່ນແຕ່ຊີວິດຂ້ານ້ອຍກໍຍອມສະລະຖວາຍໄດ້

(ພຣະເຈົ້າສຸຕະໂສມໂພທິສັດ ຈຶ່ງຕັດວ່າ)

[໔໕໓] ມິດທຳຂອງພຣະອະຣິຍະກັບພຣະອະຣິຍະຍ່ອມສະເໝີກັນ
ຂອງຜູ້ມີປັນຍາກັບຜູ້ມີປັນຍາກໍສະເໝີກັນ
ຂ້ານ້ອຍເພິ່ງເຫັນພຣະອົງເປັນຜູ້ມີພະລານາໄມຕະຫຼອດ ໑໐໐ ປີ
ບັນດາພອນທັງຫຼາຍ ນີ້ເປັນພອນຂໍ້ທີ ໑ ທີ່ຂ້ານ້ອຍທູນຂໍ

(ໂຈນໂປຣິສາດເມື່ອຈະໃຫ້ພອນ ຈຶ່ງຂາບທູນວ່າ)

[໔໕໔] ມິດທຳຂອງພຣະອະຣິຍະກັບພຣະອະຣິຍະຍ່ອມສະເໝີກັນ
ຂອງຜູ້ມີປັນຍາກັບຜູ້ມີປັນຍາກໍສະເໝີກັນ
ພຣະອົງຈົ່ງເຫັນຂ້ານ້ອຍຜູ້ຫາພະຍາດບໍ່ໄດ້ຕະຫຼອດ ໑໐໐ ປີ
ບັນດາພອນທັງຫຼາຍ ນີ້ເປັນພອນຂໍ້ທີ ໑ ທີ່ຂ້ານ້ອຍຂໍຖວາຍ

(ພຣະເຈົ້າສຸຕະໂສມໂພທິສັດຕັດວ່າ)

[໘໕໕] ພຣະເຈົ້າແຜ່ນດິນຜູ້ເປັນກະສັດ ຜູ້ຊົງໄດ້ມຸດທາພິເສກ
ຊົງໄດ້ສະເຫຼີມພຣະນາມເຫຼົ່າໃດໃນຊົມພູທະວີບນີ້
ພຣະອົງຢ່າໄດ້ສະເຫວີຍກະສັດເຫຼົ່ານັ້ນຜູ້ເຊັ່ນນັ້ນ
ບັນດາພອນທັງຫຼາຍ ນີ້ເປັນພອນຂໍ້ທີ ໘ ທີ່ຂ້ານ້ອຍທູນຂໍ

(ໂຈນໂປຣິສາດເມື່ອຈະໃຫ້ພອນ ຈຶ່ງຂາບທູນວ່າ)

[໘໕໖] ພຣະເຈົ້າແຜ່ນດິນຜູ້ເປັນກະສັດ ຜູ້ຊົງໄດ້ມຸດທາພິເສກ
ຊົງໄດ້ສະເຫຼີມພຣະນາມເຫຼົ່າໃດໃນຊົມພູທະວີບນີ້
ຂ້ານ້ອຍຈະບໍ່ກິນກະສັດເຫຼົ່ານັ້ນຜູ້ເຊັ່ນນັ້ນ
ບັນດາພອນທັງຫຼາຍ ນີ້ເປັນພອນຂໍ້ທີ ໘ ທີ່ຂ້ານ້ອຍຂໍຖວາຍ

(ພຣະເຈົ້າສຸຕະໂສມໂພທິສັດຕັດວ່າ)

[໘໕໗] ກະສັດເກີນກວ່າ ໑໐໐ ພຣະອົງທີ່ພຣະອົງຈັບຮ້ອຍຝາພຣະຫັດໄວ້
ຊົງກັນແສງ ພຣະພັກຊຸ່ມດ້ວຍພຣະອັດສຸຊົນ
ຂໍພຣະອົງໄດ້ຊົງໂປດປ່ອຍກະສັດເຫຼົ່ານັ້ນ
ໃຫ້ກັບໄປໃນແຄວ້ນຂອງຕົນ ໆ ເທີ້ນ
ບັນດາພອນທັງຫຼາຍ ນີ້ເປັນພອນຂໍ້ທີ ໙ ທີ່ຂ້ານ້ອຍທູນຂໍ

(ໂຈນໂປຣິສາດເມື່ອຈະໃຫ້ພອນ ຈຶ່ງຂາບທູນວ່າ)

[໘໕໘] ກະສັດເກີນກວ່າ ໑໐໐ ພຣະອົງທີ່ຂ້ານ້ອຍຈັບຮ້ອຍຝາພຣະຫັດໄວ້
ຊົງກັນແສງ ມີພຣະພັກຊຸ່ມດ້ວຍພຣະອັດສຸຊົນ
ຂ້ານ້ອຍຈະປ່ອຍກະສັດເຫຼົ່ານັ້ນໃຫ້ກັບໄປໃນແຄວ້ນຂອງຕົນ ໆ
ບັນດາພອນທັງຫຼາຍ ນີ້ເປັນພອນຂໍ້ທີ ໙ ທີ່ຂ້ານ້ອຍຂໍຖວາຍ

(ພຣະເຈົ້າສຸຕະໂສມໂພທິສັດຕັດວ່າ)

[໘໕໙] ແຄວ້ນຂອງພຣະອົງເປັນປ່ອງ[໑]
ຍ້ອນຊົນຫຼວງຫຼາຍຫວາດຫວັ່ນຍ້ອນຢ້ານ
ຈຶ່ງພາກັນໜີເຂົ້າຫາບ່ອນຫຼົບລີ້
ຂໍພຣະອົງໂຜດຊົງງົດເວັ້ນຊີ້ນມະນຸດເທີ້ນ ຂ້ານ້ອຍ

ບັນດາພອນນທັງຫຼາຍ ນີ້ເປັນພອນຂໍ້ທີ ໔ ທີ່ຂ້ານ້ອຍທູນຂໍ

(ໂຈນໂປຣິສາດຂາບທູນວ່າ)

[໔໖໐] ມະນຸດນັ້ນເປັນພັກສາຫານທີ່ພໍໃຈຂອງຂ້ານ້ອຍມາຕັ້ງດົນ
ຂ້ານ້ອຍໜີເຂົ້າປ່າກໍຍ້ອນເຫດແຫ່ງພັກສາຫານນີ້
ຂ້ານ້ອຍນັ້ນຈະເພິ່ງງົດອາຫານນັ້ນໄດ້ແນວໃດ
ຂໍພຣະອົງຈົ່ງຂໍພອນຂໍ້ທີ ໔ ແນວອື່ນເທີ້ນ

(ພຣະເຈົ້າສຸຕະໂສມໂພທິສັດຕັດວ່າ)

[໔໖໑] ພຣະອົງຜູ້ຈອມຊົນ ຄົນເຊັ່ນກັບພຣະອົງມົວພະວົງຢູ່ວ່າ
ນີ້ເປັນທີ່ພໍໃຈຂອງເຮົາ ມາປະຖິ້ມຕົນສາ
ຍ່ອມບໍ່ປະສົບສິ່ງເຊິ່ງເປັນທີ່ພໍໃຈທັງຫຼາຍ
ຕົນນັ້ນແລປະເສີດກວ່າ ປະເສີດຢ່າງຍອດຍັ່ງມກວ່າ
ຍ້ອນບຸກຄົນຜູ້ອົບຮົມຕົນແລ້ວ
ເພິ່ງໄດ້ສິ່ງເຊິ່ງເປັນທີ່ພໍໃຈທັງຫຼາຍໃນພາຍຫຼັງ

(ໂຈນໂປຣິສາດມີນ້ຳຕານອງໜ້າ ຂາບທູນວ່າ)

[໔໖໔] ຊີ້ນມະນຸດເປັນທີ່ພໍໃຈຂອງຂ້ານ້ອຍ ພຣະເຈົ້າສຸຕະໂສມ
ໂຜດຊົງຮູ້ແນວນີ້ ຂ້ານ້ອຍບໍ່ອາດຈະງົດເວັ້ນ
ເຊີນພຣະອົງເລືອກພອນແນວອື່ນເທີ້ນ ພຣະສະຫາຍ

(ພຣະເຈົ້າສຸຕະໂສມໂພທິສັດຕັດວ່າ)

[໔໖໓] ຜູ້ໃດມົວຮັກສາຂອງເຊິ່ງເປັນທີ່ພໍໃຈວ່າ
ນີ້ເປັນທີ່ພໍໃຈຂອງເຮົາ ມາປະຖິ້ມຕົນສາ
ຍ່ອມປະສົບແຕ່ຂອງເຊິ່ງເປັນທີ່ຮັກທັງຫຼາຍ
ຄືນັກເລງສຸຣາດື່ມສຸຣາທີ່ໃສ່ຢາພິດ
ຍ້ອນເຫດນັ້ນເອງ ເຂົາຈຶ່ງໄດ້ຮັບທຸກໃນໂລກໜ້າ
[໔໖໔] ອັນໜຶ່ງ ຜູ້ໃດໃນໂລກນີ້ໄດ້ພິຈາລະນາແລ້ວ
ລະສິ່ງເຊິ່ງເປັນທີ່ພໍໃຈໄດ້ ຍ່ອມເສບອະຣິຍະທຳໄດ້ແສນຍາກ
ຄືຄົນໄຂ້ຜູ້ປະສົບທຸກດື່ມຢາ
ຍ້ອນເຫດນັ້ນແລ ຜູ້ນັ້ນຈຶ່ງເປັນຜູ້ໄດ້ຮັບຄວາມສຸກໃນໂລກໜ້າ

(ໂຈນໂປຣິສາດກ່າວຮ່ຳໄຮວ່າ)

[໔໗໕]	ຂ້ານ້ອຍລະຖິ້ມພຣະບິດາແລະພຣະມານດາ
ທັງປັນຈະກາມະຄຸນອັນເປັນທີ່ພໍໃຈ
ໜີເຂົ້າປ່າກໍຍ້ອນເຫດແຫ່ງພັກສາຫານນີ້
ພອນຂໍ້ນັ້ນຂ້ານ້ອຍຈະຖວາຍແກ່ພຣະອົງໄດ້ແນວໃດ

(ພຣະເຈົ້າສຸຕະໂສມໂພທິສັດຕັດວ່າ)

[໔໗໖]	ບັນດິດທັງຫຼາຍບໍ່ກ່າວວາຈາເປັນ ໔ ສ່ວນ
ສັດຕະບຸຣຸດທັງຫຼາຍຍ່ອມມີປະຕິຍານເປັນຄຳສັດໂດຍແທ້
ພຣະອົງໄດ້ຕັດກັບຂ້ານ້ອຍວ່າ ເຊີນຂໍພອນເທີ້ນ ພຣະສະຫາຍ
ພຣະອົງໄດ້ຕັດໄວ້ແນວນີ້
ຍ້ອນແນວນັ້ນ ພຣະດຳຣັດທີ່ພຣະອົງຕັດຈຶ່ງບໍ່ສົມກັນ

(ໂຈນໂປຣິສາດຮ້ອງໄຫ້ອີກ ຂາບທູນວ່າ)

[໔໗໗]	ຂ້ານ້ອຍເຂົ້າເຖິງການບໍ່ໄດ້ບຸນ
ຄວາມເສື່ອມຍົດເສື່ອມກຽດ ບາບ ທຸດຈະຣິດ
ຄວາມເສົ້າໝອງຫຼວງຫຼາຍ ຍ້ອນຊີ້ນມະນຸດເປັນເຫດ
ຂ້ານ້ອຍຈະເພິ່ງຖວາຍພອນນັ້ນແກ່ພຣະອົງໄດ້ແນວໃດ

(ພຣະເຈົ້າສຸຕະໂສມໂພທິສັດຕັດກັບໂຈນໂປຣິສາດນັ້ນອີກວ່າ)

[໔໗໘]	ຄຳວ່າ ຄົນເຮົາໃຫ້ພອນໃດແລ້ວກັບຄຳ ເຂົາບໍ່ສົມຄວນໃຫ້ພອນນັ້ນ
ສະຫາຍ ຂໍພຣະອົງຈົ່ງຂໍພອນເທີ້ນ ຢ່າຫວັ່ນວິຕົກໄປເລີຍ
ແມ່ນແຕ່ຊີວິດຂ້ານ້ອຍກໍສະລະຖວາຍພຣະອົງໄດ້

(ພຣະເຈົ້າສຸຕະໂສມໂພທິສັດຕັດສະໜັບສະໜູນໂຈນໂປຣິສາດນັ້ນ ໃຫ້ອາດຫານໃນການໃຫ້ພອນວ່າ)

[໔໗໙]	ສັດຕະບຸຣຸດທັງຫຼາຍຍອມສະລະຊີວິດ ແຕ່ບໍ່ສະລະທຳ
ສັດຕະບຸຣຸດມີປະຕິຍານເປັນສັດແນວດຽວ
ພອນທີ່ພຣະອົງໄດ້ປະທານແລ້ວ ຂໍໄດ້ໂຜດຟ້າວປະທານສາເທີ້ນ
ພຣະຣາຊາຜູ້ປະເສີດສຸດ ຂໍພຣະອົງຈົ່ງສົມບູນດ້ວຍທຳນີ້ເທີ້ນ

[໔໗໐] ນໍຣະຊົນເພິ່ງສະລະຊັບຍ້ອນເຫດແຫ່ງອະໄວຍະວະທີ່ສຳຄັນ
ເມື່ອຈະຮັກສາຊີວິດ ກໍເພິ່ງສະລະອະໄວຍະວະ
ເມື່ອຣະນຶກເຖິງທຳ ເພິ່ງສະລະທັງອະໄວຍະວະ
ຊັບ ແລະແມ່ນແຕ່ຊີວິດທັງໝົດ

[໔໗໑] ບຸຣຸດຮູ້ທຳຈາກຜູ້ໃດ
ແລະເຫຼົ່າສັດຕະບຸຣຸດຍ່ອມກຳຈັດຄວາມສົງໄສຂອງບຸຣຸດນັ້ນໄດ້
ຂໍ້ນັ້ນເປັນບ່ອນເພິ່ງແລະເປັນຈຸດມຸ້ງໝາຍຂອງບຸຣຸດນັ້ນ
ດ້ວຍເຫດນັ້ນ ບຸກຄົນຜູ້ມີປັນຍາບໍ່ເພິ່ງທຳລາຍໄມຕີ

(ໂຈນໂປຣິສາດເມື່ອຈະໃຫ້ພອນ ຈຶ່ງຂາບທູນວ່າ)

[໔໗໒] ມະນຸດນັ້ນເປັນພັກສາຫານທີ່ພໍໃຈຂອງຂ້ານ້ອຍມາຕັ້ງດົນ
ຂ້ານ້ອຍໜີເຂົ້າປ່າກໍຍ້ອນເຫດແຫ່ງພັກສາຫານນີ້
ສະຫາຍ ກໍຖ້າພຣະອົງຈະຕັດຂໍເລື້ອງນີ້ກັບຂ້ານ້ອຍ
ຂ້ານ້ອຍຂໍຖວາຍພອນນີ້ແດ່ພຣະອົງ

[໔໗໓] ສະຫາຍ ພຣະອົງເປັນທັງຄູແລະສະຫາຍຂອງຂ້ານ້ອຍ
ຂ້ານ້ອຍໄດ້ເຮັດຕາມພຣະດຳຣັດຂອງພຣະອົງແລ້ວ
ແມ່ນພຣະອົງກໍຂໍໄດ້ໂຜດເຮັດຕາມຄຳຂອງຂ້ານ້ອຍ

ເຮົາແມ່ນທັງ ໒ ຈະໄດ້ໄປປົດປ່ອຍ(ເຫຼົ່າກະສັດ)ນຳກັນ

(ພຣະເຈົ້າສຸຕະໂສມໂພທິສັດຕັດກັບໂຈນໂປຣິສາດນັ້ນວ່າ)

[໔໗໔] ສະຫາຍ ຂ້ານ້ອຍເປັນທັງຄູແລະສະຫາຍຂອງພຣະອົງ
ພຣະອົງໄດ້ເຮັດຕາມຄຳຂອງຂ້ານ້ອຍແລ້ວ
ແມ່ນຂ້ານ້ອຍກໍຈະເຮັດຕາມພຣະດຳຣັດຂອງພຣະອົງ

ເຮົາແມ່ນທັງ ໒ ກໍຈະໄດ້ພາກັນໄປປົດປ່ອຍ(ເຫຼົ່າກະສັດ)ນຳກັນ

(ທ້າວຕັດແນວນັ້ນແລ້ວ ພຣະເຈົ້າສຸຕະໂສມໂພທິສັດສະເດັດເຂົ້າໄປຫາກສັດເຫຼົ່ານັ້ນແລ້ວຈຶ່ງຕັດວ່າ)

[໔໗໕] ພຣະອົງທັງຫຼາຍຢ່າໄດ້ປະທຸດສະຮ້າຍ
ຕໍ່ພຣະຣາຊານີ້ດ້ວຍຄວາມຄຽດແຄ້ນວ່າ

ເຮົາທັງຫຼາຍຖືກພຣະເຈົ້າກຳມາດບາດບຽດບຽນ
ຖືກຮ້ອຍຝາມື ຮ້ອງໄຫ້ ມີໜ້ານອງໄປດ້ວຍນ້ຳຕາ
ຂໍພຣະອົງທັງຫຼາຍຈົ່ງຊົງຮັບສັດປະຕິຍານຂອງຂ້ານ້ອຍ

(ກະສັດເຫຼົ່ານັ້ນຕັດຕອບວ່າ)

[໔໗໖] ພວກຂ້ານ້ອຍຈະບໍ່ປະທຸດສະຮ້າຍ
ຕໍ່ພຣະຣາຊາພຣະອົງນີ້ດ້ວຍຄວາມຄຽດແຄ້ນວ່າ
ເຮົາທັງຫຼາຍຖືກພຣະເຈົ້າກຳມາດບາດບຽດບຽນ
ຖືກຮ້ອຍຝາມື ຮ້ອງໄຫ້ ມີໜ້ານອງໄປດ້ວຍນ້ຳຕາ
ຂ້ານ້ອຍທັງຫຼາຍຂໍຮັບສັດຈະປະຕິຍານຂອງພຣະອົງ

(ພຣະເຈົ້າສຸຕະໂສມໂພທິສັດຕັດກັບກະສັດເຫຼົ່ານັ້ນວ່າ)

[໔໗໗] ບິດາຫຼືມານດາເປັນຜູ້ອະນຸເຄາະ
ປາຖະໜາປະໂຫຍດແກ່ປະຊາສັນໃດ
ຂໍພຣະຣາຊານີ້ຈົ່ງເປັນເໝືອນພຣະບິດາແລະພຣະມານດາ
ຂອງທ່ານທັງຫຼາຍ
ແລະຂໍທ່ານທັງຫຼາຍຈົ່ງເປັນເໝືອນບຸດສັນນັ້ນ

(ກະສັດເຫຼົ່ານັ້ນເມື່ອຮັບປະຕິຍານ ຈຶ່ງຂາບທູນວ່າ)

[໔໗໘] ບິດາຫຼືມານດາເປັນຜູ້ອະນຸເຄາະ
ປາຖະໜາປະໂຫຍດແກ່ປະຊາທັງຫຼາຍສັນໃດ
ແມ່ນພຣະຣາຊານີ້ກໍຈົ່ງເປັນຄືພຣະບິດາ
ແລະພຣະມານດາຂອງຂ້ານ້ອຍທັງຫຼາຍ
ແມ່ນຂ້ານ້ອຍທັງຫຼາຍກໍຈະເປັນຄືໂອຣົດສັນນັ້ນ

(ພຣະເຈົ້າສຸຕະໂສມໂພທິສັດ ຊົງພັນນາເຖິງສົມບັດຂອງພຣະນະຄອນ ຈຶ່ງຕັດປອບໂຈນໂປຣິສາດວ່າ)

[໔໗໙] ພຣະອົງເຄີຍສະເຫວີຍກະຍາຫານຊີ້ນສັດ ໔ ຕີນ
ແລະນີກທີ່ພວກພໍ່ຄົວຈັດປຸງໃຫ້ສຳເລັດຢ່າງດີ
ຄືພຣະອິນຊົງສະເຫວີຍສຸທາໂພດ
ເປັນຫຍັງຈຶ່ງຊົງລະຖິ້ມໄປຍິນດີຢູ່ປ່າແຕ່ລຳພັງນໍ

[໔໗໐] ນາງກະສັດເຫຼົ່ານັ້ນລ້ວນແຕ່ແອວບາງຮ່າງນ້ອຍສະໂອດສະອົງ
ປະດັບຫ້ອມລ້ອມບຳລຸງພຣະອົງໃຫ້ບັນເທີງພຣະຫະໄທ
ຄືນາງເທບອັບປະສອນຫ້ອມລ້ອມພຣະອິນໃນເທວະໂລກສັນນັ້ນ
ເປັນຫຍັງຈຶ່ງຊົງລະຖິ້ມໄປຍິນດີຢູ່ປ່າຕາມລຳພັງນໍ

[໔໗໑] ພຣະແທ່ນບັນທົມມີພະນັກແດງ ສ່ວນຫຼາຍປູລາດດ້ວຍຜ້າໂກເຊົາ
ລ້ວນແຕ່ປູລາດດ້ວຍເຄື່ອງອາພອນທັງປວງອັນງົດງາມ
ພຣະອົງເຄີຍຊົງບັນທົມສຸກສຸກສະບາຍ
ປະທັບເທິງທ່າມກາງພຣະແທ່ນບັນທົມເຊັ່ນນັ້ນ
ເປັນຫຍັງຈຶ່ງຊົງລະຖິ້ມໄປຍິນດີຢູ່ປ່າແຕ່ລຳພັງນໍ

[໔໗໒] ໃນເວລາພົບຄ່ຳ ມີທັງສຽງຕົບມື
ສຽງກອງຕະໂພນ ແລະສຽງດົນຕີ
ຮັບປະສານສຽງລ້ວນແຕ່ສະຕີບໍ່ມີບຸຣຸດເຈືອປົນ
ການຂັບແລະການປະໂຄມກໍລ້ວນມ່ວນ
ເປັນຫຍັງຈຶ່ງຊົງລະຖິ້ມໄປຍິນດີຢູ່ປ່າແຕ່ລຳພັງນໍ

[໔໗໓] ພຣະຣາດຊະອຸທະຍານຊື່ມິຄາຊິນະວັນ
ສົມບູນດ້ວຍບຸບຜະຊາດຫຼາຍໆຊະນິດ
ພຣະນະຄອນຂອງພຣະອົງປະກອບດ້ວຍພຣະຣາດຊະອຸທະຍານແນວນີ້
ເປັນທີ່ໜ້າອອນຊອນໃຈຍິ່ງ ປະກອບດ້ວຍມ້າ ຊ້າງ ແລະລົດ
ເປັນຫຍັງຈຶ່ງຊົງລະຖິ້ມໄປຍິນດີຢູ່ປ່າແຕ່ລຳພັງນໍ

(ໂຈນໄປຣິສາດຂາບທູນພຣະເຈົ້າສຸຕະໂສມໂພທິສັດວ່າ)

[໔໗໔] ຂ້າແດ່ ພຣະຣາຊາ ໃນກາປັກ
ດວງຈັນຍ່ອມອ່ອນແສງລົງທຸກ ໆ ມື້
ການສະມາຄົມຄົບຫາອະສັດຕະບຸຣຸດ
ຍ່ອມປຽບເໝືອນດວງຈັນໃນຂ້າງແຮມສັນໃດ

[໔໗໕] ຂ້ານ້ອຍກໍຄືກັນສັນນັ້ນ
ອາໄສພໍ່ຄົວເຊິ່ງເປັນຄົນຊົ່ວຊາມ
ໄດ້ເຮັດແຕ່ບາບກຳທີ່ຈະເປັນເຫດໃຫ້ໄປທຸກຄະຕິ

[໔໗໖] ໃນສຸກກະປັກ
ດວງຈັນຍ່ອມສ່ອງແສງສະຫວ່າງຂຶ້ນທຸກ ໆ ມື້ສັນໃດ
ຂ້າແດ່ ພຣະຣາຊາ ການສະມາຄົມຄົບຫາສັດຕະບຸຣຸດ
ກໍປຽບເໝືອນດວງຈັນໃນຂ້າງຂຶ້ນສັນນັ້ນ

[໔໗໗] ຂ້າແດ່ ພຣະເຈົ້າສຸຕະໂສມ ຂໍພຣະອົງຊົງຮູ້ວ່າ
ຄືຂ້ານ້ອຍໄດ້ອາໄສພຣະອົງແລ້ວ
ຈັກກະທຳກຸສົນກຳທີ່ເປັນເຫດໃຫ້ໄປສຸກຄະຕິໄດ້

[໔໗໘] ພຣະອົງຜູ້ຈອມຊົນ ປຽບເໝືອນນ້ຳຝົນທີ່ຕົກລົງເທິງບ່ອນໂນນ
ບໍ່ຄວນຍຶດເຍື້ອຂັງຢູ່ໄດ້ດົນສັນໃດ
ແມ່ນການສະມາຄົມຄົບຫາອະສັດຕະບຸຣຸດຂອງຂ້ານ້ອຍກໍສັນນັ້ນ
ບໍ່ຄວນຈະຍຶດເຍື້ອຍາວນານໄດ້ຄືນ້ຳເທິງບ່ອນໂນນ

[໔໗໙] ຂ້າແດ່ ພຣະອົງຜູ້ເປັນຈອມຊົນ ຜູ້ເປັນນໍຣະຊົນ
ຜູ້ແກ່ກ້າ ແລະປະເສີດສຸດ
ນ້ຳຝົນທີ່ຕົກລົງໃນສະຍ່ອມຂັງຢູ່ໄດ້ດົນສັນໃດ
ແມ່ນການສະມາຄົມຄົບຫາສັດຕະບຸຣຸດຂອງຂ້ານ້ອຍກໍສັນນັ້ນ
ຍ່ອມຕັ້ງຢູ່ໄດ້ດົນຄືນ້ຳໃນສະ

[໔໘໐] ການສະມາຄົມສັດຕະບຸຣຸດຍ່ອມບໍ່ຮູ້ຈັກເສື່ອມຄາຍອອກ
ຍ່ອມເປັນຢູ່ຄືແນວນັ້ນ ແມ່ນຕະຫຼອດເວລາທີ່ຊີວິດຍັງຄົງຢູ່
ສ່ວນການສະມາຄົມຄົບຫາອະສັດຕະບຸຣຸດຍ່ອມເສື່ອມໄປຢ່າງວ່ອງໄວ
ຍ້ອນແນວນັ້ນ ທຳຂອງສັດຕະບຸຣຸດຈຶ່ງຫ່າງໄກກັນກັບອະສັດຕະບຸຣຸດ

(ພຣະເຈົ້າສຸຕະໂສມໂພທິສັດເມື່ອຈະສະແດງທຳເພື່ອໃຫ້ເນື້ອຄວາມເຖິງບ່ອນສຸດ ຈຶ່ງຕັດວ່າ)

[໔໘໑] ພຣະຣາຊາຜູ້ຊະນະຄົນທີ່ບໍ່ຄວນຊະນະ[৭] ບໍ່ຊື່ວ່າເປັນພຣະຣາຊາ
ເພື່ອນຜູ້ຊະນະເພື່ອນ ກໍບໍ່ຊື່ວ່າເປັນເພື່ອນ
ພັນລະຍາຜູ້ບໍ່ເກງກົວສາມີ ກໍບໍ່ຊື່ວ່າເປັນພັນລະຍາ
ບຸດທັງຫຼາຍຜູ້ບໍ່ລ້ຽງດູມານດາແລະບິດາຜູ້ແກ່ຊະຣາ ກໍບໍ່ຊື່ວ່າເປັນບຸດ

[໔໘໒] ທີ່ປະຊຸມທີ່ບໍ່ມີສັດຕະບຸຣຸດ[৮] ກໍບໍ່ຊື່ວ່າສະພາ
ເຫຼົ່າຊົນຜູ້ບໍ່ເວົ້າຄຳທີ່ເປັນທຳ ບໍ່ຊື່ວ່າເປັນສັດຕະບຸຣຸດ

ຊົນທັງຫຼາຍຜູ້ລະຣາຄະ ໂທສະ ໂມຫະ
ກ່າວຄໍາທີ່ເປັນທໍາທໍ່ນັ້ນ ຈຶ່ງຊື່ວ່າ ເປັນສັດຕະບຸຣຸດ

[໔໗໓] ບັນດິດຜູ້ຢູ່ປະປົນກັບຄົນພານ
ເມື່ອບໍ່ເວົ້າ ໃຜ ໆ ກໍບໍ່ຮູ້ວ່າເປັນບັນດິດ
ແຕ່ບັນດິດເມື່ອເວົ້າ ເມື່ອສະແດງອະມະຕະບົດ ຈຶ່ງຮູ້ວ່າເປັນບັນດິດ

[໔໗໔] ຍ້ອນເຫດນັ້ນ ບຸຣຸດຜູ້ເປັນບັນດິດເພິ່ງກ່າວທໍາ
ເພິ່ງອະທິບາຍທໍາໃຫ້ແຈ່ມແຈ້ງ
ເພິ່ງເຊີດຊູທຸງຂອງລືສີທັງຫຼາຍ
ຍ້ອນລືສີທັງຫຼາຍມີທໍາທີ່ເປັນສຸພາສິດເປັນທຸງໄຊ
ທໍານັ້ນແລເປັນທຸງໄຊຂອງລືສີທັງຫຼາຍ

**ມະຫາສຸຕະໂສມຊາດົກທີ ໕ ຈົບ**

# ລວມຊາດົກທີ່ມີໃນອະສີຕິນິບາດນີ້ ຄື

໑. ຈູລະຫັງສະຊາດົກ

໒. ມະຫາຫັງສະຊາດົກ

໓. ສຸທາໂພຊະນະຊາດົກ

໔. ກຸນາລະຊາດົກ

໕. ມະຫາສຸຕະໂສມະຊາດົກ

**ອະສີຕິນິບາດ ຈົບ**

# ໒໒. ມະຫານິບາດ

## ໑. ເຕມີຍະຊາດົກ[1] (໕໓໘)

## ວ່າດ້ວຍພຣະເຕມີໂພທິສັດ

(ເທບທິດາຜູ້ເຄີຍເປັນມານດາພຣະໂພທິສັດໃນອັດຕະພາບໜຶ່ງ ປອບພຣະໂພທິສັດໃຫ
ສະບາຍພຣະທະໄທແລ້ວ ຈຶ່ງກ່າວວ່າ)

[໑] ທ່ານຈົ່ງຢ່າເປີດເຜີຍຕົນວ່າເປັນບັນດິດ
ຈົ່ງໃຫ້ຄົນທັງປວງຮູ້ວ່າເປັນຄົນໂງ່
ຂໍໃຫ້ຄົນທັງໝົດຈົ່ງດູໝິ່ນທ່ານເທີ້ນ
ຄວາມປະສົງຂອງທ່ານ
ຈັກສຳເລັດໄດ້ດ້ວຍອາການແບວນີ້

(ພຣະເຕມີໂພທິສັດກັບໄດ້ຄວາມສະບາຍພຣະທະໄທຕາມຄຳຂອງເທບທິດານັ້ນ ຈຶ່ງຕັດວ່າ)

[໒] ແມ່ເທບທິດາ ຂ້າພະເຈົ້າຈະທຳຕາມຄຳຂອງທ່ານ
ທີ່ໄດ້ກ່າວກັບຂ້າພະເຈົ້າ
ແມ່ເທບທິດາ ທ່ານເປັນຜູ້ປາຖະໜາປະໂຫຍດ
ມຸ້ງປະໂຫຍດເກື້ອກູນແກ່ຂ້າພະເຈົ້າ

(ພຣະໂພທິສັດຕັດຖາມນາຍສາຣະຖີວ່າ)

[໓] ນາຍສາຣະຖີ ທ່ານຈະຮີບຂຸດຂຸມໄປເຮັດຫຍັງນໍ
ສະຫາຍເອີຍ ເຮົາຖາມທ່ານແລ້ວ ທ່ານຈົ່ງບອກເຮົາ
ທ່ານຈັກກະທຳປະໂຫຍດອັນໃດກັບຂຸມນີ້ນໍ

(ສຸນັນທະສາຣະຖີໄດ້ຟັງຄຳນັ້ນຂຸດຂຸມບໍ່ໄດ້ເງີຍໜ້າເບິ່ງຈຶ່ງຂາບທູນວ່າ)

[໔] ພຣະໂອຣົດຂອງພຣະຣາຊາເປັນໃບ້
ແລະເປັນງ່ອຍເປ້ຍຂາດຄວາມສຳນຶກ
ພຣະຣາຊາຕັດສັ່ງຂ້າພະເຈົ້າວ່າ ຄວນຝັງລູກເຮົາໄວ້ໃນປ່າຊ້າ

(ພຣະເຕມີໂພທິສັດ ຕັດກັບສຸນັນທະສາຣະຖີວ່າ)

[໔] ນາຍສາຣະຖີ ເຮົາບໍ່ໄດ້ເປັນຄົນໜວກ
ຄົນໃບ້ ຄົນເປ້ຍ ແລະບໍ່ໄດ້ເປັນຄົນພິການ
ຖ້າທ່ານເພິ່ງຝັງເຮົາໄວ້ໃນປ່າ ຊື່ວ່າເຮັດສິ່ງທີ່ບໍ່ເປັນທຳ

[໖] ທ່ານຈົ່ງເບິ່ງຂາ ແຂນ ແລະຟັງພາສິດຂອງເຮົາ
ຖ້າທ່ານເພິ່ງຝັງເຮົາໄວ້ໃນປ່າ ຊື່ວ່າເຮັດສິ່ງທີ່ບໍ່ເປັນທຳ

(ສຸບັນທະສາຣະຖີບໍ່ຮູ້ ຈຶ່ງຂາບທູນວ່າ)

[໗] ທ່ານເປັນເທວະດາ ຄົນທັບ
ຫຼືເປັນທ້າວສັກກະປຸຣິນທະທະ
ທ່ານເປັນໃຜຫຼືເປັນບຸດຂອງໃຜ
ພວກເຮົາຈັກຮູ້ຈັກທ່ານໄດ້ແນວໃດ

(ພຣະເຕມີໂພທິສັດເມື່ອສະແດງຕົນໃຫ້ຜາກົດ ສະແດງທຳແກ່ສຸບັນທະສາຣະຖີນັ້ນ ຈຶ່ງຕັດວ່າ)

[໘] ເຮົາບໍ່ແມ່ນເທວະດາ ບໍ່ແມ່ນຄົນທັບ
ທັງບໍ່ແມ່ນທ້າວສັກກະປຸຣິນທະທະ
ເຮົາເປັນຜູ້ທີ່ທ່ານຈະຝັງໃນຂຸມ
ເປັນໂອຣົດຂອງພຣະເຈົ້າກາສີ

[໙] ເຮົາເປັນໂອຣົດຂອງພຣະຣາຊາ
ອີງທີ່ທ່ານເຂົ້າໄປເພິ່ງປາຣະມີລ້ຽງຊີບຢູ່ສະເໝີ
ນາຍສາຣະຖີ ຖ້າທ່ານເພິ່ງຝັງເຮົາໄວ້ໃນປ່າ
ຊື່ວ່າເຮັດສິ່ງທີ່ບໍ່ເປັນທຳ

[໑໐] ບຸກຄົນເພິ່ງນັ່ງຫຼືນອນທີ່ຮົ່ມແຫ່ງຕົ້ນໄມ້ໃດ
ບໍ່ເພິ່ງຫັກຮານກິ່ງຂອງຕົ້ນໄມ້ນັ້ນ
ເພາະຄົນຜູ້ປະທຸດສະຮ້າຍມິດ ຊື່ວ່າເປັນຄົນຊົ່ວຊາມ

[໑໑] ພຣະຣາຊາກໍເໝືອນຕົ້ນໄມ້ ເຮົາກໍເປັນເໝືອນກິ່ງໄມ້
ຂ້າແດ່ມະຫາຣາດ ນາຍສາຣະຖີເປັນເໝືອນຄົນຜູ້ອາໄສຮົ່ມໄມ້
ນາຍສາຣະຖີ ຖ້າທ່ານຝັງເຮົາໄວ້ໃນປ່າ
ຊື່ວ່າເຮັດສິ່ງທີ່ບໍ່ເປັນທຳ

(ພຣະເຕມີໂພທິສັດຜາຣົບຄາຖາບູຊາມິດ ໑໐ ຄາຖາວ່າ)

[໑໔] ຜູ້ໃດບໍ່ປະທຸດສະຮ້າຍມິດ
ຜູ້ນັ້ນອອກຈາກເຮືອນຂອງຕົນແລ້ວ
ຍ່ອມມີອາຫານສົມບູນ
ຄົນເປັນຈຳນວນຫຼາຍຍ່ອມເຂົ້າໄປເພິ່ງພາຜູ້ນັ້ນລ້ຽງຊີບ

[໑໕] ຄົນຜູ້ບໍ່ປະທຸດສະຮ້າຍມິດ
ຈະໄປສູ່ຊົນນະບົດ ນິຄົມ ແລະຣາດຊະທານີໃດ
ກໍເປັນຜູ້ອັນຊົນທັງຫຼາຍໃນຊົນນະບົດ ນິຄົມ
ແລະຣາດຊະທານີນັ້ນ ໆ ບູຊາໄປທຸກແຫ່ງຫົນ

[໑໔] ຄົນຜູ້ບໍ່ປະທຸດສະຮ້າຍມິດ ບໍ່ມີພວກໂຈນຂົ່ມເຫງ
ພຣະມະຫາກະສັດກໍບໍ່ຊົງດູໝິ່ນຍ່ອມ (ຊະນະ) ສັດຕູທັງປວງໄດ້

[໑໘] ຄົນຜູ້ບໍ່ປະທຸດສະຮ້າຍມິດ
ບໍ່ໂກດເຄືອງຜູ້ໃດ ມາສູ່ເຮືອນຂອງຕົນ
ຍ່ອມເປັນຜູ້ທີ່ມະຫາຊົນຍິນດີຕ້ອນຮັບໃນທີ່ປະຊຸມ
ແລະເປັນຄົນຊັ້ນສູງຂອງໝູ່ຍາດ

[໑໖] ຄົນຜູ້ບໍ່ປະທຸດສະຮ້າຍມິດສັກກາຣະຄົນອື່ນແລ້ວ
ຍ່ອມເປັນຜູ້ທີ່ຄົນອື່ນສັກກາຣະຕອບ
ເຄົາລົບຄົນອື່ນແລ້ວກໍມີຄົນອື່ນເຄົາລົບຕອບ
ເປັນຜູ້ອັນເຂົາເພິ່ນສັນເສີນກຽດຕິຄຸນ

[໑໗] ຄົນຜູ້ບໍ່ປະທຸດສະຮ້າຍມິດ
ບູຊາຜູ້ອື່ນ ຍ່ອມໄດ້ຮັບການບູຊາຕອບ
ໄຫວ້ຜູ້ອື່ນ ຍ່ອມໄດ້ຮັບການໄຫວ້ຕອບ
ທັງໄດ້ຮັບອິດສະຣິຍະຍົດແລະກຽດ

[໑໙] ຄົນຜູ້ບໍ່ປະທຸດສະຮ້າຍມິດ ຍ່ອມຮຸ່ງເຮືອງເໝືອນໄຟ
ຍ່ອມຮຸ່ງເຮືອງເໝືອນເທວະດາ ເປັນຜູ້ອັນສິຣິບໍ່ທອດຖິ້ມ

[໑໗] ຄົນຜູ້ບໍ່ປະທຸດສະຮ້າຍມິດ ຍ່ອມມີໂຄທັງຫຼາຍຕົກລູກຫຼາຍ
ພືດທີ່ວານລົງໃນນາຍ່ອມງອກງາມ

ຍ່ອມໄດ້ບໍຣິໂພກຜົນຂອງພືດທັງຫຼາຍທີ່ວານໄວ້ແລ້ວ

[໔໐] ຄົນຜູ້ບໍ່ປະທຸດສະຮ້າຍມິດ ພາດຕົກຈາກເຫວ ພູເຂົາ
ພາດຕົກຕົ້ນໄມ້ຫຼືເຄື່ອນຈາກພົບ ຍ່ອມໄດ້ບ່ອນເພິ່ງ

[໔໑] ຄົນຜູ້ບໍ່ປະທຸດສະຮ້າຍມິດ ສັດຕູທັງຫຼາຍຈະທຳລາຍບໍ່ໄດ້
ເໝືອນລົມທຳລາຍຕົ້ນໄຂທີ່ມີຮາກແລະລຳຕົ້ນງອກງາມແລ້ວບໍ່ໄດ້

(ສຸນັນທະສາຣະຖີປະຄອງອັນຊະລີ ທູນວິງວອນວ່າ)

[໔໔] ຂ້າແດ່ ພຣະຣາດຊະໂອຣົດ ເຊີນສະເດັດເທີ້ນ
ຂ້າພຣະອົງຈັກນຳພຣະອົງສະເດັດກັບ
ໄປສູ່ພຣະຣາດຊະມົນທຽນຂອງພຣະອົງ
ເຊີນພຣະອົງສະເຫວີຍຣາດຊະສົມບັດເທີ້ນ
ພຣະອົງຈັກຊົງເຮັດຫຍັງໃນປ່ານີ້ໄດ້ນໍ ຂ້ານ້ອຍ?

(ລຳດັບນັ້ນ ພຣະເຕມີໂພທິສັດຈຶ່ງຕັດກັບນາຍສຸນັນທະສາຣະຖີນັ້ນວ່າ)

[໔໓] ນາຍສາຣະຖີ ພໍແລ້ວສຳລັບເຮົາດ້ວຍຣາດຊະສົມບັດນັ້ນ
ພຣະວົງສານຸວົງທັງຫຼາຍຫຼືຊັບທັງຫຼາຍ
ທີ່ເຮົາຈະເພິ່ງໄດ້ດ້ວຍການປະພຶດອັນບໍ່ຊອບທຳ

(ສຸນັນທະສາຣະຖີຂາບທູນວ່າ)

[໔໔] ຂ້າແດ່ ພຣະຣາດຊະໂອຣົດ ພຣະອົງສະເດັດໄປຈາກບ່ອນນີ້ແລ້ວ
ເຮັດໃຫ້ຂ້າພຣະອົງໄດ້ຮັບຣາງວັນ ເມື່ອພຣະອົງສະເດັດກັບໄປ
ພຣະບິດາແລະພຣະມານດາເພິ່ງພຣະລາດຊະທານຣາງວັນໃຫ້ແກ່ຂ້າພຣະອົງ

[໔໕] ຂ້າແດ່ ພຣະຣາດຊະໂອຣົດ ເມື່ອພຣະອົງສະເດັດກັບໄປແລ້ວ
ພຣະສະໜົມກຳນັນນາງໃນ ພຣະກຸມານ ແພດ ແລະພາມເຫຼົ່ານັ້ນ
ຈະເພິ່ງດີໃຈ ໃຫ້ຣາງວັນແກ່ຂ້າພຣະອົງ

[໔໖] ຂ້າແດ່ ພຣະຣາດຊະໂອຣົດ ເມື່ອພຣະອົງສະເດັດກັບໄປແລ້ວ
ກອງພົນຊ້າງ ກອງພົນມ້າ ກອງພົນລົດ ແລະກອງພົນຣາບ
ແມ່ນເຫຼົ່ານັ້ນຈະພາກັນດີໃຈ ໃຫ້ຣາງວັນແກ່ຂ້າພຣະອົງ

[໔໗] ຂ້າແດ່ ພຣະຣາດຊະໂອຣົດ ເມື່ອພຣະອົງສະເດັດກັບໄປແລ້ວ
ຊາວຊົນນະບົດແລະຊາວນິຄົມຜູ້ມີທັນຍາຫານຫຼາຍ
ຈະມາປະຊຸມກັນ ໃຫ້ເຄື່ອງບັນນາການແກ່ຂ້າພຣະອົງ

(ພຣະເຕມີໂພທິສັດຕັດວ່າ)

[໔໘] ເຮົາເປັນຜູ້ອັນພຣະບິດາແລະພຣະມານດາ
ຊາວແຄວ້ນ ຊາວນິຄົມ ແລະກຸມານທັງປວງສະລະແລ້ວ
ເຮົາບໍ່ມີເຮືອນຂອງຕົນ

[໔໙] ເຮົາເປັນຜູ້ອັນພຣະມານດາຊົງອະນຸຍາດແລ້ວ
ແລະພຣະບິດາກໍຊົງສະລະຂາດແລ້ວ
ອອກມາບວດຢູ່ໃນປ່າແຕ່ລຳພັງ
ເຮົາບໍ່ເພິ່ງປາຖະໜາການທັງຫຼາຍອີກ

(ພຣະເຕມີໂພທິສັດເມື່ອຈະເປ່ງອຸທານດ້ວຍກຳລັງປີຕິ ຈຶ່ງຕັດວ່າ)

[໕໐] ຄວາມຫວັງຜົນຂອງເຫຼົ່າຊົນຜູ້ບໍ່ຮີບຮ້ອນຍ່ອມສຳເລັດໄດ້
ເຮົາມີພົມມະຈັນອອກຜົນແລ້ວ
ນາຍສາຣະຖີ ທ່ານຈົ່ງຮູ້ໄວ້ແນວນີ້ເທີ້ນ

[໕໑] ອັນໜຶ່ງ ປະໂຫຍດໂດຍຊອບຂອງເຫຼົ່າຊົນ
ຜູ້ບໍ່ຮີບຮ້ອນ ຍ່ອມອອກຜົນໂດຍແທ້
ເຮົາມີພົມມະຈັນອອກຜົນແລ້ວ
ອອກບວດແລ້ວຍ່ອມບໍ່ມີໄພມາຈາກໃສໄດ້

(ນາຍສຸນັນທະສາຣະຖີຂາບທູນວ່າ)

[໕໒] ພຣະອົງເປັນຜູ້ມີພຣະວາຈາໄພເລາະ
ມີພຣະດຳຣັດສະຫຼະສະຫຼວຍແນວນີ້
ຍ້ອນເຫດໃດ ພຣະອົງຈຶ່ງບໍ່ຕັດໃນສຳນັກ
ຂອງພຣະບິດາແລະພຣະມານດາໃນເວລານັ້ນ

(ລຳດັບນັ້ນ ພຣະເຕມີໂພທິສັດ ຈຶ່ງຕັດວ່າ)

[໕໓] ເຮົາເປັນຄົນງ່ອຍເປ້ຍ ຍ້ອນບໍ່ມີຂໍ້ຕໍ່ກໍຫາບໍ່ໄດ້

ເປັນຄົນໜວກ ຍ້ອນບໍ່ມີໂສຕະປະສາດກໍຫາບໍ່ໄດ້
ເປັນຄົນໃບ້ ຍ້ອນບໍ່ມີຊິວຫາປະສາດກໍຫາບໍ່ໄດ້
ທ່ານຢ່າເຂົ້າໃຈວ່າ ເຮົາເປັນໃບ້

[໓໔] ເຮົາຣະນຶກຊາດກ່ອນທີ່ເຮົາສະເຫວີຍຣາດຊະສົມບັດໄດ້
ເຮົາໄດ້ສະເຫວີຍຣາດຊະສົມບັດໃນເທື່ອນັ້ນ ໆ ແລ້ວ
ຕົກນະຣົກອັນແສນສາຫັດຍ້ອນຜົນແຫ່ງກຳນັ້ນ ໆ

[໓໕] ເຮົາໄດ້ສະເຫວີຍຣາດຊະສົມບັດໃນການນັ້ນ ໒໐ ປີ
ແລ້ວຕ້ອງໄປມົກໄໝ້ຢູ່ໃນນະຣົກເຖິງ ໘໐,໐໐໐ ປີ

[໓໖] ເຮົາຢ້ານທີ່ຈະຕ້ອງໄດ້ສະເຫວີຍຣາດຊະສົມບັດນັ້ນ
ຈຶ່ງຕັ້ງຈິດອະທິຖານວ່າ
ຂໍຊົນທັງຫຼາຍຢ່າໄດ້ອະພິເສກເຮົາໄວ້ໃນຣາດຊະສົມບັດເລີຍ
ຍ້ອນເຫດນັ້ນເຮົາຈຶ່ງບໍ່ເວົ້າໃນຣາດຊະສຳນັກ
ຂອງພຣະບິດາແລະພຣະມານດາໃນການນັ້ນ

[໓໗] ພຣະບິດາຊົງອຸ້ມເຮົາໃຫ້ນັ່ງເທິງພຣະເພົາແລ້ວ
ຕັດພິພາກສາວ່າ ທ່ານທັງຫຼາຍຈົ່ງຂ້າໂຈນຄົນໜຶ່ງ
ຈົ່ງຈອງຈຳໂຈນອີກຄົນໜຶ່ງໄວ້ໃນເຮືອນຈຳ
ຈົ່ງເອົາຫອກແທງໂຈນນີ້ແລ້ວຣາດດ້ວຍນ້ຳກົດ
ຈົ່ງສຽບໂຈນຄົນນີ້ເທິງຫຼາວ
ພຣະບິດາຕັດພິພາກສາອັດຖະຄະດີ
ແກ່ມະຫາຊົນນັ້ນດ້ວຍປະການແນວນີ້ເປັນກຳດຳ

[໓໘] ເຮົາໄດ້ຟັງພຣະວາຈາອັນຫຍາບຄາຍທີ່ພຣະບິດາຕັດນັ້ນ
ຈຶ່ງຢ້ານຕໍ່ການສະເຫວີຍຣາດຊະສົມບັດ
ເຮົາບໍ່ໄດ້ເປັນຄົນໃບ້ ກໍເຮັດເໝືອນເປັນຄົນໃບ້
ບໍ່ໄດ້ເປັນຄົນງ່ອຍເປ້ຍ ກໍເຮັດເປັນເໝືອນຄົນງ່ອຍເປ້ຍ
ເຮົາກິ້ງເກືອກນອນຈົມຢູ່ໃນອຸດຈາຣະແລະປັດສາວະຂອງຕົນ

[໓໙] ຊີວິດເປັນຂອງຍາກ ເປັນຂອງເລັກໜ້ອຍ
ຊ້ຳປະກອບໄປດ້ວຍທຸກ
ໃຜນໍ ອາໄສຊີວິດນີ້ແລ້ວຈະບໍ່ກໍ່ເວນກັບຄົນອື່ນ

[໔໐] ໃຜນໍ ອາໄສຊີວິດນີ້ແລ້ວຈະບໍ່ເຮັດບາບ
ຍ້ອນບໍ່ໄດ້ປັນຍາແລະຍ້ອນບໍ່ໄດ້ເຫັນທຳ

[໔໑] ຄວາມຫວັງຜົນຂອງເຫຼົ່າຄົນຜູ້ບໍ່ຮີບຮ້ອນຍ່ອມສຳເລັດໄດ້
ເຮົາມີພົມມະຈັນອອກຜົນແລ້ວ
ນາຍສາຣະຖີ ທ່ານຈົ່ງຮູ້ໄວ້ແນວນີ້ເທີ້ນ

[໔໒] ອັນໜຶ່ງ ປະໂຫຍດໂດຍຊອບຂອງເຫຼົ່າຊົນ
ຜູ້ບໍ່ຮີບຮ້ອນ ຍ່ອມອອກຜົນໂດຍແທ້
ເຮົາມີພົມມະຈັນອອກຜົນແລ້ວ
ອອກບວດແລ້ວຍ່ອມບໍ່ມີໄພມາຈາກໃສໄດ້

(ນາຍສຸນັນທະສາຣະຖີໄດ້ຟັງດັ່ງນັ້ນ ຈຶ່ງຂາບທູນວ່າ)

[໔໓] ຂ້າແດ່ ພຣະຣາດຊະໂອຣົດ
ແມ່ນຂ້າພຣະອົງກໍຈັກບວດໃນສຳນັກຂອງພຣະອົງ
ຂໍພຣະອົງໂຜດຕັດອະນຸຍາດໃຫ້ຂ້າພຣະອົງບວດດ້ວຍເທີ້ນ
ຂ້າພຣະອົງພໍໃຈຈະບວດ ໂດຍຂ້ານ້ອຍ

(ພຣະເຕມີໂພທິສັດຕັດວ່າ)

[໔໔] ນາຍສາຣະຖີ ເຮົາມອບລົດໃຫ້ທ່ານແລ້ວ ທ່ານຈົ່ງເປັນຜູ້ບໍ່ມີໜີ້
ມາເທີ້ນ ເພາະຄົນທີ່ບໍ່ມີໜີ້ ຈຶ່ງຈະບວດໄດ້
ພວກລືສີທັງຫຼາຍກ່າວສັນເສີນການບວດເຊັ່ນນັ້ນ

(ສຸນັນທະສາຣະຖີໄດ້ຟັງດັ່ງນັ້ນ ຈຶ່ງຂາບທູນວ່າ)

[໔໕] ຂໍພຣະອົງຈົ່ງຊົງພຣະຈະເລີນ
ຂ້າພຣະອົງໄດ້ເຮັດຕາມພຣະດຳຣັດທີ່ພຣະອົງໄດ້ຕັດໄວ້ແລ້ວ
ຂ້າພຣະອົງທູນວິງວອນແລ້ວ
ຂໍພຣະອົງຈົ່ງຊົງໂພດກະທຳຕາມຄຳຂອງຂ້າພຣະອົງດ້ວຍເທີ້ນ

[໔໖] ຂໍພຣະອົງຈົ່ງປະທັບຢູ່ໃນບ່ອນນີ້
ຈົນກວ່າຂ້າພຣະອົງຈະທູນເຊີນສະເດັດພຣະຣາຊາມາ
ເມື່ອພຣະບິດາຂອງພຣະອົງທອດພຣະເນດເຫັນແລ້ວ
ຈະເພິ່ງມີພຣະທະໄຫເອີບອີ່ມຍິນດີຢ່າງແນ່ນອນ

(ພຣະເຕມີໂພທິສັດຕັດວ່າ)

[໔໖] ນາຍສາຣະຖີ ເຮົາຈະເຮັດຕາມຄຳຂອງທ່ານທີ່ກ່າວກັບເຮົາ
ແມ່ນເຮົາກໍປາຖະໜາຈະເຝົ້າພຣະບິດາຂອງເຮົາເຊິ່ງສະເດັດມາໃນບ່ອນນີ້

[໔໗] ທ່ານຈົ່ງກັບໄປເທີ້ນ ສະຫາຍ
ການທີ່ທ່ານໄດ້ທູນພຣະວົງສານຸວົງທັງຫຼາຍດ້ວຍເປັນການດີ
ທ່ານຮັບຄຳສັ່ງເຮົາແລ້ວ
ເພື່ອງຂາບທູນການຖວາຍບັງຄົມພຣະມານດາແລະພຣະບິດາຂອງເຮົາ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໔໘] ນາຍສາຣະຖີຈັບພຣະບາດທັງ ໔ ຂອງພຣະໂພທິສັດນັ້ນ
ແລະທຳປະທັກຂິນຮອບພຣະອົງແລ້ວ
ກໍຂຶ້ນລົດຫັນໜ້າເຂົ້າໄປສູ່ປະຕູພຣະຣາຊະວັງ

[໕໐] ພຣະມານດາທອດພຣະເນດເຫັນລົດວ່າງເປົ່າ
ກັບມາແຕ່ນາຍສາຣະຖີຄົນດຽວ
ຈຶ່ງຊົງກັນແສງ ມີພຣະເນດນອງດ້ວຍພຣະອັດສຸຊົນ
ທອດພຣະເນດເບິ່ງນາຍສາຣະຖີນັ້ນຢູ່

[໕໑] ພຣະນາງຊົງເຂົ້າພຣະຫະໄທວ່າ
ນາຍສາຣະຖີຝັງລູກຂອງເຮົາແລ້ວຈຶ່ງກັບມາ
ລູກຂອງເຮົາຖືກນາຍສາຣະຖີຝັງໄວ້ໃນແຜ່ນດິນ
ຖົມດ້ວຍດິນແລ້ວແນ່ນອນ

[໕໔] ພວກສັດຕູຍ່ອມພາກັນຍິນດີ
ພວກຈອງເວນຍ່ອມສຳຣານ
ຍ້ອນເຫັນນາຍສາຣະຖີຝັງລູກຂອງເຮົາກັບມາແລ້ວ

[໕໓] ພຣະມານດາທອດພຣະເນດເຫັນລົດອັນວ່າງເປົ່າ
ກັບມາແຕ່ນາຍສາຣະຖີຄົນດຽວ
ມີພຣະເນດນອງດ້ວຍພຣະອັດສຸຊົນ
ຊົງກັນແສງຢູ່ ຕັດຖາມນາຍສາຣະຖີນັ້ນວ່າ

[໕໔] ລູກຂອງເຮົາເປັນຄົນໃບ້ແທ້ບໍ ເປັນຄົນງ່ອຍເປ້ຍແທ້ບໍ
ລູກຂອງເຮົາກ່ອນທີ່ທ່ານຈະຝັງດິນໄດ້ເວົ້າອັນໃດແດ່ບໍ?
ນາຍສາຣະຖີ ຂໍທ່ານຈົ່ງບອກເນື້ອຄວາມນັ້ນແກ່ເຮົາດ້ວຍເທີ້ນ

[໕໕] ລູກຂອງເຮົາເປັນຄົນໃບ້ ເປັນຄົນງ່ອຍເປ້ຍ
ເມື່ອທ່ານຈະຝັງລົງດິນ ເຫັນງຕິງມືແລະຕີນແນວໃດ
ເຮົາຖາມແລ້ວ ຂໍທ່ານຈົ່ງບອກເນື້ອຄວາມນັ້ນແກ່ເຮົາເທີ້ນ

(ລຳດັບນັ້ນ ນາຍສຸນັນທະສາຣະຖີຂາບທູນວ່າ)

[໕໖] ຂ້າແດ່ ພຣະແມ່ເຈົ້າ
ຂໍໄດ້ໂຜດພຣະຣາດຊະທານອະໄພໂທດແກ່ຂ້າພຣະອົງດ້ວຍເທີ້ນ
ຂ້າພຣະອົງຂໍຂາບທູນ
ຕາມທີ່ໄດ້ຍິນແລະໄດ້ເຫັນມາໃນທີ່ພຣະຣາດຊະໂອຣົດຢູ່

(ພຣະນາງຈັນທາເທວີຕັດກັບນາຍສຸນັນທະສາຣະຖີນັ້ນວ່າ)

[໕໗] ນາຍສາຣະຖີຜູ້ສະຫາຍ ເຮົາໃຫ້ອະໄພໂທດແກ່ທ່ານ
ຢ່າໄດ້ຢ້ານເລີຍ ຈົ່ງເວົ້າມາເທີ້ນ
ຕາມທີ່ທ່ານໄດ້ຍິນຫຼືໄດ້ເຫັນມາໃນທີ່ຢູ່ຂອງພຣະຣາດຊະໂອຣົດນັ້ນເທີ້ນ

(ນາຍສຸນັນທະສາຣະຖີຂາບທູນວ່າ)

[໕໘] ພຣະຣາດຊະໂອຣົດນັ້ນບໍ່ໄດ້ເປັນຄົນໃບ້ ບໍ່ໄດ້ເປັນຄົນງ່ອຍເປ້ຍ
ຍັງມີພຣະດຳຣັດສະຫຼະສະຫຼວຍໄພເລາະ ໄດ້ຊາບວ່າ
ພຣະອົງຊົງຢ້ານຕໍ່ການຄອງຣາດຊະສົມບັດ
ຈຶ່ງໄດ້ທຳການຕີລວງດ້ວຍອາການຫຼາຍຢ່າງ

[໕໙] ຍ້ອນວ່າພຣະອົງຊົງຣະນຶກເຖິງຊາດກ່ອນໄດ້
ທີ່ພຣະອົງເຄີຍໄດ້ສະເຫວີຍຣາດຊະສົມບັດ
ເມື່ອໄດ້ສະເຫວີຍຣາດຊະສົມບັດໃນການນັ້ນ ໆ ແລ້ວ
ຕ້ອງໄປຕົກນະຣົກຢ່າງແສນສາຫັດ

[໖໐] ພຣະອົງໄດ້ສະເຫວີຍຣາດຊະສົມບັດໃນການນັ້ນ ໒໐ ປີ
ແລ້ວຕ້ອງໄປມົກໄໝ້ຢູ່ໃນນະຣົກເຖິງ ໗໐,໐໐໐ ປີ

[໖໑] ພຣະອົງຊົງຢ້ານຕໍ່ການສະເຫວີຍຣາດຊະສົມບັດ
ຈຶ່ງຊົງຕັ້ງຈິດອະທິຖານວ່າ
ຂໍຊົນທັງຫຼາຍຢ່າໄດ້ອະພິເສກເຮົາໃນຣາດຊະສົມບັດເລີຍ
ຍ້ອນເຫດນັ້ນພຣະອົງຈຶ່ງບໍ່ຕັດເຈຣະຈາ
ໃນສຳນັກຂອງພຣະບິດາແລະພຣະມານດາໃນການນັ້ນ ໆ

[໖໒] ພຣະຣາດຊະໂອຣົດຊົງເຖິງພ້ອມດ້ວຍອົງຄາພະຍົບ
ມີພຣະຮູບສົມບັດງົດງາມສົມສ່ວນ
ມີພຣະວາຈາສະຫຼະສະຫຼວຍ ມີພຣະປັນຍາ
ຊົງດຳຣົງຢູ່ໃນທາງສະຫວັນ

[໖໓] ຖ້າພຣະແມ່ເຈົ້າຊົງພະປະສົງຈະທອດພຣະເນດ
ພຣະຣາດຊະໂອຣົດຂອງພຣະອົງ
ຂ້າພຣະອົງຂໍທູນເຊີນສະເດັດພຣະແມ່ເຈົ້າໄປໃຫ້ເຖິງສະຖານທີ່
ເຊິ່ງເປັນທີ່ປະທັບຂອງພຣະເຕມີ

(ຝ່າຍພຣະເຈົ້າກາສີຊົງສະດັບຄຳຂອງນາຍສຸນັນທະສາຣະຖີ ຈຶ່ງດຳຣັດສັ່ງໃຫ້ຮຽກມະຫາເສນະ
ຄຸດມາ ຮີບໃຫ້ກະກຽມສະເດັດ ຕັດວ່າ)

[໖໔] ເຈົ້າໜ້າທີ່ທັງຫຼາຍຈົ່ງທຽບລົດ ທຽບມ້າ
ຜູກເຄື່ອງປະດັບຊ້າງ ຈົ່ງປະໂຄມຫອຍສັງແລະບັນເດາະ
ຕີກອງໜ້າດຽວທັນທີ

[໖໕] ຈົ່ງຕີກອງສອງໜ້າແລະຣຳມະນາອັນໄພເລາະ
ຂໍຊາວນິຄົມຈົ່ງຕາມເຮົາມາ
ເຮົາຈະໄປໃຫ້ໂອວາດແກ່ພຣະໂອຣົດ

[໖໖] ຂໍ ພຣະສະໜົມກຳນັນນາງໃນ ພຣະກຸມານ ແພດ
ແລະພານທັງຫຼາຍຈົ່ງຮີບທຽບຍານ
ເຮົາຈະໄປໃຫ້ໂອວາດແກ່ພຣະໂອຣົດ

[໖໗] ຂໍພວກກອງພົນຊ້າງ ກອງພົນມ້າ ກອງພົນລົດ
ແລະກອງພົນຣາບຈົ່ງຮີບທຽບຍານ
ເຮົາຈະໄປໃຫ້ໂອວາດແກ່ພຣະໂອຣົດ

[໖໗] ຊາວຊົນນະບົດແລະຊາວນິຄົມມາປະຊຸມພ້ອມກັນແລ້ວ
ຈົ່ງຮີບຫຼຽບຍານໃຫ້ໄວ
ເຮົາຈະໄປໃຫ້ໂອວາດແກ່ພຣະໂອຣົດ

(ພຣະບໍຣົມສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໖໙] ພວກນາຍສາຣະຖີຈູງມ້າສິນທົບທີ່ແລ່ນໄວ
ຫຼຽບເຂົ້າກັບຣາດຊະລົດຂັບມາຍັງປະຕູພຣະຣາດຊະວັງ
ແລະຂາບທູນວ່າ ມ້າເຫຼົ່ານີ້ຫຼຽບພ້ອມແລ້ວ ໂດຍຂ້ານ້ອຍ

(ພຣະຣາຊາຕັດວ່າ)

[໗໐] ມ້າຕຸ້ຍກໍແລ່ນບໍ່ໄວມ້າຜອມກໍບໍ່ມີເຫື່ອແຮງ
ຈົ່ງເວັ້ນທັງມ້າຜອມແລະມ້າຕຸ້ຍສາ
ເລືອກເອົາແຕ່ມ້າທີ່ສົມບູນ

(ພຣະບໍຣົມສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໗໑] ລຳດັບນັ້ນ ພຣະຣາຊາຟ້າວສະເດັດຂຶ້ນປະທັບມ້າສິນທົບທີ່ຫຼຽມແລ້ວ
ໄດ້ຕັດກັບນາງຊາວວັງວ່າ ພວກເຈົ້າທັງໝົດຈົ່ງຕາມເຮົາມາເທີ້ນ

[໗໒] ພຣະຣາຊາຕັດສັ່ງວ່າ ຈົ່ງກະກຽມເຄື່ອງຣາດຊະກະກຸທະພັນ ໕ ຢ່າງ
ຄື ພັດວາລະວິຊະນີ ແສ້ຈາມະຣີ ອຸນະຫິດ ພຣະຂັນ ສະເຫວດຕະສັດ
ແລະສະຫຼອງພຣະບາດທີ່ປະດັບຕົກແຕ່ງດ້ວຍຄຳຂຶ້ນລົດໄປດ້ວຍ

[໗໓] ແລະຕໍ່ຈາກນັ້ນ ພຣະຣາຊາຕັດສັ່ງໃຫ້ນາຍສາຣະຖີນຳທາງ
ສະເດັດເຄື່ອນຂະບວນເຂົ້າໄປເຖິງສະຖານທີ່
ເຊິ່ງເປັນທີ່ປະທັບຂອງພຣະເຕມີ

[໗໔] ສ່ວນພຣະເຕມີທອດພຣະເນດເຫັນພຣະບິດາ
ກຳລັງສະເດັດມາ ຊົງຮຸ່ງເຮືອງດ້ວຍພຣະເດຊານຸພາບ
ຊົງແວດລ້ອມດ້ວຍໝູ່ອຳມາດ ຈຶ່ງຖວາຍພຣະພອນວ່າ

[໗໕] ຂໍຖວາຍພຣະພອນສະເດັດພໍ່
ພຣະອົງຊົງສຸກສະບາຍດີບໍ ຊົງພຣະສຳຣານດີບໍ
ຣາດຊະກັນຍາທັງປວງແລະພຣະມານດາຂອງອາດຕະມາພາບ
ບໍ່ມີພຣະໂຣຄາພາດບໍ

(ພຣະຣາຊາຕັດຕອບວ່າ)

[໗໖] ລູກຮັກ ເຮົາສຸກສະບາຍດີ
ບໍ່ມີໂຣກບຽດບຽນ
ພຣະຣາດຊະກັນຍາທັງປວງແລະພຣະມານດາ
ຂອງລູກຮັກກໍບໍ່ມີໂຣຄາພາດ

(ລຳດັບນັ້ນ ພຣະເຕມີໂພທິສັດທູນຖາມພຣະຣາຊາວ່າ)

[໗໗] ຂໍຖວາຍພຣະພອນສະເດັດພໍ່
ມະຫາບໍພິດບໍ່ຊົງສະເຫວີຍນ້ຳຈັນບໍ
ບໍ່ຊົງໂພດປານການສະເຫວີຍນ້ຳຈັນບໍ
ພຣະຫະໄທຂອງພຣະອົງຊົງຍິນດີໃນສັດຈະ
ໃນທຳ ແລະໃນທານບໍ

(ພຣະຣາຊາຕັດຕອບວ່າ)

[໗໘] ລູກຮັກ ເຮົາບໍ່ດື່ມນ້ຳຈັນ
ແລະບໍ່ໂຜດປານການດື່ມນ້ຳຈັນ
ໃຈຂອງເຮົາຍັງຍິນດີໃນສັດຈະ ໃນທຳ ແລະໃນທານ

(ພຣະເຕມີໂພທິສັດທູນຖາມວ່າ)

[໗໙] ຂໍຖວາຍພຣະພອນສະເດັດພໍ່
ຣາດຊະພາຫະນະຂອງພຣະອົງທີ່ເຂົາທຽມແລ້ວໝັ້ນຄົງຢູ່ບໍ?
ຣາດຊະພາຫະນະຍັງນຳພາຣະໄປໄດ້ດີຢູ່ບໍ
ມະຫາບໍພິດພະຍາທິທີ່ຈະເຂົ້າໄປແຜດເຜົາພຣະສະຣີຣະຂອງພຣະອົງບໍ່ມີບໍ

(ພຣະຣາຊາຕັດຕອບວ່າ)

[໘໐] ພາຫະນະມີມ້າແລະງົວເປັນຕົ້ນຂອງເຮົາທີ່ທຽມແລ້ວໝັ້ນຄົງ
ຣາດຊະພາຫະນະກໍຍັງນຳພາຣະໄປໄດ້
ພະຍາດທີ່ເຂົ້າໄປແຜດເຜົາສະຣີຣະຂອງເຮົາກໍບໍ່ມີ

(ພຣະເຕມີໂພທິສັດທູນຖາມວ່າ)

[໗໑] ຊຸມຊົນແຖບຊາຍແດນຂອງພຣະອົງຍັງມັ່ງຄັ່ງຢູ່ບໍ
ຄາມນິຄົມໃນທ່າມກາງຣັດຂອງພຣະອົງ
ຍັງເປັນທີ່ຢູ່ແໜ້ນໜາມັ່ງຄັ່ງຢູ່ບໍ
ສາງຫຼວງແລະຫ້ອງພຣະຄັງຂອງພຣະອົງຍັງບໍລິບູນດີຢູ່ບໍ

(ພຣະຣາຊາຕັດຕອບວ່າ)

[໗໒] ຊຸມຊົນແຖບຊາຍແດນຂອງເຮົາຍັງມັ່ງຄັ່ງ
ຄາມນິຄົມໃນທ່າມກາງແຄວ້ນກໍຍັງຢູ່ແໜ້ນໜາດີ
ສາງຫຼວງແລະຫ້ອງພຣະຄັງຂອງເຮົາ
ກໍຍັງຄົງບໍລິບູນດີທຸກຢ່າງ

(ພຣະເຕມີໂພທິສັດຕັດວ່າ)

[໗໓] ຂ້າແດ່ມະຫາຣາດ ພຣະອົງສະເດັດມາດີ ບໍ່ໄດ້ສະເດັດມາຮ້າຍ
ຂໍມະຫາດນ້ອຍທັງຫຼາຍຈົ່ງຈັດຕັ້ງບັນລັງ
ເຊິ່ງເປັນທີ່ປະທັບນັ່ງຖວາຍພຣະຣາຊາເທີ້ນ
[໗໔] ເຊີນປະທັບນັ່ງໃນເຄື່ອງລາດໃບໄມ້ທີ່ເຂົາປູໄວ້ຮຽບຮ້ອຍ
ຖວາຍມະຫາບໍພິດໃນທີ່ນີ້ເທີ້ນ
ຈົ່ງຊົງຕັກນໍ້າຈາກພາຊະນະນີ້ລ້າງພຣະບາດຂອງພຣະອົງເທີ້ນ
[໗໕] ຂໍຖວາຍພຣະພອນມະຫາບໍພິດ
ໃບໝາກເມົ່າຂອງອາດຕະມາພາບນີ້ເປັນຂອງສຸກບໍ່ເຄັມ
ພຣະອົງມາເປັນແຂກຂອງອາດຕະມາພາບແລ້ວ ເຊີນສະເຫວີຍເທີ້ນ

(ພຣະຣາຊາຕັດວ່າ)

[໗໖] ຂ້ານ້ອຍບໍ່ບໍຣິໂພກໃບໝາກເມົ່າ
ຍ້ອນໃບໝາກເມົ່ານີ້ບໍ່ແມ່ນອາຫານຂອງຂ້ານ້ອຍ
ຂ້ານ້ອຍບໍຣິໂພກເຂົ້າສຸກແຫ່ງເຂົ້າສາລີທີ່ປຸງດ້ວຍຊີ້ນ

(ພຣະຣາຊາຕັດກັບພຣະເຕມີໂພທິສັດແລ້ວ ຈຶ່ງຕັດຄາຖາວ່າ)

[໗໗] ຄວາມໜ້າອັດສະຈັນຜາກົດຊັດເຈນກັບຂ້ານ້ອຍ
ຍ້ອນໄດ້ເຫັນລູກຮັກຢູ່ໃນບ່ອນລັບແຕ່ຜູ້ດຽວ
ຍ້ອນເຫດໃດ ຜິວພັນຂອງຜູ້ບໍຣິໂພກອາຫານເຊັ່ນນີ້ຈຶ່ງຜ່ອງໃສນໍ

(ພຣະເຕມີໂພທິສັດເມື່ອຈະທູນພຣະຣາຊານັ້ນ ຈຶ່ງຕັດວ່າ)

[໗໗] ຂໍຖວາຍພຣະພອນມະຫາບໍພິດ
ອາດຕະມາພາບຈຳວັດຕາມລຳພັງເທິງເຄື່ອງລາດໃບໄມ້
ຍ້ອນການຈຳວັດຕາມລຳພັງນັ້ນ
ຜິວພັນຂອງອາດຕະມາພາບຈຶ່ງຜ່ອງໃສ

[໗໙] ອັນໜຶ່ງ ອາດຕະມາພາບບໍ່ມີຣາຊະອົງຄະຣັກສາດກະບີ່ຄອຍຖ້າປ້ອງກັນ
ຍ້ອນການຈຳວັດຕາມລຳພັງຂອງອາດຕະມາພາບນັ້ນ
ຜິວພັນຈຶ່ງຜ່ອງໃສ ຂໍຖວາຍພຣະພອນ

[໙໐] ອາດຕະມາພາບບໍ່ໄດ້ເສົ້າໂສກເຖິງອາລົມທີ່ລ່ວງໄປແລ້ວ
ບໍ່ໄດ້ປາຖະໜາອາລົມທີ່ຍັງບໍ່ມາເຖິງ
ຍັງອັດຕະພາບໃຫ້ເປັນໄປດ້ວຍສິ່ງທີ່ເກີດຂຶ້ນສະເພາະໜ້າ
ຍ້ອນເຫດນັ້ນຜິວພັນຂອງອາດຕະມາພາບຈຶ່ງຜ່ອງໃສ

[໙໑] ຍ້ອນການປາຖະໜາອາລົມທີ່ຍັງບໍ່ມາເຖິງ
ຍ້ອນເສົ້າໂສກເຖິງອາລົມທີ່ລ່ວງໄປແລ້ວ
ທັງ ໒ ຢ່າງນີ້ ພວກຄົນພານຊູບຊີດຫ່ຽວແຫ້ງ
ເໝືອນໄມ້ອໍ້ທີ່ຂຽວສົດຖືກຖອນຖິ້ມໄວ້

(ລຳດັບນັ້ນ ພຣະຣາຊາຊົງເຊີນພຣະເຕມີໂພທິສັດໃຫ້ຄອງຣາດຊະສົມບັດ ຈຶ່ງຕັດວ່າ)

[໙໒] ລູກຮັກ ຂ້ານ້ອຍຂໍມອບກອງພົນຊ້າງ ກອງພົນມ້າ
ກອງພົນລົດ ກອງພົນຣາບ ເຫຼົ່າທະຫານຜູກໂລ່
ແລະພຣະນິເວດທີ່ໜ້າອອນຊອນແກ່ລູກ

[໙໓] ຂ້ານ້ອຍຂໍມອບພຣະສະໜົມກຳນັນໃນຜູ້ປະດັບດ້ວຍເຄື່ອງອະລັງການທຸກຢ່າງ
ລູກຮັກຈົ່ງປົກຄອງພຣະສະໜົມກຳນັນໃນເຫຼົ່ານັ້ນ
ຈົ່ງເປັນພຣະຣາຊາຂອງຂ້ານ້ອຍທັງຫຼາຍ

[໙໔] ຍິງສາວທັງ ໔ ຄົນຜູ້ສະຫຼາດໃນການຟ້ອນຣຳແລະການຂັບຮ້ອງ
ສຶກສາດີແລ້ວໃນໜ້າທີ່ຂອງຍິງແມ່ນອື່ນ ໆ
ຈັກເຮັດລູກຮັກໃຫ້ຮື່ນຣົມໃນການໄດ້ ລູກຈັກເຮັດຫຍັງໃນປ່ານໍ

[໙໕] ຂ້ານ້ອຍຈັກນຳຣາດຊະກັນຍາຈາກພຣະຣາຊາອື່ນ ໆ ຜູ້ປະດັບດີແລ້ວມາ
ຂໍລູກຮັກໃຫ້ກຳເນີດພຣະໂອຣົດໃນຍິງເຫຼົ່ານັ້ນແລ້ວ
ຈຶ່ງບວດໃນພາຍຫຼັງເທີ້ນ

[໙໖] ລູກຮັກຍັງໜຸ່ມແໜ້ນຢູ່ໃນປະຖົມໄວ ຜົມດຳສະນິດ
ຈົ່ງຄອບຄອງຣາດຊະສົມບັດກ່ອນເທີ້ນ
ຂໍລູກຈົ່ງມີຄວາມຈະເລີນ ລູກຈັກເຮັດຫຍັງໃນປ່ານໍ

(ພຣະເຕມີໂພທິສັດສະແດງທຳໂຜດພຣະຣາຊາວ່າ)

[໙໗] ຄົນໜຸ່ມຄວນປະພຶດພົມມະຈັນ
ຜູ້ປະພຶດພົມມະຈັນຄວນຈະເປັນຄົນໜຸ່ມ
ຍ້ອນການບວດຂອງຄົນໜຸ່ມ ລືສີທັງຫຼາຍສັນເສີນແລ້ວ

[໙໘] ຄົນໜຸ່ມຄວນປະພຶດພົມມະຈັນ
ຜູ້ປະພຶດພົມມະຈັນຄວນເປັນຄົນໜຸ່ມ
ອາດຕະມາພາບຈັກປະພຶດພົມມະຈັນ
ອາດຕະມາພາບບໍ່ຕ້ອງການຣາດຊະສົມບັດ

[໙໙] ອາດຕະມາພາບເຫັນເດັກໜຸ່ມຂອງທ່ານທັງຫຼາຍ
ຜູ້ຮຽກມານດາແລະບິດາ ເຊິ່ງເປັນບຸດທີ່ຮັກໄດ້ມາໂດຍຍາກ
ຍັງບໍ່ທັນເຖິງຄວາມແກ່ເລີຍກໍຕາຍສາແລ້ວ

[໑໐໐] ອາດຕະມາພາບເຫັນເດັກສາວຂອງທ່ານທັງຫຼາຍ
ທີ່ສວຍສົດງົດງາມ ສິ້ນຊີວິດ ເໝືອນໜໍ່ໄມ້ໄຜ່ທີ່ຖືກຖອນ

[໑໐໑] ຈິງຢູ່ ຈະເປັນຊາຍຫຼືຍິງສາວກໍຕາມ
ແມ່ນຍັງໜຸ່ມສາວກໍຕາຍໄດ້ ຍ້ອນເຫດນັ້ນ
ໃຜນໍຈະເພິ່ງວາງໃຈໃນຊີວິດນີ້ໄດ້

[໑໐໒] ອາຍຸຂອງຄົນເປັນຂອງໜ້ອຍ ຍ້ອນວັນຄືນລ່ວງໄປ
ປຽບເໝືອນອາຍຸຂອງຝູງປາໃນນ້ຳໜ້ອຍ
ຄວາມເປັນໜຸ່ມສາວໃນໄວນັ້ນຈັກເຮັດຫຍັງໄດ້

[໑໐໓] ສັດໂລກຖືກຄອບງຳແລະຖືກຫຸ້ມລ້ອມຢູ່ເປັນນິດ

ເມື່ອຣາຕີທັງຫຼາຍເຮັດອາຍຸ ວັນນະ ແລະກຳລັງ
ຂອງເຫຼົ່າສັດໃຫ້ສິ້ນໄປເປັນໄປຢູ່
ມະຫາບໍພິດຈະອະພິເສກອາດຕະມາພາບໃນຣາດຊະສົມບັດເຮັດຫຍັງ?

(ພຣະຣາຊາຕັດວ່າ)

[໑໐໔] ສັດໂລກຖືກອັນໃດຄອບງຳ ແລະຖືກອັນໃດຫຸ້ມລ້ອມໄວ້
ອັນໃດຊື່ວ່າຣາຕີທີ່ເຮັດອາຍຸ ວັນນະ
ແລະກຳລັງຂອງເຫຼົ່າສັດໃຫ້ສິ້ນໄປເປັນໄປຢູ່
ຂ້ານ້ອຍຖາມແລ້ວ ຂໍລູກຮັກຈົ່ງບອກຂໍ້ນັ້ນແກ່ຂ້ານ້ອຍເທີ້ນ

(ພຣະເຕມີໂພທິສັດທູນວ່າ)

[໑໐໕] ສັດໂລກຖືກຄວາມຕາຍຄອບງຳ
ແລະຖືກຄວາມແກ່ຫຸ້ມລ້ອມໄວ້
ວັນຄືນທີ່ຊື່ວ່າເຮັດອາຍຸ ວັນນະ
ແລະກຳລັງຂອງເຫຼົ່າສັດໃຫ້ສິ້ນໄປກໍເປັນໄປຢູ່
ມະຫາບໍພິດ ຂໍຈົ່ງຊົງຮູ້ແນວນີ້ ຂໍຖວາຍພຣະພອນ

[໑໐໖] ເມື່ອເສັ້ນດ້າຍທີ່ເຂົາກຳລັງຕ່ຳ
ຊ່າງຫູກຕ່ຳໄປໄດ້ເທົ່າໃດ ສ່ວນທີ່ຕ້ອງທໍ່ຕໍ່ໄປ
ຂ້ານ້ອຍກໍເພິ່ງຮູ້ວ່າ ເຫຼືອຢູ່ໜ້ອຍເທົ່ານັ້ນສັນໃດ
ຊີວິດຂອງສັດທັງຫຼາຍກໍສັນນັ້ນ

[໑໐໗] ຫ້ວງນ້ຳທີ່ເຕັມຝັ່ງເມື່ອໄຫຼໄປຍ່ອມບໍ່ໄຫຼກັບສັນໃດ
ອາຍຸຂອງມະນຸດທັງຫຼາຍເມື່ອຜ່ານໄປ
ກໍຍ່ອມບໍ່ຫວນກັບຄືນສັນນັ້ນ

[໑໐໘] ຫ້ວງນ້ຳທີ່ເຕັມຝັ່ງຍ່ອມພັດພາເອົາຕົ້ນໄມ້
ທີ່ເກີດຢູ່ແຄມຝັ່ງໃຫ້ຫັກໂຄ່ນໄປສັນໃດ
ສັດທັງປວງຍ່ອມຖືກຊະຣາແລະມໍລະນະພັດພາໄປສັນນັ້ນ

(ພຣະຣາຊາສະດັບທຳມະກະຖາຂອງພຣະເຕມີໂພທິສັດແລ້ວ ຈະເຊີນໃຫ້ຄອງຣາດຊະສົມບັດອີກ ຈຶ່ງຕັດວ່າ)

[๑๐๙] ລູກເອີຍ ຂ້ານ້ອຍຂໍມອບກອງພົນຊ້າງ ກອງພົນມ້າ
ກອງພົນລົດ ກອງພົນຣາບ ເຫຼົ່າທະຫານຜູກໂລ່
ແລະພຣະຣາດຊະນິເວດທີ່ໜ້າຣື່ນຣົມແກ່ລູກ

[๑๑๐] ອັນໜຶ່ງ ຂ້ານ້ອຍຂໍມອບພຣະສະໜົມກຳນັນໃນ
ຜູ້ປະດັບດ້ວຍເຄື່ອງອະລັງການທຸກຢ່າງ
ລູກເອີຍ ຈົ່ງປົກຄອງພຣະສະໜົມກຳນັນໃນເຫຼົ່ານັ້ນ
ລູກຈັກເປັນພຣະຣາຊາຂອງພວກເຮົາທັງຫຼາຍ

[๑๑๑] ຍິງສາວທັງ ๔ ຄົນຜູ້ສະຫຼາດໃນການຟ້ອນຣຳແລະການຂັບຮ້ອງ
ສຶກສາດີແລ້ວໃນໜ້າທີ່ຂອງແມ່ຍິງອື່ນ ໆ
ຈັກເຮັດລູກຮັກໃຫ້ຣື່ນຣົມໃນການໄດ້ ລູກຈະຢູ່ເຮັດຫຍັງໃນປ່າແຫ່ງນີ້ນໍ

[๑๑๒] ຂ້ານ້ອຍຈັກນຳຣາດຊະກັນຍາຈາກພຣະຣາຊາອື່ນ ໆ
ຜູ້ປະດັບແລ້ວມາໃຫ້ແກ່ລູກ
ລູກໃຫ້ຍິງສາວເຫຼົ່ານັ້ນກຳເນີດພຣະໂອຣົດແລ້ວ
ຈຶ່ງບວດໃນພາຍຫຼັງເທີ້ນ

[๑๑๓] ລູກຍັງໜຸ່ມແໜ້ນຢູ່ໃນປະຖົມໄວ ມີຜົມດຳປອດ
ຈົ່ງຄອບຄອງຣາດຊະສົມບັດກ່ອນເທີ້ນ
ຂໍລູກຈົ່ງມີຄວາມຈະເລີນ ລູກຈັກເຮັດຫຍັງໃນປ່ານໍ
[๑๑๔] ລູກເອີຍ ຂ້ານ້ອຍຂໍມອບສາງຫຼວງ ພຣະຄັງ ພາຫະນະ
ພົນນິກາຍ ແລະພຣະຣາດຊະນິເວດອັນໜ້າອອນຊອນແກ່ລູກ
[๑๑๕] ທ່ານຈົ່ງຫ້ອມລ້ອມດ້ວຍແວດວົງຣາດຊະກັນຍາທີ່ງາມພິ້ງ
ຈົ່ງຫ້ອມລ້ອມດ້ວຍໝູ່ນາງສະໜົມກຳນັນ
ຄອບຄອງຣາດຊະສົມບັດກ່ອນເທີ້ນ
ຂໍລູກຈົ່ງມີຄວາມຈະເລີນ ລູກຈັກເຮັດຫຍັງໃນປ່ານໍ

(ພຣະເຕມີໂພທິສັດ ເມື່ອຈະປະກາດຄວາມທີ່ຕົນບໍ່ປາຖະໜາຣາດຊະສົມບັດ ຈຶ່ງທູນວ່າ)

[๑๑๖] ມະຫາບໍພິດ ຈະໃຫ້ອາດຕະມາພາບເສື່ອມໄປຍ້ອນຊັບເຮັດຫຍັງ
ບຸກຄົນຈັກຕາຍຍ້ອນພັນລະຍາເຮັດຫຍັງ
ປະໂຫຍດອັນໃດດ້ວຍຄວາມເປັນໜຸ່ມສາວທີ່ແກ່ເຖົ້າ
ຍ້ອນຖືກຊະຣາຄອບງຳ

[໑໑໗] ໃນໂລກສັນນິວາດທີ່ມີຊະຣາແລະມໍລະນະເປັນທຳມະດານັ້ນ
ຈະເພີດເພີນໄປເຮັດຫຍັງ ຈະຫຼິ້ນຫົວໄປເຮັດຫຍັງ
ຈະຍິນດີໄປເຮັດຫຍັງ ຈະສະແຫວງຫາຊັບໄປເຮັດຫຍັງ
ຈະມີປະໂຫຍດອັນໃດດ້ວຍລູກແລະເມຍແກ່ອາດຕະມາພາບ
ອາດຕະມາພາບເປັນຜູ້ລຸດພົ້ນແລ້ວຈາກເຄື່ອງຜູກມັດ ຂໍຖວາຍພຣະພອນ

[໑໑໗] ມັດຈຸຣາດຍ່ອມບໍ່ຍ່ຳຍີອາດຕະມາພາບຜູ້ຮູ້ແຈ້ງແນວນີ້ວ່າ
ເມື່ອບຸກຄົນຖືກມັດຈຸຣາດຄອບງຳແລ້ວ ຈະຍິນດີໄປເຮັດຫຍັງ
ຈະສະແຫວງຫາຊັບໄປເຮັດຫຍັງ

[໑໑໙] ໄພຂອງໝາກໄມ້ທີ່ສຸກແລ້ວທັງຫຼາຍ
ຍ່ອມມີຍ້ອນຫຼົ່ນລົງເປັນປະຈຳສັນໃດ
ໄພຂອງເຫຼົ່າສັດຜູ້ເກີດມາແລ້ວ
ຍ່ອມມີຍ້ອນຄວາມຕາຍຢູ່ປະຈຳສັນນັ້ນ

[໑໒໐] ຄົນເປັນຈຳນວນຫຼາຍທີ່ໄດ້ພົບກັນໃນຕອນເຊົ້າ
ຕົກຕອນຄ່ຳລາງພວກກໍບໍ່ເຫັນກັນ
ຄົນເປັນຈຳນວນຫຼາຍທີ່ໄດ້ພົບກັນໃນຕອນຄ່ຳ
ຕົກຕອນເຊົ້າລາງພວກກໍບໍ່ເຫັນກັນ

[໑໒໑] ຄວນຟ້າວເຮັດຄວາມພຽນສາແຕ່ໃນມື້ນີ້
ໃຜນໍຈະເພິ່ງຮູ້ໄດ້ວ່າ ຄວາມຕາຍຈະມີໃນມື້ອື່ນນີ້
ຍ້ອນຄວາມຜ່ອນຜັນກັບມັດຈຸຣາດທີ່ມີເສນາໝູ່ໃຫຍ່ນັ້ນ
ບໍ່ມີແກ່ເຮົາທັງຫຼາຍເລີຍ

[໑໒໒] ພວກໂຈນຍ່ອມປາຖະໜາຊັບ
ມະຫາບໍພິດ ອາດຕະມາພາບເປັນຜູ້ລຸດພົ້ນແລ້ວຈາກເຄື່ອງຜູກມັດ
ເຊີນມະຫາບໍພິດສະເດັດກັບໄປເທີ້ນ
ອາດຕະມາພາບບໍ່ມີຄວາມຕ້ອງການດ້ວຍຣາດຊະສົມບັດ ຂໍຖວາຍພຣະພອນ

**ເຕມີຍະຊາດົກທີ ໑ ຈົບ**

# ໘. ມະຫາຊົນກຊາດົກ[១] (໕໓໙)
## ວ່າດ້ວຍພຣະມະຫາຊົນກຊົງພໍ່າເພັງວິຣິຍະປາຣະມີ

(ເທບທິດາກ່າວວ່າ)

[໑໘໓] ໃຜກັນນີ້ ທັງ ໆ ທີ່ແນມບໍ່ເຫັນຝັ່ງ
ກໍຍັງພຽນພະຍາຍາມ(ລອຍ)ຢູ່ໃນທ່າມກາງສະມຸດ
ທ່ານຮູ້ອຳນາດປະໂຫຍດອັນໃດ
ຈຶ່ງພະຍາຍາມເຕັມທີ່ຢູ່ແນວນີ້

(ພຣະໂພທິສັດຕອບວ່າ)

[໑໘໔] ເທບທິດາ ເຮົາພິເຄາະເຫັນທຳນຽມຂອງໂລກ
ແລະອານິສົງຂອງຄວາມພະຍາຍາມ
ຍ້ອນແນວນັ້ນ ທັງ ໆ ທີ່ແນມບໍ່ເຫັນຝັ່ງ
ເຮົາຈຶ່ງພຽນພະຍາຍາມ(ລອຍ)ຢູ່ໃນທ່າມກາງສະມຸດ

(ເທບທິດາກ່າວວ່າ)

[໑໘໕] ຝັ່ງສະມຸດອັນເລິກປະມານບໍ່ໄດ້ຍັງບໍ່ຜາກົດ
ຄວາມພະຍາຍາມຢ່າງລູກຜູ້ຊາຍຂອງທ່ານຍ່ອມເປົ່າປະໂຫຍດ
ຍັງບໍ່ທັນຈະເຖິງຝັ່ງເລີຍ ທ່ານກໍຈັກຕາຍແນ່

(ພຣະໂພທິສັດຕອບວ່າ)

[໑໘໖] ບຸກຄົນຜູ້ເຮັດໜ້າທີ່ຂອງລູກຜູ້ຊາຍຢູ່
ຈະບໍ່ຖືກໝູ່ຍາດ ເທວະດາ ແລະພົມທັງຫຼາຍນິນທາ
ທັງຈະບໍ່ເດືອດຮ້ອນໃນພາຍຫຼັງ

(ເທບທິດາກ່າວວ່າ)

[໑໘໗] ວຽກງານທີ່ໃຫ້ເຖິງຝັ່ງບໍ່ໄດ້
ປາສະຈາກຜົນ ກໍ່ໃຫ້ເກີດຄວາມລຳບາກ
ແລະຄວາມຕາຍ ຍ່ອມມີໄດ້ຍ້ອນເຮັດວຽກງານໃດ
ປະໂຫຍດອັນໃດດ້ວຍຄວາມພະຍາຍາມ ໃນວຽກງານນັ້ນ

(ພຣະໂພທິສັດຕອບວ່າ)

[໑໘໗]	ເທບທິດາ ບຸກຄົນໃດຮູ້ວ່າ
ງານສຸດວິໄສເກີນໂຕແລ້ວ ບໍ່ຮັກສາຊີວິດຂອງຕົນ
ຖ້າຜູ້ນັ້ນຄາຍຄວາມພຽນສາ ກໍຈະເພິ່ງຮູ້ຜົນຂອງງານນັ້ນ

[໑໘໙]	ເທບທິດາ ຄົນລາງພວກໃນໂລກນີ້
ພິຈາລະນາເຫັນຜົນແຫ່ງຄວາມມຸ້ງປະສົງຂອງຕົນ
ຈຶ່ງປະກອບວຽກງານທັງຫຼາຍ
ວຽກງານເຫຼົ່ານັ້ນຈະສຳເລັດບໍ່ກໍຕາມທີ

[໑໙໐]	ເທບທິດາ ທ່ານກຳລັງເຫັນຜົນງານທີ່ປະຈັກແກ່ຕົນເອງແລ້ວບໍ່ແມ່ນບໍ
ຄົນອື່ນ ໆ ພາກັນຈົມນ້ຳແລ້ວ
ເຮົາຄົນດຽວທີ່ນັ້ນພະຍາຍາມຂ້າມຢູ່
ແລະຍັງເຫັນທ່ານຢູ່ໃກ້ເຮົາ

[໑໙໑]	ເຮົານັ້ນຈັກພະຍາຍາມຕາມກຳລັງຄວາມສາມາດ
ຈັກໄປໃຫ້ເຖິງຝັ່ງສະມຸດ
ຈັກເຮັດຄວາມພຽນຢ່າງລູກຜູ້ຊາຍ

(ຕໍ່ມາ ພຣະໂພທິສັດໄດ້ຄອງຣາດຊະສົມບັດໃນເມືອງມິຖິລາແລ້ວ ຊົງຣະນຶກເຖິງຜົນແຫ່ງຄວາມພຽນຊອບຂອງພຣະອົງ ຊົງເປັ່ງອຸທານດ້ວຍກຳລັງປີຕິວ່າ)

[໑໙໒]	ທ່ານໃດເຖິງພ້ອມດ້ວຍຄວາມພະຍາຍາມໂດຍທຳ
ບໍ່ຈົມລົງໃນຫ້ວງມະຫັນນົບທີ່ຫາປະມານບໍ່ໄດ້ປານນີ້ດ້ວຍການກະທຳ
ທ່ານນັ້ນຈຶ່ງໄປໃນສະຖານທີ່ທີ່ທ່ານຖືກໃຈເທົ້ນ
ຂຸມຊັບໃຫຍ່ ໑໖ ຂຸມ^ນີ້ ຄື
໑. ຂຸມຊັບທີ່ຢູ່ທາງດວງອາທິດຂຶ້ນ
໒. ຂຸມຊັບທີ່ຢູ່ທາງດວງອາທິດຕົກ
໓. ຂຸມຊັບທີ່ຢູ່ພາຍໃນ
໔. ຂຸມຊັບທີ່ຢູ່ພາຍນອກ
໕. ຂຸມຊັບທີ່ບໍ່ແມ່ນຢູ່ພາຍໃນພາຍນອກ
໖. ຂຸມຊັບທີ່ທາງຂຶ້ນ
໗. ຂຸມຊັບທີ່ທາງລົງ

໗.-໑໑. ຊຸມຊັບທີ່ໄມ້ສາລະທັງ ໔
໑໘. ຊຸມຊັບທີ່ໂຍດໜຶ່ງໂດຍຮອບ
໑໓. ຊຸມຊັບທີ່ປາຍງາທັງ ໔
໑໔. ຊຸມຊັບທີ່ປາຍຫາງ
໑໕. ຊຸມຊັບທີ່ສະນ້ຳ
໑໖. ຊຸມຊັບຢູ່ຍອດໄມ້ ທະນູໜັກໜຶ່ງພັນແຮງຄົນ
ບັນລັງສີ່ຫຼ່ຽມ ຜູ້ເຮັດເຈົ້າຍິງສີວະລີໃຫ້ຍິນດີ

[໑໓໓] ບຸຣຸດຜູ້ເປັນບັນດິດເພິ່ງຫວັງບໍ່ສິ້ນສຸດ
ບໍ່ເພິ່ງເບື່ອໜ່າຍ
ເຮົາເຫັນຕົນເອງໄດ້ເປັນພຣະຣາຊາຕາມທີ່ຕົນປາຖະໜາ

[໑໓໔] ບຸຣຸດຜູ້ເປັນບັນດິດເພິ່ງຫວັງບໍ່ສິ້ນສຸດ
ບໍ່ເພິ່ງເບື່ອໜ່າຍ
ເຮົາເຫັນຕົນເອງຖືກອຸ້ມຈາກນ້ຳຂຶ້ນບົກແລ້ວ

[໑໓໕] ບຸຣຸດຜູ້ເປັນບັນດິດເພິ່ງພະຍາຍາມບໍ່ສິ້ນສຸດ
ບໍ່ເພິ່ງເບື່ອໜ່າຍ
ເຮົາເຫັນຕົນເອງໄດ້ເປັນພຣະຣາຊາຕາມທີ່ຕົນປາຖະໜາ

[໑໓໖] ບຸຣຸດຜູ້ເປັນບັນດິດເພິ່ງພະຍາຍາມບໍ່ສິ້ນສຸດ
ບໍ່ເພິ່ງເບື່ອໜ່າຍ
ເຮົາເຫັນຕົນເອງຖືກອຸ້ມຈາກນ້ຳຂຶ້ນບົກແລ້ວ

[໑໓໗] ຄົນມີປັນຍາແມ່ນຖືກທຸກກະທົບແລ້ວ
ກໍບໍ່ເພິ່ງທຳລາຍຄວາມຫວັງ ເພື່ອການມາເຖິງແຫ່ງຄວາມສຸກ
ຍ້ອນສຳຜັດມີຫຼາຍແນວທັງທີ່ເປັນປະໂຫຍດແລະບໍ່ເປັນປະໂຫຍດ
ຜູ້ບໍ່ນຶກເຖິງປະໂຫຍດຍ່ອມເຂົ້າເຖິງຄວາມຕາຍ

[໑໓໘] ສິ່ງທີ່ບໍ່ໄດ້ຄິດກັບເປັນໄປໄດ້ ສິ່ງທີ່ຄິດແລ້ວກັບພິນາດໄປ
ຊັບສິນບັດທັງຫຼາຍຂອງຍິງຫຼືຊາຍ
ບໍ່ໄດ້ສຳເລັດດ້ວຍຄວາມຄິດເລີຍ

(ຊາວເມືອງກ່າວກັນວ່າ)

[໑໓໙] ທ່ານຜູ້ຈະເລີນ ພຣະຣາຊາຜູ້ຄອບຄອງພື້ນທີ່ທັງປວງ
ເປັນໃຫຍ່ໃນທິດ ບໍ່ເປັນຄືແຕ່ກ່ອນນໍ
ມື້ນີ້ ບໍ່ທອດພຣະເນດການຟ້ອນລຳ
ບໍ່ຊົງໃສ່ພຣະຫະໄທໃນການຂັບຮ້ອງ

[໑໔໐] ບໍ່ທອດພຣະເນດໝູ່ເນື້ອ ບໍ່ສະເດັດປະພາດພຣະຣາດຊະອຸທະຍານ
ບໍ່ທອດພຣະເນດຝູງຫົງ
ພຣະອົງຊົງປະທັບນິດເສີຍຄືຄົນກືກ
ບໍ່ຊົງວ່າຣາດຊະການເລີຍ

(ພຣະໂພທິສັດຊົງຣະນຶກເຖິງພຣະປັດເຈກພຸດທະເຈົ້າ ຊົງເປ່ງອຸທານວ່າ)

[໑໔໑] ນັກປາດທັງຫຼາຍຜູ້ຕ້ອງການຄວາມສຸກ
ມີປິກາກະຕິຫຼົບຫຼີກ ປາສະຈາກເຄື່ອງຜູກມັດຄືກິເລດ
ທັງໜຸ່ມທັງແກ່ ກ້າວລ່ວງຕັນຫາໄດ້
ຍ່ອມຢູ່ ທີ່ອາຣາມຂອງໃຜນໍໃນມື້ນີ້

[໑໔໒] ຂ້າພະເຈົ້າຂໍນອບນ້ອມແດ່ນັກປາດເຫຼົ່ານັ້ນຜູ້ສະແຫວງຫາຄຸນໃຫຍ່
ນັກປາດເຫຼົ່າໃດເປັນຜູ້ບໍ່ຂົນຂວາຍຢູ່ໃນໂລກທີ່ເຖິງຄວາມຂົນຂວາຍ

[໑໔໓] ນັກປາດເຫຼົ່ານັ້ນຕັດຕາໜ່າງຄືຕັນຫາອັນໝັ້ນຄົງແຫ່ງຄວາມຕາຍ
ທີ່ມີມາຍາຢ່າງຍິ່ງທຳລາຍດ້ວຍຍານໄປຢູ່
ໃຜນໍຈະເພິ່ງນຳເຮົາໄປໃຫ້ເຖິງສະຖານທີ່ຢູ່ຂອງນັກປາດເຫຼົ່ານີ້ໄດ້

[໑໔໔] ເມື່ອໃດ ເຮົາຈັກລະນະຄອນມິຖິລາອັນຮຸ່ງເຮືອງ
ທີ່ນາຍຊ່າງຜູ້ສະຫຼາດໄດ້ຈັດຈຳແນກໄວ້
ສ້າງໄວ້ເປັນສັດສ່ວນອອກບວດໄດ້
ການລະນະຄອນປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ
[໑໔໕] ເມື່ອໃດ ເຮົາຈັກລະນະຄອນມິຖິລາອັນຮຸ່ງເຮືອງກວ້າງຂວາງ
ສະຫວ່າງສະໄຫວທົ່ວທຸກທິດ ອອກບວດໄດ້
ການລະນະຄອນປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ
[໑໔໖] ເມື່ອໃດ ເຮົາຈັກລະນະຄອນມິຖິລາອັນຮຸ່ງເຮືອງ
ເຊິ່ງມີປາການແລະເສົາຄ່າຍຫຼວງຫຼາຍ ອອກບວດໄດ້
ການລະນະຄອນປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໑໘໗] ເມື່ອໃດ ເຮົາຈັກລະນະຄອນມິຖິລາອັນຮຸ່ງເຮືອງ
ມີປ້ອມຄູແລະຊຸ້ມປະຕູໝັ້ນຄົງ ອອກບວດໄດ້
ການລະນະຄອນປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໑໘໘] ເມື່ອໃດ ເຮົາຈັກລະນະຄອນມິຖິລາອັນຮຸ່ງເຮືອງ
ມີຖະໜົນຫຼວງຕັດໄວ້ຢ່າງດີ ອອກບວດໄດ້
ການລະນະຄອນປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໑໘໙] ເມື່ອໃດ ເຮົາຈັກລະນະຄອນມິຖິລາອັນຮຸ່ງເຮືອງ
ມີຮ້ານຕະຫຼາດທີ່ຈັດແຍກໄວ້ສວຍງາມ ອອກບວດໄດ້
ການລະນະຄອນປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໑໙໐] ເມື່ອໃດ ເຮົາຈັກລະນະຄອນມິຖິລາອັນຮຸ່ງເຮືອງ
ເຊິ່ງມີງົວ ມ້າ ແລະລົດບຽດສຽດກັນ ອອກບວດໄດ້
ການລະນະຄອນປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໑໙໑] ເມື່ອໃດ ເຮົາຈັກລະນະຄອນມິຖິລາອັນຮຸ່ງເຮືອງ
ມີສວນສາທາລະນະມີລະບຽບຮຽບຮ້ອຍ ອອກບວດໄດ້
ການລະນະຄອນປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໑໙໒] ເມື່ອໃດ ເຮົາຈັກລະນະຄອນມິຖິລາອັນຮຸ່ງເຮືອງ
ທີ່ມີວະນະອຸທະຍານ ມີລະບຽບຮຽບຮ້ອຍ ອອກບວດໄດ້
ການລະນະຄອນປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໑໙໓] ເມື່ອໃດ ເຮົາຈັກລະນະຄອນມິຖິລາອັນຮຸ່ງເຮືອງ
ມີຜາສາດຣາດຊະມົນທຽນ ສະຖານທີ່ແລະອຸທະຍານ
ເປັນລະບຽບຮຽບຮ້ອຍ ອອກບວດໄດ້
ການລະນະຄອນປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໑໙໔] ເມື່ອໃດ ເຮົາຈັກລະນະຄອນມິຖິລາອັນຮຸ່ງເຮືອງ ມີປາການ ໓ ຊັ້ນ
ຄັບຄັ່ງດ້ວຍພຣະບໍຣົມວົງສານຸວົງ ທີ່ພຣະເຈົ້າວິເທຫະ
ຜູ້ເຮືອງຍົດພຣະນາມວ່າໂສມະນັດໄດ້ຊົງສ້າງໄວ້ ອອກບວດໄດ້
ການລະນະຄອນປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໑໙໕] ເມື່ອໃດ ເຮົາຈັກລະແຄວັນວິເທຫະອັນຮຸ່ງເຮືອງ

ພ້ອມພຽງດ້ວຍການສະສົມສະບຽງ ເຊັ່ນ
ສະສົມຊັບແລະທັນຍາຫານເປັນຕົ້ນ
ທີ່ພຣະເຈົ້າວິເທຫະຊົງປົກຄອງໂດຍຖືກຕ້ອງຕາມທຳ ອອກບວດໄດ້
ການລະແຄວ້ນປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໑໕໖] ເມື່ອໃດ ເຮົາຈັກລະແຄວ້ນວິເທຫະອັນຮຸ່ງເຮືອງ
ທີ່ພວກປໍລະປັກຜະຈົນບໍ່ໄດ້
ເຊິ່ງພຣະເຈົ້າວິເທຫະຊົງປົກຄອງໂດຍທຳ ອອກບວດໄດ້
ການລະແຄວ້ນປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໑໕໗] ເມື່ອໃດ ເຮົາຈັກລະພຣະຕຳໜັກອັນເປັນສະຖານທີ່ໜ້າອອນຊອນ
ທີ່ນາຍຊ່າງຜູ້ສະຫຼາດໄດ້ຈັດຈຳແນກໄວ້
ສ້າງໄວ້ເປັນສ່ວນສັດ ອອກບວດໄດ້
ການລະພຣະຕຳໜັກປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໑໕໘] ເມື່ອໃດ ເຮົາຈັກລະພຣະຕຳໜັກອັນເປັນສະຖານທີ່ໜ້າອອນຊອນ
ທີ່ໂບກສາບດ້ວຍປູນຂາວແລະດິນໜຽວ ອອກບວດໄດ້
ການລະພຣະຕຳໜັກປານນີ້ອອກບວດນັ້ນ
ຈັກສຳເລັດໄດ້ເມື່ອໃດນໍ

[໑໕໙] ເມື່ອໃດ ເຮົາຈັກລະພຣະຕຳໜັກອັນເປັນສະຖານທີ່ໜ້າອອນຊອນ
ມີກິ່ນຫອມສົດຊື່ນອອນຊອນໃຈ ອອກບວດໄດ້
ການລະພຣະຕຳໜັກປານນີ້ອອກບວດນັ້ນ
ຈັກສຳເລັດໄດ້ເມື່ອໃດນໍ

[໑໖໐] ເມື່ອໃດ ເຮົາຈັກລະພຣະຕຳໜັກເຮືອນຍອດ
ທີ່ນາຍຊ່າງຜູ້ຊານສະຫຼາດຈັດຈຳແນກ
ສ້າງໄວ້ເປັນສັດສ່ວນ ອອກບວດໄດ້
ການລະພຣະຕຳໜັກປານນີ້ອອກບວດນັ້ນ
ຈັກສຳເລັດໄດ້ເມື່ອໃດນໍ

[໑໖໑] ເມື່ອໃດ ເຮົາຈັກລະພຣະຕຳໜັກເຮືອນຍອດ
ທີ່ໂບກສາບດ້ວຍປູນຂາວແລະດິນໜຽວ ອອກບວດໄດ້
ການລະພຣະຕຳໜັກປານນີ້ອອກບວດນັ້ນ
ຈັກສຳເລັດໄດ້ເມື່ອໃດນໍ

[໑໗໘] ເມື່ອໃດ ເຮົາຈັກລະພຣະຕຳໜັກເຮືອນຍອດ
ທີ່ມີກິ່ນຫອມສົດຊື່ນອອນຊອນໃຈ ອອກບວດໄດ້
ການລະພຣະຕຳໜັກປານນີ້ອອກບວດນັ້ນ
ຈັກສຳເລັດໄດ້ເມື່ອໃດນໍ

[໑໗໙] ເມື່ອໃດ ເຮົາຈັກລະພຣະຕຳໜັກເຮືອນຍອດ
ທີ່ນາຍຊ່າງຜູ້ຊານສະຫຼາດສາບທາ
ແລະປະພົມດ້ວຍຈຸນແກ່ນຈັນ ອອກບວດໄດ້
ການລະພຣະຕຳໜັກປານນີ້ອອກບວດນັ້ນ
ຈັກສຳເລັດໄດ້ເມື່ອໃດນໍ

[໑໘໔] ເມື່ອໃດ ເຮົາຈຶ່ງຈັກລະບັນລັງຄຳ
ທີ່ລາດດ້ວຍພົມຂົນສັດອັນວິຈິດ ອອກບວດໄດ້
ການລະບັນລັງຄຳປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໑໘໕] ເມື່ອໃດ ເຮົາຈັກລະບັນລັງແກ້ວມະນີ
ທີ່ລາດດ້ວຍພົມຂົນສັດອັນວິຈິດ ອອກບວດໄດ້
ການລະບັນລັງແກ້ວມະນີປານນີ້ອອກບວດນັ້ນ
ຈັກສຳເລັດໄດ້ເມື່ອໃດນໍ

[໑໘໖] ເມື່ອໃດ ເຮົາຈັກລະຜ້າຝ້າຍ ຜ້າໄໝ ຜ້າປ່ານ
ແລະຜ້າຂົນສັດອັນລະອຽດ ອອກບວດໄດ້
ການລະຜ້າປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໑໘໗] ເມື່ອໃດ ເຮົາຈັກລະສະໂບກຂະຣະນີທີ່ອອນຊອນ
ມີນົກຈັກພາກສົ່ງສຽງຮ່ຳຮ້ອງຢູ່
ເດຍລະດາດໄປດ້ວຍດອກມົນທາລົກ ດອກບົວຫຼວງ
ແລະດອກບົວ ອອກບວດໄດ້
ການລະສະໂບກຂະຣະນີປານນີ້ອອກບວດນັ້ນ
ຈັກສຳເລັດໄດ້ເມື່ອໃດນໍ

[໑໘໘] ເມື່ອໃດ ເຮົາຈັກລະກອງຊ້າງພາຍ
ທີ່ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ
ມີສາຍຮັດຄຳ ມີເຄື່ອງປົກກະພອງແລະຕາໜ່າງຄຳ

[໑໖໙] ມີນາຍຄວານຊ້າງຖືໂຕມອນແລະຂໍຂຶ້ນຂີ່ປະຈໍາ ອອກບວດໄດ້
ການລະກອງຊ້າງປານນີ້ອອກບວດນັ້ນຈັກສໍາເລັດໄດ້ເມື່ອໃດນໍ

[໑໗໐] ເມື່ອໃດ ກອງມ້າສິນທົບຊາດອາຊາໄນ[9]
ທີ່ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ ເປັນພາຫະນະໄວ

[໑໗໑] ມີນາຍສາຣະຖີຖືແສ້ແລະຫະນູຂຶ້ນຂີ່ປະຈໍາ ອອກບວດໄດ້
ການລະກອງມ້າປານນີ້ອອກບວດນັ້ນຈັກສໍາເລັດໄດ້ເມື່ອໃດນໍ

[໑໗໔] ເມື່ອໃດ ເຮົາຈັກລະກອງລົດທີ່ຕິດເຄື່ອງຮົບ
ດຶງທຸງໄຊສະເຫຼີມພົນປະຈໍາ ຫຸ້ມດ້ວຍໜັງເສືອເຫຼືອງແລະເສືອໂຄ່ງ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ

[໑໗໓] ມີນາຍສາຣະຖີໃສ່ເກາະຖືທະນູຂຶ້ນຂີ່ປະຈໍາ ອອກບວດໄດ້
ການລະກອງລົດປານນີ້ອອກບວດນັ້ນຈັກສໍາເລັດໄດ້ເມື່ອໃດນໍ

[໑໗໔] ເມື່ອໃດ ເຮົາຈັກລະລົດຄໍາທີ່ຕິດເຄື່ອງຮົບ
ດຶງທຸງໄຊສະເຫຼີມພົນປະຈໍາ ຫຸ້ມດ້ວຍໜັງເສືອເຫຼືອງແລະເສືອໂຄ່ງ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ

[໑໗໕] ມີນາຍສາຣະຖີໃສ່ເກາະຖືທະນູຂຶ້ນຂີ່ປະຈໍາ ອອກບວດໄດ້
ການລະລົດຄໍາປານນີ້ອອກບວດນັ້ນຈັກສໍາເລັດໄດ້ເມື່ອໃດນໍ

[໑໗໖] ເມື່ອໃດ ເຮົາຈັກລະລົດເງິນທີ່ຕິດເຄື່ອງຮົບ
ດຶງທຸງໄຊສະເຫຼີມພົນປະຈໍາ ຫຸ້ມດ້ວຍໜັງເສືອເຫຼືອງແລະເສືອໂຄ່ງ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ

[໑໗໗] ມີນາຍສາຣະຖີໃສ່ເກາະຖືທະນູຂຶ້ນຂີ່ປະຈໍາ ອອກບວດໄດ້
ການລະລົດເງິນປານນີ້ອອກບວດນັ້ນຈັກສໍາເລັດໄດ້ເມື່ອໃດນໍ

[໑໗໘] ເມື່ອໃດ ເຮົາຈັກລະລົດມ້າທີ່ຕິດເຄື່ອງຮົບ
ດຶງທຸງໄຊສະເຫຼີມພົນປະຈໍາ ຫຸ້ມດ້ວຍໜັງເສືອເຫຼືອງແລະເສືອໂຄ່ງ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ

[໑໗໙] ມີນາຍສາຣະຖີໃສ່ເກາະຖືທະນູຂຶ້ນຂີ່ປະຈໍາ ອອກບວດໄດ້
ການລະລົດມ້າປານນີ້ອອກບວດນັ້ນຈັກສໍາເລັດໄດ້ເມື່ອໃດນໍ

[໑໗໐] ເມື່ອໃດ ເຮົາຈັກລະລຶດຫງຸມດ້ວຍອູດທີ່ຕິດເຄື່ອງຮົບ
ດຶງທຸງໄຊສະເຫຼີມພົນປະຈຳ ຫຸ້ມດ້ວຍໜັງເສືອເຫຼືອງແລະເສືອໂຄ່ງ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ

[໑໗໑] ມີນາຍສາຣະຖີໃສ່ເກາະຖືທະນູຂຶ້ນຂີ່ປະຈຳ ອອກບວດໄດ້
ການລະລຶດຫງຸມດ້ວຍອູດປານນີ້ອອກບວດນັ້ນ
ຈັກສຳເລັດໄດ້ເມື່ອໃດນໍ

[໑໗໒] ເມື່ອໃດ ເຮົາຈັກລະລຶດຫງຸມດ້ວຍງົວທີ່ຕິດເຄື່ອງຮົບ
ດຶງທຸງໄຊສະເຫຼີມພົນປະຈຳ ຫຸ້ມດ້ວຍໜັງເສືອເຫຼືອງແລະເສືອໂຄ່ງ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ

[໑໗໓] ມີນາຍສາຣະຖີໃສ່ເກາະຖືທະນູຂຶ້ນຂີ່ປະຈຳ ອອກບວດໄດ້
ການລະລຶດຫງຸມດ້ວຍງົວປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໑໗໔] ເມື່ອໃດ ເຮົາຈັກລະລຶດຫງຸມດ້ວຍແບ້ທີ່ຕິດເຄື່ອງຮົບ
ດຶງທຸງໄຊສະເຫຼີມພົນປະຈຳ ຫຸ້ມດ້ວຍໜັງເສືອເຫຼືອງແລະເສືອໂຄ່ງ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ

[໑໗໕] ມີນາຍສາຣະຖີໃສ່ເກາະຖືທະນູຂຶ້ນຂີ່ປະຈຳ ອອກບວດໄດ້
ການລະລຶດຫງຸມດ້ວຍແບ້ປານນີ້ອອກບວດນັ້ນ
ຈັກສຳເລັດໄດ້ເມື່ອໃດນໍ

[໑໗໖] ເມື່ອໃດ ເຮົາຈັກລະລຶດຫງຸມດ້ວຍແກະທີ່ຕິດເຄື່ອງຮົບ
ດຶງທຸງໄຊສະເຫຼີມພົນປະຈຳ ຫຸ້ມດ້ວຍໜັງເສືອເຫຼືອງແລະເສືອໂຄ່ງ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ

[໑໗໗] ມີນາຍສາຣະຖີໃສ່ເກາະຖືທະນູຂຶ້ນຂີ່ປະຈຳ ອອກບວດໄດ້
ການລະລຶດຫງຸມດ້ວຍແກະປານນີ້ອອກບວດນັ້ນ
ຈັກສຳເລັດໄດ້ເມື່ອໃດນໍ

[໑໗໘] ເມື່ອໃດ ເຮົາຈັກລະລຶດຫງຸມດ້ວຍເນື້ອທີ່ຕິດເຄື່ອງຮົບ
ດຶງທຸງໄຊສະເຫຼີມພົນປະຈຳ ຫຸ້ມດ້ວຍໜັງເສືອເຫຼືອງແລະເສືອໂຄ່ງ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ

[໑໗໙] ມີນາຍສາຣະຖີໃສ່ເກາະຖືທະນູຂຶ້ນຂີ່ປະຈຳ ອອກບວດໄດ້
ການລະລົດທຽມດ້ວຍເນື້ອປານນີ້ອອກບວດນັ້ນ
ຈັກສຳເລັດໄດ້ເມື່ອໃດນໍ

[໑໙໐] ເມື່ອໃດ ເຮົາຈັກລະກອງຊ້າງທີ່ປະດັບ
ດ້ວຍເຄື່ອງປະດັບພ້ອມທັງປວງ ໃສ່ເກາະສີຂຽວ
ແກ່ກ້າ ຖືໂຕມອນແລະຂໍ ອອກບວດໄດ້
ການລະກອງຊ້າງປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໑໙໑] ເມື່ອໃດ ເຮົາຈັກລະກອງມ້າທີ່ປະດັບ
ດ້ວຍເຄື່ອງປະດັບພ້ອມທັງປວງ ໃສ່ເກາະສີຂຽວ
ແກ່ກ້າ ສະພາຍທະນູແລະແລ່ງ ອອກບວດໄດ້
ການລະກອງມ້າປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໑໙໒] ເມື່ອໃດ ເຮົາຈຶ່ງຈັກລະກອງລົດທີ່ປະດັບ
ດ້ວຍເຄື່ອງປະດັບພ້ອມທັງປວງ ໃສ່ເກາະສີຂຽວ
ແກ່ກ້າ ສະພາຍທະນູແລະແລ່ງ ອອກບວດໄດ້
ການລະກອງລົດປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໑໙໓] ເມື່ອໃດ ເຮົາຈັກລະກອງທະນູທີ່ປະດັບ
ດ້ວຍເຄື່ອງປະດັບພ້ອມທັງປວງ ໃສ່ເກາະສີຂຽວ
ແກ່ກ້າ ຖືທະນູແລະແລ່ງ ອອກບວດໄດ້
ການລະກອງທະນູປານນີ້ອອກບວດນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໑໙໔] ເມື່ອໃດ ເຮົາຈັກລະພວກຣາດຊະບຸຣຸດຜູ້ປະດັບ
ດ້ວຍເຄື່ອງປະດັບພ້ອມທັງປວງ ໃສ່ເກາະອັນວິຈິດ
ແກ່ກ້າ ເໜັບກູດຄຳ ອອກບວດໄດ້
ການລະພວກຣາດຊະບຸຣຸດປານນີ້ອອກບວດນັ້ນ
ຈັກສຳເລັດໄດ້ເມື່ອໃດນໍ

[໑໙໕] ເມື່ອໃດ ເຮົາຈັກລະໝູ່ພາມຜູ້ພ່ຳເພັງພິດ
ປະດັບຕົກແຕ່ງແລ້ວ ທາໂຕດ້ວຍກະແຈະຈັນເຫຼືອງ
ຄອງຜ້າກາສິກພັດເນື້ອດີ ອອກບວດໄດ້
ການລະໝູ່ພາມປານນີ້ອອກບວດນັ້ນ
ຈັກສຳເລັດໄດ້ເມື່ອໃດນໍ

[໑໙໖]	ເມື່ອໃດ ເຮົາຈັກລະໝູ່ອຳມາດຜູ້ປະດັບ
ດ້ວຍເຄື່ອງປະດັບພ້ອມທັງປວງ
ໃສ່ເກາະສີເຫຼືອງ ແກ່ກ້າ
ຍ່າງໄປທາງໜ້າມີລະບຽບຮຽບຮ້ອຍດີ ອອກບວດໄດ້
ການລະໝູ່ອຳມາດປານນີ້ອອກບວດນັ້ນ
ຈັກສຳເລັດໄດ້ເມື່ອໃດນໍ

[໑໙໗]	ເມື່ອໃດ ເຮົາຈັກລະພຣະສະໜົມກຳນັນໃນ ໗໐໐ ນາງ
ຜູ້ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ ອອກບວດໄດ້
ການລະພຣະສະໜົມກຳນັນໃນປານນີ້ອອກບວດນັ້ນ
ຈັກສຳເລັດໄດ້ເມື່ອໃດນໍ

[໑໙໘]	ເມື່ອໃດ ເຮົາຈັກລະພຣະສະໜົມກຳນັນໃນ ໗໐໐ ນາງ
ຜູ້ລະມຸນລະໄມສະໂອດສະອົງ ອອກບວດໄດ້
ການລະພຣະສະໜົມກຳນັນໃນປານນີ້ອອກບວດນັ້ນ
ຈັກສຳເລັດໄດ້ເມື່ອໃດນໍ

[໑໙໙]	ເມື່ອໃດ ເຮົາຈັກລະພຣະສະໜົມກຳນັນໃນ ໗໐໐ ນາງ
ຜູ້ເຊື່ອຟັງ ເວົ້າມ່ວນ ອອກບວດໄດ້
ການລະພຣະສະໜົມກຳນັນໃນຜູ້ໜ້າຮັກປານນີ້ອອກບວດນັ້ນ
ຈັກສຳເລັດໄດ້ເມື່ອໃດນໍ

[໔໐໐]	ເມື່ອໃດ ເຮົາຈັກລະຖາດຄຳໜັກປະມານ ໑໐໐ ປະລະ
ຈຳຫຼັກລວດລາຍເປັນຮ້ອຍ ອອກບວດໄດ້
ການລະຖາດຄຳປານນີ້ອອກບວດນັ້ນ
ຈັກສຳເລັດໄດ້ເມື່ອໃດນໍ

[໔໐໑]	ເມື່ອໃດ ກອງຊ້າງພາຍທີ່ປະດັບ
ດ້ວຍເຄື່ອງປະດັບພ້ອມທັງປວງ ມີສາຍຮັດຄຳ
ມີເຄື່ອງປົກກະພອງແລະຕາໜ່າງຄຳ

[໔໐໔]	ມີນາຍຄວນຊ້າງຖືໂຕມອນແລະຂໍຂຶ້ນຂີ່ປະຈຳ
ທີ່ເຄີຍຂີ່ຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໐໓]	ເມື່ອໃດ ກອງມ້າສິນທົບຊາດອາຊາໄນ
ທີ່ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ ເປັນພາຫະນະໄວ

[໔໐໔]	ມີນາຍສາຣະຖີຖືແສ້ແລະທະນູຂຶ້ນຂີ່ປະຈຳ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໐໕]	ເມື່ອໃດ ກອງລົດທີ່ຕິດເຄື່ອງຮົບ ດຶງທຸງໄຊສະເຫຼີມພົນປະຈຳ
ຫຸ້ມດ້ວຍໜັງເສືອເຫຼືອງແລະເສືອໂຄ່ງ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ

[໔໐໖]	ມີນາຍສາຣະຖີໃສ່ເກາະຖືທະນູຂຶ້ນຂັບຂີ່ປະຈຳ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໐໗]	ເມື່ອໃດ ລົດຄຳທີ່ຕິດເຄື່ອງຮົບ ດຶງທຸງໄຊສະເຫຼີມພົນປະຈຳ
ຫຸ້ມດ້ວຍໜັງເສືອເຫຼືອງແລະເສືອໂຄ່ງ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ

[໔໐໘]	ມີນາຍສາຣະຖີໃສ່ເກາະຖືທະນູຂຶ້ນຂັບຂີ່ປະຈຳ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໐໙]	ເມື່ອໃດ ລົດເງິນທີ່ຕິດເຄື່ອງຮົບ ດຶງທຸງໄຊສະເຫຼີມພົນປະຈຳ
ຫຸ້ມດ້ວຍໜັງເສືອເຫຼືອງແລະເສືອໂຄ່ງ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ

[໔໑໐]	ມີນາຍສາຣະຖີໃສ່ເກາະຖືທະນູຂຶ້ນຂັບຂີ່ປະຈຳ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໑໑]	ເມື່ອໃດ ລົດມ້າທີ່ຕິດເຄື່ອງຮົບ ດຶງທຸງໄຊສະເຫຼີມພົນປະຈຳ
ຫຸ້ມດ້ວຍໜັງເສືອເຫຼືອງແລະເສືອໂຄ່ງ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ

[໔໑໔] ມີນາຍສາຣະຖີໃສ່ເກາະຖືທະນູຂຶ້ນຂັບຂີ່ປະຈຳ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໑໕] ເມື່ອໃດ ລົດທຽມດ້ວຍອູດທີ່ຕິດເຄື່ອງຮົບ ດີງທຸງໄຊສະເຫຼີມພົນປະຈຳ
ຫຸ້ມດ້ວຍໜັງເສືອເຫຼືອງແລະເສືອໂຄ່ງ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ

[໔໑໖] ມີນາຍສາຣະຖີໃສ່ເກາະຖືທະນູຂຶ້ນຂັບຂີ່ປະຈຳ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໑໗] ເມື່ອໃດ ລົດທຽມດ້ວຍງົວທີ່ຕິດເຄື່ອງຮົບ ດີງທຸງໄຊສະເຫຼີມພົນປະຈຳ
ຫຸ້ມດ້ວຍໜັງເສືອເຫຼືອງແລະເສືອໂຄ່ງ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ

[໔໑໘] ມີນາຍສາຣະຖີໃສ່ເກາະຖືທະນູຂຶ້ນຂັບຂີ່ປະຈຳ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໑໙] ເມື່ອໃດ ລົດທຽມດ້ວຍແບ້ທີ່ຕິດເຄື່ອງຮົບ ດີງທຸງໄຊສະເຫຼີມພົນປະຈຳ
ຫຸ້ມດ້ວຍໜັງເສືອເຫຼືອງແລະເສືອໂຄ່ງ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ

[໔໒໐] ມີນາຍສາຣະຖີໃສ່ເກາະຖືທະນູຂຶ້ນຂັບຂີ່ປະຈຳ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໒໑] ເມື່ອໃດ ລົດທຽມດ້ວຍແກະທີ່ຕິດເຄື່ອງຮົບ
ດີງທຸງໄຊສະເຫຼີມພົນປະຈຳ
ຫຸ້ມດ້ວຍໜັງເສືອເຫຼືອງແລະເສືອໂຄ່ງ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ

[໔໒໒] ມີນາຍສາຣະຖີໃສ່ເກາະຖືທະນູຂຶ້ນຂັບຂີ່ປະຈຳ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໔໑] ເມື່ອໃດ ລົດຫຼຽມດ້ວຍເນື້ອທີ່ຕິດເຄື່ອງຮົບ
ດຶງຫຸງໄຊສະເຫຼີມພົນປະຈຳ
ຫຸ້ມດ້ວຍໜັງເສືອເຫຼືອງແລະເສືອໂຄ່ງ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ

[໔໔໔] ມີນາຍສາຣະຖີໃສ່ເກາະຖືທະນູຂຶ້ນຂັບຂີ່ປະຈຳ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໔໓] ເມື່ອໃດ ກອງຊ້າງທີ່ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ
ໃສ່ເກາະສີຂຽວ ແກ່ກ້າ ຖືໂຕມອນແລະຂໍງ້າວ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໔໔] ເມື່ອໃດ ກອງມ້າທີ່ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ
ໃສ່ເກາະສີຂຽວ ແກ່ກ້າ ຖືແສ້ແລະທະນູ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໔໕] ເມື່ອໃດ ກອງລົດທີ່ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ
ໃສ່ເກາະສີຂຽວ ແກ່ກ້າ ຖືທະນູແລະແລ່ງ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໔໖] ເມື່ອໃດ ກອງທະນູທີ່ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ
ໃສ່ເກາະສີຂຽວ ແກ່ກ້າ ຖືທະນູແລະແລ່ງ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໔໗] ເມື່ອໃດ ພວກຣາດຊະບຸດຜູ້ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ
ໃສ່ເກາະອັນວິຈິດ ແກ່ກ້າ ເໜັບກຼິດຄຳ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໔໗]	ເມື່ອໃດ ໝູ່ພານຜູ້ມີພິດປະດັບແລ້ວ
ທາໂຕດ້ວຍຈຸນຈັນເຫຼືອງ ໃຊ້ຜ້າເນື້ອດີຈາກແຄວັ້ນກາສີ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳລິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໔໙]	ເມື່ອໃດ ໝູ່ອຳມາດຜູ້ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ
ໃສ່ເກາະສີເຫຼືອງ ແກ່ກ້າ
ຍ່າງນຳໄປທາງໜ້າຢ່າງເປັນລະບຽບ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳລິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໕໐]	ເມື່ອໃດ ພຣະສະໜົມກຳນັນໃນ ໗໐໐ ນາງ
ຜູ້ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳລິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໕໑]	ເມື່ອໃດ ພຣະສະໜົມກຳນັນໃນ ໗໐໐ ນາງ
ຜູ້ລະມຸນລະໄມ ສະໂອດສະອົງ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳລິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໕໔]	ເມື່ອໃດ ພຣະສະໜົມກຳນັນໃນ ໗໐໐ ນາງ
ຜູ້ເຊື່ອຟັງ ເຈລະຈາມ່ອນ ໜ້າຮັກ
ທີ່ເຄີຍຕິດຕາມເຮົາ ຈັກບໍ່ຕິດຕາມເຮົາ
ຄວາມດຳລິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໕໕]	ເມື່ອໃດ ເຮົາຈັກໄດ້ແຖຜົມ ຫົ່ມຜ້າສັງຄາຕິ
ອຸ້ມບາດທ່ຽວບິນທະບາດ
ຄວາມດຳລິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໕໒]	ເມື່ອໃດ ເຮົາຈັກຊົງຜ້າສັງຄາຕິທີ່ເຮັດດ້ວຍຜ້າບັງສຸກຸນ
ທີ່ເຂົາຖິ້ມໄວ້ທີ່ຫົນທາງໃຫຍ່
ຄວາມດຳລິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໓໕]	ເມື່ອໃດ ເມື່ອມີຝົນຕົກຫຍອຍຕະຫຼອດ ໆ ນີ້
ເຮົາຈຶ່ງມີຈີວອນປຽກຊຸ່ມທ່ຽວໄປບິນທະບາດ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໓໖]	ເມື່ອໃດ ເຮົາຈັກໄດ້ທ່ຽວຈາຣິກໄປຕາມຕົ້ນໄມ້ນ້ອຍໃຫຍ່
ຕາມປ່ານ້ອຍໃຫຍ່ຕະຫຼອດທັງຄືນແລະວັນ
ໂດຍບໍ່ຕ້ອງຫ່ວງໜ້າພະວົງຫຼັງ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໓໗]	ເມື່ອໃດ ເຮົາຈັກລະຄວາມຢ້ານແລະຄວາມບໍ່ກ້າໄດ້
ໄປທີ່ຮ່ອມພູແລະລຳທານໄດ້ຕາມລຳພັງ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໓໘]	ເມື່ອໃດ ເຮົາຈັກເຮັດຈິດໃຫ້ຊື່ໄດ້ຄືຄົນດີດພິນ
ດີດພິນທັງ ໆ ສາຍໃຫ້ມີສຽງໜ້າອອນຊອນຈັບໃຈ
ຄວາມດຳຣິນັ້ນຈັກສຳເລັດໄດ້ເມື່ອໃດນໍ

[໔໓໙]	ເມື່ອໃດ ເຮົາຈັກຕັດການສັງໂຍດທັງທີ່ເປັນຂອງທິບ
ແລະຂອງມະນຸດໄດ້ຄືຊ່າງໜັງຕັດເກີບໂດຍຮອບ

(ທ້າວພຣະມະຫາຊະນົກຊົງຮຳເພິງແນວນີ້ແລ້ວ ຊົງຖືເພດບັນພະຊາ ສະເດັດລົງຈາກຜາສາດໄປ
ພຣະຜູ້ມີພຣະພາກເຈົ້າຕັດເຖິງສຽງຮ່ຳໄຮຂອງສະຕີເຫຼົ່ານັ້ນວ່າ)

[໔໔໐]	ພຣະສະໜົມກຳນັນໃນ ໗໐໐ ນາງນັ້ນ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ
ຕ່າງປະຄອງແຂນທັງ ໒ ຮ່ຳໄຮວ່າ
ຍ້ອນເຫດໃດ ພຣະອົງຈຶ່ງຊົງລະຖິ້ມພວກຂ້ານ້ອຍ

[໔໔໑]	ພຣະສະໜົມກຳນັນໃນ ໗໐໐ ນາງນັ້ນ
ຜູ້ລະມຸນລະໄມ ສະໂອດສະອົງ
ຕ່າງພາກັນປະຄອງແຂນທັງ ໒ ຮ້ອງຮ່ຳໄຮວ່າ
ຍ້ອນເຫດໃດ ພຣະອົງຈຶ່ງຊົງລະຖິ້ມພວກຂ້ານ້ອຍ

[໔໔໒]	ພຣະສະໜົມກຳນັນໃນ ໗໐໐ ນາງນັ້ນ
ລ້ວນເປັນຜູ້ເຊື່ອຟັງ ເຈລະຈາມ່ວນ ໜ້າຮັກ

ຕ່າງພາກັນປະຄອງແຂນທັງ ໔ ຮ່ຳໄຮວ່າ
ຍ້ອນເຫດໃດ ພຣະອົງຈຶ່ງຊົງລະຖິ້ມພວກຂ້ານ້ອຍສາ

[໔໔໓] ພຣະສະໜົມກຳນັນໃນ ໗໐໐ ນາງນັ້ນ
ປະດັບດ້ວຍເຄື່ອງປະດັບພ້ອມທັງປວງ
ຖືກພຣະຣາຊາຊົງລະຖິ້ມໄວ້ແລ້ວ ສະເດັດດຳເນີນໄປມຸ້ງບວດ

[໔໔໔] ພຣະຣາຊາຊົງລະພຣະສະໜົມກຳນັນໃນ ໗໐໐ ນາງ
ຜູ້ລະມຸນລະໄມ ສະໂອດສະອົງ ສະເດັດດຳເນີນໄປມຸ້ງບວດ

[໔໔໕] ພຣະຣາຊາຊົງລະພຣະສະໜົມກຳນັນໃນ ໗໐໐ ນາງນັ້ນ
ລ້ວນແຕ່ເປັນຜູ້ເຊື່ອຟັງ ເຈລະຈາມ່ວນ ໜ້າຮັກ
ສະເດັດດຳເນີນໄປມຸ້ງບວດ

[໔໔໖] ຊົງລະຖາດຄຳໜັກປະມານ ໑໐໐ ປະລະ
ຈຳຫຼັກລວດລາຍຕັ້ງຮ້ອຍ ຊົງອຸ້ມບາດດິນ
ນັ້ນເປັນການອະພິເສກຄັ້ງທີ ໔

(ພຣະນາງສີວະລີຂາບທູນພຣະໂພທິສັດວ່າ)

[໔໔໗] ແປວໄຟເປັນຕາຢ້ານ ໄໝ້ຫ້ອງພຣະຄັງຕາມລຳດັບ
ຄື ເງິນ ຄຳ ແກ້ວມຸກດາ ແກ້ວໄພທູນຫຼວງຫຼາຍ

[໔໔໘] ແກ້ວມະນີ ຫອຍສັງ ແກ້ວມຸກດາ ຜ້າ ຈັນເຫຼືອງ
ໜັງສັດ ເຄື່ອງງາຊ້າງ ທອງແດງ
ແລະເຫຼັກຫຼວງຫຼາຍທີ່ໄຟໄໝ້
ຂ້າແດ່ ພຣະຣາຊາ ມາເທີ້ນຂ້ານ້ອຍ
ເຊີນພຣະອົງສະເດັດກັບກ່ອນເທີ້ນ
ພຣະຣາດຊະຊັບຂອງພຣະອົງຢ່າໄດ້ພິນາດເສຍຫາຍເລີຍ

(ພຣະໂພທິສັດຕັດວ່າ)

[໔໔໙] ເຮົາຜູ້ບໍ່ມີຄວາມກັງວົນຢູ່ເປັນສຸກສະບາຍດີນໍ
ເມື່ອນະຄອນມິຖິລາຖືກເພີງເຜົາຜານ
ເຮົາບໍ່ໄດ້ມີອັນໃດຈະໄໝ້

(ພຣະນາງສີວະລີຂາບທູນວ່າ)

[໔໕໐] ພວກໂຈນປ່າເກີດຂຶ້ນ ປຸ້ນແຄວ້ນຂອງພຣະອົງ
ມາເທີ້ນພຣະຂ້ານ້ອຍ ຂໍເຊີນພຣະອົງສະເດັດກັບເທີ້ນ
ແຄວ້ນນີ້ຢ່າໄດ້ພິນາດເສຍຫາຍເລີຍ

(ພຣະໂພທິສັດຕັດວ່າ)

[໔໕໑] ເຮົາຜູ້ບໍ່ມີຄວາມກັງວົນຢູ່ເປັນສຸກສະບາຍດີນໍ
ເມື່ອແຄວ້ນຖືກພວກໂຈນປຸ້ນ
ເຮົາບໍ່ໄດ້ມີອັນໃດຈະໃຫ້ປຸ້ນເລີຍ

[໔໕໒] ເຮົາຜູ້ບໍ່ມີຄວາມກັງວົນຢູ່ເປັນສຸກສະບາຍດີນໍ
ເຮົາຈັກມີປີຕິເປັນອາຫານຄືເທົ່າເທບຊັ້ນອາພັດສະຣະພົມ[໑]

(ນາຣະທະດາບົດກ່າວວ່າ)

[໔໕໓] ສຽງອຶກກະທຶກກຶກກ້ອງອັນໃດກັນນັ້ນ
ໃຜກັນນໍຫຼິ້ນກັນຄືຢູ່ໃນເຮືອນ
ທ່ານສະມະນະ ອາດຕະມາພາບຂໍຖາມ
ມະຫາຊົນນັ້ນຕິດຕາມທ່ານມາເພື່ອປະໂຫຍດອັນໃດ

(ພຣະໂພທິສັດຕັດວ່າ)

[໔໕໔] ມະຫາຊົນນີ້ຕິດຕາມຂ້າພະເຈົ້າຜູ້ລະຖິ້ມພວກເຂົາມາໃນບ່ອນນີ້
ຜູ້ລ່ວງເຂດແດນຄືກິເລດໄປ
ເພື່ອບັນລຸເຖິງໂມເນີຍຍະທຳ ຄືຍານຂອງພຣະມຸນີ
ແຕ່ຍັງເຈືອປົນດ້ວຍຄວາມເພີດເພີນທັງຫຼາຍຢູ່
ພຣະຜູ້ເປັນເຈົ້າກໍຮູ້ຢູ່ຈະຖາມໄປເຮັດຫຍັງ

(ນາຣະທະດາບົດກ່າວວ່າ)

[໔໕໕] ພຣະອົງພຽງແຕ່ຊົງສະຣີຣະ (ເພດນັກບວດ) ນີ້
ຢ່າໄດ້ເຂົ້າພຣະຫະໄທວ່າ ເຮົາຂ້າມເຂດແດນຄືກິເລດແລ້ວ
ກຳຄືກິເລດນີ້ຈະເພິ່ງຂ້າມໄດ້ດ້ວຍເພດແຫ່ງບັນພະຊິດກໍບໍ່ມີ
ຍ້ອນອັນຕະລາຍທັງຫຼາຍຍັງມີຢູ່ຫຼາຍ

(ພຣະໂພທິສັດຕັດວ່າ)

[໔໕໖] ອັນຕະລາຍອັນໃດນໍ
ຈະເພິ່ງມີແກ່ຂ້າພະເຈົ້າຜູ້ມີປົກກະຕິຢູ່ຜູ້ດຽວແນວນີ້
ຂ້າພະເຈົ້າບໍ່ປາຖະໜາກາມທັງຫຼາຍທັງໃນປັດຈຸບັນແລະໃນອະນາຄົດ

(ນາຣະທະດາບົດກ່າວວ່າ)

[໔໕໗] ອັນຕະລາຍຫຼວງຫຼາຍນັ້ນແລ
ຄື ຄວາມຫຼັບ ຄວາມຂີ້ຄ້ານ
ຄວາມບິດກາຍ ຄວາມເບື່ອໜ່າຍ
ຄວາມເມົາອາຫານທີ່ມີຢູ່ໃນສະຣີຣະຂອງພຣະອົງ

(ພຣະໂພທິສັດຕັດວ່າ)

[໔໕໘] ທ່ານພາມ ທ່ານພ່ຳສອນຂ້າພະເຈົ້າດີນໍ
ທ່ານພາມຜູມີຣະທຸກ
ຂ້າພະເຈົ້າຂໍຖາມທ່ານ ທ່ານເປັນໃຜນໍ

(ນາຣະທະດາບົດກ່າວວ່າ)

[໔໕໙] ຊົນທັງຫຼາຍຮູ້ຈັກອາດຕະມາພາບໂດຍຊື່ວ່າ ນາຣະທະ
ໂດຍໂຄດວ່າ ກັດສະປະ
ອາດຕະມາພາບມາໃນສຳນັກຂອງພຣະອົງດ້ວຍເຂົ້າໃຈວ່າ
ການສະມາຄົມກັບສັດຕະບຸຣຸດເປັນການດີ

[໔໖໐] ຂໍຄວາມເພີດເພີນແລະວິຫາຣະທຳທັງປວງຈົ່ງມີແກ່ພຣະອົງທີ່ນັ້ນ
ພຣະອົງຈົ່ງພ່ຳເພັງສິ່ງທີ່ບົກພ່ອງໃຫ້ບໍລິບູນເທີ້ນ
ຈົ່ງປະກອບດ້ວຍຄວາມອົດທົນແລະຄວາມສະງົບເທີ້ນ

[໔໖໑] ຈົ່ງຊົງຄີ່ຄາຍຄວາມຍຸບລົງແລະຟູຂຶ້ນ
ຈົ່ງສັກກາຣະກຳ ວິດຊາ ທຳໆ
ແລະສະມະນະທຳແລ້ວພ່ຳເພັງພົມມະຈັນເທີ້ນ

[໔໖໒] ຂ້າແດ່ ພຣະຊະນົກ ພຣະອົງຊົງລະຖິ້ມຊ້າງ ມ້າ
ຊາວພຣະນະຄອນ ແລະຊົນນະບົດຫຼວງຫຼາຍ

ສະເດັດອອກບວດ ຊົງຍິນດີໃນບາດດິນ

[໔໙໓] ຊາວຊົນນະບົດ ມິດ ອຳມາດ ແລະພຣະຍາດເຫຼົ່ານັ້ນ
ໄດ້ທຳຄວາມຜິດອັນໃດໃຫ້ແກ່ພຣະອົງບໍ
ຍ້ອນເຫດໃດ ພຣະອົງຈຶ່ງຊົງພໍພຣະຫະໄທບາດດິນນັ້ນ

(ພຣະໂພທິສັດຕັດວ່າ)

[໔໙໔] ທ່ານລືສີ ຂ້າພະເຈົ້າບໍ່ໄດ້ເຄີຍເອົາຊະນະ
ພຣະຍາດອັນໃດ ໆ ໂດຍສ່ວນດຽວໃນການໃດ ໆ ໂດຍອະທຳເລີຍ
ແມ່ນພຣະຍາດທັງຫຼາຍກໍບໍ່ເຄີຍໄດ້ເອົາຊະນະຂ້າພະເຈົ້າໂດຍອະທຳ

[໔໙໕] ຂ້າພະເຈົ້າໄດ້ເຫັນປະເພນີຂອງໂລກ
ເຫັນໂລກຖືກກິເລດກັດກິນ ຖືກກິເລດເຮັດໃຫ້ເປັນຄືເປືອກຕົມ
ຈຶ່ງໄດ້ເຮັດເຫດນີ້ໃຫ້ເປັນເຄື່ອງປຽບທຽບວ່າ
ປຸຖຸຊົນຈົມຢູ່ໃນກິເລດວັດຖຸໃດ
ສັດເປັນຈຳນວນຫຼາຍຍ່ອມເດືອດຮ້ອນ
ແລະຍ່ອມຖືກຂ້າໃນກິເລດວັດຖຸນັ້ນ
ດັ່ງນີ້ແລ້ວ ຈຶ່ງໄດ້ບວດເປັນພິກຂຸ ທ່ານຜູ້ຄອງໜັງສັດຜູ້ຈະເລີນ

(ນາຣະທະດາບົດກ່າວວ່າ)

[໔໙໖] ໃຜບໍເປັນຜູ້ຈຳແນກແຈກທຳຄຳສັ່ງສອນພຣະອົງ
ຄຳອັນສະອາດນີ້ເປັນຄຳຂອງໃຜ
ທ່ານຜູ້ເປັນຈອມທັບ ຍ້ອນບອກເຈາະຈົງເຖິງດາບົດຜູ້ເປັນກຳມະວາທີ
ຫຼືສະມະນະຄືພຣະປັດເຈກພຸດທະເຈົ້າຜູ້ປະກອບດ້ວຍວິດຊາ
ນັກປາດບໍ່ຮຽກຜູ້ປະພຶດວັດວ່າ ເປັນສະມະນະ
ຄືການກ້າວລ່ວງທຸກໄດ້ເລີຍ

[໔໙໗] ທ່ານຜູ້ຄອງໜັງສັດ
ແມ່ນຂ້າພະເຈົ້າຈະສັກກາຣະສະມະນະຫຼືພາມໂດຍສ່ວນດຽວ
ແຕ່ບໍ່ເຄີຍເຂົ້າໄປໃກ້ໄຕ່ຖາມອັນໃດ ໆ ໃນການໃດ ໆ ເລີຍ

(ພຣະໂພທິສັດຕັດວ່າ)

[໔໕໘] ຂ້າພະເຈົ້າຮຸ່ງເຮືອງດ້ວຍສິຣິໄປສູ່ພຣະຣາດຊະອຸທະຍານ
ດ້ວຍອານຸພາບໃຫຍ່ ຂະນະທີ່ເພງຂັບທີ່ເຂົາຂັບຮ້ອງ
ດົນຕີທີ່ມ່ວນກຳລັງບັນເລງຢູ່

[໔໕໙] ຂ້າພະເຈົ້ານັ້ນໄດ້ເຫັນຕົ້ນໝາກມ່ວງທີ່ກຳລັງມີໜ່ວຍຢູ່ພາຍນອກກຳແພງ
ຖືກພວກມະນຸດຜູ້ທີ່ຕ້ອງການໜ່ວຍຟາດຢູ່
ໃນພຣະຣາດຊະອຸທະຍານອັນກຶກກ້ອງດ້ວຍການເສບດົນຕີ
ປະກອບດ້ວຍຄົນຂັບແລະຄົນປະໂຄມ

[໔໖໐] ຂ້າແດ່ທ່ານຜູ້ຄອງໜັງສັດ
ຂ້າພະເຈົ້ານັ້ນລະຖິ້ມສິຣິນັ້ນສາແລ້ວລົງຈາກຍານ
ເຂົ້າໄປໃກ້ຕົ້ນໝາກມ່ວງທັງທີ່ມີໜ່ວຍແລະບໍ່ມີໜ່ວຍ

[໔໖໑] ຂ້າພະເຈົ້າໄດ້ເຫັນຕົ້ນໝາກມ່ວງ
ອັນມີໜ່ວຍຖືກຟາດກະຈັດກະຈາຍຍ່ອຍຍັບ
ສ່ວນໝາກມ່ວງອີກຕົ້ນໜຶ່ງສີຂຽວຊະອຸ່ມໜ້າພໍໃຈ

[໔໖໒] ສັດຕູທັງຫຼາຍຈັກກຳຈັດແມ່ນພວກເຮົາ
ຜູ້ເປັນອິດສະຫຼະ ຜູ້ມີສັດຕູຫຼາຍ
ຄືຕົ້ນໝາກມ່ວງທີ່ມີໜ່ວຍຖືກມະນຸດທັງຫຼາຍບຽດບຽນແລ້ວ
[໔໖໓] ເສືອເຫຼືອງຖືກຂ້າຍ້ອນໜັງ ຊ້າງຖືກຂ້າຍ້ອນງາ
ຄົນມີຊັບຖືກຂ້າຍ້ອນຊັບ
ໃຜນໍຈັກຂ້າຄົນທີ່ບໍ່ມີບ່ອນຢູ່ ທີ່ບໍ່ມີຄວາມຄຸ້ນເຄີຍ
ຕົ້ນໝາກມ່ວງທີ່ມີໜ່ວຍແລະບໍ່ມີໜ່ວຍທັງ ໒ ຕົ້ນນັ້ນເປັນຄູຂອງຂ້າພະເຈົ້າ

(ພຣະນາງສີວະລີຂາບທູນວ່າ)

[໔໖໔] ຊົນທັງປວງ ຄື ກອງພົນຊ້າງ ກອງພົນມ້າ
ກອງພົນລົດ ກອງພົນຣາບ ຕ່າງກໍຕົກໃຈວ່າ
ພຣະຣາຊາຊົງບວດສາແລ້ວ
[໔໖໕] ຂໍພຣະອົງໄດ້ຊົງປອບຊຸມຊົນໃຫ້ເບົາໃຈ
ຊົງວາງຫຼັກປົກຄອງ
ຊົງອະພິເສກພຣະຣາດຊະໂອຣົດໄວ້ໃນຣາດຊະສົມບັດແລ້ວ
ຈຶ່ງຈັກຊົງບວດໃນພາຍຫຼັງ

(ພຣະໂພທິສັດຕັດວ່າ)

[໔໗໖] ເຮົາໄດ້ສະລະຊາວຊົນນະບົດ ມິດ ອຳມາດ
ແລະພຣະຍາດທັງຫຼາຍແລ້ວ ພຣະຣາດຊະໂອຣົດຂອງຊາວແຄວ້ນວິເທຫະ
ແລະຄົນຜູ້ມີອາຍຸຍືນ ຜູ້ຈັກຜະດຸງຣັດໃຫ້ຈະເລີນກໍມີຢູ່
ທ່ານເຫຼົ່ານັ້ນຈັກຄອງຣາດຊະສົມບັດໃນນະຄອນມິຖິລາດອກ ປະຊາບໍດີ

[໔໗໗] ຈົ່ງມາເທີ້ນ ເຮົາຈະຕາມສອນທ່ານດ້ວຍວາຈາທີ່ຊອບ
ທ່ານຈະໄປສູ່ທຸກຄະຕິດ້ວຍກາຍ ວາຈາ ແລະໃຈ ຍ້ອນບາບໃດ
ເມື່ອທ່ານຄອງຣາດຊະສົມບັດກໍຈັກເຮັດບາບທຸດຈະຣິດນັ້ນຫຼວງຫຼາຍ
[໔໗໘] ຜູ້ທີ່ຍັງອັດຕະພາບໃຫ້ເປັນໄປດ້ວຍກ້ອນເຂົ້າທີ່ຜູ້ອື່ນໃຫ້
ເຊິ່ງສຳເລັດມາແຕ່ຜູ້ອື່ນນີ້ ນັ້ນເປັນທຳຂອງນັກປາດ

(ພຣະນາງສີວະລີຂາບທູນວ່າ)

[໔໗໙] ກຸນລະບຸດຜູ້ສະຫຼາດແມ່ນຄົນໃດບໍ່ເພິ່ງບໍຣິໂພກອາຫານໃນພັດຕະການທີ ໔[1]
ຈະເພິ່ງຕາຍຢ່າງໜ້າອະນາດຍ້ອນຄວາມຫິວ
ກຸນລະບຸດຜູ້ສະຫຼາດນັ້ນກໍບໍ່ເພິ່ງບໍຣິໂພກກ້ອນເຂົ້າ
ທີ່ເປື້ອນຝຸ່ນ ເຊິ່ງບໍ່ດີບໍ່ແມ່ນບໍ
ກິຣິຍາຂອງພຣະອົງນີ້ບໍ່ດີ ບໍ່ງາມເລີຍ
ຂ້າແດ່ ພຣະຊະນົກ ພຣະອົງເພິ່ງສະເຫວີຍກ້ອນຊີ້ນທີ່ເປັນເງື່ອນໝາ

(ພຣະໂພທິສັດຕັດວ່າ)

[໔໘໐] ພຣະນາງສີວະລີ ບິນທະບາດໃດ
ເປັນຂອງອັນບຸກຄົນຜູ້ຄອງເຮືອນ ຫຼືໝາສະລະແລ້ວ
ບິນທະບາດນັ້ນຊື່ວ່າບໍ່ເປັນອາຫານຂອງອາດຕະມາພາບກໍເປັນໄປບໍ່ໄດ້
ຂອງບໍຣິໂພກເຫຼົ່າໃດເຫຼົ່າໜຶ່ງທີ່ໄດ້ມາໂດຍທຳ
ຂອງບໍຣິໂພກທັງໝົດນັ້ນກ່າວກັນວ່າ ບໍ່ມີໂທດ

(ພຣະໂພທິສັດຕັດກັບເດັກຍິງວ່າ)

[໔໘໑] ກຸມາຣິກາຜູ້ນອນແນບມານດາ ຜູ້ປະດັບຢູ່ປະຈຳ
ຍ້ອນເຫດໃດ ກ່ອງແຂນຂ້າງໜຶ່ງຂອງເຈົ້າຈຶ່ງມີສຽງດັງ
ອີກຂ້າງໜຶ່ງບໍ່ມີສຽງດັງ

(ເດັກຍິງຂາບທູນວ່າ)

[໔໗໔] ທ່ານສະມະນະ ກ່ອງແຂນ ໔ ວົງທີ່ໃສ່ຢູ່ທີ່ຂໍ້ມືຂອງຫຼານນີ້
ຍ້ອນທັງ ໔ ວົງກະທົບກັນ ຈຶ່ງເກີດສຽງດັງ
ຄະຕິຂອງຄົນ ໔ ຄົນກໍເປັນແນວນີ້

[໔໗໓] ທ່ານສະມະນະ ກ່ອງແຂນວົງໜຶ່ງທີ່ໃສ່ຢູ່ທີ່ຂໍ້ມືຂອງຫຼານນີ້
ບໍ່ມີອັນທີ ໔ ຈຶ່ງບໍ່ມີສຽງດັງຄືມຸນີສະງົບມິດຢູ່

[໔໗໔] ຄົນມີຄູ່ຈຶ່ງເຖິງຄວາມຜິດຖຽງກັນ ບຸກຄົນຄົນດຽວຈັກຜິດຖຽງກັບໃຜ
ທ່ານນັ້ນເປັນຜູ້ປາຖະໜາສະຫວັນ ກໍຂໍຈົ່ງມັກຄວາມເປັນຜູ້ດຽວເທີ້ນ

(ພຣະໂພທິສັດຕັດກັບພຣະນາງສີວະລີວ່າ)

[໔໗໕] ພຣະນາງສີວະລີ ທ່ານໄດ້ຍິນຄາຖາທີ່ນາງກຸມາຣິກາກ່າວແລ້ວບໍ
ນາງກຸມາຣິກາເປັນສາວໃຊ້ມາຕິຕຽນເຮົາ ມັນເປັນຄະຕິຂອງຄົນຄູ່ທີ່ນັ້ນ
[໔໗໖] ພຣະນາງຜູ້ຈະເລີນ ທາງ ໔ ແຍກນີ້
ເຮົາທັງ ໔ ຜູ້ເດີນທາງໄດ້ສັນຈອນມາແລ້ວ
ບັນດາທາງທັງ ໔ ແຍກນັ້ນ ທ່ານຈົ່ງເລືອກເອົາທາງໜຶ່ງ
ອາດຕະມາພາບກໍຈັກເລືອກເອົາອີກທາງໜຶ່ງ
[໔໗໗] ທ່ານຢ່າຮຽກອາດຕະມາພາບວ່າເປັນພຣະສະວາມີຂອງທ່ານ
ແລະອາດຕະມາພາບກໍຈະບໍ່ຮຽກທ່ານວ່າ
ເປັນພຣະມະເຫສີຂອງອາດຕະມາພາບຕໍ່ໄປ
ເມື່ອກະສັດທັງ ໔ ຕັດຂໍ້ຄວາມນີ້ແລ້ວຕ່າງກໍສະເດັດເຂົ້າໄປສູ່ຖູນະນະຄອນ

[໔໗໗] ເມື່ອຈວນເວລາອາຫານ ພຣະໂພທິສັດປະທັບຢູ່
ທີ່ ຊຸ້ມປະຕູຂອງຊ່າງສອນ ແລະໃນບ່ອນນັ້ນ
ຊ່າງສອນນັ້ນຫຼັບຕາລົງຂ້າງໜຶ່ງເລັງເບິ່ງລູກສອນທີ່ຄົດ
ເຊິ່ງຕົນດັດໃຫ້ຊື່ດ້ວຍຕາອີກຂ້າງໜຶ່ງ

(ພຣະໂພທິສັດຕັດວ່າ)

[໔໗໙] ຊ່າງສອນ ທ່ານຈົ່ງຟັງອາດຕະມາພາບ
ທ່ານເຫັນຄວາມສໍາເລັດປະໂຫຍດບໍນໍ
ທີ່ທ່ານຫຼັບຕາຂ້າງໜຶ່ງລົງ ເລັງເບິ່ງລູກສອນທີ່ຄົດດ້ວຍຕາອີກຂ້າງໜຶ່ງ

(ຊ່າງສອນຂາບທູນວ່າ)

[໘໙໐] ທ່ານສະມະນະ ການເລັງເບິ່ງດ້ວຍຕາທັງ ໒ ຍ່ອມຜາກົດກວ້າງໄປ
ຍ້ອນເຫັນບໍ່ເຖິງສ່ວນທີ່ຄົດຂ້າງໜຶ່ງ ການດັດໃຫ້ກົງຈຶ່ງບໍ່ສຳເລັດ

[໘໙໑] ແຕ່ເມື່ອຫຼັບຕາຂ້າງໜຶ່ງ ເລັງເບິ່ງສ່ວນທີ່ຄົດດ້ວຍຕາຂ້າງໜຶ່ງ
ຍ້ອນເຫັນສ່ວນທີ່ຄົດທາງໜ້າ ການດັດໃຫ້ກົງຈຶ່ງສຳເລັດໄດ້

[໘໙໒] ຄົນທີ່ມີຄູ່ຈຶ່ງຜິດຖຽງກັນ ຄົນດຽວຈັກຜິດຖຽງກັບໃຜ
ທ່ານນັ້ນປາຖະໜາສະຫວັນ ກໍຂໍຈົ່ງມັກຄວາມເປັນຜູ້ດຽວເທີ້ນ

(ພຣະໂພທິສັດຕັດກັບພຣະນາງສີວະລີວ່າ)

[໘໙໓] ພຣະນາງສີວະລີ ທ່ານໄດ້ຍິນຄຳທີ່ຊ່າງສອນກ່າວແລ້ວບໍ
ຄົນໃຊ້ມາຕິຕຽນເຮົາ ນັ້ນເປັນຄະຕິຂອງຄົນຄູ່ທັ່ງນັ້ນ

[໘໙໔] ພຣະນາງຜູ້ຈະເລີນ ທາງ ໒ ແຍກນີ້
ເຮົາທັງ ໒ ຜູ້ເດີນທາງໄດ້ສັນຈອນມາແລ້ວ
ບັນດາທາງ ໒ ແຍກນັ້ນ ທ່ານຈົ່ງເລືອກເອົາທາງໜຶ່ງ
ອາດຕະມາພາບກໍຈັກເລືອກເອົາອີກທາງໜຶ່ງ

[໘໙໕] ທ່ານຢ່າຮຽກອາດຕະມາພາບວ່າເປັນພຣະສະວາມີຂອງທ່ານ
ແລະອາດຕະມາພາບກໍຈະບໍ່ຮຽກທ່ານວ່າ
ເປັນພຣະມະເຫສີຂອງອາດຕະມາພາບຕໍ່ໄປ
ຫຍ້າມຸ້ງກະຕ່າຍເລັກໜ້ອຍຂາດໄປແລ້ວ[១]
ທ່ານຈົ່ງຢູ່ຄົນດຽວເທີ້ນ ພຣະນາງສີວະລີ

**ມະຫາຊະນົກຊາດົກທີ ໒ ຈົບ**

## ໓. ສຸວັນນະສາມະຊາດົກ[១] (໕໔໐)

## ວ່າດ້ວຍສຸວັນນະສາມພໍ່າເພັງເມດຕາປາຣະມີ

(ສຸວັນນະສາມໂພທິສັດບໍ່ທັນເຫັນພຣະຣາຊາ ຈຶ່ງຕັດວ່າ)

[໘໙໖] ໃຜກັນນໍໃຊ້ລູກສອນຍິງເຮົາ

ຜູ້ຜະໝາດ໌ກຳລັງນຳນ້ຳໄປຢູ່
ກະສັດ ພາມ ແພດຄົນໃດຈອບຊຸ່ມຍິງເຮົາ

(ສຸວັນນະສາມໂພທິສັດເມື່ອຈະສະແດງວ່າ ຊີ້ນທີ່ຮ່າງກາຍຂອງຕົນບໍ່ເປັນອາຫານ ຈຶ່ງຕັດວ່າ)

[໔໙໗] ຊີ້ນຂອງເຮົາກໍບໍ່ຄວນຈະກິນ
ໜັງຂອງເຮົາກໍບໍ່ມີປະໂຫຍດ
ເມື່ອເປັນແນວນັ້ນ ຍ້ອນເຫດໃດນໍ
ເຂົາຈຶ່ງເຂົ້າໃຈວ່າ ເຮົາເປັນຜູ້ຄວນຍິງ

(ສຸວັນນະສາມໂພທິສັດຕັດຖາມຊື່ພຣະຣາຊານັ້ນວ່າ)

[໔໙໘] ທ່ານເປັນໃຜ ເປັນບຸດຂອງໃຜ
ເຮົາຈະຮູ້ຈັກທ່ານໄດ້ແນວໃດ
ສະຫາຍ ເຮົາຖາມແລ້ວ ຂໍທ່ານຈົ່ງບອກເທີ້ນ
ເປັນຫຍັງທ່ານຈຶ່ງຊຸ່ມຍິງເຮົາ

(ພຣະເຈົ້າປີລະຍັກຕັດຕອບວ່າ)

[໔໙໙] ເຮົາເປັນພຣະຣາຊາຂອງຊາວກາສີ
ຄົນທັງຫຼາຍຮູ້ຈັກເຮົາວ່າ ພຣະເຈົ້າປີລະຍັກ
ຍ້ອນຄວາມໂລບ ເຮົາຈຶ່ງລະຖິ້ມແຄວ້ນມາທ່ຽວສະແຫວງຫາເນື້ອ

[໕໐໐] ເຮົາເປັນຄົນຊ່ຽວຊານໃນສິລະປະທະນູ
ເລື່ອງລືວ່າ ເປັນຜູ້ມີຄວາມສາມາດຍິງທະນູ
ທີ່ຕ້ອງໃຊ້ກຳລັງຄົນເຖິງ ໑,໐໐໐ ຄົນໄດ້
ແມ່ນຊ້າງທີ່ມາເຖິງໄລຍະທີ່ລູກສອນຍິງກໍບໍ່ເພິ່ງພົ້ນເຮົາໄປໄດ້

(ພຣະເຈົ້າປີລະຍັກຕັດຖາມຊື່ແລະໂຄດຂອງສຸວັນນະສາມໂພທິສັດວ່າ)

[໕໐໑] ທ່ານເປັນໃຜ ເປັນບຸດຂອງໃຜ
ເຮົາຈະຮູ້ຈັກທ່ານໄດ້ແນວໃດ
ທ່ານຈົ່ງປະກາດຊື່ແລະໂຄດຂອງບິດາ
ແລະໂຕຂອງທ່ານເອງໃຫ້ຮູ້ດ້ວຍ

(ສຸວັນນະສາມໂພທິສັດຂາບທູນວ່າ)

[໓໐໘] ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເປັນບຸດຂອງນາຍພານ[១]
ພວກຍາດຕ່າງຮຽກຂ້າພຣະອົງເມື່ອຍັງມີຊີວິດຢູ່ວ່າ ສາມະ
ມື້ນີ້ ຂ້າພຣະອົງນັ້ນເຂົ້າໄປໃນປາກແຫ່ງຄວາມຕາຍ
ຈຶ່ງນອນຢູ່ແນວນີ້

[໓໐໙] ຂ້າພຣະອົງຖືກພຣະອົງຍິງດ້ວຍສອນລູກໃຫຍ່
ອາບຢາພິດຄືຍິງເນື້ອ
ຂ້າແດ່ ພຣະຣາຊາ ຂໍພຣະອົງທອດພຣະເນດຂ້າພຣະອົງ
ຜູ້ນອນເປື້ອນເລືອດຂອງຕົນ

[໓໐໔] ຂໍພຣະອົງໂຜດທອດພຣະເນດລູກສອນທີ່ຊອດອອກຂ້າງຊ້າຍ
ຂ້າພຣະອົງບ້ວນໂລຫິດ ເປັນຜູ້ກະສັບກະສ່າຍ
ຂໍທູນຖາມພຣະອົງວ່າ ເປັນຫຍັງຈຶ່ງຊຸ່ມຍິງຂ້າພຣະອົງ

[໓໐໕] ເສືອເຫຼືອງຖືກຂ້າຍ້ອນໜັງ ຊ້າງຖືກຂ້າຍ້ອນງາ
ເມື່ອເປັນແນວນັ້ນ ຍ້ອນເຫດໃດນໍ
ພຣະອົງຈຶ່ງເຂົ້າພຣະທະໄທວ່າ ຂ້າພຣະອົງເປັນຜູ້ທີ່ຄວນຍິງ

(ພຣະເຈົ້າປີລະຍັກຕັດແກ້ໂຕວ່າ)

[໓໐໖] ເນື້ອຜາກົດມາເຖິງໄລຍະລູກສອນແລ້ວ
ທ່ານສາມະ ມັນເຫັນທ່ານແລ້ວຈຶ່ງແຕກໜີໄປ
ຍ້ອນແນວນັ້ນ ເຮົາຈຶ່ງໂກດ

(ສຸວັນນະສາມໂພທິສັດຂາບທູນວ່າ)

[໓໐໗] ຕັ້ງແຕ່ຂ້າພຣະອົງຈຳຄວາມໄດ້
ຕັ້ງແຕ່ຂ້າພຣະອົງຮູ້ຈັກຮັບຜິດຊອບ
ໝູ່ເນື້ອໃນປ່າແມ່ນຈະເປັນເນື້ອຮ້າຍ
ກໍບໍ່ສະດຸ້ງຢ້ານຂ້າພຣະອົງ

[໓໐໘] ຕັ້ງແຕ່ຂ້າພຣະອົງນຸ່ງເປືອກໄມ້ຢູ່ໃນປະຖົມໄວ
ໝູ່ເນື້ອໃນປ່າແມ່ນຈະເປັນເນື້ອຮ້າຍ
ແຕ່ກໍບໍ່ສະດຸ້ງຢ້ານຂ້າພຣະອົງ

[໓໐໗] ຂ້າແດ່ ພຣະຣາຊາ ຝູງກິນນະຣະຜູ້ຢ້ານກົວທີ່ພູຄັນທະມາດ
ເຮົາທັງຫຼາຍຕ່າງເພີດເພີນພາກັນໄປສູ່ພູແລະປ່າ

[໓໑໐] ໝູ່ເນື້ອແມ່ນຈະເປັນເນື້ອຮ້າຍໃນປ່າ
ກໍບໍ່ສະດຸ້ງຢ້ານຂ້າພຣະອົງ
ເມື່ອເປັນແນວນັ້ນ ຍ້ອນເຫດໃດ
ໝູ່ເນື້ອຈຶ່ງຈະສະດຸ້ງຢ້ານຂ້າພຣະອົງນໍ

(ພຣະເຈົ້າປີລະຍັກໄດ້ສະດັບດັ່ງນັ້ນ ຈຶ່ງຕັດວ່າ)

[໓໑໑] ທ່ານສາມະ ເນື້ອບໍ່ໄດ້ສະດຸ້ງຢ້ານທ່ານ
ເຮົາກ່າວຕົວະແກ່ທ່ານຕ່າງຫາກ
ເຮົາຖືກຄວາມໂກດແລະຄວາມໂລບຄອບງຳ
ຈຶ່ງໄດ້ປ່ອຍລູກສອນນັ້ນໄປເຖິງທ່ານ

[໓໑໒] ສາມະ ທ່ານມາຈາກໃສ ໃຜໃຊ້ທ່ານມາວ່າ
ທ່ານຈົ່ງໄປສູ່ແມ່ນ້ຳມິຄະສຳມະຕາແລ້ວຕັກນ້ຳມາ

(ສຸວັນນະສາມໂພທິສັດໄດ້ອົດກັ້ນທຸກຂະເວທະນາແສນສາຫັດ ຂາບທູນວ່າ)

[໓໑໓] ມານດາບິດາຂອງຂ້າພຣະອົງເປັນຄົນຕາບອດ
ຂ້າພຣະອົງລ້ຽງດູທ່ານທັງ ໒ ນັ້ນຢູ່ໃນປ່າໃຫຍ່
ຂ້າພຣະອົງຈະໄປຕັກນ້ຳມາໃຫ້ທ່ານທັງ ໒ ນັ້ນ
ຈຶ່ງມາຍັງແມ່ນ້ຳມິຄະສຳມະຕາ

(ສຸວັນນະສາມໂພທິສັດກ່າວຈົ່ມເພີ້ຮ່ຳໄຮເຖິງມານດາບິດາວ່າ)

[໓໑໔] ທ່ານທັງ ໒ ນັ້ນມີພຽງອາຫານທີ່ນັ້ນ
ເມື່ອເປັນແນວນັ້ນ ຈະເພິ່ງມີຊີວິດຢູ່ໄດ້ພຽງ ໖ ມື້
ຍ້ອນບໍ່ໄດ້ນ້ຳ ທ່ານຜູ້ຕາບອດທັງ ໒ ເຫັນຈັກຕາຍແນ່

[໓໑໕] ຂ້າພຣະອົງບໍ່ເປັນທຸກ
ຍ້ອນຄວາມທຸກແນວນີ້ ຄົນເພິ່ງໄດ້ຮັບຄືກັນ
ແຕ່ຄວາມທຸກທີ່ຂ້າພຣະອົງບໍ່ໄດ້ພົບມານດາ
ເປັນຄວາມທຸກຢ່າງຍິ່ງຂອງຂ້າພຣະອົງ

[໓໑໖] ຂ້າພຣະອົງບໍ່ເປັນທຸກ
ຍ້ອນຄວາມທຸກແນວນີ້ ຄົນເພິ່ງໄດ້ຮັບຄືກັນ
ແຕ່ຄວາມທຸກທີ່ຂ້າພຣະອົງບໍ່ໄດ້ພົບບິດາ
ເປັນຄວາມທຸກຢ່າງຍິ່ງຂອງຂ້າພຣະອົງ

[໓໑໗] ມານດານັ້ນ ຈະຮ້ອງໄຫ້ຢ່າງໜ້າສົງສານເປັນເວລາດົນ
ຈົນທ່ຽງຄືນ ຫຼືຕະຫຼອດຄືນ ຈະຊູບຊີດລົງ
ຄືແມ່ນ້ຳນ້ອຍໃນລະດູຮ້ອນເຫືອດແຫ້ງໄປ

[໓໑໘] ບິດານັ້ນຈັກເປັນທຸກລຳບາກແນ່ເປັນເວລາດົນ
ຈົນທ່ຽງຄືນ ຫຼືຕະຫຼອດຄືນ ຈະຊູບຊີດລົງ
ຄືແມ່ນ້ຳນ້ອຍໃນລະດູຮ້ອນເຫືອດແຫ້ງໄປ

[໓໑໙] ມານດາແລະບິດາທັງ ໒ ຈັກທ່ຽວຈົ່ມຮຽກຫາຂ້າພຣະອົງວ່າ
ລູກສາມະ ໆ ໃນປ່າໃຫຍ່ ເພື່ອຕ້ອງການບີບນວດຕີນ
ແລະເພື່ອຕ້ອງການບີບນວດມືແລະຕີນດ້ວຍຄວາມພະຍາຍາມ

[໓໒໐] ເຖິງຄວາມໂສກນີ້ເປັນລູກສອນທີ ໒
ເຮັດຫົວໃຈຂອງຂ້າພຣະອົງໃຫ້ສະທ້ານຫວັ່ນໄຫວ
ຄວາມໂສກໃດທີ່ຂ້າພຣະອົງບໍ່ໄດ້ພົບມານດາແລະບິດາທັງ ໒ ຜູ້ຕາບອດ
ຍ້ອນຄວາມໂສກນັ້ນ ຂ້າພຣະອົງເຫັນຈະຕ້ອງເສຍຊີວິດໄປ

(ພຣະເຈົ້າປີລະຍັກຊົງຟັງຄຳເພີ້ຮ່ຳໄຮຂອງສຸວັນນະສາມໂພທິສັດ ຊົງສັນນິດຖານແລ້ວ ຕັດວ່າ)

[໓໒໑] ທ່ານສາມະຜູ້ເຫັນກັນລະຍານະທຳ
ທ່ານຢ່າຮ່ຳໄຮໄປເລີຍ
ເຮົາຈະເຮັດວຽກງານລ້ຽງດູມານດາແລະບິດາຂອງທ່ານໃນປ່າໃຫຍ່

[໓໒໒] ເຮົາເປັນຄົນຊ່ຽວຊານໃນສິລະປະທະນູ ເລື່ອງລືວ່າ
ເປັນຜູ້ມີຄວາມສາມາດຍິງທະນູທີ່ຕ້ອງໃຊ້ກຳລັງຄົນເຖິງ ໑,໐໐໐ ຄົນໄດ້
ເຮົາຈະເຮັດວຽກງານລ້ຽງດູທ່ານທັງ ໒ ໃນປ່າໃຫຍ່

[໓໒໓] ເຮົາຈັກສະແຫວງຫາຂອງທີ່ເປັນເດື່ອນຂອງໝູ່ເນື້ອແລະມູນຜະລາຜົນໃນປ່າ
ຈະເຮັດວຽກລ້ຽງດູທ່ານທັງ ໒ ໃນປ່າໃຫຍ່

[໓໘໔] ທ່ານສາມະ ມານດາແລະບິດາຂອງທ່ານຢູ່ປ່າໃດ
ເຮົາຈະລ້ຽງດູມານດາແລະບິດາຂອງທ່ານ
ໃຫ້ຄືຢ່າງທີ່ທ່ານໄດ້ລ້ຽງດູມາ

(ສຸວັນນະສາມໂພທິສັດຂາບທູນບອກຫົນທາງວ່າ)

[໓໘໕] ຂໍເດຊະ ຫົນທາງທີ່ຍ່າງໄປໄດ້ຄົນດຽວ
ທີ່ມີຢູ່ທາງຫົວຂອງຂ້າພຣະອົງນີ້
ພຣະອົງສະເດັດໄປຈາກບ່ອນນີ້ສິ້ນໄລຍະທາງປະມານເຄິ່ງໂກສະ[໑]
ກໍຈະສະເດັດເຖິງເຮືອນຫຼັງນ້ອຍ ໆ ເຊິ່ງເປັນບ່ອນຢູ່
ຂອງມານດາແລະບິດາທັງ ໒ ຂອງຂ້າພຣະອົງ
ຂໍພຣະອົງສະເດັດໄປຈາກບ່ອນນີ້ແລ້ວ
ຈົ່ງລ້ຽງດູມານດາແລະບິດາຂອງຂ້າພຣະອົງເທີ້ນ

[໓໘໖] ຂ້າແດ່ ພຣະເຈົ້າກາສີ ຂ້າພຣະອົງຂໍຖວາຍບັງຄົມພຣະອົງ
ຂ້າແດ່ ພຣະອົງຜູ້ຜະດຸງຣັດກາສີໃຫ້ຈະເລີນ
ຂ້າພຣະອົງຂໍຖວາຍບັງຄົມພຣະອົງ
ຂໍພຣະອົງໂຜດຊົງພຣະກະລຸນາລ້ຽງດູມານດາແລະບິດາຜູ້ຕາບອດ
ຂອງຂ້າພຣະອົງໃນປ່າໃຫຍ່ດ້ວຍເທີ້ນ

[໓໘໗] ຂ້າແດ່ ພຣະເຈົ້າກາສີ ຂ້າພຣະອົງຂໍປະຄອງອັນຊະລີ
ຖວາຍບັງຄົມພຣະອົງ ຂ້າພຣະອົງຂາບທູນພຣະອົງແລ້ວ
ຂໍໄດ້ໂຜດຊົງພຣະກະລຸນາຕັດບອກການຂາບລາ
ກັບມານດາແລະບິດາຂອງຂ້າພຣະອົງດ້ວຍເທີ້ນ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໓໘໘] ສຸວັນນະສາມຜູ້ໜຸ່ມແໜ້ນເຫັນແກ່ກັນລະຍານະທຳ
ເມື່ອໄດ້ຂາບທູນຄຳນີ້ແລ້ວ ຈຶ່ງວ່າສະຫຼົບເໝືອດໄປຍ້ອນກຳລັງຢາພິດ
[໓໘໙] ພຣະຣາຊານັ້ນຊົງຮ່ຳໄຮເປັນທີ່ໜ້າສົງສານຫຼາຍວ່າ
ເຮົາເຂົ້າໃຈວ່າຈະເປັນຜູ້ບໍ່ແກ່ແລະບໍ່ຕາຍ
ເຮົາໄດ້ເຫັນສາມະບັນດິດຕາຍ
ມື້ນີ້ ຈຶ່ງໄດ້ຮູ້ຄວາມແກ່ແລະຄວາມຕາຍ ແຕ່ກ່ອນບໍ່ໄດ້ຮູ້
ຄວາມຕາຍຈະບໍ່ມາເຖິງເປັນບໍ່ມີ

[໓໓໐] ສາມະບັນດິດຖືກລູກສອນອາບຢາພິດສຽບແທງແລ້ວ
ຕອບໂຕ້ກັບເຮົາຢູ່ແທ້ ໆ ເມື່ອການລ່ວງເລີຍໄປມື້ນີ້ເອງ
ເຂົາເວົ້າອັນໃດ ໆ ບໍ່ໄດ້ເລີຍ

[໓໓໑] ເຮົາຈະຕ້ອງຕົກນະຮົກເປັນແນ່
ໃນຂໍ້ນີ້ເຮົາບໍ່ມີຄວາມສົງໄສ ຍ້ອນໃນເວລານັ້ນ
ເຮົາໄດ້ເຮັດບາບອັນຫຍາບຊ້າໄວ້ຕະຫຼອດຊາຕິດົນ

[໓໓໘] ເມື່ອເຮົານັ້ນຢູ່ໃນບ້ານເມືອງກະທຳກຳຊົ່ວ
ກໍຈະມີຄົນກ່າວຕິຕຽນ
ແຕ່ໃນປ່າຫາຜູ້ຄົນບໍ່ໄດ້ ໃຜນໍຄວນຈະກ່າວຕິຕຽນເຮົາ

[໓໓໓] ຄົນທັງຫຼາຍປະຊຸມກັນໃນເຮືອນ
ຕ່າງກໍເຕືອນກັນແລະກັນໃຫ້ຣະນຶກເຖິງກຳ
ສ່ວນໃນປ່າທີ່ຫາຄົນບໍ່ໄດ້ ໃຜນໍຈະເຕືອນເຮົາໃຫ້ຣະນຶກເຖິງກຳ

[໓໓໔] ນາງເທບທິດາທີ່ພູຄັນທະມາດນັ້ນໄດ້ອັນຕະຣະທານໄປ
ເພື່ອອະນຸເຄາະພຣະຣາຊາ ຈຶ່ງໄດ້ກ່າວຄາຖາເຫຼົ່ານີ້ວ່າ

[໓໓໕] ຂ້າແດ່ ມະຫາຣາດ
ພຣະອົງໄດ້ຊົງເຮັດກຳຊົ່ວອັນໃຫຍ່ຫຼວງແລ້ວ
ມານດາແລະບິດາ ແລະບຸດລວມ ໓ ຄົນຜູ້ຫາຄວາມຜິດບໍ່ໄດ້
ພຣະອົງຊົງຂ້າແລ້ວດ້ວຍລູກສອນລູກດຽວ

[໓໓໖] ເຊີນສະເດັດມາເທີ້ນ ຂ້ານ້ອຍຈະແນະນຳຖວາຍພຣະອົງ
ໂດຍປະການທີ່ພຣະອົງຈະເພິ່ງມີສຸກຄະຕິ ຄື
ພຣະອົງຈົ່ງຊົງລ້ຽງດູທ່ານທັງ ໘ ຜູ້ຕາບອດໃນປ່າໂດຍທຳເທີ້ນ
ເຮົາເຂົ້າໃຈວ່າ ພຣະອົງຈັກເພິ່ງໄປສຸກຄະຕິ

[໓໓໗] ພຣະຣາຊານັ້ນຊົງຮ່ຳໄຮຢ່າງໜ້າສົງສານເວທະນາຍິ່ງ
ຈຶ່ງຊົງຖືເອົາໝໍ້ນ້ຳ ບ່າຍພຣະພັກສະເດັດຫຼີກໄປທາງທິດທັກຂິນ

(ທຸກູລະບັນດິດໄດ້ຍິນສຽງບາດຍ່າງແຫ່ງພຣະເຈົ້າປີລະຍັກ ຈຶ່ງຖາມວ່າ)

[໓໓໘] ນັ້ນສຽງໃຜຍ່າງມາ ນັ້ນບໍ່ແມ່ນສຽງບາດຍ່າງຂອງທ້າວສາມະ
ທ່ານຜູ້ມີຣະທຸກ ທ່ານເປັນໃຜກັນນໍ

[໓໓໙] ຍ້ອນທ້າວສາມະຍ່າງມິດງຽບ ວາງຕີນພຽງ
ນັ້ນບໍ່ແມ່ນສຽງບາດຍ່າງຂອງທ້າວສາມະ
ທ່ານຜູ້ມີຣະທຸກ ທ່ານເປັນໃຜກັນນໍ

(ພຣະເຈົ້າປິລະຍັກປະທັບຢືນຢູ່ທີ່ປະຕູບັນນະສາລາ ຕັດວ່າ)

[໓໔໐] ຂ້າພະເຈົ້າເປັນພຣະຣາຊາຂອງຊາວກາສີ
ຄົນທັງຫຼາຍຮູ້ຈັກຂ້າພະເຈົ້າວ່າ ພຣະເຈົ້າປິລະຍັກ
ຍ້ອນຄວາມໂລບ ຂ້າພະເຈົ້າຈຶ່ງລະຖິ້ມແຄວັ້ນມາທ່ຽວສະແຫວງຫາເນື້ອ

[໓໔໑] ທັງຂ້າພະເຈົ້າເປັນຄົນຊ່ຽວຊານໃນສິລະປະທະນູ ເລື່ອງລືວ່າ
ເປັນຜູ້ມີຄວາມສາມາດຍິງທະນູທີ່ຕ້ອງໃຊ້ກຳລັງຄົນເຖິງ ໑,໐໐໐ ຄົນໄດ້
ແມ່ນຊ້າງທີ່ມາເຖິງໄລຍະລູກສອນຍິງກໍບໍ່ເພິ່ງລອດພົ້ນໄປໄດ້

(ຝ່າຍທຸກູລະບັນດິດເມື່ອຈະເຮັດປະຕິສັນຖານກັບພຣະເຈົ້າປິລະຍັກ ຈຶ່ງທູນວ່າ)

[໓໔໒] ຂ້າແດ່ ມະຫາຣາດ ພຣະອົງສະເດັດມາດີແລ້ວ ບໍ່ໄດ້ສະເດັດມາຮ້າຍ
ພຣະອົງຜູ້ເປັນໃຫຍ່ໄດ້ສະເດັດມາເຖິງແລ້ວ
ຂໍພຣະອົງຈົ່ງຕັດບອກສິ່ງທີ່ຕ້ອງປະສົງເຊິ່ງມີຢູ່ໃນບ່ອນນີ້ເທີ້ນ

[໓໔໓] ຂ້າແດ່ ມະຫາຣາດ ໝາກພັບ ໝາກຫາດ
ໝາກຊາງ ແລະຜົນໝາກເມົ່າເຊິ່ງເປັນໝາກໄມ້ເລັກໜ້ອຍ
ຂໍພຣະອົງຊົງເລືອກສະເຫວີຍແຕ່ທີ່ດີ ໆ ເທີ້ນ

[໓໔໔] ຂ້າແດ່ ມະຫາຣາດ ຂໍເຊີນພຣະອົງຊົງດື່ມນ້ຳເຢັນນີ້
ທີ່ຂ້າພຣະອົງຕັກມາຈາກຮ່ອມພູເທີ້ນ
ຖ້າພຣະອົງຊົງພຣະປະສົງ

(ພຣະເຈົ້າປິລະຍັກຕັດວ່າ)

[໓໔໕] ທ່ານທັງ ໒ ຕາບອດບໍ່ສາມາດຈະເຫັນອັນໃດ ໆ ໃນປ່າໄດ້
ໃຜເດ່ນໍນຳໝາກໄມ້ມາໃຫ້ທ່ານທັງ ໒
ການເກັບສະສົມຜະລາຜົນທີ່ເຮັດໄວ້ຢ່າງຮຽບຮ້ອຍນີ້
ຍ່ອມຜາກົດແກ່ເຮົາຄືການເກັບສະສົມຂອງຄົນຕາບໍ່ບອດ

(ທຸກູລະບັນດິດໄດ້ຟັງພຣະດຳຣັດນັ້ນ ເມື່ອຈະສະແດງທຳ ຈຶ່ງຂາບທູນວ່າ)

[໓໔໖] ສາມະໜຸ່ມນ້ອຍຮ່າງສັນທັດ ຜູ້ເຫັນແກ່ກັນລະຍານະທຳ
ມີຜົມຍາວດຳປອດ ມີປາຍງອນຊ້ອນຂຶ້ນຂ້າງເທິງ

[໓໔໗] ທ່ານນັ້ນແລນຳໝາກໄມ້ມາ
ບັດນີ້ ຖືໝໍ້ນ້ຳຈາກບ່ອນນີ້ໄປຕັກນ້ຳຢູ່ແມ່ນ້ຳ
ເຂົ້າໃຈວ່າໃກ້ຈະກັບແລ້ວ

(ພຣະເຈົ້າປີລະຍັກເມື່ອສະດັບດັ່ງນັ້ນ ຈຶ່ງຕັດວ່າ)

[໓໔໘] ຂ້າພະເຈົ້າໄດ້ຂ້າສາມະກຸມານຜູ້ບຳລຸງປົນນິບັດທ່ານ
ຜູ້ເຫັນແກ່ກັນລະຍານະທຳທີ່ທ່ານກ່າວເຖິງແລ້ວ

[໓໔໙] ເຂົາມີຜົມຍາວດຳປອດ
ມີປາຍງອນຊ້ອນຂຶ້ນຂ້າງເທິງ
ຖືກຂ້າພະເຈົ້າຂ້າແລ້ວ
ນອນຢູ່ທີ່ຫາດຊາຍທີ່ເປິະເປື້ອນໄປດ້ວຍເລືອດ

(ນາງປາຣິກາໄດ້ຟັງພຣະດຳຣັດຂອງພຣະຣາຊາແລ້ວ ປະສົງຈະຮູ້ເຫດ ຈຶ່ງຖາມວ່າ)

[໓໕໐] ທ່ານທຸກູລະບັນດິດ ທ່ານເປີກສາກັບໃຜທີ່ບອກວ່າ
ທ້າວສາມະຖືກຂ້າພະເຈົ້າຂ້າແລ້ວ
ໃຈຂອງເຮົາຍ່ອມຫວັ່ນໄຫວຍ້ອນໄດ້ຂ່າວວ່າ
ທ້າວສາມະຖືກຂ້າແລ້ວ

[໓໕໑] ຍ້ອນໄດ້ຂ່າວວ່າ ພໍ່ສາມະຖືກຂ້າ
ໃຈຂອງເຮົາຍ່ອມຫວັ່ນໄຫວ
ຄືໃບອ່ອນຂອງຕົ້ນອັດສັດຖະພຶກຖືກລົມພັດໄຫວໄປມາ

(ທຸກູລະບັນດິດໃຫ້ໂອວາດນາງປາຣິກາວ່າ)

[໓໕໔] ປາຣິກາ ທ່ານຜູ້ນີ້ຄືພຣະເຈົ້ານະຄອນກາສີ
ພຣະອົງຊົງຍິງທ້າວສາມະດ້ວຍລູກສອນ
ຍ້ອນຄວາມໂກດ ທີ່ຝັ່ງແມ່ນ້ຳມິຄະສຳມະຕາ
ເຮົາທັງ ໔ ຢ່າໄດ້ມຸ້ງຮ້າຍຕໍ່ພຣະອົງເລີຍ

(ນາງປາຣິກາກ່າວວ່າ)

[໓໕໓] ບຸດທີ່ໜ້າຮັກຜູ້ເຊິ່ງໄດ້ລ້ຽງດູເຮົາທັງ ໔ ຄົນ
ຜູ້ຕາບອດໃນປ່າ ເຮົາໄດ້ມາໂດຍຍາກ
ເປັນຫຍັງຈຶ່ງຈະບໍ່ເຮັດຈິດໃຫ້ໂກດ
ໃນຄົນຜູ້ຂ້າບຸດຣະຄົນດຽວນັ້ນນໍ

(ທຸກູລະບັນດິດກ່າວວ່າ)

[໓໕໔] ບຸດທີ່ໜ້າຮັກຜູ້ລ້ຽງດູເຮົາທັງ ໔ ຄົນ
ຜູ້ຕາບອດໃນປ່າ ເຮົາໄດ້ມາໂດຍຍາກ
ບັນດິດທັງຫຼາຍກ່າວວ່າ
ບໍ່ຄວນໂກດໃນຄົນຜູ້ມີບຸດຄົນດຽວນັ້ນ

(ລຳດັບນັ້ນ ພຣະເຈົ້າປີລະຍັກຕັດປອບໂຍນທ່ານທັງ ໔ ນັ້ນວ່າ)

[໓໕໕] ທ່ານທັງ ໔ ຢ່າຮ່ຳໄຮໄປເລີຍ
ຍ້ອນຂ້າພະເຈົ້າກ່າວວ່າ ສາມະກຸມານຖືກຂ້າພະເຈົ້າຂ້າແລ້ວ
ຂ້າພະເຈົ້າຈະເຮັດວຽກງານລ້ຽງດູທ່ານທັງ ໔ ໃນປ່າໃຫຍ່

[໓໕໖] ຂ້າພະເຈົ້າເປັນຜູ້ຊ່ຽວຊານໃນສິລະປະທະນູ ເລື່ອງລືວ່າ
ເປັນຜູ້ມີຄວາມສາມາດຍິງທະນູທີ່ຕ້ອງໃຊ້ກຳລັງຄົນເຖິງ ໑,໐໐໐ ຄົນໄດ້
ຈະເຮັດວຽກງານລ້ຽງດູທ່ານທັງ ໔ ໃນປ່າໃຫຍ່

[໓໕໗] ຂ້າພະເຈົ້າຈັກສະແຫວງຫາຂອງທີ່ເປັນເງື່ອນຂອງໝູ່ເນື້ອ
ແລະມູນຜະລາຜົນໃນປ່າ
ຈະເຮັດວຽກງານລ້ຽງດູທ່ານທັງ ໔ ໃນປ່າໃຫຍ່

(ດາບົດທັງ ໔ ຂາບທູນວ່າ)

[໓໕໘] ຂ້າແດ່ ມະຫາຣາດ ນັ້ນບໍ່ແມ່ນທຳ
ບໍ່ສົມຄວນໃນອາດຕະມາພາບທັງ ໔
ພຣະອົງເປັນພຣະຣາຊາຂອງອາດຕະມາພາບທັງ ໔
ອາດຕະມາພາບທັງຫຼາຍຂໍຖວາຍບັງຄົມພຣະບາດທັງສອງຂອງພຣະອົງ

(ພຣະເຈົ້າປີລະຍັກໄດ້ສະດັບດັ່ງນັ້ນ ຊົງດີພຣະທະໄທຢ່າງຍິ່ງ ຈຶ່ງຕັດວ່າ)

[໓໕໙] ທ່ານຜູ້ມີເຊື້ອຊາດເປັນພານ

ທ່ານກ່າວເປັນທຳ ທ່ານໄດ້ປະພຶດອ່ອນນ້ອມ
ຂໍທ່ານຈົ່ງເປັນບິດາຂອງຂ້າພະເຈົ້າ
ຂ້າແດ່ ນາງປາຣິກາ ຂໍທ່ານຈົ່ງເປັນມານດາຂອງຂ້າພະເຈົ້າ

(ດາບົດທັງ ໔ ນັ້ນປະຄອງອັນຊະລີ ຂາບທູນວ່າ)

[໓໖໐] ຂ້າແດ່ ພຣະເຈົ້າກາສີ ອາດຕະມາພາບທັງ ໔ ຂໍຖວາຍບັງຄົມແດ່ພຣະອົງ
ຂ້າແດ່ ພຣະອົງຜູ້ຜະດຸງຣັດໃຫ້ຈະເລີນແກ່ຊາວກາສີ
ອາດຕະມາພາບທັງຫຼາຍຂໍຖວາຍບັງຄົມແດ່ພຣະອົງ
ອາດຕະມາພາບທັງຫຼາຍຂໍປະຄອງອັນຊະລີແດ່ພຣະອົງຈົນກວ່າພຣະອົງ
ຊົງພາອາດຕະມາພາບທັງຫຼາຍໄປໃຫ້ເຖິງສະຖານທີ່ເຊິ່ງສາມະກຸມານຢູ່

[໓໖໑] ອາດຕະມາພາບທັງ ໔ ເມື່ອໄດ້ລູບຄຳຕີນທັງ ໔
ແລະໃບໜ້າອັນງົດງາມຂອງເຂົາ ຈັກທຸບຕີຕົນໃຫ້ເຖິງຄວາມຕາຍ

(ພຣະເຈົ້າປິລະຍັກໄດ້ຕັດວ່າ)

[໓໖໔] ສາມະກຸມານຖືກຂ້ານອນຕາຍຢູ່ຄືດວງຈັນຕົກດິນ
ໃນປ່າທີ່ໜາແໜ້ນໄປດ້ວຍສັດຮ້າຍ
ເປັນປ່າສູງ ຜາກົດຄືຢູ່ໃນອາກາດ

[໓໖໓] ສາມະກຸມານຖືກຂ້ານອນຕາຍຢູ່ຄືດວງອາທິດຕົກດິນ
ໃນປ່າທີ່ໜາແໜ້ນໄປດ້ວຍສັດຮ້າຍ
ເປັນປ່າສູງ ຜາກົດຄືຢູ່ໃນອາກາດ

[໓໖໔] ສາມະກຸມານຖືກຂ້ານອນຕາຍຢູ່ ເປື້ອນເປິະດ້ວຍຝຸ່ນ
ໃນປ່າທີ່ໜາແໜ້ນດ້ວຍສັດຮ້າຍ
ເປັນປ່າສູງ ຜາກົດຄືຢູ່ໃນອາກາດ

[໓໖໕] ສາມະກຸມານຖືກຂ້ານອນຕາຍຢູ່
ໃນປ່າທີ່ໜາແໜ້ນໄປດ້ວຍສັດຮ້າຍ
ເປັນປ່າສູງຜາກົດຄືຢູ່ໃນອາກາດ
ຂໍທ່ານທັງ ໔ ຈົ່ງຢູ່ໃນອາສົມທີ່ພັກນີ້ທີ່ນັ້ນເທີ້ນ

(ລຳດັບນັ້ນ ດາບົດທັງ ໔ ນັ້ນເມື່ອສະແດງວ່າຕົນບໍ່ຢ້ານຕໍ່ສັດຮ້າຍ ຈຶ່ງຂາບທູນວ່າ)

[໓໒໒] ຖ້າໃນປ່ານັ້ນ ຈະມີສັດຮ້າຍຕັ້ງຮ້ອຍ ຕັ້ງພັນ ແລະຕັ້ງໝື່ນ
ອາດຕະມາພາບທັງ ໔ ບໍ່ມີຄວາມຢ້ານ
ໃນສັດຮ້າຍທັງຫຼາຍໃນປ່າໃດ ໆ ເລີຍ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໓໒໗] ລຳດັບນັ້ນ ພຣະເຈົ້າກາສີຊົງພາລືສີທັງ ໔
ຜູ້ຕາບອດໄປໃນປ່າໃຫຍ່
ຈູງມືລືສີທັງ ໔ ໄປໃນບ່ອນທີ່ສາມະກຸມານຖືກຂ້າແລ້ວ

[໓໒໘] ດາບົດທັງ ໔ ເຫັນສາມະກຸມານຜູ້ເປັນບຸດນອນເປື້ອນຝຸ່ນ
ຖືກຖິ້ມໄວ້ໃນປ່າໃຫຍ່ຄືດວງຈັນຕົກດິນ

[໓໒໙] ດາບົດທັງ ໔ ເຫັນສາມະກຸມານຜູ້ເປັນບຸດນອນເປື້ອນຝຸ່ນ
ຖືກຖິ້ມໄວ້ໃນປ່າໃຫຍ່ຄືດວງອາທິດຕົກດິນ

[໓໗໐] ດາບົດທັງ ໔ ເຫັນສາມະກຸມານຜູ້ເປັນບຸດນອນເປື້ອນຝຸ່ນ
ຖືກຖິ້ມໄວ້ໃນປ່າໃຫຍ່ ກໍຮ່ຳໄຮຢ່າງໜ້າສົງສານ

[໓໗໑] ດາບົດທັງ ໔ ເຫັນສາມະກຸມານຜູ້ເປັນບຸດນອນເປື້ອນຝຸ່ນ
ຈຶ່ງປະຄອງແຂນທັງ ໔ ຂ້າງ ຮ່ຳໄຮວ່າ ຊາວເຮົາເອີຍ
ໄດ້ຮູ້ວ່າ ມື້ນີ້ ຄວາມບໍ່ເປັນທຳກຳລັງເປັນໄປໃນໂລກນີ້

[໓໗໔] ລູກສາມະຜູ້ມີຮູບສະງ່າງາມ ເຈົ້າຜະໝາດໂພດແລ້ວ
ໃນມື້ນີ້ເມື່ອການເວລາລ່ວງໄປ ເຈົ້າບໍ່ໄດ້ເວົ້າອັນໃດເລີຍ

[໓໗໓] ລູກສາມະຜູ້ມີຮູບສະງ່າງາມ ເຈົ້າໂງ່ໄປໂພດແລ້ວ
ໃນມື້ນີ້ເມື່ອການເວລາລ່ວງໄປ ເຈົ້າບໍ່ໄດ້ເວົ້າອັນໃດເລີຍ

[໓໗໔] ລູກສາມະຜູ້ມີຮູບສະງ່າງາມ ເຈົ້າໂກດເຄືອງໄປໂພດແລ້ວ
ໃນມື້ນີ້ເມື່ອການເວລາລ່ວງໄປ ເຈົ້າບໍ່ໄດ້ເວົ້າອັນໃດເລີຍ

[໓໗໕] ລູກສາມະຜູ້ມີຮູບສະງ່າງາມ ເຈົ້າເປັນຜູ້ມັກຫຼັບໄປໂພດແລ້ວ
ໃນມື້ນີ້ເມື່ອການເວລາລ່ວງໄປ ເຈົ້າບໍ່ໄດ້ເວົ້າອັນໃດເລີຍ

[໓໗໖] ລູກສາມະຜູ້ມີຮູບສະງ່າງາມ ເຈົ້າຊ່າງເປັນຄົນປາສະຈາກນ້ຳໃຈໂພດແທ້
ໃນມື້ນີ້ເມື່ອການເວລາລ່ວງໄປ ເຈົ້າບໍ່ໄດ້ເວົ້າອັນໃດເລີຍ

[໓໗໗] ລູກສາມະຜູ້ບຳລຸງລ້ຽງດູເຮົາທັງ ໒ ຜູ້ຕາບອດນີ້ມາຕາຍສາແລ້ວ
ບັດນີ້ ໃຜນໍຈັກຊຳຣະຊະດາທີ່ໝົ່ນໝອງເປື້ອນຝຸ່ນ

[໓໗໘] ລູກສາມະຜູ້ບຳລຸງລ້ຽງດູເຮົາທັງ ໒ ຜູ້ຕາບອດນີ້ມາຕາຍແລ້ວ
ບັດນີ້ ໃຜນໍຈັກຈັບໄມ້ກວາດແລ້ວກວາດອາສົມຂອງເຮົາທັງ ໒

[໓໗໙] ລູກສາມະຜູ້ບຳລຸງລ້ຽງດູເຮົາທັງ ໒ ຜູ້ຕາບອດນີ້ມາຕາຍແລ້ວ
ບັດນີ້ ໃຜນໍຈັກນຳນ້ຳເຢັນນ້ຳຮ້ອນມາໃຫ້ເຮົາທັງ ໒ ອາບ

[໓໘໐] ລູກສາມະຜູ້ບຳລຸງລ້ຽງດູເຮົາທັງ ໒ ຜູ້ຕາບອດນີ້ມາຕາຍແລ້ວ
ບັດນີ້ ໃຜນໍຈັກໃຫ້ເຮົາທັງ ໒ ບໍຣິໂພກມູນຜະລາໝາກໄມ້ໃນປ່າ

[໓໘໑] ມານດາໄດ້ເຫັນສາມະກຸມານຜູ້ເປັນບຸດລົ້ມເປື້ອນຝຸ່ນຢູ່
ເປັນຜູ້ແໜ້ນຫົວອົກຍ້ອນຄວາມໂສກເຖິງບຸດ ຈຶ່ງໄດ້ກ່າວສັດຈະອາຈາວ່າ

[໓໘໒] ລູກສາມະນີ້ໄດ້ເຄີຍມີປົກກະຕິປະພຶດທຳມາກ່ອນ
ດ້ວຍສັດຈະອາຈານີ້ ຂໍພິດຂອງລູກສາມະຈົ່ງເສື່ອມຫາຍໄປ

[໓໘໓] ລູກສາມະນີ້ມີປົກກະຕິປະພຶດພົມມະຈັນມາກ່ອນ
ດ້ວຍສັດຈະອາຈານີ້ ຂໍພິດຂອງລູກສາມະຈົ່ງເສື່ອມຫາຍໄປ

[໓໘໔] ລູກສາມະນີ້ໄດ້ເຄີຍມີປົກກະຕິກ່າວຄຳສັດມາກ່ອນ
ດ້ວຍສັດຈະອາຈານີ້ ຂໍພິດຂອງລູກສາມະຈົ່ງເສື່ອມຫາຍໄປ

[໓໘໕] ລູກສາມະນີ້ໄດ້ເປັນຜູ້ລ້ຽງມານດາແລະບິດາ
ດ້ວຍສັດຈະອາຈານີ້ ຂໍພິດຂອງລູກສາມະຈົ່ງເສື່ອມຫາຍໄປ

[໓໘໖] ລູກສາມະນີ້ໄດ້ເປັນຜູ້ນອບນ້ອມຕໍ່ຜູ້ໃຫຍ່ໃນຕະກູນ
ດ້ວຍສັດຈະອາຈານີ້ ຂໍພິດຂອງລູກສາມະຈົ່ງເສື່ອມຫາຍໄປ

[໓໘໗] ລູກສາມະນີ້ເປັນທີ່ຮັກຍິ່ງກວ່າຊີວິດຂອງເຮົາ
ດ້ວຍສັດຈະອາຈານີ້ ຂໍພິດຂອງລູກສາມະຈົ່ງເສື່ອມຫາຍໄປ

[໓໘໘] ບຸນແນວໃດແນວໜຶ່ງທີ່ລູກສາມະເຮັດແລ້ວແກ່ເຮົາແລະບິດາຂອງເຂົາ
ດ້ວຍກຸສົນນັ້ນທັງໝົດ ຂໍພິດຂອງລູກສາມະຈົ່ງເສື່ອມຫາຍໄປ

[໓໘໙] ບິດາໄດ້ເຫັນສາມະກຸມານຜູ້ເປັນບຸດລົ້ມເປື້ອນຝຸ່ນຢູ່
ເປັນຜູ້ແໜ້ນຫົວອົກຍ້ອນຄວາມໂສກເຖິງບຸດ ຈຶ່ງໄດ້ກ່າວສັດຈະອາຈາວ່າ

[໓໙໐] ລູກສາມະນີ້ໄດ້ເຄີຍເປັນຜູ້ມີປົກກະຕິປະພຶດທຳມາກ່ອນ
ດ້ວຍສັດຈະວາຈານີ້ ຂໍພິດຂອງລູກສາມະຈົ່ງເສື່ອມຫາຍໄປ

[໓໙໑] ລູກສາມະນີ້ມີປົກກະຕິປະພຶດພົມມະຈັນມາກ່ອນ
ດ້ວຍສັດຈະວາຈານີ້ ຂໍພິດຂອງລູກສາມະຈົ່ງເສື່ອມຫາຍໄປ

[໓໙໒] ລູກສາມະນີ້ມີປົກກະຕິກ່າວຄຳສັດມາກ່ອນ
ດ້ວຍສັດຈະວາຈານີ້ ຂໍພິດຂອງລູກສາມະຈົ່ງເສື່ອມຫາຍໄປ

[໓໙໓] ລູກສາມະນີ້ໄດ້ເປັນຜູ້ລ້ຽງມານດາແລະບິດາ
ດ້ວຍສັດຈະວາຈານີ້ ຂໍພິດຂອງລູກສາມະຈົ່ງເສື່ອມຫາຍໄປ

[໓໙໔] ລູກສາມະນີ້ໄດ້ເປັນຜູ້ນອບນ້ອມຕໍ່ຜູ້ໃຫຍ່ໃນຕະກູນ
ດ້ວຍສັດຈະວາຈານີ້ ຂໍພິດຂອງລູກສາມະຈົ່ງເສື່ອມຫາຍໄປ

[໓໙໕] ລູກສາມະນີ້ເປັນທີ່ຮັກຍິ່ງກວ່າຊີວິດຂອງເຮົາ
ດ້ວຍສັດຈະວາຈານີ້ ຂໍພິດຂອງລູກສາມະຈົ່ງເສື່ອມຫາຍໄປ

[໓໙໖] ບຸນແນວໃດແນວໜຶ່ງທີ່ລູກສາມະເຮັດແລ້ວແກ່ເຮົາແລະມານດາຂອງເຂົາ
ດ້ວຍກຸສົນນັ້ນທັງໝົດ ຂໍພິດຂອງລູກສາມະຈົ່ງເສື່ອມຫາຍໄປ

[໓໙໗] ນາງເທບທິດາທີ່ພູຄັນທະມາດນັ້ນໄດ້ອັນຕະຣະທານໄປ
ດ້ວຍຄວາມອະນຸເຄາະສາມະກຸມານ ຈຶ່ງໄດ້ກ່າວສັດຈະວາຈານີ້ວ່າ

[໓໙໘] ເຮົາຢູ່ທີ່ພູຄັນທະມາດມາດົນ
ບໍ່ມີຄົນອື່ນ ຈະເປັນໃຜກໍຕາມ
ເປັນທີ່ຮັກຂອງເຮົາຍິ່ງກວ່າສາມະກຸມານ
ດ້ວຍສັດຈະວາຈານີ້ ຂໍພິດຂອງສາມະກຸມານຈົ່ງເສື່ອມຫາຍໄປ

[໓໙໙] ຕົ້ນໄມ້ທັງໝົດທີ່ພູຄັນທະມາດລ້ວນແຕ່ເປັນໄມ້ຫອມ
ດ້ວຍສັດຈະວາຈານີ້ ຂໍພິດຂອງສາມະກຸມານຈົ່ງເສື່ອມຫາຍໄປ

[໔໐໐] ເມື່ອດາບົດທັງ ໒ ກຳລັງຈົ່ມພໍ່າຮ່ຳໄຮຢ່າງໜ້າສົງສານເຫຼືອຄະນາ
ສາມະກຸມານຜູ້ຍັງເປັນໜຸ່ມແໜ້ນມີຮູບສະງ່າງາມ ກໍໄດ້ລຸກຂຶ້ນທັນທີ

(ລຳດັບນັ້ນ ສຸວັນນະສາມໂພທິສັດໄດ້ກ່າວກັບທ່ານເຫຼົ່ານັ້ນວ່າ)

[໔໐໑]	ຂ້າພະເຈົ້າເປັນຜູ້ຊື່ວ່າສາມະ
ຂໍຄວາມສຸກຄວາມຈະເລີນຈົ່ງມີແກ່ທ່ານທັງຫຼາຍ
ຂ້າພະເຈົ້າລຸກຂຶ້ນໄດ້ແລ້ວໂດຍຄວາມໂດຍປອດໄພ
ຂໍທ່ານທັງຫຼາຍຈົ່ງຢ່າຮ່ຳໄຮໄປເລີຍ
ຈົ່ງເວົ້າກັບຂ້າພະເຈົ້າດ້ວຍສຽງອັນມ່ອນເທີ້ນ

(ລຳດັບນັ້ນ ສຸວັນນະສາມໂພທິສັດເຫັນພຣະຣາຊາ ຈຶ່ງຂາບທູນວ່າ)

[໔໐໒]	ຂ້າແດ່ ມະຫາຣາດ ພຣະອົງໄດ້ສະເດັດມາດີແລ້ວ ບໍ່ໄດ້ສະເດັດມາຮ້າຍ
ພຣະອົງຜູ້ເປັນໃຫຍ່ສະເດັດມາເຖິງແລ້ວ
ຂໍຈົ່ງຊົງຮູ້ສິ່ງທີ່ມີຢູ່ໃນບ່ອນນີ້ເທີ້ນ

[໔໐໓]	ຂ້າແດ່ ພຣະຣາຊາ ຂໍເຊີນເລືອກສະເຫວີຍໝາກພັບ
ໝາກຊາງ ແລະໝາກເມົ່າ
ເຊິ່ງເປັນໝາກໄມ້ເລັກໜ້ອຍເອົາແຕ່ໜ່ວຍທີ່ດີ ໆ ເທີ້ນ

[໔໐໔]	ນ້ຳໃສເຢັນຂ້າພຣະອົງຕັກມາຈາກຮ່ອມພູກໍມີຢູ່
ຈົ່ງໂຜດສະເຫວີຍຈາກນັ້ນເທີ້ນ ຂ້ານ້ອຍ
ຖ້າພຣະອົງຊົງພຣະປະສົງ

(ພຣະເຈົ້າປີລະຍັກຊົງເຫັນຄວາມອັດສະຈັນນັ້ນແລ້ວ ຈຶ່ງຕັດວ່າ)

[໔໐໕]	ເຮົາງຸນງົງໄປໝົດ ຫຼົງໄປທົ່ວທຸກທິດ
ເຮົາໄດ້ເຫັນສາມະຕາຍໄປແລ້ວ
ທ່ານສາມະ ເປັນຫຍັງນໍ ທ່ານຈຶ່ງກັບຟື້ນຊີວິດຄືນມາໄດ້

(ສຸວັນນະສາມໂພທິສັດທູນວ່າ)

[໔໐໖]	ຂ້າແດ່ ມະຫາຣາດ ບຸຣຸດຜູ້ມີຊີວິດຢູ່
ແຕ່ມີເວທະນາຫຼາຍ ປາສະຈາກຄວາມຮູ້ສຶກ໌
ແມ່ນຍັງມີຊີວິດຢູ່ ຊາວໂລກກໍເຂົ້າໃຈວ່າ ຕາຍແລ້ວ

[໔໐໗]	ຂ້າແດ່ ມະຫາຣາດ ບຸຣຸດຜູ້ມີຊີວິດຢູ່
ແຕ່ມີເວທະນາຫຼາຍ ເຖິງຄວາມດັບເຢັນ
ແມ່ນຍັງມີຊີວິດຢູ່ ຊາວໂລກກໍເຂົ້າໃຈວ່າ ຕາຍແລ້ວ

(ສຸວັນນະສາມໂພທິສັດສະແດງທຳແກ່ພຣະເຈົ້າປີລະຍັກວ່າ)

[໔໐໗] ບຸກຄົນໃດລ້ຽງດູມານດາແລະບິດາໂດຍທຳ
ແມ່ນເທວະດາກໍບຳລຸງຮັກສາບຸກຄົນຜູ້ລ້ຽງດູມານດາແລະບິດານັ້ນ

[໔໐໙] ບຸກຄົນໃດລ້ຽງດູມານດາແລະບິດາໂດຍທຳ
ແມ່ນນັກປາດທັງຫຼາຍຍ່ອມສັນເສີນບຸກຄົນນັ້ນໃນໂລກນີ້
ບຸກຄົນນັ້ນລະໂລກນີ້ໄປແລ້ວຍ່ອມບັນເທີງໃນສະຫວັນ

(ພຣະເຈົ້າປີລະຍັກໄດ້ສະດັບດັ່ງນັ້ນ ຊົງປະຄອງອັນຊະລີ ຂໍຮ້ອງຢູ່ວ່າ)

[໔໑໐] ເຮົາຍິ່ງງຸນງົງໜັກຂຶ້ນ ຫຼົງໄປທົ່ວທຸກທິດ
ທ່ານສາມະ ເຮົາຂໍເຖິງທ່ານວ່າເປັນບ່ອນເພິ່ງ
ແລະທ່ານກໍຈົ່ງເປັນບ່ອນເພິ່ງຂອງເຮົາ

(ສຸວັນນະສາມໂພທິສັດກ່າວທົດສະພິດຣາດຊະທຳຖວາຍວ່າ)

[໔໑໑] ຂ້າແດ່ ມະຫາຣາດຜູ້ເປັນກະສັດ
ຂໍພຣະອົງຈົ່ງຊົງປະພຶດທຳໃນພຣະມານດາແລະພຣະບິດາເທີ້ນ
ເມື່ອພຣະອົງຊົງປະພຶດທຳໃນໂລກນີ້ແລ້ວ
ຈັກສະເດັດໄປສູ່ສະຫວັນ ຂ້ານ້ອຍ

[໔໑໒] ຂ້າແດ່ ມະຫາຣາດຜູ້ເປັນກະສັດ
ຂໍພຣະອົງຈົ່ງຊົງປະພຶດທຳໃນພຣະໂອຣົດແລະພຣະມະເຫສີເທີ້ນ
ເມື່ອພຣະອົງຊົງປະພຶດທຳໃນໂລກນີ້ແລ້ວ
ຈັກສະເດັດໄປສູ່ສະຫວັນ ຂ້ານ້ອຍ

[໔໑໓] ຂ້າແດ່ ມະຫາຣາດຜູ້ເປັນກະສັດ
ຂໍພຣະອົງຈົ່ງຊົງປະພຶດທຳໃນມິດແລະອຳມາດເທີ້ນ
ເມື່ອພຣະອົງຊົງປະພຶດທຳໃນໂລກນີ້ແລ້ວ
ຈັກສະເດັດໄປສູ່ສະຫວັນ ຂ້ານ້ອຍ

[໔໑໔] ຂ້າແດ່ ມະຫາຣາດ
ຂໍພຣະອົງຈົ່ງຊົງປະພຶດທຳໃນພາຫະນະແລະພົນນິກາຍເທີ້ນ
ເມື່ອພຣະອົງຊົງປະພຶດທຳໃນໂລກນີ້ແລ້ວ
ຈັກສະເດັດໄປສູ່ສະຫວັນ ຂ້ານ້ອຍ

[໔໑໕]　ຂ້າແດ່ ມະຫາຣາດ
ຂໍພຣະອົງຈົ່ງຊົງປະພຶດທຳໃນຊາວບ້ານແລະຊາວນິຄົມເທີ້ນ
ເມື່ອພຣະອົງຊົງປະພຶດທຳໃນໂລກນີ້ແລ້ວ
ຈັກສະເດັດໄປສູ່ສະຫວັນ ຂ້ານ້ອຍ

[໔໑໖]　ຂ້າແດ່ ມະຫາຣາດ
ຂໍພຣະອົງຈົ່ງຊົງປະພຶດທຳໃນຊາວແຄວ້ນແລະຊາວຊົນນະບົດເທີ້ນ
ເມື່ອພຣະອົງຊົງປະພຶດທຳໃນໂລກນີ້ແລ້ວ
ຈັກສະເດັດໄປສູ່ສະຫວັນ ຂ້ານ້ອຍ

[໔໑໗]　ຂ້າແດ່ ມະຫາຣາດ
ຂໍພຣະອົງຈົ່ງຊົງປະພຶດທຳໃນສະມະນະແລະພາມເທີ້ນ
ເມື່ອພຣະອົງຊົງປະພຶດທຳໃນໂລກນີ້ແລ້ວ
ຈັກສະເດັດໄປສູ່ສະຫວັນ ຂ້ານ້ອຍ

[໔໑໘]　ຂ້າແດ່ ມະຫາຣາດ
ຂໍພຣະອົງຈົ່ງຊົງປະພຶດທຳໃນໝູ່ເນື້ອແລະຝູງນົກເທີ້ນ
ເມື່ອພຣະອົງຊົງປະພຶດທຳໃນໂລກນີ້ແລ້ວ
ຈັກສະເດັດໄປສູ່ສະຫວັນ ຂ້ານ້ອຍ

[໔໑໙]　ຂ້າແດ່ ມະຫາຣາດ ຂໍພຣະອົງຈົ່ງຊົງປະພຶດທຳເທີ້ນ
ທຳທີ່ພຣະອົງຊົງປະພຶດແລ້ວຍ່ອມນຳສຸກມາໃຫ້
ເມື່ອພຣະອົງຊົງປະພຶດທຳໃນໂລກນີ້ແລ້ວ
ຈັກສະເດັດໄປສູ່ສະຫວັນ ຂ້ານ້ອຍ

[໔໒໐]　ຂ້າແດ່ ມະຫາຣາດ ຂໍພຣະອົງຈົ່ງຊົງປະພຶດທຳເທີ້ນ
ພຣະອິນ ເທວະດາ ພ້ອມທັງພົມເຂົ້າເຖິງທິບພະຍະສະຖານໄດ້
ຍ້ອນທຳທີ່ປະພຶດດີແລ້ວ ຂໍພຣະອົງຢ່າຊົງຜະໝາດທຳເລີຍ

**ສຸວັນນະສາມະຊາດົກທີ ໓ ຈົບ**

# ໔. ເນມິຣາດຊະຊາດົກ[1] (໕໔໑)
## ວ່າດ້ວຍພຣະເຈົ້າເນມິຊົງພ່ຳເພັງອະທິຖານະປາຣະມີ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໔໔໑] ໜ້າອັດສະຈັນນໍ
ການທີ່ພຣະເຈົ້າເນມິຜູ້ເປັນບັນດິດມີພຣະປະສົງດ້ວຍກຸສົນ
ຊົງເກີດຂຶ້ນໃນເວລາທີ່ບຸກຄົນຜູ້ມີປັນຍາທັງຫຼາຍເກີດຂຶ້ນໃນໂລກ

[໔໔໔] ພຣະເຈົ້າເນມິຜູ້ຊົງທໍລະມານອະຣິຣາດຊະສັດຕູ
ຂອງຊາວແຄວ້ນວິເທຫະທັງປວງໄດ້ບໍລິຈາກແລ້ວ
ເມື່ອພຣະອົງຊົງບໍລິຈາກທານຢູ່ນັ້ນ
ກໍເກີດພຣະດຳຣິຂຶ້ນວ່າ ທານກໍດີ ພົມມະຈັນກໍດີ
ແນວໃດນໍຈະມີຜົນຫຼາຍ

[໔໔໓] ທ້າວມະຄະວານເທບກຸນຊອນສະຫັດສະເນດ
ຊົງຮູ້ພຣະດຳຣິຂອງພຣະເຈົ້າເນມິແລ້ວ ຜາກົດພຣະອົງ
ຊົງກຳຈັດຄວາມມືດດ້ວຍພຣະຣັດສະໝີແລ້ວ

[໔໔໔] ພຣະເຈົ້າເນມິຈອມມະນຸດຊົງມີພຣະໂລມະຊາດຊູຊັນ
ໄດ້ຕັດຖາມທ້າວວາສະວະວ່າ ທ່ານເປັນເທວະດາ ເປັນຄົນທັນ
ຫຼືເປັນທ້າວສັກກະຜູ້ພ່ຳເພັງທານໃນພົບກ່ອນກັນແນ່

[໔໔໕] ຣັດສະໝີເຊັ່ນນັ້ນຂ້າພະເຈົ້າບໍ່ເຄີຍໄດ້ເຫັນ
ບໍເຄີຍໄດ້ຍິນມາເລີຍ
ທ່ານຜູ້ຈະເລີນ ຂໍທ່ານຈົ່ງບອກຂ້າພະເຈົ້າ
ຂ້າພະເຈົ້າຈະຮູ້ຈັກທ່ານໄດ້ແນວໃດ

[໔໔໖] ທ້າວວາສະວະຊົງຮູ້ວ່າພຣະເຈົ້າເນມິມີພຣະໂລມະຊາດຊູຊັນ
ໄດ້ຕັດຕອບວ່າ ຂ້ານ້ອຍເປັນທ້າວສັກກະຈອມເທບ
ມາໃນສຳນັກຂອງພຣະອົງ ພຣະອົງຜູ້ເປັນຈອມມະນຸດ
ພຣະອົງຢ່າຊົງມີພຣະໂລມະຊາດຊູຊັນ
ເຊີນຕັດຖາມບັນຫາທີ່ພຣະອົງຊົງພຣະປະສົງເທີ້ນ

[໔໘໗] ພຣະເຈົ້າເນມິນັ້ນເມື່ອພຣະອົງຊົງຖວາຍໂອກາດ
ຈຶ່ງໄດ້ຕັດກັບທ້າວວາສະວະວ່າ ຂ້າແດ່ ມະຫາຣາດຜູ້ເປັນໃຫຍ່ແຫ່ງພູດທັງປວງ
ຂ້າພະເຈົ້າຂໍຖາມພຣະອົງ ທານກໍດີ ພົມມະຈັນກໍດີ
ແນວໃດມີຜົນຫຼາຍກວ່າກັນນໍ

[໔໘໘] ທ້າວວາສະວະຖືກພຣະເຈົ້າເນມິຜູ້ເປັນເທບແຫ່ງນໍຣະຊົນຕັດຖາມແລ້ວ
ເມື່ອຈະຕັດຕອບພຣະເຈົ້າເນມິ
ພຣະອົງຊົງຮູ້ວິບາກແຫ່ງພົມມະຈັນຢູ່
ຈຶ່ງໄດ້ຕັດບອກແກ່ພຣະເຈົ້າເນມິຜູ້ບໍ່ຊົງຮູ້ວ່າ

[໔໘໙] ບຸກຄົນຍ່ອມເກີດໃນຕະກູນກະສັດໄດ້ດ້ວຍພົມມະຈັນຊັ້ນຕ່ຳ
ເຂົ້າເຖິງຄວາມເປັນເທວະດາໄດ້ດ້ວຍພົມມະຈັນຊັ້ນກາງ
ຍ່ອມບໍລິສຸດໄດ້ດ້ວຍພົມມະຈັນຊັ້ນສູງ

[໔໑໐] ຍ້ອນພົມມະຈັນເຫຼົ່ານີ້ບໍ່ແມ່ນຈະຫາໄດ້ງ່າຍ ໆ
ດ້ວຍການປະກອບພິທີວິງວອນຂໍຮ້ອງອັນໃດ ໆ
ບຸກຄົນຜູ້ທີ່ເກີດໃນໝູ່ພົມໄດ້ຕ້ອງອອກບວດພ່ຳເພັງຕະບະ

(ທ້າວສັກກະເທວະຣາດເມື່ອຈະຊົງສະແດງເລື້ອງທີ່ພຣະຣາຊາທັງຫຼາຍໃນອະດີດ ຜູ້ບໍລິຈາກ
ມະຫາທານແລ້ວບໍ່ສາມາດພົ້ນໄປຈາກການາວະຈອນພົບໄດ້ ຈຶ່ງໄດ້ຕັດວ່າ)

[໔໑໑] ໑. ພຣະເຈົ້າທຸທິປະ ໒. ພຣະເຈົ້າສາຄະຣະ
໓. ພຣະເຈົ້າເສລະ ໔. ພຣະເຈົ້າມຸຈະລິນ
໕. ພຣະເຈົ້າພະຄີຣະສະ ໖. ພຣະເຈົ້າອຸສີນນະ
໗. ພຣະເຈົ້າອັດຖະກະ ໘. ພຣະເຈົ້າປຸຖຸດທະນະ

[໔໑໒] ພຣະຣາຊາເຫຼົ່ານັ້ນ ພຣະຣາຊາມະຫາກະສັດເຫຼົ່າອື່ນ
ແລະພວກພາມຫຼວງຫຼາຍ
ຕ່າງກໍບູຊາຍັນຫຼວງຫຼາຍແລ້ວກໍຍັງບໍ່ລ່ວງພົ້ນພົບແຫ່ງເຜດໄດ້
ຊົນເຫຼົ່າໃດບໍ່ມີເພື່ອນ ຢູ່ຄົນດຽວ
ບໍ່ຍິນດີກັບໃຜ ຍ່ອມບໍ່ໄດ້ປີຕິອັນເກີດແຕ່ວິເວກ
ຊົນເຫຼົ່ານັ້ນເຖິງຈະມີສົມບັດສະເໝີກັບທິບພະຍະສົມບັດຂອງພຣະອິນກໍຈິງ
ເຖິງແນວນັ້ນ ຊົນເຫຼົ່ານັ້ນແລຍັງຊື່ວ່າ ຜູ້ຕົກຍາກ
ຍ້ອນມີຄວາມສຸກເນື່ອງດ້ວຍຜູ້ອື່ນ

(ທ້າວສັກກະເທວະຣາດເມື່ອຈະຊີ້ງສະແດງເຫຼົ່າດາບົດຜູ້ລ່ວງພົບແຫ່ງເພດໄດ້ແລ້ວບັງເກີດໃນພົມມະໂລກດ້ວຍການປະພຶດພົມມະຈັນ ຈຶ່ງຕັດວ່າ)

[໔໓໓] ລືສີທັງ ໗ ເຫຼົ່ານີ້ ຄື
໑. ຍານທະນະລືສີ ໔. ໂສມະຍາຄະລືສີ
໓. ມະໂນຊະວະລືສີ

[໔໓໔] ໔. ສະມຸດທະລືສີ ໕. ມາຄະລືສີ
໖. ພະຣະຕະລືສີ ໗. ກາລະປຸຣັກຂິຕະລືສີ

ກັບລືສີອີກ ໔ ຕົນ ຄື

໑. ອັງຄີຣະສະລືສີ ໔. ກັດສະປະລືສີ
໓. ກີສະວັດສະລືສີ ໔. ອະກັດຕິລືສີ
ອອກບວດພໍ່າເພັງຕະບະ ລ່ວງພົ້ນກາມາວະຈອນພົບໄດ້ແນ່ນອນ

(ທ້າວສັກກະເທວະຣາດເມື່ອຈະຊີ້ງເລົ່າເລື້ອງທີ່ຕົນເຄີຍເຫັນມາ ຈຶ່ງຕັດວ່າ)

[໔໓໕] ແມ່ນ້ຳທີ່ຊື່ສີທາມີຢູ່ທາງທິດເໜືອ
ເປັນແມ່ນ້ຳເລິກ ຂ້າມໄດ້ຍາກ
ພູຄຳມີສີດັ່ງໄຟໄໝ້ຕົ້ນອໍ້ ສະຫວ່າງສະໄຫວຢູ່ທຸກເມື່ອ

[໔໓໖] ທີ່ຝັ່ງແມ່ນ້ຳນັ້ນ ມີຕົ້ນເກດສະໜາຂຶ້ນງອກງາມ
ມີພູເຊິ່ງມີປ່າໄມ້ຂຶ້ນງອກງາມ
ທີ່ພູມີພາກອັນໜ້າອອນຊອນແນວນີ້ນັ້ນ
ມີລືສີລຸ້ນເກົ່າປະມານໝື່ນຕົນອາໄສຢູ່

[໔໓໗] ຂ້ານ້ອຍເປັນຜູ້ປະເສີດ
ຍ້ອນທານ ຄວາມສັງລວມ ແລະຄວາມເຝິກ
ຂ້ານ້ອຍໄດ້ອຸປັດຖາກດາບົດປານນີ້
ທີ່ພໍ່າເພັງຂໍ້ວັດປະຕິບັດເຊິ່ງບໍ່ມີຂໍ້ວັດປະຕິບັດອື່ນຍິ່ງກວ່າ
ລະຄະນະໄປຢູ່ຜູ້ດຽວມີຈິດເປັນສະມາທິ
[໔໓໘] ຂ້ານ້ອຍຈັກນອບນ້ອມນໍຣະຊົນຜູ້ມີຊາດແລະບໍ່ມີຊາດ
ຜູ້ປະຕິບັດຕົງຕະຫຼອດການຢູ່ປະຈຳ
ຍ້ອນເຫຼົ່າສັດເປັນຜູ້ມີກຳເປັນເຜົ່າພັນ

[໔໓໙] ດັ່ງນັ້ນ ວັນນະທັງປວງທີ່ບໍ່ຕັ້ງຢູ່ໃນທຳ
ຍ່ອມຕົກມະຮົກເບື້ອງຕ່ຳ ວັນນະທັງປວງຍ່ອມບໍລິສຸດໄດ້
ຍ້ອນປະພຶດທຳສູງສຸດ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໔໔໐] ທ້າວມະຄະວານສຸຊຳບໍດີເທວະຣາດເມື່ອຕັດພຣະດຳຣັດນີ້ແລ້ວ
ຈຶ່ງຊົງສັ່ງສອນພຣະເຈົ້າເນມິຜູ້ຄອງແຄວ້ນວິເທຫະແລ້ວ
ໄດ້ສະເດັດຈາກໄປສູ່ໝູ່ເທບຊາວສະຫວັນ

(ທ້າວສັກກະເທວະຣາດເມື່ອຕັດແນວນັ້ນແລ້ວ ຈຶ່ງຕັດເທດນັ້ນອີກວ່າ)

[໔໔໑] ທ່ານຜູ້ຈະເລີນທັງຫຼາຍ ຂໍທ່ານທັງຫຼາຍ
ຜູ້ມາປະຊຸມກັນຢູ່ບ່ອນນີ້ປະມານທໍ່ໃດ
ຈົ່ງຕັ້ງໃຈຟັງຄຸນຫຼວງຫຼາຍທັງສູງແລະຕ່ຳນີ້
ຂອງເຫຼົ່າມະນຸດຜູ້ຕັ້ງຢູ່ໃນທຳ

[໔໔໒] ຄືພຣະເຈົ້າເນມິນີ້ຜູ້ເປັນບັນດິດມີພຣະປະສົງກຸສົນ
ເປັນພຣະຣາຊາຜູ້ຊົງຜາບອະຣິຣາດສັດຕູໄດ້
ໄດ້ຊົງໃຫ້ທານແກ່ຊາວແຄວ້ນວິເທຫະທັງປວງ

[໔໔໓] ເມື່ອພຣະອົງຊົງບໍລິຈາກທານນັ້ນຢູ່
ກໍໄດ້ເກີດພຣະດຳຣິຂຶ້ນວ່າ ທານກໍດີ ພົມມະຈັນກໍດີ
ແນວໃດນໍຈະມີຜົນຫຼາຍ

(ມະຫາຊົນແຈ່ມໃສຍິນດີ ຈຶ່ງກ່າວວ່າ)

[໔໔໔] ຄວາມຂົນຫົວລຸກທີ່ບໍ່ເຄີຍມີມາແລ້ວນໍ
ໄດ້ເກີດຂຶ້ນແລ້ວໃນໂລກ
ລົດທິບໄດ້ຜາກົດແກ່ພຣະເຈົ້າວິເທຫະຜູ້ຊົງຍົດ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໔໔໕] ມາຕະລິເທບພະບຸດຜູ້ເປັນເທບສາຣະຖີມີລິດຫຼາຍ
ໄດ້ເຊື້ອເຊີນພຣະເຈົ້າວິເທຫະຜູ້ຄອງນະຄອນມິຖິລາວ່າ

[໔໔໖] ຂ້າແດ່ ພຣະຣາຊາຜູ້ປະເສີດເປັນໃຫຍ່ໃນທິດ
ຂໍເຊີນສະເດັດຂຶ້ນລົດພຣະທີ່ນັ່ງນີ້ເທີ້ນ
ເທບຊັ້ນຕາວະຕິງສາພ້ອມດ້ວຍພຣະອິນປະສົງຈະເຝົ້າພຣະອົງ
ຍ້ອນເທບເຫຼົ່ານັ້ນກຳລັງຣະນຶກເຖິງ
ນັ່ງກ່າວສັນເສີນຄຸນຂອງພຣະອົງຢູ່ທີ່ສຸທຳມາສະພາ

[໔໔໗] ລຳດັບນັ້ນ ພຣະເຈົ້າວິເທຫະຜູ້ຄອງນະຄອນມິຖິລາ
ຜູ້ຊົງທຳ ດ່ວນຟ້າວສະເດັດລຸກຂຶ້ນຈາກພຣະຣາດຊະອາດ
ບ່າຍພຣະພັກຂຶ້ນສູ່ຣົດພຣະທີ່ນັ່ງ

[໔໔໘] ມາຕະລີເທບພະບຸດໄດ້ທູນຖາມພຣະເຈົ້າເນມິຜູ້ສະເດັດຂຶ້ນລົດທິບແລ້ວວ່າ
ຂ້າແດ່ ພຣະຣາຊາຜູ້ຊົງພຣະຄຸນອັນປະເສີດເປັນໃຫຍ່ໃນທິດ
ຂ້າພຣະອົງຈະນຳພຣະອົງໄປທາງໃດ
ຄື ທາງທີ່ຄົນເຮັດບາບຫຼືເຮັດບຸນໄວ້

(ລຳດັບນັ້ນ ພຣະເຈົ້າເນມິຈຶ່ງຕັດກັບມາຕະລີເທບສາຣະຖີນັ້ນວ່າ)

[໔໔໙] ມາຕະລີເທບສາຣະຖີ ຂໍໃຫ້ທ່ານຈົ່ງນຳເຮົາໄປທັງ ໒ ທາງນັ້ນແລ
ຄື ທາງທີ່ຄົນເຮັດບາບແລະທາງທີ່ຄົນເຮັດບຸນໄວ້

(ຕໍ່ຈາກນັ້ນ ມາຕະລີເທບສາຣະຖີທູນຖາມວ່າ)

[໔໕໐] ຂ້າແດ່ ພຣະຣາຊາຜູ້ຊົງພຣະຄຸນອັນປະເສີດເປັນໃຫຍ່ໃນທິດ
ຂ້າພຣະອົງຈະນຳສະເດັດພຣະອົງໄປທາງໃດກ່ອນ
ຄື ທາງທີ່ຄົນເຮັດບາບຫຼືທາງທີ່ຄົນເຮັດບຸນໄວ້

(ພຣະເຈົ້າເນມິຕັດວ່າ)

[໔໕໑] ເຮົາຈະເບິ່ງນະຣົກເຊິ່ງເປັນບ່ອນຢູ່ຂອງເຫຼົ່ານໍຣະຊົນທີ່ມີກຳເປັນບາບ
ສະຖານທີ່ຢູ່ຂອງເຫຼົ່ານໍຣະຊົນທີ່ມີກຳຫຍາບຊ້າ
ແລະຄະຕິຂອງເຫຼົ່ານໍຣະຊົນຜູ້ທຸສີນກ່ອນ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໔໕໒] ມາຕະລີເທບສາຣະຖີຟັງພຣະດຳຣັດຂອງພຣະຣາຊາແລ້ວ
ຈຶ່ງສະແດງແມ່ນ້ຳທີ່ຊື່ເວດຕະຣະນີ໑ ທີ່ຂ້າມໄດ້ຍາກ

ປະກອບດ້ວຍນ້ຳດ່າງທີ່ຮ້ອນເດືອດພ່ານ
ປຽບດ້ວຍແປວໄຟ

[໔໕໓] ພຣະເຈົ້າເນມິທອດພຣະເນດສັດຜູ້ຕົກຢູ່ໃນແມ່ນ້ຳເວດຕະຣະນີ
ທີ່ຂ້າມໄດ້ຍາກ ຈຶ່ງໄດ້ຕັດຖາມມາຕະລິເທບສາຣະຖີວ່າ
ມາຕະລິເທບສາຣະຖີ ຄວາມຢ້ານຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນສັດນະຮົກເຫຼົ່ານີ້ຜູ້ຕົກຢູ່ໃນແມ່ນ້ຳເວດຕະຣະນີ
ເຮົາຂໍຖາມທ່ານ ສັດເຫຼົ່ານີ້ໄດ້ເຮັດບາບກຳອັນໃດນໍ
ຈຶ່ງຕົກລົງສູ່ແມ່ນ້ຳເວດຕະຣະນີ

[໔໕໔] ມາຕະລິເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ຈຶ່ງໄດ້ທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດຊົ່ວໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິນັ້ນຜູ້ບໍ່ຊົງຮູ້ວ່າ

[໔໕໕] ຊົນເຫຼົ່າໃດໃນມະນຸດສາໂລກ ຜູ້ມີກຳລັງ ມີກຳອັນເປັນບາບ
ຍ່ອມບຽດບຽນ ດ່າວ່າຜູ້ອື່ນເຊິ່ງມີກຳລັງໜ້ອຍ
ຊົນເຫຼົ່ານັ້ນຜູ້ມີກຳຫຍາບຊ້າ
ເຮັດບາບແລ້ວຍ່ອມຕົກລົງສູ່ແມ່ນ້ຳເວດຕະຣະນີ

[໔໕໖] ຝູງໝາດຳ ຝູງໝາດ່າງ ຝູງແຮ້ງ ຝູງກາປາກເຫຼັກທີ່ເປັນຕາຢ້ານ
ຫຸ້ມກັດຈິກກິນສັດນະຮົກ ຄວາມຢ້ານຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນຝູງສັດຫຸ້ມກັດຈິກກິນສັດນະຮົກ
ທ່ານມາຕະລິເທບສາຣະຖີ ເຮົາຂໍຖາມທ່ານ
ສັດເຫຼົ່ານີ້ໄດ້ເຮັດບາບກຳອັນໃດໄວ້ນໍ
ຈຶ່ງຖືກຝູງກາປາກເຫຼັກຫຸ້ມກັດຈິກກິນ

[໔໕໗] ມາຕະລິເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດຊົ່ວໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິນັ້ນຜູ້ບໍ່ຊົງຮູ້ວ່າ

[໔໕໘] ຊົນເຫຼົ່າໃດເຫຼົ່າໜຶ່ງເປັນຄົນຂີ້ຖີ່ໜຽວແໜ້ນ
ມີທຳລາມົກ ກ່າວໂທດ ບຽດບຽນ ດ່າວ່າສະມະນະແລະພາມ
ຊົນເຫຼົ່ານັ້ນຜູ້ມີກຳຫຍາບຊ້າ ເຮັດບາບແລ້ວ
ຈຶ່ງຖືກຝູງກາປາກເຫຼັກຫຸ້ມກັດຈິກກິນ

(ພຣະເຈົ້າເນມິຊົງເຫັນສັດນະຮົກເຫຼົ່ານັ້ນ ຊົງສະດຸ້ງຢ້ານ ຕັດຖາມມາຕະລີເທບສາຣະຖີວ່າ)

[໔໘໙] ສັດນະຮົກເຫຼົ່ານີ້ມີຮ່າງກາຍລຸກເປັນແປວ
ຍ່າງຢຽບແຜ່ນດິນເຫຼັກທີ່ລຸກເປັນແປວ
ນາຍນິຣະຍະບານທັງຫຼາຍຊ້ຽນຕີດ້ວຍກະບອງເຫຼັກອັນຮ້ອນ
ທ່ານມາຕະລີເທບສາຣະຖີ ຄວາມຢ້ານຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນສັດນະຮົກເຫຼົ່ານີ້ທີ່ຖືກຊ້ຽນຕີດ້ວຍກະບອງເຫຼັກ
ເຮົາຂໍຖາມທ່ານ ສັດເຫຼົ່ານີ້ໄດ້ເຮັດບາບກໍາອັນໃດໄວ້ນໍ
ຈຶ່ງຖືກທຸບຕີດ້ວຍກະບອງເຫຼັກນອນຢູ່

[໔໖໐] ມາຕະລີເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດຊົ່ວໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິນັ້ນຜູ້ບໍ່ຊົງຮູ້ວ່າ

[໔໖໑] ຊົນເຫຼົ່າໃດໃນມະນຸດສາໂລກເປັນຜູ້ມີທໍາອັນຊົ່ວຊ້າ
ບຽດບຽນ ດ່າວ່າຊາຍຍິງຜູ້ບໍ່ມີທໍາອັນຊົ່ວຊ້າ
ຊົນເຫຼົ່ານັ້ນຜູ້ມີທໍາອັນຊົ່ວຊ້າ ມີກໍາຫຍາບຊ້າ
ເຮັດບາບແລ້ວ ຈຶ່ງຖືກທຸບຕີດ້ວຍກະບອງເຫຼັກນອນຢູ່

(ພຣະເຈົ້າເນມິທອດພຣະເນດເຫັນດັ່ງນັ້ນ ຈຶ່ງຕັດຖາມວ່າ)

[໔໖໔] ສັດນະຮົກອີກພວກໜຶ່ງຕົກຂຸມຖ່ານໄຟ
ຖືກໄຟໄໝ້ທົ່ວຮ່າງກາຍ ຮ້ອງຄວນຄາງຢູ່
ທ່ານມາຕະລີເທບສາຣະຖີ ຄວາມຢ້ານຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນສັດນະຮົກເຫຼົ່ານີ້ຖືກໄຟໄໝ້ທົ່ວຮ່າງກາຍ
ເຮົາຂໍຖາມທ່ານ ສັດເຫຼົ່ານີ້ໄດ້ເຮັດບາບກໍາອັນໃດໄວ້ນໍ
ຈຶ່ງຕົກຂຸມຖ່ານໄຟຢູ່

[໔໖໓] ມາຕະລີເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດຊົ່ວໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິນັ້ນຜູ້ບໍ່ຊົງຮູ້ວ່າ

[໔໖໔] ຊົນເຫຼົ່າໃດເຫຼົ່າໜຶ່ງອ້າງພະຍານໂກງລົບໜີ້
ຍ້ອນເຫດແຫ່ງຊັບຂອງປະຊຸມຊົນ

ຂ້າແດ່ ພຣະອົງຜູ້ເປັນຈອມແຫ່ງຊົນ
ຊົນເຫຼົ່ານັ້ນເມື່ອເຮັດຊັບຂອງໝູ່ຊົນໃຫ້ສິ້ນໄປແລ້ວ
ມີກຳອັນຫຍາບຊ້າ ເຮັດບາບແລ້ວຕົກຢູ່ໃນຂຸມຖ່ານໄຟ

(ພຣະເຈົ້າເນມິຊົງເຫັນເຫດນັ້ນແລ້ວ ຈຶ່ງຕັດຖາມວ່າ)

[໔໙໕] ໂລຫະກຸມພີໃຫຍ່ມີໄຟລຸກຮຸ່ງເປັນແປວສະຫວ່າງສະໄຫວຜາກົດຢູ່
ຄວາມຢ້ານຍ່ອມເກີດແກ່ເຮົາ ຍ້ອນໄດ້ເຫັນໂລຫະກຸມພີນັ້ນ
ທ່ານມາຕະລີເທບສາຣະຖີ ເຮົາຂໍຖາມທ່ານ
ສັດນະຮົກເຫຼົ່ານີ້ໄດ້ເຮັດບາບກຳອັນໃດໄວ້ນໍ
ຈຶ່ງຕ້ອງດິ່ງຫົວຕົກລົງໄປສູ່ໂລຫະກຸມພີ

[໔໙໖] ມາຕະລີເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດຊົ່ວໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິນັ້ນຜູ້ບໍ່ຊົງຮູ້ວ່າ

[໔໙໗] ຊົນເຫຼົ່າໃດສຸດແສນຈະຊົ່ວ ບຽດບຽນ
ອາຄາດສະມະນະແລະພາມຜູ້ມີສີນ
ຊົນເຫຼົ່ານັ້ນຜູ້ມີກຳຫຍາບຊ້າ ເຮັດບາບແລ້ວ
ຈຶ່ງດິ່ງຫົວຕົກລົງໄປສູ່ໂລຫະກຸມພີ

(ພຣະເຈົ້າເນມິຊົງເຫັນເຫດນັ້ນແລ້ວ ຈຶ່ງຕັດຖາມວ່າ)

[໔໙໘] ນາຍນິຣະຍະບານຍ່ອມຕັດຄໍຫຼືມັດຄໍສັດນະຮົກ
ລາກໂຍນລົງໄປໃນນ້ຳຮ້ອນ
ທ່ານມາຕະລີເທບສາຣະຖີ ຄວາມຢ້ານຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນຄວາມເປັນໄປຂອງສັດນະຮົກເຫຼົ່ານີ້
ເຮົາຂໍຖາມທ່ານ ສັດນະຮົກເຫຼົ່ານີ້ໄດ້ເຮັດບາບກຳອັນໃດໄວ້ນໍ
ຈຶ່ງຖືກຕັດຫົວນອນຢູ່

[໔໙໙] ມາຕະລີເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດຊົ່ວໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິນັ້ນຜູ້ບໍ່ຊົງຮູ້ວ່າ

[໕໐໐] ຊົນເຫຼົ່າໃດໃນມະນຸດສາໂລກສຸດແສນຈະຊົ່ວ ຈັບນົກມາຂ້າ

ຂ້າແດ່ ພຣະອົງຜູ້ເປັນຈອມຊົນ ຊົນເຫຼົ່ານັ້ນເມື່ອຂ້ານຶກແລ້ວ
ມີກຳຫຍາບຊ້າເຮັດບາບແລ້ວ ຈຶ່ງຖືກຕັດທ່ອນອນຢູ່

(ພຣະເຈົ້າເນມິຊົງເຫັນເຫດນັ້ນແລ້ວ ຈຶ່ງຕັດຖາມວ່າ)

[໔໗໑] ແມ່ນ້ຳນີ້ມີນ້ຳຫຼາຍ ມີຝັ່ງບໍ່ເລິກ
ມີທ່ານ້ຳງົດງາມ ໄຫຼຢູ່ສະເໝີ
ສັດນະຣົກຖືກຄວາມຮ້ອນແຜດເຜົາແລ້ວຈະດື່ມນ້ຳ
ນ້ຳທີ່ສັດນະຣົກເຫຼົ່ານັ້ນດື່ມແລ້ວກໍກາຍເປັນແກບໄປ

[໔໗໔] ທ່ານມາຕະລີເທບສາຣະຖີ ຄວາມຢ້ານຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນຄວາມເປັນໄປຂອງສັດນະຣົກເຫຼົ່ານີ້
ເຮົາຂໍຖາມທ່ານ ສັດນະຣົກເຫຼົ່ານີ້ໄດ້ເຮັດບາບກຳອັນໃດໄວ້ນໍ
ນ້ຳທີ່ສັດນະຣົກເຫຼົ່ານັ້ນດື່ມແລ້ວຈຶ່ງກາຍເປັນແກບໄປ

[໔໗໓] ມາຕະລີເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດຊົ່ວໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິນັ້ນຜູ້ບໍ່ຊົງຮູ້ວ່າ
[໔໗໔] ສັດນະຣົກເຫຼົ່າໃດມີວຽກງານບໍ່ບໍລິສຸດ
ເອົາເຂົ້າລີບປົນເຂົ້າເປືອກລ້ວນ ໆ ຂາຍໃຫ້ແກ່ຜູ້ຊື້
ນ້ຳທີ່ສັດນະຣົກຜູ້ຖືກຄວາມຮ້ອນແຜດເຜົາຢາກເຫຼົ່ານັ້ນດື່ມແລ້ວ
ກໍກາຍເປັນແກບໄປ

(ພຣະເຈົ້າເນມິຊົງເຫັນເຫດນັ້ນແລ້ວ ຈຶ່ງຕັດຖາມວ່າ)

[໔໗໕] ນາຍນິຣະຍະບານໃຊ້ລູກສອນ ຫອກ ແລະໂຕມອນ
ແທງສີຂ້າງທັງ ໔ ຂອງເຫຼົ່າສັດນະຣົກຜູ້ຮ່ຳໄຮຢູ່
ທ່ານມາຕະລີເທບສາຣະຖີ ຄວາມຢ້ານຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນຄວາມເປັນໄປຂອງສັດນະຣົກເຫຼົ່ານີ້
ເຮົາຂໍຖາມທ່ານ ສັດນະຣົກເຫຼົ່ານີ້ໄດ້ເຮັດບາບກຳອັນໃດໄວ້ນໍ
ຈຶ່ງຖືກແທງດ້ວຍຫອກນອນຢູ່
[໔໗໖] ມາຕະລີເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດຊົ່ວໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິນັ້ນຜູ້ບໍ່ຊົງຮູ້ວ່າ

[໔໗໗] ຊົນເຫຼົ່າໃດໃນມະນຸດສາໂລກມີວຽກງານບໍ່ດີ
ລັກຊັບຂອງຜູ້ອື່ນ ຄື ເຂົ້າເປືອກ ຊັບ ເງິນ ຄຳ
ແບ້ ແກະ ປະສຸສັດ ແລະຄວາຍ ມາລ້ຽງຊີວິດ
ຊົນເຫຼົ່ານັ້ນມີກຳຫຍາບຊ້າ ເຮັດບາບແລ້ວ
ຈຶ່ງຖືກແທງດ້ວຍຫອກນອນຢູ່

(ພຣະເຈົ້າເນມິຕັດຖາມມາຕະລີເທບສາຣະຖີວ່າ)

[໔໗໘] ຍ້ອນເຫດໃດ ສັດນະຣົກເຫຼົ່ານີ້ຈຶ່ງຖືກນາຍນິຣະຍະບານລ່າມຄໍໄວ້
ສັດນະຣົກອີກພວກໜຶ່ງຖືກນາຍນິຣະຍະບານຫັ່ນແລ້ວສັບນອນຢູ່
ທ່ານມາຕະລີເທບສາຣະຖີ ຄວາມຢ້ານຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນຄວາມເປັນໄປຂອງສັດນະຣົກເຫຼົ່ານີ້
ເຮົາຂໍຖາມທ່ານ ສັດນະຣົກເຫຼົ່ານີ້ໄດ້ເຮັດບາບກຳອັນໃດໄວ້ນໍ
ຈຶ່ງຖືກສັບນອນຢູ່

[໔໗໙] ມາຕະລີເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດຊົ່ວໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິນັ້ນຜູ້ບໍ່ຊົງຮູ້ວ່າ

[໔໘໐] ສັດນະຣົກເຫຼົ່ານີ້ເຄີຍເປັນຜູ້ຂ້າແບ້ ຂ້າໝູ ຂ້າປາ
ເມື່ອຂ້າປະສຸສັດ ຄື ຄວາຍ ແບ້
ແລະແກະແລ້ວຈຶ່ງວາງເທິງຂຽງເພື່ອຂາຍລ້ຽງຊີບ
ສັດນະຣົກເຫຼົ່ານັ້ນເຮັດບາບແລ້ວຈຶ່ງຕ້ອງຖືກສັບເປັນຕ່ອນ ໆ ກອງຢູ່

(ພຣະເຈົ້າເນມິຕັດຖາມມາຕະລີເທບສາຣະຖີວ່າ)

[໔໘໑] ແມ່ນ້ຳນີ້ເຕັມໄປດ້ວຍອຸດຈາຣະແລະປັດສາວະ
ບໍ່ສະອາດ ບູດເນົ່າ ມີກິ່ນເໝັນຟຸ້ງໄປ
ສັດນະຣົກຖືກຄວາມຫິວຄອບງຳ
ຍ່ອມກິນອຸດຈາຣະແລະປັດສາວະນັ້ນ
ທ່ານມາຕະລີເທບສາຣະຖີ ຄວາມຢ້ານຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນຄວາມເປັນໄປຂອງສັດນະຣົກເຫຼົ່ານີ້
ເຮົາຂໍຖາມທ່ານ ສັດນະຣົກເຫຼົ່ານີ້ໄດ້ເຮັດບາບກຳອັນໃດໄວ້ນໍ
ຈຶ່ງຕ້ອງມາກິນອຸດຈາຣະແລະປັດສາວະ

[໔໗໔] ມາຕະລີເທບສາຣະຖີຖືກພຣະເຈົ້າເນມີຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດຊົ່ວໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມີນັ້ນຜູ້ບໍ່ຊົງຮູ້ວ່າ

[໔໗໕] ສັດນະຣົກເຫຼົ່ານີ້ລາງພວກມັກກໍ່ເຫດ ກ້ຽວກາດ
ຂົ່ມເຫງມິດສະຫາຍ ຕັ້ງໝັ້ນໃນການບຽດບຽນຜູ້ອື່ນທຸກເມື່ອ
ສັດນະຣົກເຫຼົ່ານັ້ນມີກໍາຫຍາບຊ້າ
ເປັນພານ ປະທຸດສະຮ້າຍມິດ ເຮັດບາບແລ້ວ
ຈຶ່ງກິນປັດສາວະແລະອຸດຈາຣະ

(ພຣະເຈົ້າເນມີຊົງເຫັນເຫດນັ້ນແລ້ວ ຈຶ່ງຕັດຖາມວ່າ)

[໔໗໔] ແມ່ນໍ້ານີ້ເຕັມໄປດ້ວຍເລືອດແລະໜອງ
ບໍ່ສະອາດ ບູດເນົ່າ ມີກິ່ນເໝັນຟຸ້ງໄປ
ສັດນະຣົກທັງຫຼາຍຖືກຄວາມຮ້ອນແຜດເຜົາ
ເກີດຄວາມຢາກ ຈຶ່ງດື່ມເລືອດແລະໜອງ
ທ່ານມາຕະລີເທບສາຣະຖີ ຄວາມຢ້ານຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນຄວາມເປັນໄປຂອງສັດນະຣົກເຫຼົ່ານີ້
ເຮົາຂໍຖາມທ່ານ ສັດນະຣົກເຫຼົ່ານີ້ໄດ້ເຮັດບາບກໍາອັນໃດໄວ້ນໍ
ຈຶ່ງກິນເລືອດແລະໜອງ

[໔໗໕] ມາຕະລີເທບສາຣະຖີຖືກພຣະເຈົ້າເນມີຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດຊົ່ວໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມີນັ້ນຜູ້ບໍ່ຊົງຮູ້ວ່າ

[໔໗໖] ຊົນເຫຼົ່າໃດໃນມະນຸດສາໂລກຂ້າມານດາບິດາ
ຫຼືພຣະອະຣະຫັນ ຊື່ວ່າເປັນປາຣາຊິກ(ຜູ້ປຣາໄຊ)
ຊົນເຫຼົ່ານັ້ນຜູ້ມີກໍາອັນຫຍາບຊ້າ ເຮັດບາບແລ້ວ
ຈຶ່ງກິນເລືອດແລະໜອງ

(ທ້າວມາຕະລີເທບສາຣະຖີສະແດງເລື້ອງນັ້ນແລ້ວ ພຣະເຈົ້າເນມີຈຶ່ງຕັດຖາມວ່າ)

[໔໗໗] ທ່ານຈົ່ງເບິ່ງລີ້ນຂອງສັດນະຣົກທີ່ນາຍນິຣະຍະບານກ່ຽວດ້ວຍເບັດ
ແລະຈົ່ງເບິ່ງໜັງທີ່ນາຍນິຣະຍະບານຖະຫຼົກດ້ວຍຂໍເຫຼັກ

ສັດນະຣົກເຫຼົ່ານີ້ຍ່ອມດີ້ນຮົນຄືປາຖືກໂຍນຂື້ນເທິງບົກ
ຮ້ອງໄຫ້ນໍ້າລາຍໄຫຼ ຍ້ອນເຫດໃດ

[໔໗໗] ທ່ານມາຕະລີເທບສາຣະຖີ ຄວາມຢ້ານຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນຄວາມເປັນໄປຂອງສັດນະຮົກເຫຼົ່ານີ້
ເຮົາຂໍຖາມທ່ານ ສັດນະຮົກເຫຼົ່ານີ້ໄດ້ເຮັດບາບກຳອັນໃດໄວ້ນໍ
ຈຶ່ງກືນກິນເບັດນອນຢູ່

[໔໗໘] ມາຕະລີເທບສາຣະຖີຖືກພຣະເຈົ້າເນມີຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດຊົ່ວໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມີນັ້ນຜູ້ບໍ່ຊົງຮູ້ວ່າ

[໔໘໐] ສັດນະຮົກລາງພວກເຄີຍເປັນມະນຸດ
ມີຕຳແໜ່ງໜ້າທີ່ໃຫ້ລຸດລາຄາຊື້ລົງຈາກລາຄາຂາຍ
ທຳການໂກງດ້ວຍຕາຊົງໂກງ ຍ້ອນໂລບໃນຊັບ
ປົກປິດການໂກງໄວ້ຄືຄົນເມື່ອຈະຂ້າປາເອົາເຫຍື່ອປົກປິດເບັດໄວ້
[໔໘໑] ບຸກຄົນຜູ້ທຳການໂກງຖືກກຳຂອງຕົນຫຸ້ມຫໍ່ໄວ້
ບໍ່ມີການປ້ອງກັນໄດ້ເລີຍ ສັດນະຮົກເຫຼົ່ານັ້ນມີກຳຫຍາບຊ້າ
ເຮັດບາບແລ້ວ ຈຶ່ງຕ້ອງກືນກິນເບັດນອນຢູ່

(ພຣະເຈົ້າເນມີຕັດຖາມມາຕະລີເທບສາຣະຖີວ່າ)

[໔໘໔] ນາງສັດນະຮົກເຫຼົ່ານີ້ມີຮ່າງກາຍແຕກເປື່ອຍ
ໜ້າກຽດຊັງ ເປິະເປື້ອນ ເຕັມໄປດ້ວຍເລືອດແລະໜອງ
ຄືພວກງົວທີ່ວຂາດໃນບ່ອນຂ້າ
ຍົກແຂນທັງ ໔ ຂ້າງຂື້ນຮ້ອງຮໍ່າໄຮຢູ່
ນາງສັດນະຮົກນັ້ນຖືກຝັງໄວ້ໃນແຜ່ນດິນທຸກເມື່ອ
ມີພູໄຟລຸກຮຸ່ງເປັນແປວກິ້ງມາບົດບີ້

[໔໘໕] ທ່ານມາຕະລີເທບສາຣະຖີ ຄວາມຢ້ານຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນຄວາມເປັນໄປຂອງນາງສັດນະຮົກເຫຼົ່ານີ້
ເຮົາຂໍຖາມທ່ານ ນາງສັດນະຮົກເຫຼົ່ານີ້
ໄດ້ເຮັດບາບກຳອັນໃດໄວ້ນໍ ຈຶ່ງຖືກຝັງໄວ້ໃນແຜ່ນດິນທຸກເມື່ອ
ມີພູໄຟລຸກຮຸ່ງເປັນແປວກິ້ງມາບົດບີ້

[໔໙໔] ມາຕະລີເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດຊົ່ວໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິນັ້ນຜູ້ບໍ່ຊົງຮູ້ວ່າ

[໔໙໕] ຍິງເຫຼົ່ານັ້ນເປັນກຸນລະທິດາໃນມະນຸດສາໂລກທີ່ເປັນຢູ່ນີ້
ມີວຽກງານບໍ່ບໍລິສຸດ ປະພຶດບໍ່ສະງົບສະງ່ຽມ
ເຮັດໂຕເປັນນັກເລງ ປະຖິ້ມສາມີແລ້ວໄປຄົບຫາຊາຍອື່ນ
ຍ້ອນເຫດແຫ່ງຄວາມເຮີງຣົມແລະຫຼິ້ນສະນຸກ
ຍິງເຫຼົ່ານັ້ນເຮັດຈິດຂອງຕົນໃຫ້ເຮີງຣົມຢູ່ກັບຊາຍອື່ນ
ໃນມະນຸດສາໂລກແລ້ວ ມີພູໄຟລຸກຮຸ່ງເປັນແປວກິ້ງມາບົດບີ້

(ພຣະເຈົ້າເນມິຕັດຖາມມາຕະລີເທບສາຣະຖີວ່າ)

[໔໙໖] ຍ້ອນເຫດໃດ ນາຍນິຣະຍະບານອີກພວກໜຶ່ງນີ້
ຈຶ່ງຈັບຕົນສັດນະຮົກໃຫ້ມີຫົວຫ້ອຍລົງ ໂຍນໄປໃນນະຮົກ
ທ່ານມາຕະລີເທບສາຣະຖີ ຄວາມຢ້ານຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນຄວາມເປັນໄປຂອງສັດນະຮົກເຫຼົ່ານີ້
ເຮົາຂໍຖາມທ່ານ ສັດນະຮົກເຫຼົ່ານີ້ໄດ້ເຮັດບາບກຳອັນໃດໄວ້ນໍ
ຈຶ່ງຖືກນາຍນິຣະຍະບານຈັບຫົວຫ້ອຍລົງ ໂຍນໄປໃນນະຮົກ

[໔໙໗] ມາຕະລີເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດຊົ່ວໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິນັ້ນຜູ້ບໍ່ຊົງຮູ້ວ່າ

[໔໙໘] ສັດນະຮົກທັງຫຼາຍເມື່ອຍັງມີຊີວິດຢູ່ໃນມະນຸດສາໂລກ
ຕ່າງເຮັດກຳໄວ້ບໍ່ດີ ລ່ວງລະເມີດເຫຼົ່າພັນລະຍາຂອງຊາຍອື່ນ
ເຊັ່ນນັ້ນຊື່ວ່າເປັນຜູ້ລັກຂອງສຳຄັນທີ່ສຸດ
ຈຶ່ງຕ້ອງຖືກນາຍນິຣະຍະບານຈັບຫົວຫ້ອຍລົງ ໂຍນໄປໃນນະຮົກ

[໔໙໙] ສັດນະຮົກເຫຼົ່ານັ້ນສະເຫວີຍທຸກຂະເວທະນາຢູ່ໃນນະຮົກນັ້ນ
ສິ້ນປີຫຼວງຫຼາຍ ຍ້ອນບຸກຄົນຜູ້ເຮັດບາບກຳເປັນປົກກະຕິ
ຖືກກຳຂອງຕົນເຊີດໄວ້ທາງໜ້າ ບໍ່ມີການຕ້ານທານໄດ້ເລີຍ
ສັດນະຮົກເຫຼົ່ານັ້ນມີກຳອັນຫຍາບຊ້າ ເຮັດບາບແລ້ວ
ຈຶ່ງຕ້ອງຖືກນາຍນິຣະຍະບານຈັບຫົວຫ້ອຍລົງ ໂຍນໄປໃນນະຮົກ

(ພຣະເຈົ້າເນມິຕັດຖາມວ່າ)

[໕໐໐] ສັດນະຣົກທັງນ້ອຍແລະໃຫຍ່ເຫຼົ່ານີ້
ມີການປະກອບເຫດການຕ່າງ ໆ ກັນ
ມີຮູບຮ່າງແສນຈະເປັນຕາຢ້ານ ຜາກົດຢູ່ໃນນະຣົກ
ທ່ານມາຕະລີເທບສາຣະຖີ ຄວາມຢ້ານຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນຄວາມເປັນໄປຂອງສັດນະຣົກເຫຼົ່ານີ້
ເຮົາຂໍຖາມທ່ານ ສັດນະຣົກເຫຼົ່ານີ້ໄດ້ເຮັດບາບກຳອັນໃດໄວ້ນໍ
ຈຶ່ງຕ້ອງມາສະເຫວີຍທຸກຂະເວທະນາອັນຮ້າຍແຮງແຂງກ້າ
ແລະເຜັດຮ້ອນເຫຼືອປະມານຢູ່

[໕໐໑] ມາຕະລີເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດຊົ່ວໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິນັ້ນຜູ້ບໍ່ຊົງຮູ້ວ່າ

[໕໐໒] ເຫຼົ່າສັດນະຣົກທີ່ເມື່ອມີຊີວິດຢູ່ໃນມະນຸດສາໂລກ
ເປັນຜູ້ມີທິດຖິສຸດແສນຊົ່ວ[໑] ຫຼືງເຮັດກຳຍ້ອນຄວາມຊະລ່າໃຈ
ແລະຊັກຊວນຜູ້ອື່ນໃນທິດຖິເຊັ່ນນັ້ນ ມີທິດຖິຊົ່ວ
ຈຶ່ງຕ້ອງມາສະເຫວີຍທຸກຂະເວທະນາອັນແຮງແຂງກ້າ
ແລະເຜັດຮ້ອນເຫຼືອປະມານຢູ່

(ມາຕະລີເທບສາຣະຖີຟັງພຣະດຳຣັດແລ້ວ ຈຶ່ງສະແດງນະຣົກຫຼວງຫຼາຍໃນທິດທັງ ໔ ວ່າ)

[໕໐໓] ຂ້າແດ່ ມະຫາຣາດ ພຣະອົງໄດ້ຊົງຮູ້ສະຖານທີ່ຢູ່
ຂອງເຫຼົ່າສັດຜູ້ມີກຳຊົ່ວ ຂອງເຫຼົ່າສັດຜູ້ມີກຳຫຍາບຊ້າ
ແລະຄະຕິຂອງເຫຼົ່າສັດຜູ້ທຸສິນແລ້ວ
ຂ້າແດ່ ພຣະຣາຊາຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ບັດນີ້
ຂໍເຊີນພຣະອົງສະເດັດຂຶ້ນໄປໃນສຳນັກຂອງທ້າວສັກກະເທວະຣາດເທີ້ນ

(ເທບມາຕະລີສາຣະຖີຖືກພຣະເຈົ້າເນມິຕັດຖາມເຖິງເທບທິດາ ຈຶ່ງຂາບທູນພະຍາກອນແດ່ພຣະອົງວ່າ)

[໕໐໔] ວິມານ ໕ ຍອດນີ້ຍ່ອມຜາກົດນາງເທບທິດາຜູ້ມີອານຸພາບຫຼາຍ
ປະດັບດ້ວຍອາພອນທຸກຢ່າງມີດອກໄມ້ເປັນຕົ້ນ

ນັ່ງຢູ່ໃນທ່າມກາງທີ່ໄສຍາດ
ສະແດງເທບລິດໄດ້ຕ່າງ ໆ ສະຖິດຢູ່ໃນວິມານນີ້

(ພຣະເຈົ້າເນມິຕັດວ່າ)

[໕໐໕] ທ່ານມາຕະລິເທບສາຣະຖີ ຄວາມດີໃຈຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນພຶດຕິການຂອງນາງເທບທິດາຜູ້ສະຖິດຢູ່ໃນວິມານນີ້
ເຮົາຂໍຖາມທ່ານ ນາງເທບທິດານີ້ໄດ້ເຮັດກຳອັນໃດໄວ້ນໍ
ຈຶ່ງໄດ້ຂຶ້ນສະຫວັນບັນເທີງຢູ່ໃນວິມານ

[໕໐໖] ມາຕະລິເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດບຸນໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິນັ້ນຜູ້ບໍ່ຊົງຮູ້ວ່າ

[໕໐໗] ບາງເທື່ອພຣະອົງຈະຊົງເຄີຍໄດ້ຂ່າວວ່າ
ໃນມະນຸດສາໂລກມີນາງທາສີເຮືອນຂ້າທາດຂອງພາມຊື່ວ່າ ພີຣະນີ
ຄັ້ງໜຶ່ງນາງຮູ້ວ່າ ແຂກມາເຖິງແລ້ວຕາມການ
ກໍຊົມຊື່ນ ຍິນດີຄືມານດາຊົມຊື່ນບຸດຂອງຕົນ
ນາງມີການສັງລວມແລະການບໍລິຈາກ ບັນເທີງຢູ່ໃນວິມານ

(ມາຕະລິເທບສາຣະຖີຖືກພຣະເຈົ້າເນມິຕັດຖາມເຖິງກຸສົນກຳທີ່ໂສນະທິນນະເທບພະບຸດເຮັດແລ້ວ
ຈຶ່ງທູນຕອບແດ່ພຣະອົງວ່າ)

[໕໐໘] ວິມານທັງ ໗ ຫຼັງຖືກນິຣະມິດຂຶ້ນ ເຮືອງຮອງຜ່ອງໃສ
ມີເທບພະບຸດຕົນໜຶ່ງເຊິ່ງມີລິດຫຼາຍ
ປະດັບປະດາດ້ວຍອາພອນທຸກຢ່າງ
ມີໝູ່ເທບທິດາຫ້ອມລ້ອມຜັດປ່ຽນວຽນວົນຢູ່ໂດຍຮອບ
ໃນວິມານທັງ ໗ ຫຼັງ ເຊິ່ງຕັ້ງລຽງລາຍກັນຢູ່ຕາມລຳດັບນັ້ນ

(ພຣະເຈົ້າເນມິຕັດວ່າ)

[໕໐໙] ທ່ານມາຕະລິເທບສາຣະຖີ ຄວາມດີໃຈຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນພຶດຕິການຂອງເທບພະບຸດຜູ້ຢູ່ໃນວິມານນີ້
ເຮົາຂໍຖາມທ່ານ ເທບພະບຸດຕົນນີ້ໄດ້ເຮັດກຳດີອັນໃດໄວ້ນໍ
ຈຶ່ງໄດ້ຂຶ້ນສະຫວັນບັນເທີງຢູ່ໃນວິມານ

[໕໑໐] ມາຕະລີເທບສາຣະຖີຖືກພຣະເຈົ້າເນມີຕັດຖາມແລ້ວ
ຈຶ່ງທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດບຸນໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມີນັ້ນຜູ້ບໍ່ຊົງຮູ້ວ່າ

[໕໑໑] ເທບພະບຸດຕົນນີ້ເຄີຍເປັນຄະຫະບໍດີຊື່ໂສນະທິນນະ
ເປັນທານະບໍດີໃຫ້ສ້າງວິຫານ ໆ ຫຼັງອຸທິດແກ່ບັນພະຊິດ

[໕໑໒] ເຂົາໄດ້ອຸປັດຖາກພິກຂຸທັງຫຼາຍຜູ້ຢູ່ໃນວິຫານ ໆ ຫຼັງນັ້ນ
ດ້ວຍຄວາມເຄົາລົບ ໄດ້ບໍລິຈາກຜ້ານຸ່ງ ຜ້າຫົ່ມ
ອາຫານ ເສນາສະນະ ເຄື່ອງໄຕ້
ໃນທ່ານຜູ້ປະຕິບັດຕົງທັງຫຼາຍດ້ວຍຈິດເຫຼື້ອມໃສ

[໕໑໓] ໄດ້ຮັກສາອຸໂປສົດສີນທີ່ປະກອບດ້ວຍອົງ ໘
ທຸກມື້ ໑໔ ຄ່ຳ ໑໕ ຄ່ຳ ແລະ ໘ ຄ່ຳແຫ່ງປັກ
ພ້ອມທັງມື້ປາຕິຫາຣິຍະປັກ

[໕໑໔] ເປັນຜູ້ສັງລວມໃນສີນທຸກເມື່ອ ຈຶ່ງມາບັນເທີງຢູ່ໃນວິມານ
ຍ້ອນການສັງລວມແລະການບໍລິຈາກທານ

(ມາຕະລີເທບສາຣະຖີຖືກພຣະເຈົ້າເນມີຕັດຖາມເຖິງກຸສົນກຳຂອງເຫຼົ່າເທບອັບປະສອນ ຈຶ່ງທູນຕອບວ່າ)

[໕໑໕] ວິມານທີ່ຖືກນິຣະມິດໄວ້ດີແລ້ວນີ້ ມີຝາສຳເລັດດ້ວຍແກ້ວຜຶກ
ອັ່ງອໍໄປດ້ວຍໝູ່ນາງເທບອັບປະສອນຜູ້ປະເສີດ
ຮຸ່ງເຮືອງດ້ວຍເຮືອນຍອດປະກອບໄປດ້ວຍເຂົ້າແລະນ້ຳ
ງົດງາມດ້ວຍການຟ້ອນລຳແລະຂັບຮ້ອງທັງ ໔ ຢ່າງ
ສ່ອງແສງສະຫວ່າງສະໄຫວຢູ່

(ພຣະເຈົ້າເນມີຕັດວ່າ)

[໕໑໖] ທ່ານມາຕະລີເທບສາຣະຖີ ຄວາມດີໃຈຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນຄວາມເປັນໄປແຫ່ງວິມານນີ້
ເຮົາຂໍຖາມທ່ານ ນາງເທບອັບປະສອນເຫຼົ່ານີ້ໄດ້ເຮັດກຳດີອັນໃດໄວ້ນໍ
ຈຶ່ງໄດ້ຂຶ້ນສະຫວັນບັນເທີງຢູ່ໃນວິມານ

[໕໑໗] ມາຕະລິເທບສາຣະຖີຖືກພຣະເຈົ້າເນມີຕັດຖາມແລ້ວ
ຈຶ່ງທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດບຸນໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມີນັ້ນຜູ້ບໍ່ຊົງຮູ້ວ່າ

[໕໑໘] ນາງເທບອັບປະສອນເຫຼົ່ານັ້ນເມື່ອຍັງມີຊີວິດຢູ່ໃນມະນຸດສາໂລກ
ເຄີຍເປັນອຸປາສິກາຜູ້ມີສິນ ຍິນດີໃນການໃຫ້ທານ
ມີໃຈເຫຼື້ອມໃສຢູ່ປະຈຳ ຕັ້ງຢູ່ໃນສັດຈະ
ບໍ່ຜະໝາດໃນການຮັກສາອຸໂປສົດສິນ
ເປັນຜູ້ສັງລວມແລະທຳການບໍລິຈາກທານ
ຈຶ່ງບັນເທີງຢູ່ໃນສະຫວັນ

(ພຣະເຈົ້າເນມີຕັດຖາມເຖິງກຸສົນກຳຂອງເທບພະບຸດເຫຼົ່ານັ້ນວ່າ)

[໕໑໙] ວິມານທີ່ຖືກນິຣະມິດໄວ້ດີແລ້ວນີ້ ມີຝາສຳເລັດດ້ວຍແກ້ວໄພທູນ
ປະກອບດ້ວຍພູມິພາກທີ່ໜ້າອອນຊອນ
ຈັດສັນສ້າງໄວ້ເປັນສ່ວນ ໆ ສ່ອງແສງສະຫວ່າງສະໄຫວຢູ່

[໕໒໐] ສຽງທິບ ຄື ສຽງເປີງມາງ ສຽງກອງຕະໂພນ
ສຽງການຟ້ອນລຳຂັບຮ້ອງ ແລະສຽງເສບດົນຕີ
ເປ່ງອອກມາໜ້າຟັງ ເປັນທີ່ໜ້າອອນຊອນໃຈ

[໕໒໑] ເຮົາບໍ່ຮູ້ສຶກວ່າ ເຄີຍໄດ້ເຫັນຫຼືເຄີຍໄດ້ຟັງສຽງ
ທີ່ໜ້າອອນຊອນໃຈແນວນີ້ ທີ່ມ່ວນແນວນີ້ມາກ່ອນເລີຍ

[໕໒໒] ທ່ານມາຕະລິເທບສາຣະຖີ ຄວາມດີໃຈຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນຄວາມເປັນໄປຂອງວິມານນີ້
ເຮົາຂໍຖາມທ່ານ ເທບພະບຸດຕົນນີ້ໄດ້ເຮັດກຳດີອັນໃດໄວ້ນໍ
ຈຶ່ງໄດ້ຂຶ້ນສະຫວັນບັນເທີງຢູ່ໃນວິມານ

[໕໒໓] ມາຕະລິເທບສາຣະຖີຖືກພຣະເຈົ້າເນມີຕັດຖາມແລ້ວ
ຈຶ່ງທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດບຸນໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມີນັ້ນຜູ້ບໍ່ຊົງຮູ້ວ່າ

[໕໒໔] ເທບພະບຸດລາງພວກເມື່ອຍັງມີຊີວິດຢູ່ໃນມະນຸດສາໂລກ
ເຄີຍເປັນອຸປາສົກຜູ້ມີສິນ ໄດ້ສ້າງສວນດອກໄມ້

ນ້ຳສ້າງ ນ້ຳປະປາ ແລະຂົວ
ໄດ້ປົນນິບັດພຣະອະຣະຫັນຜູ້ສະງົບເຢັນດ້ວຍຄວາມເຄົາລົບ

[໕໒໕] ໄດ້ຖວາຍຈີວອນ ບິນທະບາດ ເສນາສະນະ ແລະປັດໄຈ໌
ໃນທ່ານຜູ້ປະຕິບັດຕົງທັງຫຼາຍດ້ວຍຈິດທີ່ເຫຼື້ອມໃສ

[໕໒໖] ໄດ້ຮັກສາອຸໂປສົດສິນທີ່ປະກອບດ້ວຍອົງ ໘
ທຸກມື້ ໑໔ ຄ່ຳ ໑໕ ຄ່ຳ ແລະ ໘ ຄ່ຳແຫ່ງປັກ
ພ້ອມທັງມື້ປາຕິຫາຣິຍະປັກ

[໕໒໗] ເປັນຜູ້ສັງລວມໃນສິນທຸກເມື່ອ
ທັງມີຄວາມສັງລວມແລະບໍລິຈາກທານ
ເທບພະບຸດເຫຼົ່ານັ້ນຈຶ່ງມາບັນເທີງຢູ່ໃນສະຫວັນ

(ພຣະເຈົ້າເນມິຊົງມີພຣະຫະໄທຍິນດີ ຈຶ່ງຕັດຖາມກຸສົນກຳຂອງເທບພະບຸດນັ້ນວ່າ)

[໕໒໘] ວິມານທີ່ຖືກນິຣະມິດໄວ້ດີແລ້ວນີ້ ມີຝາສຳເລັດດ້ວຍແກ້ວຜຶກ
ອັ່ງອໍດ້ວຍໝູ່ນາງເທບອັບປະສອນຜູ້ປະເສີດ
ຮຸ່ງເຮືອງດ້ວຍເຮືອນຍອດ

[໕໒໙] ບໍລິບູນດ້ວຍເຂົ້າແລະນ້ຳ
ງົດງາມດ້ວຍການຟ້ອນລຳຂັບຮ້ອງທັງ ໔ ສ່ອງແສງສະຫວ່າງສະໄຫວຢູ່
ແລະແມ່ນ້ຳສາຍໜຶ່ງທີ່ປະກອບດ້ວຍໄມ້ດອກນານາຊະນິດ
ໄຫຼໄປອ້ອມຮອບວິມານນັ້ນ

[໕໓໐] ທ່ານມາຕະລີເທບສາຣະຖີ ຄວາມດີໃຈຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນຄວາມເປັນໄປຂອງວິມານນີ້
ເຮົາຂໍຖາມທ່ານ ເທບພະບຸດນີ້ໄດ້ເຮັດກຳດີອັນໃດໄວ້ນໍ
ຈຶ່ງໄດ້ຂຶ້ນສະຫວັນບັນເທີງຢູ່ໃນວິມານ

[໕໓໑] ມາຕະລີເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ຈຶ່ງທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດບຸນໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິນັ້ນຜູ້ບໍ່ຊົງຮູ້ວ່າ

[໕໓໔] ເທບພະບຸດນີ້ເຄີຍເປັນຄະຫະບໍດີເປັນທານະບໍດີຢູ່ໃນນະຄອນມິຖິລາ

ໄດ້ສ້າງສວນສາທາລະນະ ນ້ຳສ້າງ ນ້ຳປະປາ ແລະຂົວ
ໄດ້ປະຕິບັດພຣະອະຣະຫັນຜູ້ສະງົບເຢັນດ້ວຍຄວາມເຄົາລົບ

[໕໓໓] ໄດ້ຖວາຍຈີວອນ ບິນທະບາດ ເສນາສະນະ ແລະປັດໄຈ
ໃນທ່ານຜູ້ປະຕິບັດຕົງທັງຫຼາຍດ້ວຍຈິດທີ່ເຫຼື້ອມໃສ

[໕໓໔] ໄດ້ຮັກສາອຸໂປສົດສິນທີ່ປະກອບດ້ວຍອົງ ໘
ທຸກມື້ ໑໔ ຄ່ຳ ໑໕ ຄ່ຳ ແລະ ໘ ຄ່ຳແຫ່ງປັກ
ພ້ອມທັງມື້ປາຕິຫາຣິຍະປັກ

[໕໓໕] ເປັນຜູ້ສັງລວມໃນສິນທຸກເມື່ອ ຈຶ່ງມາບັນເທີງຢູ່ໃນວິມານ
ຍ້ອນການສັງລວມແລະການບໍລິຈາກທານ

(ພຣະເຈົ້າເນມິຕັດຖາມເຖິງກຸສົນກຳຂອງເທບພະບຸດຜູ້ປະກອບດ້ວຍສົມບັດນັ້ນວ່າ)

[໕໓໖] ວິມານທີ່ນິຣະມິດໄວ້ດີແລ້ວນີ້ ມີຝາສຳເລັດດ້ວຍແກ້ວຜຼຶກ
ອັ່ງອໍດ້ວຍໝູ່ນາງເທບອັບປະສອນນາຣີຜູ້ປະເສີດ
ຮຸ່ງເຮືອງດ້ວຍເຮືອນຍອດ

[໕໓໗] ບໍລິບູນດ້ວຍເຂົ້າແລະນ້ຳ
ງົດງາມດ້ວຍການຟ້ອນລຳຂັບຮ້ອງທັງ ໔ ສ່ອງແສງສະຫວ່າງສະໄຫວຢູ່
ແລະແມ່ນ້ຳສາຍໜຶ່ງທີ່ປະກອບດ້ວຍຕົ້ນໄມ້ດອກນານາຊະນິດ
ໄຫຼໄປອ້ອມຮອບວິມານນັ້ນ

[໕໓໘] ມີໄມ້ເກດ ໄມ້ໝາກຂວິດ ໄມ້ໝາກມ່ວງ ໄມ້ສາລະ ໄມ້ຫວ້າ
ໄມ້ໝາກພັບ ແລະໄມ້ໝາກຫາດເປັນຈຳນວນຫຼາຍ ມີໜ່ວຍຕະຫຼອດລະດູ

[໕໓໙] ທ່ານມາຕະລີເທບສາຣະຖີ ຄວາມດີໃຈຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນຄວາມເປັນໄປຂອງວິມານນີ້
ເຮົາຂໍຖາມທ່ານ ເທບພະບຸດນີ້ໄດ້ເຮັດກຳດີອັນໃດໄວ້ນໍ
ຈຶ່ງໄດ້ຂຶ້ນສະຫວັນບັນເທີງຢູ່ໃນວິມານ

[໕໔໐] ມາຕະລີເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ຈຶ່ງທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດບຸນໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິນັ້ນຜູ້ບໍ່ຊົງຮູ້ວ່າ

[໕໔໑] ເທບພະບຸດນີ້ເຄີຍເປັນຄະຫະບໍດີ ເປັນທານະບໍດີຢູ່ໃນນະຄອນມິຖິລາ
ໄດ້ສ້າງສວນສາທາລະນະ ນໍ້າສ້າງ ນໍ້າປະປາ ແລະຂົວ
ໄດ້ປະຕິບັດພຣະອະຣະຫັນຜູ້ສະຫງົບເຢັນດ້ວຍຄວາມເຄົາລົບ

[໕໔໒] ໄດ້ຖວາຍຈີວອນ ບິນທະບາດ ເສນາສະນະ ແລະປັດໄຈ
ໃນທ່ານຜູ້ປະຕິບັດຕົງທັງຫຼາຍດ້ວຍຈິດທີ່ເຫຼື້ອມໃສ

[໕໔໓] ໄດ້ຮັກສາອຸໂປສົດສິນທີ່ປະກອບດ້ວຍອົງ ໘
ທຸກມື້ ໑໔ ຄ່ຳ ໑໕ ຄ່ຳ ແລະ ໘ ຄ່ຳແຫ່ງປັກ
ພ້ອມທັງມື້ປາຕິຫາຣິຍະປັກ

[໕໔໔] ເປັນຜູ້ສັງລວມໃນສິນທຸກເມື່ອ ຈຶ່ງມາບັນເທີງຢູ່ໃນວິມານ
ຍ້ອນການສັງລວມແລະການບໍລິຈາກທານ

(ພຣະເຈົ້າເນມິຕັດຖາມມາຕະລີເທບສາຣະຖີວ່າ)

[໕໔໕] ວິມານທີ່ນິຣະມິດໄວ້ດີແລ້ວນີ້ ມີຝາສຳເລັດດ້ວຍແກ້ວໄພທູນ
ປະກອບດ້ວຍພູມິພາກອັນໜ້າອອນຊອນ
ທີ່ຈັດສັນສ້າງໄວ້ເປັນສ່ວນ ໆ ສ່ອງແສງສະຫວ່າງສະໄຫວຢູ່

[໕໔໖] ມີສຽງທິບ ຄື ສຽງເປີງມາງ ສຽງກອງຕະໂພນ
ສຽງການຟ້ອນລຳຂັບຮ້ອງ ແລະສຽງເສບດົນຕີ
ເປ່ງອອກມາໜ້າຟັງ ເປັນທີ່ໜ້າອອນຊອນໃຈ

[໕໔໗] ເຮົາບໍ່ຮູ້ສຶກວ່າ ເຄີຍໄດ້ເຫັນຫຼືເຄີຍໄດ້ຟັງສຽງ
ທີ່ໜ້າອອນຊອນແນວນີ້ ທີ່ມ່ວນແນວນີ້ມາກ່ອນເລີຍ

[໕໔໘] ທ່ານມາຕະລີເທບສາຣະຖີ ຄວາມດີໃຈຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນຄວາມເປັນໄປໃນວິມານນີ້
ເຮົາຂໍຖາມທ່ານ ເທບພະບຸດນີ້ໄດ້ເຮັດກຳດີອັນໃດໄວ້ນໍ
ຈຶ່ງໄດ້ຂຶ້ນສະຫວັນບັນເທີງຢູ່ໃນວິມານ

[໕໔໙] ມາຕະລີເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດບຸນໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິນັ້ນຜູ້ບໍ່ຊົງຮູ້ວ່າ

[໕໕໐] ເທບພະບຸດຕົນນີ້ເຄີຍເປັນຄະຫະບໍດີ
ເປັນທານະບໍດີຢູ່ໃນນະຄອນພາຣານະສີ
ໄດ້ສ້າງສວນສາທາລະນະ ນ້ຳສ້າງ ນ້ຳປະປາ ແລະຂົວ
ໄດ້ປະຕິບັດພຣະອະຣະຫັນຜູ້ສະງົບເຢັນດ້ວຍຄວາມເຄົາລົບ

[໕໕໑] ໄດ້ຖວາຍຈີວອນ ບິນທະບາດ ເສນາສະນະ ແລະປັດໄຈ
ໃນທ່ານຜູ້ປະຕິບັດຕົງທັງຫຼາຍດ້ວຍຈິດທີ່ເຫຼື້ອມໃສ

[໕໕໔] ໄດ້ຮັກສາອຸໂປສົດສິນທີ່ປະກອບດ້ວຍອົງ ໘
ທຸກມື້ ໑໔ ຄ່ຳ ໑໕ ຄ່ຳ ແລະ ໘ ຄ່ຳແຫ່ງປັກ
ພ້ອມທັງມື້ປາຕິຫາຣິຍະປັກ

[໕໕໓] ເປັນຜູ້ສັງລວມໃນສິນທຸກເມື່ອ ຈຶ່ງມາບັນເທີງຢູ່ໃນວິມານ
ຍ້ອນການສັງລວມແລະການບໍລິຈາກທານ

(ພຣະເຈົ້າເນມິຕັດຖາມມາຕະລີເທບສາຣະຖີວ່າ)

[໕໕໔] ວິມານຄຳທີ່ນິຣະມິດຂຶ້ນນີ້ ຮຸ່ງເຮືອງສຸກໃສ
ຄືດວງອາທິດດວງໃຫຍ່ຜຸດຂຶ້ນມາເປັນສີແດງ

[໕໕໕] ທ່ານມາຕະລີເທບສາຣະຖີ ຄວາມດີໃຈຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນຄວາມເປັນໄປໃນວິມານນີ້
ເຮົາຂໍຖາມທ່ານ ເທບພະບຸດນີ້ໄດ້ເຮັດກຳດີອັນໃດໄວ້ນໍ
ຈຶ່ງໄດ້ຂຶ້ນສະຫວັນບັນເທີງຢູ່ໃນວິມານ

[໕໕໖] ມາຕະລີເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດບຸນໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິນັ້ນຜູ້ບໍ່ຊົງຮູ້ວ່າ

[໕໕໗] ເທບພະບຸດຕົນນີ້ເຄີຍເປັນຄະຫະບໍດີ ເປັນທານະບໍດີຢູ່ໃນນະຄອນສາວັດຖີ
ໄດ້ສ້າງສວນສາທາລະນະ ນ້ຳສ້າງ ນ້ຳປະປາ ແລະຂົວ
ໄດ້ປະຕິບັດພຣະອະຣະຫັນຜູ້ສະງົບເຢັນດ້ວຍຄວາມເຄົາລົບ

[໕໕໘] ໄດ້ຖວາຍຈີວອນ ບິນທະບາດ ເສນາສະນະ ແລະປັດໄຈ
ໃນທ່ານຜູ້ປະຕິບັດຕົງທັງຫຼາຍດ້ວຍຈິດທີ່ເຫຼື້ອມໃສ

[໕໕໙] ໄດ້ຮັກສາອຸໂປສົດສິນທີ່ປະກອບດ້ວຍອົງ ໘
ທຸກມື້ ໑໔ ຄ່ຳ ໑໕ ຄ່ຳ ໘ ຄ່ຳແຫ່ງປັກ
ພ້ອມທັງມື້ປາຕິຫາຣິຍະປັກ

[໕໖໐] ເປັນຜູ້ສັງລວມໃນສິນທຸກເມື່ອ ຈຶ່ງມາບັນເທີງຢູ່ໃນວິມານ
ຍ້ອນການສັງລວມແລະການບໍລິຈາກທານ

(ພຣະເຈົ້າເນມິທອດພຣະເນດສົມບັດຂອງເທບພະບຸດທີ່ຢູ່ໃນວິມານນັ້ນ ຈຶ່ງຕັດວ່າ)

[໕໖໑] ວິມານຄຳຫຼວງຫຼາຍນີ້ທີ່ໄດ້ນິຣະມິດໄວ້
ລອຍຢູ່ໃນອາກາດ ຮຸ່ງເຮືອງສຸກໃສຄືສາຍຟ້າ
ສ່ອງແສງເຮືອງ ໆ ຢູ່ໃນລະຫວ່າງກ້ອນເພື້ອທຶບ
ເຫຼົ່າເທບພະບຸດຜູ້ມີລິດຫຼາຍ ປະດັບດ້ວຍອາພອນທັງປວງ
ມີໝູ່ເທບອັບປະສອນຫ້ອມລ້ອມຜັດປ່ຽນວຽນວົນກັນ
ຢູ່ໃນວິມານເຫຼົ່ານັ້ນໂດຍຮອບ

[໕໖໒] ທ່ານມາຕະລີເທບສາຣະຖີ ຄວາມດີໃຈຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນຄວາມເປັນໄປໃນວິມານນີ້
ເຮົາຂໍຖາມທ່ານ ເທບພະບຸດເຫຼົ່ານີ້ໄດ້ເຮັດກຳດີອັນໃດໄວ້ນໍ
ຈຶ່ງໄດ້ຂຶ້ນສະຫວັນບັນເທີງຢູ່ໃນວິມານ

[໕໖໓] ມາຕະລີເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດບຸນໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິນັ້ນຜູ້ບໍ່ຊົງຮູ້ວ່າ

[໕໖໔] ເທບພະບຸດເຫຼົ່ານີ້ເຄີຍເປັນສາວົກໃນສາດສະໜາ
ຂອງພຣະສຳມາສຳພຸດທະເຈົ້າ ໃນເມື່ອສັດທາຕັ້ງໝັ້ນແລ້ວ
ເມື່ອພຣະຜູ້ມີພຣະພາກເຈົ້າຊົງປະກາດພຣະສັດທຳດີແລ້ວ
ໄດ້ເຮັດຕາມພຣະດຳຣັດຂອງພຣະສາດສະດາ
ຂ້າແດ່ ພຣະຣາຊາ ເຊີນພຣະອົງທອດພຣະເນດ
ສະຖານທີ່ສະຖິດຂອງເທບພະບຸດເຫຼົ່ານັ້ນເທີ້ນ

(ມາຕະລີເທບສາຣະຖີເມື່ອຈະເຮັດອຸດສາຫະເພື່ອຈະໃຫ້ພຣະເຈົ້າເນມິສະເດັດໄປສຳນັກຂອງທ້າວ
ສັກກະເທວະຣາດ ຈຶ່ງທູນວ່າ)

[໕໓໕] ຂ້າແດ່ ມະຫາຣາດ ພຣະອົງໄດ້ຊົງຮູ້ສະຖານທີ່ຢູ່
ຂອງເຫຼົ່າສັດຜູ້ມີກຳຊົ່ວ
ແລະຊົງຮູ້ສະຖານທີ່ສະຖິດຢູ່ຂອງເຫຼົ່າເທບພະເຈົ້າຜູ້ມີກຳດີແລ້ວ
ຂ້າແດ່ ພຣະຣາຊາຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ບັດນີ້ ເຊີນພຣະອົງສະເດັດຂຶ້ນໄປໃນສຳນັກຂອງທ້າວສັກກະເທວະຣາດເທີ້ນ

(ພຣະສາດສະດາເມື່ອຈະຕັດການທີ່ພຣະເຈົ້າເນມິທອດພຣະເນດພູເຫຼົ່ານັ້ນແລ້ວຕັດຖາມມາຕະລີເທບສາຣະຖີໃຫ້ແຈ່ມແຈ້ງ ຈຶ່ງຕັດວ່າ)

[໕໓໖] ພຣະມະຫາຣາດສະເດັດປະທັບເທິງທິບພະຍານ
ທຽມດ້ວຍມ້າສິນທົບ ໑,໐໐໐ ໂຕ ສະເດັດໄປຢູ່
ໄດ້ທອດພຣະເນດເຫັນພູທັງຫຼາຍໃນລະຫວ່າງມະຫາສະມຸດສີທັນດອນ
ແລ້ວຈຶ່ງໄດ້ຕັດຖາມມາຕະລີເທບສາຣະຖີວ່າ ພູເຫຼົ່ານີ້ຊື່ອັນໃດ

[໕໓໗] ມາຕະລີເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດບຸນໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິນັ້ນຜູ້ບໍ່ຊົງຮູ້

(ມາຕະລີເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແນວນັ້ນແລ້ວ ຈຶ່ງຂາບທູນວ່າ)

[໕໓໘] ພູຫຼວງທັງ ໗ ໜ່ວຍ ຄື ພູສຸທັດສະນະ
ພູກະຣະວິກະ ພູອິສິນທອນ ພູຍຸຄັນທອນ
ພູເນມິນທອນ ພູວິນຕະກະ ພູອັດສະກັນນະ

[໕໓໙] ພູເຫຼົ່ານີ້ສູງຂຶ້ນໄປຕາມລຳດັບ
ຢູ່ໃນມະຫາສະມຸດສີທັນດອນ ເປັນບ່ອນຢູ່ຂອງທ້າວມະຫາຣາດ
ຂ້າແດ່ ພຣະຣາຊາ ເຊີນພຣະອົງທອດພຣະເນດພູເຫຼົ່ານັ້ນເທີ້ນ

(ພຣະເຈົ້າເນມິທອດພຣະເນດເຫັນພຣະອິນນັ້ນແລ້ວ ຈຶ່ງຕັດຖາມມາຕະລີເທບສາຣະຖີວ່າ)

[໕໗໐] ປະຕູມີຮູບຫຼາຍແນວ ຮຸ່ງເຮືອງ
ງົດງາມໄປດ້ວຍຣັດຕະນະນານາຊະນິດ
ສົມບູນດ້ວຍຮູບຄືພຣະອິນ ຍ່ອມຜາກົດ
ຄືປ່າໃຫຍ່ທີ່ເສືອໂຄ່ງຫຼືຣາດຊະສີຮັກສາໄວ້ດີແລ້ວ

[໕໗໑] ທ່ານມາຕະລີເທບສາຣະຖີ ຄວາມດີໃຈຍ່ອມເກີດແກ່ເຮົາ
ຍ້ອນໄດ້ເຫັນປະຕູນີ້ ເຮົາຂໍຖາມທ່ານ
ປະຕູນີ້ເຂົາຮຽກຊື່ວ່າອັນໃດນໍ
ໜ້າອອນຊອນໃຈ ຜາກົດແຕ່ທີ່ໄກແນວນີ້

[໕໗໒] ມາຕະລີເທບສາຣະຖີຖືກພຣະເຈົ້າເນມີຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດບຸນໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມີນັ້ນຜູ້ບໍ່ຊົງຮູ້ວ່າ

[໕໗໓] ປະຕູນີ້ເຂົາຮຽກວ່າ ຈິດຕະຣະກູຕະ
ເປັນທີ່ສະເດັດເຂົ້າອອກຂອງທ້າວສັກກະເທວະຣາດ
ປະຕູນີ້ເປັນຊຸ້ມປະຕູຂອງເທບນະຄອນ
ທີ່ຕັ້ງຢູ່ໃນບ່ອນສຸດແຫ່ງພູສຸທັດສະນະ

[໕໗໔] ປະຕູມີຮູບຫຼາຍແນວ ຮຸ່ງເຮືອງ
ງົດງາມໄປດ້ວຍຣັດຕະນະນານາຊະນິດ
ສົມບູນດ້ວຍຮູບຄືພຣະອິນ ຍ່ອມຜາກົດ
ຄືປ່າໃຫຍ່ທີ່ເສືອໂຄ່ງຫຼືຣາດຊະສີຮັກສາໄວ້ດີແລ້ວ
ຂ້າແດ່ ພຣະອົງຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຂໍເຊີນພຣະອົງສະເດັດເຂົ້າໄປທາງປະຕູນີ້ເທີ້ນ
ຂໍເຊີນພຣະອົງຊົງຢຽບພາກພື້ນອັນເປັນທິບ

(ພຣະສາດສະດາຕັດວ່າ)

[໕໗໕] ພຣະມະຫາຣາດສະເດັດປະທັບເທິງທິບພະຍານ
ທີ່ທຽມດ້ວຍມ້າສິນທົບປະມານ ໑,໐໐໐ ໂຕ ສະເດັດໄປຢູ່
ໄດ້ທອດພຣະເນດເຫັນເທວະສະພານີ້ແລ້ວ

(ພຣະເຈົ້າເນມີໄດ້ທອດພຣະເນດເຫັນເທວະສະພາຊື່ສຸທຳມາ ຈຶ່ງຕັດຖາມມາຕະລີເທບສາຣະຖີ ວ່າ)

[໕໗໖] ວິມານທີ່ນິຣະມິດໄວ້ແລ້ວນີ້ ມີຝາສຳເລັດດ້ວຍແກ້ວໄພທູນ
ປຽບເໝືອນອາກາດ ສ່ອງແສງສະຫວ່າງສະໄຫວ ທໍສີຂຽວໃນສາຣະທະການ

[໕໗໗] ທ່ານມາຕະລີເທບສາຣະຖີ ຄວາມດີໃຈຍ່ອມເກີດແກ່ເຮົາ

ຍ້ອນໄດ້ເຫັນຄວາມເປັນໄປໃນວິມານນີ້
ເຮົາຂໍຖາມທ່ານ ວິມານນີ້ເຂົາຮຽກວ່າອັນໃດນໍ
ໜ້າອອນຊອນໃຈ ຜາກົດແຕ່ໄກແນວນີ້

[໕໖໘] ມາຕະລີເທບສາຣະຖີຖືກພຣະເຈົ້າເນມິຕັດຖາມແລ້ວ
ກໍທູນພະຍາກອນວິບາກຂອງເຫຼົ່າສັດຜູ້ເຮັດບຸນໄວ້
ຕາມທີ່ຮູ້ແດ່ພຣະເຈົ້າເນມິຜູ້ບໍ່ຊົງຮູ້ວ່າ

[໕໖໙] ວິມານນີ້ນັ້ນເປັນເທວະສະພາ ເຂົາຮຽກຊື່ຜາກົດວ່າ ສຸທຳມາ
ຮຸ່ງເຮືອງດ້ວຍແກ້ວໄພທູນຕະການຕາ ທີ່ນິຣະມິດໄວ້ຢ່າງດີ

[໕໗໐] ມີເສົາ ໘ ຫຼ່ຽມທີ່ເຮັດໄວ້ດີແລ້ວ
ທຸກຕົ້ນລ້ອນແລ້ວດ້ວຍແກ້ວໄພທູນ
ເປັນບ່ອນຢູ່ຂອງເທບຊັ້ນຕາວະຕິງສາທັງມວນ
ເຊິ່ງມີພຣະອິນເປັນປະທານ

[໕໗໑] ປະຊຸມກັນຄິດເຖິງປະໂຫຍດຂອງເຫຼົ່າເທວະດາແລະມະນຸດ
ຂ້າແດ່ ພຣະຣາຊາຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຂໍເຊີນພຣະອົງສະເດັດເຂົ້າໄປສູ່ທິບພະຍະສະຖານ
ເປັນທີ່ບັນເທີງກັນແລະກັນຂອງເຫຼົ່າເທວະດາໂດຍທາງນີ້ເທີ້ນ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໕໗໒] ເທບພະເຈົ້າທັງຫຼາຍເຫັນພຣະເຈົ້າເນມິສະເດັດມາເຖິງ
ຕ່າງພາກັນຍິນດີຕ້ອນຮັບວ່າ
ຂ້າແດ່ ມະຫາຣາດ ພຣະອົງສະເດັດມາດີແລ້ວບໍ່ໄດ້ສະເດັດມາຮ້າຍ
ຂ້າແດ່ ພຣະຣາຊາຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ບັດນີ້ ຂໍພຣະອົງປະທັບນັ່ງ ຢູ່ບ່ອນໃກ້ທ້າວເທວະຣາດເທີ້ນ

[໕໗໓] ເຖິງທ້າວເທວະຣາດກໍຊົງຍິນດີຕ້ອນຮັບພຣະອົງ
ຜູ້ເປັນໃຫຍ່ແຫ່ງຊາວແຄວ້ນວິເທຫະ ຊົງປົກຄອງນະຄອນມິຖິລາ
ທ້າວວາສະວະກໍຊົງເຊື້ອເຊີນດ້ວຍທິບພະຍະກາມາຣົມແລະທິບພະອາດວ່າ

[໕໗໔] ຂ້າແດ່ ພຣະຣາຊາຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ເປັນຄວາມດີແລ້ວທີ່ພຣະອົງໄດ້ສະເດັດມາເຖິງທິບພະສະຖານ

ເປັນບ່ອນຢູ່ຂອງເຫຼົ່າເທວະດາຜູ້ບັນດານສິ່ງທີ່ຕົນຕ້ອງປະສົງ
ໃຫ້ເປັນໄປຕາມອຳນາດ ຂໍເຊີນພຣະອົງປະທັບຢູ່ໃນໝູ່ເທບພະເຈົ້າ
ຜູ້ປະກອບດ້ວຍຄວາມສຳເລັດແຫ່ງທິບພະຍະກາມາຣົມທັງປວງ
ຂໍເຊີນພຣະອົງຊົງສະເຫວີຍກາມທັງຫຼາຍ
ທີ່ບໍ່ແມ່ນຂອງມະນຸດຢູ່ໃນໝູ່ເທບຊັ້ນຕາວະຕິງສາເທີ້ນ ຂ້ານ້ອຍ

(ພຣະເຈົ້າເນມິຖືກທ້າວເທວະຣາດເຊື້ອເຊີນດ້ວຍການທິບແລະໃຫ້ປະທັບນັ່ງເມື່ອຈະຊົງປະຕິເສດ ຈຶ່ງຕັດວ່າ)

[໕໗໕] ຍານທີ່ຂໍຢືມເຂົາມາ ຊັບທີ່ຂໍຢືມເຂົາມາສຳເລັດປະໂຫຍດສັນໃດ
ຂອງທີ່ບຸກຄົນອື່ນໃຫ້ກໍສຳເລັດປະໂຫຍດຄືກັນສັນນັ້ນ

[໕໗໖] ຂ້ານ້ອຍບໍ່ໄດ້ປະສົງສິ່ງທີ່ຜູ້ອື່ນໃຫ້
ບຸນທັງຫຼາຍທີ່ຕົນໄດ້ເຮັດໄວ້ເອງ
ເປັນຊັບຂອງຂ້ານ້ອຍຜະແນກໜຶ່ງຕ່າງຫາກ

[໕໗໗] ຂ້ານ້ອຍນັ້ນຈັກກັບໄປເຮັດບຸນໃຫ້ຫຼາຍຂຶ້ນໃນໝູ່ມະນຸດ
ດ້ວຍການບໍລິຈາກທານ ການປະພຶດສະໝ່ຳສະເໝີ
ຄວາມສັງລວມ ແລະຄວາມເຝິກອິນຊີທີ່ບຸກຄົນເຮັດແລ້ວ
ຈະໄດ້ຮັບຄວາມສຸກແລະບໍ່ເດືອດຮ້ອນໃຈໃນພາຍຫຼັງ

(ພຣະເຈົ້າເນມິໂພທິສັດເມື່ອຈະຕັດຍ້ອງຍໍຄຸນຂອງມາຕະລີເທບສາຣະຖີ ຈຶ່ງຕັດວ່າ)

[໕໗໘] ທ່ານມາຕະລີເທບສາຣະຖີໄດ້ສະແດງສະຖານທີ່ຢູ່ຂອງທວຍເທບ
ຜູ້ມີກຳດີ ແລະສະຖານທີ່ຢູ່ຂອງເຫຼົ່າສັດນະຣົກຜູ້ມີກຳຊົ່ວ
ຊື່ວ່າເປັນຜູ້ມີອຸປະກາຣະຫຼາຍແກ່ເຮົາ

(ພຣະສາດສະດາເມື່ອຈະຕັດການທີ່ພຣະເຈົ້າເນມິໂພທິສັດບວດແລ້ວໃຫ້ແຈ້ງຄັກ ຈຶ່ງຕັດພຣະຄາຖາສຸດທ້າຍວ່າ)

[໕໗໙] ພຣະເຈົ້າເນມິແຫ່ງຊົນຊາວແຄວັນວິເທຫະຊົງປົກຄອງນະຄອນມິຖິລາ
ເມື່ອໄດ້ຕັດພຣະຄາຖານີ້ແລ້ວຊົງບູຊາຍັນຫຼວງຫຼາຍແລ້ວ
ຈຶ່ງຊົງເຂົ້າເຖິງຄວາມສັງລວມ

**ເນມິຣາດຊະຊາດົກທີ ໔ ຈົບ**

# ໕. ມະໂຫສົດຊາດົກ[٩] (໕໔໘)
## ວ່າດ້ວຍພຣະມະໂຫສົດບັນດິດຊົງພ່ຳເພັງປັນຍາປາຣະມີ

(ພຣະເຈົ້າວິເທຫະທອດພຣະເນດເຫັນມະໂຫສົດບັນດິດໂພທິສັດເຂົ້າມາເຝົ້າ ກໍສະບາຍພຣະຫະໄທ ເມື່ອຈະຮັບສັ່ງກັບມະໂຫສົດບັນດິດໂພທິສັດ ຈຶ່ງຕັດວ່າ)

[໕໙໐] ທ່ານມະໂຫສົດ ພຣະເຈົ້າພົມມະທັດຜູ້ຄອງແຄວ້ນປັນຈາລະ
ສະເດັດຍາຕາທັບມາພ້ອມດ້ວຍກອງທັບທຸກໝູ່ເຫຼົ່າ
ກອງທັບຂອງພຣະເຈົ້າປັນຈາລະນັ້ນປະມານບໍ່ໄດ້

[໕໙໑] ມີກອງຊ່າງໂຍທາ ກອງຮາບ
ລ້ວນແຕ່ສະຫຼາດໃນສົງຄາມທຸກຢ່າງ ມີສຽງອຶກກະທຶກກຶກກ້ອງ
ເປັນສັນຍາໃຫ້ກັນແລະກັນຮູ້ໄດ້ດ້ວຍສຽງກອງແລະສຽງຫອຍສັງ

[໕໙໒] ມີຄວາມຮູ້ໃນການໃຊ້ໂລຫະທາດ ມີເຄື່ອງປະດັບຄົບຖ້ວນ
ມີທຸງທິວສະຫຼອນ ຊ້າງແລະມ້າ ສົມບູນດີດ້ວຍຜູ້ຊ່ຽວຊານສິນ
ຕັ້ງໝັ້ນດ້ວຍເຫຼົ່າທະຫານຜູ້ອົງອາດ

[໕໙໓] ກ່າວກັນວ່າ ໃນກອງທັບນີ້ ມີບັນດິດ ໑໐ ຄົນ
ມີປັນຍາພຽງດັ່ງແຜ່ນດິນ ມີການປະຊຸມເປີກສາກັນໃນບ່ອນລັບ
ພຣະມານດາຂອງພຣະເຈົ້າປັນຈາລະເປັນອົງທີ ໑໑
ຊ່ອຍປົກຄອງສັ່ງສອນຊາວແຄວ້ນປັນຈາລະ

[໕໙໔] ອັນໜຶ່ງ ໃນບັນດາຊົນເຫຼົ່ານີ້
ກະສັດ ໑໐໑ ພຣະນະຄອນຜູ້ເຮືອງຍົດຕາມສະເດັດພຣະເຈົ້າປັນຈາລະ
ຖືກຊິງແຄວ້ນ ຢ້ານໄພ
ຈຶ່ງຕົກຢູ່ໃນອຳນາດຂອງຊາວແຄວ້ນປັນຈາລະ

[໕໙໕] ເປັນຜູ້ເຮັດຕາມທີ່ພຣະຣາຊາຮັບສັ່ງ
ບໍ່ມີຄວາມປາຖະໜາຈະກ່າວ ກໍຈຳຕ້ອງກ່າວຄຳເປັນທີ່ຮັກ
ຕ້ອງຕາມສະເດັດພຣະເຈົ້າປັນຈາລະຜູ້ມີອຳນາດມາກ່ອນ
ບໍ່ມີຄວາມປາຖະໜາກໍຕ້ອງຕົກຢູ່ໃນອຳນາດຂອງພຣະເຈົ້າປັນຈາລະ

[໕໙໖] ນະຄອນມິຖິລາກໍຖືກລ້ອມດ້ວຍກອງທັບນັ້ນເປັນ ໓ ຊັ້ນ
ເມືອງຫຼວງຂອງຊາວແຄວ້ນວິເທຫະກໍຖືກຂຸດເປັນຄູໂດຍຮອບ

[໕໙໗] ທ່ານມະໂຫສົດ ກອງທັບທີ່ຫ້ອມລ້ອມນະຄອນມິຖິລານັ້ນ
ຜາກົດຄືດາວເທິງທ້ອງຟ້າ
ທ່ານຈິ່ງຮູ້ວ່າ ຈັກລອດພົ້ນໄດ້ແນວໃດ

(ມະໂຫສົດບັນດິດໂພທິສັດຂາບທູນວ່າ)

[໕໙໘] ຂ້າແດ່ ສົມມຸດຕິເທບ
ຂໍພຣະອົງຊົງຢຽດພຣະບາດຕາມພຣະກະເສມສຳຣານເທີ້ນ
ຂໍເຊີນສະເຫວີຍແລະອອນຊອນພຣະຫະໄທໃນການເທີ້ນ
ພຣະເຈົ້າພົມມະທັດຈະຕ້ອງຖິ້ມກອງທັບຊາວແຄວ້ນປັນຈາລະສະເດັດໜີໄປ

(ພາມເກວັດເຂົ້າໄປເຝົ້າຖວາຍບັງຄົມພຣະເຈົ້າວິເທຫະແລ້ວຂາບທູນເຫດທີ່ຕົນມາວ່າ)

[໕໙໙] ພຣະຣາຊາມີພຣະປະສົງຈະກະທຳສັນຖະວະໄມຕີກັບພຣະອົງ
ຈະພຣະຣາດຊະທານຣັດຕະນະແກ່ພຣະອົງ ຕັ້ງແຕ່ນີ້ໄປ
ຣາຊະທູດທັງຫຼາຍຜູ້ມີວາຈາມ່ອນ ເວົ້າຄຳເປັນທີ່ຮັກຈົ່ງມາ

[໖໐໐] ຂໍຈົ່ງກ່າວວາຈາອ່ອນຫວານ ເປັນທີ່ຊົມຊື່ນຕໍ່ກັນ
ຂໍແຄວ້ນປັນຈາລະກັບແຄວ້ນວິເທຫະ
ທັງ ໒ ແຄວ້ນນັ້ນຈົ່ງເປັນອັນໜຶ່ງອັນດຽວກັນ

(ພຣະເຈົ້າວິເທຫະທອດພຣະເນດພາມເກວັດແລ້ວ ຕັດຖາມເຖິງອາການທີ່ສົນທະນາກັບ
ມະໂຫສົດບັນດິດໂພທິສັດວ່າ)

[໖໐໑] ທ່ານເກວັດ ທ່ານໄດ້ພົບກັບມະໂຫສົດເປັນແນວໃດນໍ
ຂໍເຊີນເລົ່າເລື້ອງຣາວນັ້ນ ມະໂຫສົດກັບທ່ານຕ່າງອົດໂທດກັນແລ້ວແລ້ວບໍ
ມະໂຫສົດຍິນດີແລ້ວບໍ

(ພາມເກວັດຈຶ່ງຂາບທູນວ່າ)

[໖໐໒] ຂ້າແດ່ ພຣະອົງຜູ້ເປັນໃຫຍ່ແຫ່ງຊົນ ຄົນຜູ້ບໍ່ສຸພາບ
ບໍ່ຊົມຊື່ນກັບໃຜ ເປັນຄົນກະດ້າງ ບໍ່ຊື່ວ່າເປັນສັດຕະບຸຣຸດ
ເຂົາບໍ່ກ່າວຂໍ້ຄວາມອັນໃດ ໆ ເປັນຄືຄົນກືກແລະຄົນໜວກ

(ພຣະເຈົ້າວິເທຫະໄດ້ສະດັບດັ່ງນັ້ນ ບໍ່ຊົງຍິນດີ ບໍ່ຊົງຄັດຄ້ານ ເລີ່ມຕັ້ງຄຳຖາມຂຶ້ນເອງວ່າ)

[໖໐໓] ມິນບົດນີ້ເຫັນໄດ້ຍາກແນ່ນອນ
ມະໂຫສົດຜູ້ມີຄວາມພຽນໄດ້ເຫັນປະໂຫຍດອັນບໍລິສຸດ
ຈິງແນວນັ້ນ ກາຍຂອງເຮົາກໍຍັງຫວັ່ນ ໆ ຢູ່
ໃຜນໍຈັກຖິ້ມແຄວັນຂອງຕົນໄປສູ່ເງື້ອມມືຂອງຜູ້ອື່ນ

(ພຣະເຈົ້າວິເທຫະຕັດຖາມມະໂຫສົດບັນດິດໂພທິສັດວ່າ)

[໖໐໔] ມະຕິຂອງເຮົາທັງ ໖ ຄົນຜູ້ເປັນບັນດິດ
ມີປັນຍາປະເສີດ ເປັນເອກກະສັນສະເໝີກັນ
ມະໂຫສົດ ແມ່ນທ່ານກໍຈົ່ງລົງມະຕິວ່າ ຄວນໄປບໍ່ຄວນໄປ
ຫຼືຄວນຍັບຍັ້ງຢູ່ບ່ອນນີ້

(ມະໂຫສົດບັນດິດໂພທິສັດໄດ້ຟັງພຣະຣາດຊະດຳຣັດດັ່ງນັ້ນ ຄິດແລ້ວໄດ້ຂາບທູນວ່າ)

[໖໐໕] ຂ້າແດ່ ພຣະຣາຊາ ພຣະອົງຍ່ອມຊົງຮູ້ຢູ່ຢ່າງແນ່ນອນວ່າ
ພຣະເຈົ້າຈູລະນີພົມມະທັດຊົງມີອານຸພາບຫຼາຍ ມີພະລັງຫຼາຍ
ແລະປາຖະໜາຈະປົງພະຊົນພຣະອົງ
ຄືນາຍພານເນື້ອດ້ວຍນາງເນື້ອ

[໖໐໖] ປາຍາກກິນເຫຍື່ອສົດກືນເບັດທີ່ໃຊ້ເຫຍື່ອປົກປິດໄວ້
ກໍບໍ່ຮູ້ວ່າຕົນຈະຕາຍສັນໃດ

[໖໐໗] ຂ້າແດ່ ພຣະຣາຊາ ພຣະອົງຊົງຕິດຢູ່ໃນກາມ
ກໍຍ່ອມບໍ່ຊົງຮູ້ພຣະທິດາຂອງພຣະເຈົ້າຈູລະນີ
ຄືປາບໍ່ຮູ້ຈັກວ່າຕົນຈະຕາຍຄືກັນສັນນັ້ນ
[໖໐໘] ຖ້າພຣະອົງຈະສະເດັດໄປແຄວັນປັນຈາລະ
ກໍຈັກເສຍພຣະອົງໄປໃນທັນທີ ໄພໃຫຍ່ຈັກມາເຖິງພຣະອົງ
ຄືໄພຄືຄວາມຕາຍມາເຖິງເນື້ອທີ່ຍ່າງໄປຕາມທາງ[໑]

(ພຣະເຈົ້າວິເທຫະຖືກມະໂຫສົດບັນດິດໂພທິສັດຂົ່ມຫຼາຍເກີນໄປ ຈຶ່ງຊົງໂກດແລ້ວ ຕັດຖາມວ່າ)

[໖໐໙] ພວກເຮົານັ້ນແລຜູ້ກ່າວເຖິງປະໂຫຍດອັນສຳຄັນກັບທ່ານ
ກັບເປັນຄົນໂງ່ ບ້ານ້ຳລາຍ
ທ່ານນັ້ນເຕີບໃຫຍ່ມາດ້ວຍຫາງໄຖ[໒]
ຈະຮູ້ປະໂຫຍດຄືຄົນອື່ນ ໆ ໄດ້ຈັ່ງໃດ

(ພຣະເຈົ້າວິເທຫະດ່າກ່າວໂທດມະໂຫສົດບັນດິດໂພທິສັດ ເມື່ອຈະຂັບໄລ່ ຈຶ່ງຕັດວ່າ)

[ຜ໑໐] ທ່ານທັງຫຼາຍຈົ່ງໄສຄໍມະໂຫສົດບັນດິດນີ້
ຜູ້ເວົ້າເປັນອັນຕະລາຍແກ່ການໄດ້ຣັດຕະນະຂອງເຮົາ
ຂັບໄລ່ໃຫ້ພົ້ນໄປຈາກແຄວ້ນຂອງເຮົາ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[ຜ໑໑] ລຳດັບນັ້ນ ມະໂຫສົດບັນດິດກໍໜີໄປຈາກຣາດຊະສຳນັກ
ຂອງພຣະເຈົ້າວິເທຫະ ຕໍ່ມາ ກໍໄດ້ຮຽກນົກແຂກເຕົ້າໂຕສະຫຼາດ
ທີ່ຊື່ມາທຸຣະ ທີ່ເປັນທູດມາສັ່ງວ່າ

[ຜ໑໒] ມານີ້ເທີ້ນ ສະຫາຍຜູ້ມີຂົນປີກສີຂຽວ
ເຈົ້າຈົ່ງທຳການຂົນຂວາຍຊ່ວຍເຫຼືອເຮົາ
ມີນາງນົກສາລິກາທີ່ເຂົາລ້ຽງໄວ້ໃກ້ທີ່ບັນທົມຂອງພຣະເຈົ້າປັນຈາລະ

[ຜ໑໓] ນາງນົກໂຕນັ້ນສະຫຼາດໃນສິ່ງທັງປວງ ເຈົ້າຈົ່ງຖາມມັນໂດຍລະອຽດ
ມັນຮູ້ຄວາມລັບທຸກຢ່າງທັງຂອງພຣະຣາຊາ
ແລະເກວັດຕະພາມໂກສິຍະໂຄດນັ້ນ

[ຜ໑໔] ນົກແຂກເຕົ້າໂຕສະຫຼາດທີ່ຊື່ມາທຸຣະ ໂຕມີຂົນປີກສີຂຽວ
ຮັບຄຳຂອງມະໂຫສົດບັນດິດແລ້ວໄດ້ໄປສູ່ບ່ອນຢູ່ຂອງນາງນົກສາລິກາ

[ຜ໑໕] ແຕ່ນັ້ນ ນົກແຂກເຕົ້າໂຕສະຫຼາດທີ່ຊື່ວ່າມາທຸຣະນັ້ນ
ເມື່ອໄປເຖິງແລ້ວກໍໄດ້ຖາມນາງນົກສາລິກາ
ໂຕມີກົ່ງງາມ ມີສຽງມ່ວນວ່າ

[ຜ໑໖] ແມ່ກົ່ງງາມ ທ່ານສະບາຍດີບໍ
ແມ່ເພດສວຍ ທ່ານຜາສຸກບໍ
ທ່ານໄດ້ເຂົ້າຕອກກັບນ້ຳເຜີ້ງໃນກົງອັນງາມຂອງທ່ານຢູ່ບໍ

[ຜ໑໗] ນາງນົກສາລິກາຕອບວ່າ ສຸວະບັນດິດຜູ້ສະຫາຍ
ເຮົາສະບາຍດີແລະບໍ່ມີພະຍາດບຽດບຽນ
ອັນໜຶ່ງ ເຮົາໄດ້ເຂົ້າຕອກແລະນ້ຳເຜີ້ງຢູ່

[ຜ໑໘] ທ່ານມາຈາກໃສ ຫຼືໃຜໃຊ້ໃຫ້ມາ
ສະຫາຍ ກ່ອນໜ້ານີ້ເຮົາບໍ່ເຄີຍພົບຫຼືເຄີຍຮູ້ຈັກທ່ານເລີຍ

(ນົກແຂກເຕົ້າໄດ້ຟັງຄຳຂອງນາງນົກສາລິການັ້ນແລ້ວ ຈຶ່ງກ່າວວ່າ)

[໗໑໗] ເຮົາຖືກເຂົາລັງງໄວ້ໃກ້ທີ່ບັນທົມເທິງຜາສາດຂອງພຣະເຈົ້ານະຄອນສີພີ
ຕໍ່ມາ ພຣະຣາຊາພຣະອົງນັ້ນຊົງຕັ້ງຢູ່ໃນທຳ
ໂຜດໃຫ້ປ່ອຍເຫຼົ່າສັດທີ່ຖືກຂັງໄວ້ຈາກບ່ອນຂັງ

(ນົກແຂກເຕົ້າຕ້ອງການຈະຟັງຄວາມລັບ ຈຶ່ງກ່າວມຸສາວ່າ)

[໗໔໐] ເຮົານັ້ນໄດ້ມີນາງນົກສາລິກາມີສຽງຫວານໂຕໜຶ່ງເປັນພັນລະຍາເກົ່າ
ນາງໄດ້ຖືກແຫຼວຂ້າຕາຍເສຍໃນຫ້ອງບັນທົມ
ຕໍ່ໜ້າຂອງເຮົາໃນກົງອັນງາມທີ່ເຫັນຢູ່

[໗໔໑] ຍ້ອນເຮົາຮັກນາງຈຶ່ງມາຫາທ່ານ
ຖ້າທ່ານເປີດໂອກາດໃຫ້ ເຮົາທັງ ໒ ກໍຈະໄດ້ຢູ່ຮ່ວມກັນ

(ນາງນົກສາລິກາໄດ້ຟັງດັ່ງນັ້ນ ກໍດີໃຈ ແຕ່ບໍ່ໃຫ້ນົກແຂກເຕົ້າຮູ້ວ່າໂຕກໍຮັກ ເຮັດເປັນບໍ່ປາຖະໜາ ແລ້ວກ່າວວ່າ)

[໗໔໒] ກໍນົກແຂກເຕົ້າກໍຄວນຮັກແພງກັບນາງນົກແຂກເຕົ້າ
ສ່ວນນົກສາລິກາກໍຄວນຮັກແພງກັບນາງນົກສາລິກາ
ນົກແຂກເຕົ້າກັບນາງນົກສາລິກາຢູ່ຮ່ວມກັນຈະເປັນແນວໃດ

(ນົກແຂກເຕົ້າໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໗໔໓] ຜູ້ໃດຕ້ອງການຢູ່ໃນກາມແມ່ນແຕ່ກັບຍິງຈັນທານ
ຜູ້ນັ້ນກໍເປັນຄືກັນທັງໝົດ
ຍ້ອນໃນກາມບໍ່ມີຄົນທີ່ຈະບໍ່ຄືກັນ

(ນົກແຂກເຕົ້າບັນດິດເມື່ອກ່າວແນວນັ້ນແລ້ວ ເມື່ອຈະປະມວນເລື້ອງໃນອະດີດມາສະແດງ ຈຶ່ງ ກ່າວຕໍ່ວ່າ)

[໗໔໔] ມີພຣະຊົນນີຂອງພຣະເຈົ້ານະຄອນສີພີພຣະນາມວ່າຊຳພາວະດີ
ພຣະນາງເປັນພຣະມະເຫສີທີ່ພໍໃຈຂອງພຣະເຈົ້າວາສຸເທບກັນຫະໂຄດ

(ນົກແຂກເຕົ້າບັນດິດຍົກອຸທາຫອນແນວອື່ນມາກ່າວອີກວ່າ)

[໗໔໕] ມີກິນນະຣີຊື່ຣັດຕະນະວະດີ ແມ່ນທ່ານກໍໄດ້ຮ່ວມຮັກກັບວັດສະດາບົດ

ມະນຸດໄດ້ຮ່ວມຮັກກັບນາງເນື້ອກໍມີ
ໃນຄວາມຕ້ອງການ ມະນຸດຫຼືສັດບໍ່ມີຕ່າງກັນ

(ນົກແຂກເຕົ້າບັນດິດເມື່ອຈະທົດລອງນາງນົກສາລິກາ ຈຶ່ງກ່າວອີກວ່າ)

[໖໔໖] ນາງນົກສາລິກາຜູ້ມີສຽງມ່ວນ ຖ້າຈັ່ງຊັ້ນແລ້ວ ເຮົາຈັກໄປແລ້ວ
ຍ້ອນຄໍາເວົ້າຂອງທ່ານນີ້ເປັນເຫດໃຫ້ເຮົາປະຈັກ
ທ່ານດູໝິ່ນເຮົາແນ່

(ນາງນົກສາລິກາໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໖໔໗] ມາທຸຣະສຸວະບັນດິດ ສິຣິຍ່ອມບໍ່ມີແກ່ຜູ້ດ່ວນໄດ້ໃຈຮ້ອນ
ເຊີນທ່ານຢູ່ບ່ອນນີ້ແລຈົນກວ່າຈະໄດ້ເຝົ້າພຣະຣາຊາ
ຈົນກວ່າຈະໄດ້ຟັງສຽງກອງຕະໂພນ ແລະເຫັນອານຸພາບຂອງພຣະຣາຊາ

(ນົກແຂກເຕົ້າບັນດິດເມື່ອຈະຖາມຄວາມລັບນັ້ນ ຈຶ່ງກ່າວວ່າ)

[໖໔໘] ສຽງດັງອຶກກະທຶກນີ້ເຮົາໄດ້ຍິນມາພາຍນອກຊົນນະບົດວ່າ
ພຣະທິດາຂອງພຣະເຈົ້າປັນຈາລະ
ມີພຣະສະຫວີວັນນະດັ່ງດາວປະກາຍພຶກ
ພຣະເຈົ້າປັນຈາລະຈັກພຣະຣາດຊະທານພຣະຣາດຊະທິດານັ້ນ
ແກ່ຊາວແຄວັ້ນວິເທຫະ ຄື ຈັກມີອະພິເສກ
ລະຫວ່າງພຣະເຈົ້າວິເທຫະກັບພຣະທິດານັ້ນ

(ນາງນົກສາລິກາຖືກນົກແຂກເຕົ້າບັນດິດຂູ່ຊີຫຼາຍ ຈຶ່ງກ່າວວ່າ)

[໖໔໙] ມາທຸຣະ ວິວາຫະມຸງຄຸນເຊັ່ນນີ້ຈົ່ງຢ່າມີແກ່ຄົນຜູ້ເປັນສັດຕູກັນ
ຄືວິວາຫະຂອງພຣະທິດາຂອງພຣະເຈົ້າປັນຈາລະ
ກັບພຣະເຈົ້າວິເທຫະເລີຍ

(ນາງນົກສາລິກາເມື່ອກ່າວແນວນີ້ແລ້ວ ຈຶ່ງກ່າວອີກວ່າ)

[໖໕໐] ພຣະຣາຊາຜູ້ເປັນຈອມທັບແຫ່ງຊາວແຄວັ້ນປັນຈາລະ
ຈັກຊິງນໍາພຣະເຈົ້າວິເທຫະມາ
ແຕ່ນັ້ນຈັກຮັບສັ່ງໃຫ້ປົງພະຊົນຊີບພຣະອົງສາ
ພຣະເຈົ້າວິເທຫະບໍ່ເປັນພຣະສະຫາຍຂອງພຣະເຈົ້າປັນຈາລະ

(ນົກແຂກເຕົ້າບັນດິດໄດ້ຟັງດັ່ງນັ້ນ ຫວັງຈະໃຫ້ນາງນົກສາລິກາອະນຸຍາດໃຫ້ຕົນກັບໄປຈຶ່ງກ່າວວ່າ)

[ຜ໓໑] ຖ້າຈັ່ງຊັ້ນ ທ່ານຈົ່ງອະນຸຍາດໃຫ້ເຮົາໄປຈັກ ໗ ຄືນ
ພຽງໃຫ້ເຮົາໄດ້ຂາບທູນພຣະເຈົ້ານະຄອນສີພີແລະພຣະມະເຫສີຂອງພຣະອົງວ່າ
ເຮົາໄດ້ບ່ອນພັກໃນບ່ອນຢູ່ຂອງນາງນົກສາລິກາແລ້ວ

(ນາງນົກສາລິກາໄດ້ຟັງດັ່ງນັ້ນ ເມື່ອບໍ່ສາມາດຈະຫ້າມໄດ້ ຈຶ່ງກ່າວວ່າ)

[ຜ໓໒] ຖ້າຈັ່ງຊັ້ນ ເຮົາອະນຸຍາດໃຫ້ທ່ານໄປໄດ້ພຽງ ໗ ຄືນ
ຖ້າ ໗ ຄືນທ່ານຍັງບໍ່ກັບມາຍັງບ່ອນຢູ່ ເຮົາກໍານົດມື້ຕາຍໄວ້ແລ້ວ
ທ່ານຈັກກັບມາໄດ້ ກໍຕໍ່ເມື່ອເຮົາໄດ້ຕາຍໄປແລ້ວ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[ຜ໓໓] ລໍາດັບນັ້ນແລ ນົກແຂກເຕົ້າໂຕສະຫຼາດຊື່ມາທຸຣະ
ຈຶ່ງໄດ້ບິນໄປບອກຄໍາຂອງນາງນົກສາລິການີ້ແກ່ມະໂຫສົດບັນດິດ

(ມະໂຫສົດບັນດິດໂພທິສັດເມື່ອຈະເປ່ງອຸທານດ້ວຍກໍາລັງປີຕິ ຈຶ່ງໄດ້ຂາບທູນວ່າ)

[ຜ໓໔] ຣາດຊະບຸຣຸດເພິ່ງໄດ້ບໍຣິໂພກໂພຄະ
ໃນພຣະຕໍາໜັກຂອງພຣະຣາຊາພຣະອົງໃດ
ກໍຄວນເຮັດປະໂຫຍດໃຫ້ແກ່ພຣະຣາຊາພຣະອົງນັ້ນທີ່ນັ້ນ
ຂ້າແດ່ ພຣະຣາຊາຜູ້ເປັນຈອມແຫ່ງຊົນ ຖ້າຈັ່ງຊັ້ນ
ຂ້າພຣະອົງຈະໄປສູ່ເມືອງອັນໜ້າອອນຊອນຂອງພຣະເຈົ້າປັນຈາລະກ່ອນ
ເພື່ອສ້າງພຣະຣາດຊະນິເວດຖວາຍແດ່ພຣະອົງ
ຜູ້ຊົງພຣະນາມວ່າວິເທຫະຜູ້ຊົງຍົດ

[ຜ໓໕] ຂ້າແດ່ ພຣະອົງຜູ້ຊົງເປັນກະສັດ
ເມື່ອຂ້າພຣະອົງສ້າງພຣະຣາດຊະນິເວດຖວາຍແດ່ພຣະອົງ
ຜູ້ຊົງພຣະນາມວ່າວິເທຫະຜູ້ຊົງຍົດແລ້ວ
ເພິ່ງສົ່ງຂ່າວມາຖວາຍພຣະອົງໄດ້ເມື່ອໃດ
ຂໍພຣະອົງສະເດັດໄປເມື່ອນັ້ນ

(ພຣະບໍຣົມມະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໗໓໗] ລຳດັບນັ້ນ ມະໂຫສົດບັນດິດໄດ້ໄປສູ່ເມືອງອັນໜ້າອອນຊອນ
ຂອງພຣະເຈົ້າປັນຈາລະກ່ອນ ເພື່ອສ້າງພຣະຣາດຊະນິເວດ
ຖວາຍພຣະເຈົ້າວິເທຫະຜູ້ຊົງຍົດ

[໗໓໘] ເມື່ອໄດ້ສ້າງພຣະຣາດຊະນິເວດຖວາຍແດ່ພຣະເຈົ້າວິເທຫະ
ຜູ້ຊົງຍົດ ແລ້ວພາຍຫຼັງຈຶ່ງໄດ້ສົ່ງທູດ
ໄປຂາບທູນພຣະເຈົ້າວິເທຫະຜູ້ຄອງນະຄອນມິຖິລາວ່າ
ຂ້າແດ່ ມະຫາຣາດ ຂໍເຊີນພຣະອົງສະເດັດ ໃນບັດນີ້ເທີ້ນ
ພຣະຣາດຊະນິເວດທີ່ສ້າງເພື່ອພຣະອົງສຳເລັດແລ້ວ

[໗໓໙] ລຳດັບນັ້ນ ພຣະຣາຊາສະເດັດໄປພ້ອມດ້ວຍຈະຕຸຣົງຄະເສນາ
ເພື່ອທອດພຣະເນດເມືອງຈະເລີນທີ່ມະໂຫສົດບັນດິດສ້າງຖວາຍ
ໃນແຄວ້ນກະປິລະເຊິ່ງມີພາຫະນະນັບບໍ່ຖ້ວນ

[໗໓໙] ແຕ່ນັ້ນ ພຣະອົງເມື່ອສະເດັດໄປເຖິງແລ້ວ
ຈຶ່ງຊົງສົ່ງພຣະຣາດຊະສານໄປຖວາຍພຣະເຈົ້າພົມມະທັດວ່າ
ຂ້າແດ່ ມະຫາຣາດ ຂ້ານ້ອຍຈະມາ
ເພື່ອຖວາຍບັງຄົມພຣະບາດທັງສອງຂອງພຣະອົງ

[໗໔໐] ຂໍພຣະອົງໂຜດພຣະຣາດຊະທານພຣະທິດາ
ຜູ້ຊົງຄວາມງາມທົ່ວທັງອົງ
ປະດັບດ້ວຍເຄື່ອງອະລັງການເຮັດດ້ວຍຄຳ
ແຫ່ຫ້ອມລ້ອມດ້ວຍໝູ່ນາງຂ້າຫຼວງ
ໃຫ້ເປັນມະເຫສີຂອງຂ້ານ້ອຍໃນບັດນີ້ເທີ້ນ

(ພຣະເຈົ້າຈູລະນີສະດັບຄຳເວົ້າຂອງຣາດຊະທູດແລ້ວກໍຊົງໂສມະນັດ ເມື່ອຈະຊົງສະແດງໂສມະນັດ ໃຫ້ຜາກົດແຈ້ງຄັກ ປະທານລາງວັນແກ່ຣາດຊະທູດແລ້ວ ຈຶ່ງຕັດວ່າ)

[໗໔໑] ຂ້າແດ່ ພຣະເຈົ້າວິເທຫະ ພຣະອົງສະເດັດມາດີແລ້ວ
ອັນໜຶ່ງ ພຣະອົງບໍ່ໄດ້ສະເດັດມາຮ້າຍ
ເຊີນພຣະອົງຊົງຫາເລີກໄວ້ເທີ້ນ ຂ້ານ້ອຍຈະຖວາຍພຣະຣາດຊະທິດາ
ຜູ້ປະດັບດ້ວຍເຄື່ອງອະລັງການເຮັດດ້ວຍຄຳ
ແຫ່ຫ້ອມລ້ອມດ້ວຍໝູ່ນາງຂ້າຫຼວງແກ່ພຣະອົງ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໖໔໔] ລຳດັບນັ້ນ ພຣະເຈົ້າວິເທຫະກໍໄດ້ຊົງຫາເລີກ
ແລ້ວແລ້ວຈຶ່ງຊົງສົ່ງພຣະຣາດຊະສານໄປຖວາຍພຣະເຈົ້າພົມມະທັດວ່າ

[໖໔໑] ຂໍພຣະອົງຊົງພຣະຣາດຊະທານພຣະຣາດຊະທິດາ
ຜູ້ຊົງຄວາມງາມທົ່ວທັງອົງ
ປະດັບດ້ວຍເຄື່ອງອະລັງການເຮັດດ້ວຍຄຳ
ແຫ່ຫ້ອມລ້ອມດ້ວຍໝູ່ນາງຂ້າຫຼວງ
ໃຫ້ເປັນມະເຫສີຂອງຂ້ານ້ອຍ ໃນບັດນີ້ເທີ້ນ

(ຝ່າຍພຣະເຈົ້າຈູລະນີຕັດຕອບວ່າ)

[໖໔໔] ຂ້ານ້ອຍຈະຖວາຍພຣະຣາດຊະທິດາ
ຜູ້ຊົງຄວາມງາມທົ່ວທັງອົງ
ປະດັບດ້ວຍເຄື່ອງອະລັງການເຮັດດ້ວຍຄຳ
ແຫ່ຫ້ອມລ້ອມດ້ວຍໝູ່ນາງຂ້າຫຼວງ
ໃຫ້ເປັນມະເຫສີຂອງພຣະອົງ ໃນບັດນີ້

(ພຣະເຈົ້າວິເທຫະເມື່ອຊົງເປີກສາກັບອາຈານຜູ້ເປັນບັນດິດ ຈຶ່ງຕັດວ່າ)

[໖໔໕] ກອງພົນຊ້າງ ກອງພົນມ້າ ກອງພົນລົດ ແລະກອງພົນຣາບ
ເປັນກອງທັບທີ່ໃສ່ເກາະຕັ້ງຢູ່
ຈຸດທວນໄຟສະຫວ່າງສະໄຫວຢູ່
ບັນດິດທັງຫຼາຍຈະເຂົ້າໃຈແນວໃດນໍ

[໖໔໖] ກອງພົນຊ້າງ ກອງພົນມ້າ ກອງພົນລົດ ແລະກອງພົນຣາບ
ເປັນກອງທັບທີ່ໃສ່ເກາະຕັ້ງຢູ່
ຈຸດທວນໄຟສະຫວ່າງສະໄຫວຢູ່
ບັນດິດທັງຫຼາຍຈັກເຮັດແນວໃດນໍ

(ມະໂຫສົດບັນດິດໂພທິສັດຂາບທູນວ່າ)

[໖໔໗] ຂ້າແດ່ ມະຫາຣາດ ພຣະເຈົ້າຈູລະນີພົມມະທັດມີກຳລັງຫຼາຍ
ຮັກສາພຣະອົງໄວ້ ຈະຊົງປະທຸດສະຮ້າຍພຣະອົງ
ຮຸ່ງເຊົ້າກໍຈັກຮັບສັ່ງໃຫ້ປົງພະຊົນພຣະອົງ

(ພຣະເຈົ້າວິເທຫະຊົງຍ້ານຕໍ່ມໍຣະນະໄພ ໄດ້ຕັດວ່າ)

[໒໔໗] ຫະໄທຂອງເຮົາສັ່ນແລະປາກກໍແຫ້ງຜາກ
ເຮົາບໍ່ໄດ້ຮັບຄວາມເຢັນໃຈເລີຍ ເປັນເໝືອນຖືກໄຟເຜົາຢູ່ກາງແດດ

[໒໔໙] ເປົ້າຫຼອມຄຳຂອງພວກຊ່າງຄຳຍ່ອມໄໝ້ຢູ່ຂ້າງໃນ
ບໍ່ໄດ້ໄໝ້ຢູ່ຂ້າງນອກສັນໃດ
ໃຈຂອງເຮົາກໍສັນນັ້ນ ໄໝ້ຢູ່ຂ້າງໃນ ບໍ່ໄດ້ໄໝ້ຢູ່ຂ້າງນອກ

(ມະໂຫສົດບັນດິດໂພທິສັດໄດ້ຍິນສຽງພຣະເຈົ້າວິເທຫະຮ່ຳໄຮ ຈຶ່ງຂາບທູນວ່າ)

[໒໕໐] ຂ້າແດ່ ພຣະອົງຜູ້ເປັນກະສັດ ຊົງເປັນຜູ້ຜະໝາດ
ລ່ວງເລີຍການເປິກສາ ທຳລາຍການເປິກສາ
ບັດນີ້ ຂໍຊົນທັງຫຼາຍຜູ້ເປັນບັນດິດ ມີປັນຍາ
ຈົ່ງປ້ອງກັນພຣະອົງເທີ້ນ

[໒໕໑] ພຣະຣາຊາບໍ່ຊົງເຮັດຕາມຄຳຂອງຂ້າພຣະອົງຜູ້ເປັນອຳມາດ
ຜູ້ຕ້ອງການປະໂຫຍດແລະຫວັງດີ ຊົງຍິນດີດ້ວຍປິຕິຂອງພຣະອົງ
ຈຶ່ງຄືເນື້ອຕິດບ້ວງນາຍພານ

[໒໕໒] ປາຍາກກິນເຫຍື່ອສົດ ກືນຂໍເບັດທີ່ໃຊ້ເຫຍື່ອປິດບັງໄວ້
ກໍບໍ່ຮູ້ວ່າຕົນຈະຕາຍສັນໃດ

[໒໕໓] ຂ້າແດ່ ພຣະຣາຊາ ພຣະອົງຊົງຕິດຢູ່ໃນກາມ
ກໍຍ່ອມບໍ່ຊົງຮູ້ພຣະທິດາຂອງພຣະເຈົ້າຈູລະນີ
ຄືປາບໍ່ຮູ້ຈັກຕົນວ່າຈະຕາຍສັນນັ້ນ

[໒໕໔] ຖ້າພຣະອົງສະເດັດໄປແຄວ້ນປັນຈາລະ
ກໍຈັກເສຍພຣະອົງໄປທັນທີ ໄພໃຫຍ່ຈັກມາເຖິງພຣະອົງ
ຄືໄພຄືຄວາມຕາຍມາເຖິງເນື້ອໂຕຍ່າງໄປຕາມທາງ

[໒໕໕] ຂ້າແດ່ ພຣະອົງຜູ້ເປັນຈອມຊົນ ບຸຣຸດຜູ້ເປັນອະນາລະຍະຊົນ
ກໍເປັນຄືງູທີ່ຢູ່ໃນຖົງຈະເພິ່ງກັດໄດ້
ນັກປາດບໍ່ເພິ່ງຜູກໄມຕີກັບບຸຣຸດຜູ້ນັ້ນ
ຍ້ອນການສັງຄົມກັບບຸຣຸດຊົ່ວນຳທຸກມາໃຫ້ໂດຍແທ້

[໖໕໖]　ຂ້າແດ່ ພຣະອົງຜູ້ເປັນຈອມຊົນ
ນັກປາດເພິ່ງຜູກໄມຕີກັບບຸກຄົນຜູ້ມີສິນ
ເປັນພະຫູສູດທີ່ຮູ້ຈັກກັນນັ້ນແລ
ຍ້ອນການສະມາຄົມກັບສັດຕະບຸຣຸດນຳສຸກມາໃຫ້ໂດຍແທ້

(ມະໂຫສົດບັນດິດໂພທິສັດຂົ່ມພຣະເຈົ້າວິເທຫະຍິ່ງຂຶ້ນ ຈຶ່ງນຳພຣະດຳຣັດທີ່ຕັດໄວ້ໃນການກ່ອນມາຂາບທູນວ່າ)

[໖໕໗]　ຂ້າແດ່ ພຣະຣາຊາ ພຣະອົງໄດ້ຕັດເຖິງເຫດ
ທີ່ຈະໃຫ້ໄດ້ຣັດຕະນະອັນສູງສົ່ງໃນສຳນັກຂອງຂ້າພຣະອົງ
ຊຶ່ງເປັນຜູ້ໂງ່ຈ້າ ບ້ານ້ຳລາຍ
ຂ້າພຣະອົງເປັນບຸດຂອງຄະຫະບໍດີ ເຕີບໃຫຍ່ມາດ້ວຍທາງໄຖ
ຈະຮູ້ເຫດທີ່ຈະໃຫ້ໄດ້ຣັດຕະນະອັນສູງສົ່ງຄືຄົນອື່ນ ໆ ໄດ້ແນວໃດ

[໖໕໘]　ທ່ານທັງຫຼາຍຈົ່ງໄສຄົມະໂຫສົດບັນດິດນີ້
ຜູ້ເວົ້າເປັນອັນຕະລາຍຕໍ່ການໄດ້ຣັດຕະນະຂອງເຮົາ
ຂັບໄລ່ໃຫ້ພົ້ນໄປຈາກແຄວັນຂອງເຮົາ

(ພຣະເຈົ້າວິເທຫະເມື່ອຈະຍຶດມະໂຫສົດບັນດິດໂພທິສັດເປັນບ່ອນເພິ່ງ ຈຶ່ງຕັດວ່າ)

[໖໕໙]　ມະໂຫສົດ ເຫຼົ່າບັນດິດຍ່ອມບໍ່ເວົ້າສຽບແທງຍ້ອນໂທດທີ່ລ່ວງໄປແລ້ວ
ຍ້ອນເຫດໃດ ເຈົ້າຈຶ່ງມາສຽບແທງເຮົາ
ຄືມ້າທີ່ເຂົາລ່າມໄວ້ຖືກແທງດ້ວຍເຫຼັກແຫຼມ

[໖໖໐]　ຖ້າເຈົ້າເຫັນວ່າເຮົາຈະພົ້ນໄພຫຼືປອດໄພ
ຍ້ອນເຫດໃດ ເຈົ້າຈຶ່ງສຽບແທງເຮົາຍ້ອນໂທດທີ່ລ່ວງໄປແລ້ວແລ້ວ
ຈົ່ງສັ່ງສອນເຮົາໂດຍຄວາມໂດຍປອດໄພນັ້ນເທີ້ນ

(ມະໂຫສົດບັນດິດໂພທິສັດຂາບທູນວ່າ)

[໖໖໑]　ຂ້າແດ່ກະສັດ ກຳຂອງມະນຸດທີ່ລ່ວງໄປແລ້ວ
ເຮັດໄດ້ຍາກ ເກີດຂຶ້ນໄດ້ຍາກຢ່າງຍິ່ງ
ຂ້າພຣະອົງບໍ່ອາດຈະປົດເປື້ອງພຣະອົງໄດ້
ຂໍພຣະອົງໄດ້ໂຜດຊົງຮູ້ເທີ້ນ

[໖໖໔] ຊ້າງທັງຫຼາຍທີ່ມີລິດ ມີຍິດ
ສາມາດເຫາະໄປທາງອາກາດໄດ້ ຂອງພຣະຣາຊາໃດມີຢູ່
ຊ້າງເຫຼົ່ານັ້ນກໍຈະເພິ່ງພາພຣະຣາຊານັ້ນໄປໄດ້

[໖໖໓] ມ້າທັງຫຼາຍທີ່ມີລິດ ມີຍິດ
ສາມາດເຫາະໄປທາງອາກາດໄດ້ ຂອງພຣະຣາຊາໃດມີຢູ່
ມ້າເຫຼົ່ານັ້ນກໍຈະເພິ່ງພາພຣະຣາຊານັ້ນໄປໄດ້

[໖໖໔] ນົກທັງຫຼາຍທີ່ມີລິດ ມີຍິດ
ສາມາດບິນໄປທາງອາກາດໄດ້ ຂອງພຣະຣາຊາໃດມີຢູ່
ນົກເຫຼົ່ານັ້ນຈະເພິ່ງພາພຣະຣາຊານັ້ນໄປໄດ້

[໖໖໕] ຍັກທັງຫຼາຍທີ່ມີລິດ ມີຍິດ
ສາມາດເຫາະໄປທາງອາກາດໄດ້ ຂອງພຣະຣາຊາໃດມີຢູ່
ຍັກເຫຼົ່ານັ້ນກໍຈະເພິ່ງພາພຣະຣາຊານັ້ນໄປໄດ້

[໖໖໖] ຂ້າແດ່ກະສັດ ກໍາຂອງມະນຸດທີ່ລ່ວງໄປແລ້ວ
ເຮັດໄດ້ຍາກ ເກີດຂຶ້ນໄດ້ຍາກຢ່າງຍິ່ງ
ຂ້າພຣະອົງບໍ່ອາດປົດເປື້ອງພຣະອົງທາງອາກາດໄດ້

(ເສນະກະບັນດິດເມື່ອຈະຂໍຮ້ອງມະໂຫສົດບັນດິດໂພທິສັດ ຈຶ່ງໄດ້ກ່າວວ່າ)

[໖໖໗] ບຸຣຸດຜູ້ຍັງແນມບໍ່ເຫັນຝັ່ງໃນມະຫາສະມຸດ ໄດ້ທີ່ພໍານັກໃນບ່ອນໃດ
ເຂົາຍ່ອມໄດ້ຮັບຄວາມສຸກໃນບ່ອນນັ້ນສັນໃດ

[໖໖໘] ທ່ານມະໂຫສົດ ຂໍທ່ານຈົ່ງໄດ້ເປັນບ່ອນເພິ່ງ
ທັງຂອງພວກຂ້າພະເຈົ້າແລະພຣະຣາຊາສັນນັ້ນເທີ້ນ
ທ່ານເປັນຜູ້ປະເສີດສຸດຂອງພວກຂ້າພະເຈົ້າເຫຼົ່າມົນຕີ
ຂໍທ່ານຈົ່ງຊ່ອຍປົດເປື້ອງຂ້າພະເຈົ້າທັງຫຼາຍ
ໃຫ້ພົ້ນຈາກທຸກດ້ວຍເທີ້ນ

(ລໍາດັບນັ້ນ ມະໂຫສົດບັນດິດໂພທິສັດເມື່ອຈະຂົ່ມເສນະກະບັນດິດ ຈຶ່ງກ່າວວ່າ)

[໖໖໙] ທ່ານອາຈານເສນະກະ ກໍາຂອງມະນຸດທີ່ລ່ວງໄປແລ້ວ
ເຮັດໄດ້ຍາກ ເກີດຂຶ້ນໄດ້ຍາກຢ່າງຍິ່ງ

ຂ້າພະເຈົ້າບໍ່ອາດຈະປິດເປືອງທ່ານໄດ້
ຂໍທ່ານຈົ່ງຮູ້ເອົາເອງເທີ້ນ

(ພຣະເຈົ້າວິເທຫະຕັດຖາມວ່າ)

[ຜາ໗໐] ຂໍທ່ານຈົ່ງຟັງຄຳນີ້ຂອງຂ້າພະເຈົ້າ ທ່ານເຫັນໄພໃຫຍ່ນັ້ນບໍ
ບັດນີ້ ຂ້າພະເຈົ້າຂໍຖາມທ່ານອາຈານເສນະກະ
ໃນບ່ອນນີ້ ທ່ານຈະເຂົ້າໃຈສິ່ງທີ່ຄວນເຮັດແນວໃດ

(ເສນະກະບັນດິດໄດ້ຟັງດັ່ງນັ້ນ ຈຶ່ງຂາບທູນວ່າ)

[ຜາ໗໑] ພວກເຮົາຈະອັດປະຕູເອົາໄຟຈູດເຜົາ
ຫຼືບໍ່ດັ່ງນັ້ນກໍຈັບອາວຸດທ້ຳຫັ່ນຂ້າກັນແລະກັນ
ຊິງລະຊີວິດໄປສາກ່ອນ ຢ່າໃຫ້ພຣະເຈົ້າພົມມະທັດຂ້າພວກເຮົາ
ດ້ວຍການທໍລະມານເປັນເວລາດົນເລີຍ

(ພຣະເຈົ້າວິເທຫະຕັດຖາມປຸກກຸສະບັນດິດວ່າ)

[ຜາ໗໒] ຂໍທ່ານຈົ່ງຟັງຄຳນີ້ຂອງຂ້າພະເຈົ້າ ທ່ານເຫັນໄພໃຫຍ່ນັ້ນບໍ
ບັດນີ້ ຂ້າພະເຈົ້າຂໍຖາມທ່ານອາຈານປຸກກຸສະ
ໃນບ່ອນນີ້ ທ່ານຈະເຂົ້າໃຈສິ່ງທີ່ຄວນເຮັດແນວໃດ

(ປຸກກຸສະບັນດິດຂາບທູນວ່າ)

[ຜາ໗໓] ພວກເຮົາຈະກິນຢາພິດຂ້າໂຕຕາຍ ຊິງລະຊີວິດໄປສາກ່ອນ
ຢ່າໃຫ້ພຣະເຈົ້າພົມມະທັດຂ້າພວກເຮົາ
ດ້ວຍການທໍລະມານເປັນເວລາດົນເລີຍ

(ພຣະເຈົ້າວິເທຫະຕັດຖາມກາມິນທະບັນດິດວ່າ)

[ຜາ໗໔] ຂໍທ່ານຈົ່ງຟັງຄຳນີ້ຂອງຂ້າພະເຈົ້າ ທ່ານເຫັນໄພໃຫຍ່ນັ້ນບໍ
ບັດນີ້ ຂ້າພະເຈົ້າຂໍຖາມທ່ານອາຈານກາມິນທະ
ໃນບ່ອນນີ້ ທ່ານຈະເຂົ້າໃຈສິ່ງທີ່ຄວນເຮັດແນວໃດ

(ກາມິນທະບັນດິດຂາບທູນວ່າ)

[ຜາ໗໕] ພວກເຮົາຈະເອົາເຊືອກຜູກຄໍຕາຍຫຼືໂດດເຫວຕາຍ

ຢ່າໃຫ້ພຣະເຈົ້າພິມມະທັດຂ້າພວກເຮົາ
ດ້ວຍການທໍລະມານເປັນເວລາດົນເລີຍ

(ພຣະເຈົ້າວິເທຫະຕັດຖາມເທວິນທະບັນດິດວ່າ)

[໖໗໖] ຂໍທ່ານຈົ່ງຟັງຄໍານີ້ຂອງຂ້າພະເຈົ້າ ທ່ານເຫັນໄພໃຫຍ່ນັ້ນບໍ
ບັດນີ້ ຂ້າພະເຈົ້າຂໍຖາມທ່ານອາຈານເທວິນທະ
ໃນບ່ອນນີ້ ທ່ານຈະເຂົ້າໃຈສິ່ງທີ່ຄວນເຮັດແນວໃດ

(ເທວິນທະບັນດິດຂາບທູນວ່າ)

[໖໗໗] ພວກເຮົາຈະອັດປະຕູເອົາໄຟຈູດເຜົາ
ຫຼືບໍ່ດັ່ງນັ້ນກໍຈັບອາວຸດຫໍ້າຫັ່ນຂ້າກັນແລະກັນ
ຊີງລະຊີວິດໄປສາກ່ອນ ມະໂຫສົດບໍ່ສາມາດຈະຊ່ອຍປົດເປື້ອງພວກເຮົາ
ໃຫ້ລອດພົ້ນໄປໄດ້ໂດຍງ່າຍເລີຍ

(ພຣະເຈົ້າວິເທຫະໄດ້ສະດັບດັ່ງນັ້ນ ຮ່ຳໄຮຈົນມະໂຫສົດບັນດິດໂພທິສັດໄດ້ຍິນ ຈຶ່ງຕັດວ່າ)

[໖໗໘] ບຸກຄົນສະແຫວງຫາແກ່ນຂອງຕົ້ນກ້ວຍ ແຕ່ບໍ່ພົ້ສັນໃດ
ພວກເຮົາເມື່ອຄົ້ນຫາບັນຫາຄືອຸບາຍທີ່ຈະພົ້ນທຸກ
ກໍບໍ່ພົ້ບັນຫານັ້ນສັນນັ້ນ

[໖໗໙] ບຸກຄົນສະແຫວງຫາແກ່ນງີ້ວ ແຕ່ບໍ່ພົ້ສັນໃດ
ພວກເຮົາເມື່ອຄົ້ນຫາບັນຫາຄືອຸບາຍທີ່ຈະພົ້ນທຸກ
ກໍບໍ່ພົ້ບັນຫານັ້ນສັນນັ້ນ

[໖໘໐] ການທີ່ເຮົາທັງຫຼາຍຢູ່ໃນສໍານັກໝູ່ພານ
ເຊິ່ງເປັນພວກຈົ໊າ ບໍ່ຮູ້ອັນໃດ
ກໍທໍ່ກັບຝູງກຸນຊອນຢູ່ໃນບ່ອນບໍ່ມີນໍ້າເຊິ່ງເປັນຖິ່ນບໍ່ສົມຄວນນໍ

[໖໘໑] ຫະໄທຂອງເຮົາສັ່ນ ແລະປາກກໍແຫ້ງຜາກ
ເຮົາບໍ່ໄດ້ຮັບຄວາມເຢັນໃຈເລີຍ ເປັນຄືຖືກໄຟເຜົາຢູ່ກາງແດດ

[໖໘໒] ເບົ້າຫຼອມຄໍາຂອງພວກຊ່າງຄໍາຍ່ອມໄໝ້ຢູ່ຂ້າງໃນ
ບໍ່ໄດ້ໄໝ້ຢູ່ຂ້າງນອກ ສັນໃດ
ໃຈຂອງເຮົາກໍສັນນັ້ນ ໄໝ້ຢູ່ຂ້າງໃນ ບໍ່ໄດ້ໄໝ້ຢູ່ຂ້າງນອກ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໖໘໓] ລຳດັບນັ້ນ ມະໂຫສົດບັນດິດຜູ້ເປັນປາດແນມເຫັນປະໂຫຍດນັ້ນ
ເຫັນພຣະເຈົ້າວິເທຫະຜູ້ປະສົບທຸກ ຈຶ່ງໄດ້ຂາບທູນຄຳນີ້ວ່າ

[໖໘໔] ຂ້າແດ່ ມະຫາຣາດ ພຣະອົງຢ່າໄດ້ຊົງຢ້ານເລີຍ
ຂ້າແດ່ ພຣະອົງຜູ້ເປັນຈອມທັບ ພຣະອົງຢ່າໄດ້ຊົງຢ້ານໄປເລີຍ
ຂ້າພຣະອົງຈັກຊ່ອຍປົດເປື້ອງພຣະອົງໃຫ້ລອດພົ້ນ
ຄືຊ່ອຍປົດເປື້ອງດວງຈັນທີ່ຖືກຣາຫູຈັບໃຫ້ລຸດພົ້ນ

[໖໘໕] ຂ້າແດ່ ມະຫາຣາດ ພຣະອົງຢ່າໄດ້ຊົງຢ້ານເລີຍ
ຂ້າແດ່ ພຣະອົງຜູ້ເປັນຈອມທັບ ພຣະອົງຢ່າໄດ້ຊົງຢ້ານໄປເລີຍ
ຂ້າພຣະອົງຈັກຊ່ອຍປົດເປື້ອງພຣະອົງໃຫ້ລອດພົ້ນ
ຄືຊ່ອຍປົດເປື້ອງດວງອາທິດທີ່ຖືກຣາຫູຈັບໃຫ້ລຸດພົ້ນ

[໖໘໖] ຂ້າແດ່ ມະຫາຣາດ ພຣະອົງຢ່າໄດ້ຊົງຢ້ານເລີຍ
ຂ້າແດ່ ພຣະອົງຜູ້ເປັນຈອມທັບ ພຣະອົງຢ່າໄດ້ຊົງຢ້ານໄປເລີຍ
ຂ້າພຣະອົງຈັກຊ່ອຍປົດເປື້ອງພຣະອົງໃຫ້ລອດພົ້ນ
ຄືຊ່ອຍປົດເປື້ອງຊ້າງທີ່ຕິດຫຼົ່ມໃຫ້ລອດພົ້ນ

[໖໘໗] ຂ້າແດ່ ມະຫາຣາດ ພຣະອົງຢ່າໄດ້ຊົງຢ້ານເລີຍ
ຂ້າແດ່ ພຣະອົງຜູ້ເປັນຈອມທັບ ພຣະອົງຢ່າໄດ້ຊົງຢ້ານໄປເລີຍ
ຂ້າພຣະອົງຈັກຊ່ອຍປົດເປື້ອງພຣະອົງໃຫ້ລອດພົ້ນ
ຄືຊ່ອຍປົດເປື້ອງງູທີ່ຕິດຢູ່ໃນຂ້ອງໃຫ້ລອດພົ້ນ

[໖໘໘] ຂ້າແດ່ ມະຫາຣາດ ພຣະອົງຢ່າໄດ້ຊົງຢ້ານເລີຍ
ຂ້າແດ່ ພຣະອົງຜູ້ເປັນຈອມທັບ ພຣະອົງຢ່າໄດ້ຊົງຢ້ານໄປເລີຍ
ຂ້າພຣະອົງຈັກຊ່ອຍປົດເປື້ອງພຣະອົງໃຫ້ລອດພົ້ນ
ຄືຄົນຊ່ອຍປ່ອຍນົກທີ່ຕິດຢູ່ໃນກົງໃຫ້ລອດພົ້ນ

[໖໘໙] ຂ້າແດ່ ມະຫາຣາດ ພຣະອົງຢ່າໄດ້ຊົງຢ້ານເລີຍ
ຂ້າແດ່ ພຣະອົງຜູ້ເປັນຈອມທັບ ພຣະອົງຢ່າໄດ້ຊົງຢ້ານໄປເລີຍ
ຂ້າພຣະອົງຈັກຊ່ອຍປົດເປື້ອງພຣະອົງໃຫ້ລອດພົ້ນ
ຄືຄົນຊ່ອຍປ່ອຍປາທີ່ຕິດແຫໃຫ້ລອດພົ້ນ

[໖໙໐] ຂ້າແດ່ ມະຫາຣາດ ພຣະອົງຢ່າໄດ້ຊົງຢ້ານເລີຍ
ຂ້າແດ່ ພຣະອົງຜູ້ເປັນຈອມທັບ ພຣະອົງຢ່າໄດ້ຊົງຢ້ານໄປເລີຍ
ຂ້າພຣະອົງຈັກຊ່ອຍປົດເປື້ອງພຣະອົງ
ພ້ອມດ້ວຍພຣະຣາດຊະຍານໝູ່ພົນແລະພາຫະນະໃຫ້ລອດພົ້ນ

[໖໙໑] ຂ້າແດ່ ມະຫາຣາດ ພຣະອົງຢ່າໄດ້ຊົງຢ້ານເລີຍ
ຂ້າແດ່ ພຣະອົງຜູ້ເປັນຈອມທັບ ພຣະອົງຢ່າໄດ້ຊົງຢ້ານໄປເລີຍ
ຂ້າພຣະອົງຈັກຂັບໄລ່ກອງທັບຂອງພຣະເຈົ້າປັນຈາລະໃຫ້ໜີໄປ
ຄືຂັບໄລ່ກາແລະແຫຼວໃຫ້ໜີໄປ

[໖໙໔] ອຳມາດໃດເພິ່ງປົດເປື້ອງພຣະອົງ
ຜູ້ຕົກຢູ່ໃນບ່ອນຄັບຂັນໃຫ້ພົ້ນຈາກທຸກບໍ່ໄດ້
ປັນຍາຂອງອຳມາດຜູ້ເຊັ່ນນັ້ນຫຼືອຳມາດ
ຜູ້ສົມບູນດ້ວຍປັນຍາຜູ້ເຊັ່ນນັ້ນ ຈະມີປະໂຫຍດອັນໃດ

(ມະໂຫສົດບັນດິດໂພທິສັດສັ່ງເຫຼົ່າທະຫານໃຫ້ໄຂປະຕູອຸບໂມງວ່າ)

[໖໙໓] ມາເທີ້ນ ລຸກຂຶ້ນເທີ້ນມານົບທັງຫຼາຍ
ຈົ່ງເປີດປາກອຸບໂມງແລະປະຕູເຮືອນເທີ້ນ
ພຣະເຈົ້າວິເທຫະພ້ອມອຳມາດຈັກສະເດັດໄປທາງອຸບໂມງ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໖໙໔] ພວກຄົນຕິດຕາມຂອງມະໂຫສົດບັນດິດຟັງຄຳສັ່ງຂອງມະໂຫສົດນັ້ນແລ້ວ
ຊ່ອຍກັນໄຂປະຕູອຸບໂມງແລະຖອດໄລທີ່ຕິດຍົນ

[໖໙໕] ເສນະກະຍ່າງນຳສະເດັດໄປທາງໜ້າ
ມະໂຫສົດຍ່າງຕາມສະເດັດໄປທາງຫຼັງ
ພຣະເຈົ້າວິເທຫະມີອຳມາດຫ້ອມລ້ອມສະເດັດໄປທ່າມກາງ

[໖໙໖] ພຣະເຈົ້າວິເທຫະສະເດັດອອກໄປຈາກອຸບໂມງແລ້ວ
ສະເດັດຂຶ້ນປະທັບເຮືອພຣະທີ່ນັ່ງ ສ່ວນມະໂຫສົດບັນດິດໄດ້ຮູ້ວ່າ
ພຣະເຈົ້າວິເທຫະສະເດັດຂຶ້ນປະທັບເຮືອພຣະທີ່ນັ່ງແລ້ວ
ຈຶ່ງຖວາຍອະນຸສາດວ່າ

[໒໙໗] ຂໍເດຊະພຣະອົງຜູ້ເປັນຈອມຊົນ ຜູ້ນີ້ຄືພຣະໂອຣົດ
ແຫ່ງພຣະເຈົ້າຈູລະນີຜູ້ເປັນພຣະສັດສຸຣະ (ພໍ່ເຖົ້າ) ຂອງພຣະອົງ
ພຣະເທວີນີ້ເປັນພຣະສັດສຸ (ແມ່ເຖົ້າ) ຂອງພຣະອົງ
ຂໍໂຜດຊົງປະຕິບັດຕໍ່ພຣະສັດສຸຂອງພຣະອົງ
ຄືຊົງປະຕິບັດຕໍ່ພຣະຣາດຊະມານດາຂອງພຣະອົງເທີ້ນ

[໒໙໘] ຂ້າແດ່ ພຣະອົງຜູ້ເປັນຈອມທັບ
ພຣະພາດາແທ້ ໆ ຜູ້ຮ່ວມພຣະອຸທອນ ມີພຣະຊົນນີດງອກັນ
ພຣະອົງກໍຄວນຊົງອີດູສັນໃດ
ພຣະປັນຈາລະຈັນທະຣາດຊະກຸມານພຣະອົງກໍຄວນອີດູສັນນັ້ນ

[໒໙໙] ຂ້າແດ່ ພຣະອົງຜູ້ເປັນຈອມທັບ
ພຣະນາງປັນຈາລະຈັນທະນີຣາດຊະບຸດຕີຂອງພຣະເຈົ້າພົມມະທັດນີ້
ທີ່ພຣະອົງຊົງປາຖະໜາຍິ່ງ
ຂໍພຣະອົງຈົ່ງທຳຄວາມຮັກແພງໃນພຣະນາງຂອງພຣະອົງ
ພຣະນາງຈະເປັນມະເຫສີຂອງພຣະອົງ

(ພຣະເຈົ້າວິເທຫະຊົງປະສົງຈະສະເດັດໄປ ຈຶ່ງຕັດກັບມະໂຫສົດບັນດິດໂພທິສັດວ່າ)

[໗໐໐] ມະໂຫສົດ ທ່ານຈົ່ງຟ້າວຂຶ້ນເຮືອເທີ້ນ
ຈະຢືນຢູ່ທີ່ຝັ່ງເຮັດຫຍັງນໍ ພວກເຮົາພົ້ນຈາກທຸກໄດ້ໂດຍຍາກ
ຈົ່ງຟ້າວໄປ ໃນບັດນີ້ເທີ້ນ

(ມະໂຫສົດບັນດິດໂພທິສັດໄດ້ຟັງພຣະຣາດຊະດຳຣັດນັ້ນແລ້ວ ຈຶ່ງຂາບທູນວ່າ)

[໗໐໑] ຂ້າແດ່ ມະຫາຣາດ ການທີ່ຂ້າພຣະອົງເປັນຜູ້ນຳກອງທັບ
ຈະປະຖິ້ມກອງທັບແລ້ວ
ເພິ່ງເອົາໂຕລອດນີ້ ບໍ່ເປັນທຳເລີຍ

[໗໐໔] ຂ້າແດ່ ພຣະອົງຜູ້ເປັນຈອມທັບ
ຂ້າພຣະອົງຈັກນຳກອງທັບທີ່ພຣະອົງລະຖິ້ມໄວ້ໃນພຣະຣາດຊະນິເວດ
ເຊິ່ງພຣະເຈົ້າພົມມະທັດພຣະຣາດຊະທານແລ້ວນັ້ນກັບມາ

(ລຳດັບນັ້ນ ພຣະເຈົ້າວິເທຫະຕັດວ່າ)

[໗໐໓]　ທ່ານບັນດິດ ທ່ານມີເສນາໜ້ອຍ
　　ຈັກຂົ່ມພຣະເຈົ້າພົມມະທັດຜູ້ມີເສນາຫຼາຍໄດ້ແນວໃດ
　　ທ່ານບໍ່ມີກຳລັງຈັກເດືອດຮ້ອນ
　　ຍ້ອນພຣະເຈົ້າພົມມະທັດມີກຳລັງ

(ມະໂຫສົດບັນດິດໂພທິສັດຂາບທູນວ່າ)

[໗໐໔]　ຜູ້ມີປັນຍາ ເຖິງຈະມີເສນາໜ້ອຍ
　　ກໍຊະນະຄົນທີ່ມີເສນາຫຼາຍແຕ່ບໍ່ມີປັນຍາໄດ້
　　ຄືພຣະຣາຊາຜູ້ຊົງພຣະປີຊາ
　　ຍ່ອມຊະນະພຣະຣາຊາຫຼາຍພຣະອົງຜູ້ບໍ່ຊົງພຣະປີຊາໄດ້
　　ດັ່ງດວງອາທິດຂຶ້ນມາກຳຈັດຄວາມມືດ

(ພຣະເຈົ້າວິເທຫະ ຊົງສັນເສີນຄຸນຂອງມະໂຫສົດບັນດິດໂພທິສັດແກ່ເສນະກະບັນດິດວ່າ)

[໗໐໕]　ທ່ານອາຈານເສນະກະ ການຢູ່ຮ່ວມກັບບັນດິດທັງຫຼາຍ
　　ເປັນສຸກດີນໍ ຍ້ອນມະໂຫສົດບັນດິດໄດ້ຊ່ອຍປົດເປື້ອງພວກເຮົາ
　　ຜູ້ຕົກຢູ່ໃນເງື້ອມມືຂອງສັດຕູໃຫ້ລອດພົ້ນໄດ້
　　ຄືຄົນຊ່ອຍປ່ອຍນົກທີ່ຕິດຢູ່ໃນກົງໃຫ້ລອດພົ້ນ
　　ແລະຄືຄົນຊ່ອຍປ່ອຍປາທີ່ຕິດຢູ່ໃນຮ່າງແຫໃຫ້ພົ້ນ

(ເສນະກະບັນດິດໄດ້ຟັງພຣະຣາດຊະດຳຣັດນັ້ນແລ້ວ ຈຶ່ງສັນເສີນຄຸນຂອງມະໂຫສົດບັນດິດໂພທິສັດວ່າ)

[໗໐໖]　ຂ້າແດ່ ມະຫາຣາດ ບັນດິດທັງຫຼາຍ
　　ເປັນຜູ້ນຳຄວາມສຸກມາໃຫ້ໂດຍແທ້
　　ມະໂຫສົດບັນດິດໄດ້ຊ່ອຍປົດເປື້ອງພວກເຮົາ
　　ຜູ້ຕົກຢູ່ໃນເງື້ອມມືຂອງສັດຕູໃຫ້ລອດພົ້ນໄດ້
　　ຄືຄົນຊ່ອຍປ່ອຍນົກທີ່ຕິດຢູ່ໃນກົງໃຫ້ລອດພົ້ນ
　　ແລະຄືຄົນຊ່ອຍປ່ອຍປາທີ່ຕິດຢູ່ໃນຮ່າງແຫໃຫ້ລອດພົ້ນ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໗໐໗]　ພຣະເຈົ້າຈູລະນີຜູ້ຊົງມີພຣະກຳລັງຫຼາຍ
　　ເຝົ້າລະວັງໄວ້ຕະຫຼອດຣາຕີທັງປວງ

ເມື່ອອາລຸນກໍສະເດັດໄປເຖິງອຸປະການນະຄອນ[๑]

[໗໐໗] ພຣະເຈົ້າປັນຈາລະພຣະນາມວ່າຈູລະນີຜູ້ຊົງມີພຣະກໍາລັງຫຼາຍ
ສະເດັດຂຶ້ນປະທັບຊ້າງພຣະທີ່ນັ່ງໂຕປະເສີດມີກໍາລັງ
ຕໍ່ມີອາຍຸ ໖໐ ປີຈຶ່ງເສື່ອມກໍາລັງ ໄດ້ຮັບສັ່ງແລ້ວວ່າ

[໗໐໘] ພຣະອົງຊົງໃສ່ເກາະແກ້ວມະນີ
ມີພຣະຫັດຊົງພຣະແສງສອນ ໄດ້ຕັດສໍາທັບກັບເຫຼົ່າທະຫານຫານ
ຜູ້ຊ່ຽວຊານສິລະປະທຸກ ໆ ດ້ານ ເຊິ່ງມາປະຊຸມກັນຢູ່

(ບັດນີ້ເມື່ອຈະຊົງສະແດງຂໍ້ຄວາມເຫຼົ່ານັ້ນໂດຍຫຍໍ້ ພຣະບໍຣົມມະສາດສະດາຈຶ່ງຕັດວ່າ)

[໗໑໐] ກອງພົນຊ້າງ ກອງພົນມ້າ ກອງພົນລົດ
ກອງພົນຣາບ ຜູ້ມີສີມື ຊ່ຽວຊານໃນສິລະປະທະນູ
ຍິງໄດ້ແມ່ນຍໍາ ມາປະຊຸມກັນແລ້ວ

(ພຣະເຈົ້າຈູລະນີຮັບສັ່ງໃຫ້ຈັບພຣະເຈົ້າວິເທຫະວ່າ)

[໗໑໑] ພວກທ່ານຈົ່ງໄສຊ້າງພາຍງາທັງຫຼາຍທີ່ມີກໍາລັງ
ຕໍ່ມີອາຍຸ ໖໐ ປີຈຶ່ງເສື່ອມກໍາລັງໄປ
ຂໍຊ້າງທັງຫຼາຍຈົ່ງຢຽບຢໍ່າທໍາລາຍເມືອງ
ທີ່ພຣະເຈົ້າວິເທຫະໄດ້ຮັບສັ່ງໃຫ້ສ້າງໄວ້ດີແລ້ວ

[໗໑໒] ຂໍໃຫ້ລູກສອນຂາວດ້ານໜ້າເຮັດດ້ວຍແຂ້ວລູກສັດ
ມີປາຍແຫຼມຄົມແທງຊອດກະດູກທີ່ຖືກປ່ອຍໄປແລ້ວ
ຈົ່ງຂ້າມໄປຕົກລົງດ້ວຍກໍາລັງທະນູເທີ້ນ

[໗໑໓] ພວກທະຫານລຸ້ນໜຸ່ມ ໆ ໃສ່ເກາະອົງອາດ
ມີອາວຸດມີດ້າມອັນງົດງາມ
ເມື່ອຊ້າງໃຫຍ່ທັງຫຼາຍແລ່ນເຂົ້າສົງຄາມມາຢູ່
ຈົ່ງອວ່າຍໜ້າສູ້ຊ້າງທັງຫຼາຍເທີ້ນ

[໗໑໔] ຫອກທັງຫຼາຍທີ່ທາດ້ວຍນໍ້າມັນສ່ອງແສງເປັນປະກາຍເພີງ
ສະຫວ່າງສະໄຫວຕັ້ງຢູ່ດັ່ງດາວປະກາຍພຶກເຊິ່ງມີຣັດສະໝີຕັ້ງຮ້ອຍ

[໗໑໕] ເມື່ອເຫຼົ່າທະຫານມີກໍາລັງອາວຸດ

ໃສ່ສັງວານຮັດເກາະແນວນີ້ ບໍ່ໜີສົງຄາມ
ພຣະເຈົ້າວິເທຫະຕໍ່ໃຫ້ມີປີກບິນກໍໜີໄປໄສບໍ່ພົ້ນ

[໗໑໖] ເຫຼົ່າທະຫານ ໓໗,໐໐໐ ນາຍທັງໝົດຂອງເຮົາ
ແຕ່ລະຄົນລ້ວນຖືກຄັດເລືອກໄວ້ແລ້ວ
ເຮົາທ່ຽວໄປທົ່ວແຜ່ນດິນກໍບໍ່ເຫັນທະຫານຜູ້ທັດທຽມ

[໗໑໗] ອັນໜຶ່ງ ຊ້າງພາຍງາທັງຫຼາຍທີ່ປະດັບແລ້ວລ້ວນແຕ່ມີກຳລັງ
ຕໍ່ເມື່ອອາຍຸ ໖໐ ປີຈຶ່ງເສື່ອມກຳລັງ
ເຊິ່ງມີເຫຼົ່າທະຫານໜຸ່ມ ໆ ມີຜິວພັນຄືຄຳສະຫງ່າງາມຢູ່ເທິງຄໍ

[໗໑໘] ທະຫານເຫຼົ່ານັ້ນມີເຄື່ອງປະດັບສີເຫຼືອງ
ນຸ່ງຜ້າສີເຫຼືອງ ຜ້ານຸ່ງຜ້າຫົ່ມສີເຫຼືອງ
ຍ່ອມສະຫງ່າງາມຢູ່ເທິງຄໍຊ້າງດັ່ງເທບພະບຸດໃນອຸທະຍານນັນທະວັນ

[໗໑໙] ກະບີ່ທັງຫຼາຍທີ່ມີສີເຊັ່ນດຽວກັບປາຕອງ
ຂັດຖູດ້ວຍນ້ຳມັນເປັນປະກາຍວາບວັບ
ທີ່ເຫຼົ່າທະຫານກ້າເຮັດສຳເລັດແລ້ວ
ລັບເປັນຢ່າງດີມີຄົມຢູ່ສະເໝີ

[໗໔໐] ດາບສ່ອງແສງກ້າ ປາສະຈາກຂີ້ມ້ຽງ
ເຮັດດ້ວຍເຫຼັກກ້າທົນທານ
ທີ່ເຫຼົ່າທະຫານຜູ້ມີກຳລັງຊ່ຽວຊານໃນການຟັນຖືໄວ້ແລ້ວ

[໗໔໑] ດາບເຫຼົ່ານັ້ນລ້ວນແລ້ວແຕ່ດ້າມຄຳ
ປະກອບດ້ວຍຝັກສີແດງ ກວັດແກວ່ງໄປມາງົດງາມ
ດັ່ງສາຍຟ້າທີ່ເຫຼື້ອມເມືອບມາບຢູ່ໃນລະຫວ່າງກຸ່ມກ້ອນເພື້ອ
[໗໔໔] ເຫຼົ່າທະຫານດາບຜູ້ອົງອາດໃສ່ເກາະ
ສາມາດຕີລັງກາໄປໃນອາກາດ ສະຫຼາດໃນການໃຊ້ດາບແລະໂລ່
ເຝິກຝົນມາດີກວ່າພົນແມ່ນທະນູ ສາມາດຈະຕັດຄໍຊ້າງໃຫ້ຂາດຕົກລົງໄປໄດ້
[໗໔໓] ພຣະອົງຖືກທະຫານທັງຫຼາຍແນວນີ້ລ້ອມໄວ້ແລ້ວ
ພຣະອົງຈະພົ້ນໄປຈາກບ່ອນນີ້ບໍ່ໄດ້
ຂ້າພຣະອົງຍັງບໍ່ເຫັນຣາຊານຸພາບຂອງພຣະອົງ
ທີ່ຈະເປັນເຫດໃຫ້ສະເດັດດຳເນີນໄປເຖິງນະຄອນມິຖິລາໄດ້

(ມະໂຫສົດບັນດິດໂພທິສັດ ກ່າວເຍາະເຍີ້ຍກັບພຣະເຈົ້າຈູລະນີວ່າ)

[໗໔໔] ພຣະອົງຊົງດ່ວນໄສຊ້າງພຣະທີ່ນັ່ງໂຕປະເສີດມາເຮັດຫຍັງນໍ
ພຣະອົງມີພຣະຫະໄທແຈ່ມໃສສະເດັດມາ
ພຣະອົງຊົງສຳຄັນວ່າ ເຮົາເປັນຜູ້ໄດ້ປະໂຫຍດ

[໗໔໕] ຂໍພຣະອົງຊົງວາງແລ່ງທະນູນັ້ນລົງສາເທີ້ນ
ຊົງເກັບລູກສອນສາເທີ້ນ ຈົ່ງຊົງປົດເກາະອັນງົດງາມ
ຕິດແຜ່ໄປດ້ວຍແກ້ວໄພທູນແລະແກ້ວມະນີອອກສາເທີ້ນ

(ພຣະເຈົ້າຈູລະນີໄດ້ສະດັບດັ່ງນັ້ນ ຊົງຄຸກຄາມມະໂຫສົດບັນດິດໂພທິສັດວ່າ)

[໗໔໖] ເຈົ້າມີສີໜ້າຜ່ອງໃສ ແລະເວົ້າຢ່າງຝືນຍິ້ມ
ຄວາມເຖິງພ້ອມດ້ວຍຜິວພັນແນວນີ້ຍ່ອມມີໃນເວລາໃກ້ຕາຍ

(ມະໂຫສົດບັນດິດໂພທິສັດປະກາດຂໍ້ຄວາມນີ້ວ່າ)

[໗໔໗] ຂ້າແດ່ ຂັດຕິຍະຣາຊາ ພຣະດຳຣັດທີ່ພຣະອົງຕັດຂູ່ຄຳຣາມ
ເປັນພຣະດຳຣັດທີ່ເປົ່າປະໂຫຍດ
ພຣະອົງເປັນຜູ້ມີຄວາມລັບແຕກສາແລ້ວ
ຍ້ອນພຣະຣາຊາຂອງຂ້າພຣະອົງຍາກທີ່ພຣະອົງຈະຈັບໄດ້
ຄືມ້າຂາຫ້ານຂັບມ້າສິນທົບໄດ້ຍາກ
[໗໔໘] ພຣະຣາຊາຂອງຂ້າພຣະອົງພ້ອມດ້ວຍອຳມາດຣາດຊະບໍຣິພານ
ສະເດັດຂ້າມແມ່ນ້ຳຄົງຄາໄປແລ້ວແຕ່ວານນີ້
ຖ້າພຣະອົງຈັກຊົງຕິດຕາມໄປ ກໍຈັກຕົກໄປສູ່ຄວາມລຳບາກ
ຄືກາບິນໄລ່ຕິດຕາມພະຍາຫົງ

(ມະໂຫສົດບັນດິດໂພທິສັດບໍ່ພັ່ນພຶງຄືພະຍາຣາດຊະສີ ຍົກອຸທາຫອນຫຼາຍຢ່າງຂາບທູນວ່າ)

[໗໔໙] ໝາຈອກທັງຫຼາຍເປັນສັດຕ່ຳຊາມກວ່າເນື້ອ
ເຫັນດອກຈານບານໃນຣາຕີ ກໍເຂົ້າໃຈວ່າ
ເປັນຕ່ອນຊີ້ນ ຈຶ່ງເຂົ້າລ້ອມຕົ້ນໄວ້
[໗໕໐] ເມື່ອຣາຕີຜ່ານພົ້ນໄປແລ້ວ ເມື່ອດວງອາທິດຂຶ້ນ
ໝາຈອກທີ່ຕ່ຳຊາມກວ່າເນື້ອເຫຼົ່ານັ້ນ
ໄດ້ເຫັນດອກຈານທີ່ບານແລ້ວ ກໍໝົດຫວັງສັນໃດ

[ກ໓໑]	ຂ້າແດ່ ພຣະຣາຊາ ພຣະອົງຊົງລ້ອມພຣະເຈົ້າວິເທຫະ
ກໍຈັກຊົງໝົດຫວັງສະເດັດກັບໄປ ຄືກັນສັນນັ້ນ
ຄືໝາຈອກລ້ອມຕົ້ນດອກຈານ

(ພຣະເຈົ້າຈູລະນີໄດ້ສະດັບດັ່ງນັ້ນແລ້ວ ຊົງສັ່ງລົງໂທດມະໂຫສົດບັນດິດໂພທິສັດວ່າ)

[ກ໓໒]	ພວກເຈົ້າຈົ່ງຕັດມື ຕີນ ຫູ ແລະດັງ
ຂອງມະໂຫສົດນີ້ຜູ້ທີ່ປ່ອຍພຣະເຈົ້າວິເທຫະ
ສັດຕູຜູ້ຕົກຢູ່ໃນເງື້ອມມືຂອງເຮົາໃຫ້ລອດພົ້ນໄປ

[ກ໓໓]	ພວກເຈົ້າຈົ່ງສຽບມະໂຫສົດຜູ້ທີ່ປ່ອຍພຣະເຈົ້າວິເທຫະ
ສັດຕູຜູ້ຕົກຢູ່ໃນເງື້ອມມືຂອງເຮົາໃຫ້ລອດພົ້ນ
ເທິງຫຼາວແລ້ວຢ້າງມັນສາຄືຢ້າງຊີ້ນນີ້

[ກ໓໔]	ບຸກຄົນແທງໜັງງົວລົງເທິງແຜ່ນດິນ
ຫຼືໃຊ້ຂໍເກາະໜັງຣາດຊະສີ ຫຼືໜັງເສືອໂຄ່ງດຶງມາສັນໃດ

[ກ໓໕]	ເຮົາຈັກໃຫ້ພວກເຈົ້າຊ່ອຍກັນໃຊ້ຫອກສຽບແທງມະໂຫສົດນີ້
ຜູ້ທີ່ປ່ອຍພຣະເຈົ້າວິເທຫະ
ສັດຕູຜູ້ຕົກຢູ່ໃນເງື້ອມມືຂອງເຮົາໃຫ້ລອດພົ້ນສັນນັ້ນ

(ມະໂຫສົດບັນດິດໂພທິສັດໄດ້ຟັງພຣະຣາດຊະດຳຣັດນັ້ນ ກໍຫົວຂວັນຂາບທູນວ່າ)

[ກ໓໖]	ຖ້າພຣະອົງຮັບສັ່ງໃຫ້ຕັດມື ຕີນ ຫູ ແລະດັງຂອງຂ້າພຣະອົງ
ພຣະເຈົ້າວິເທຫະກໍຈັກຮັບສັ່ງໃຫ້ຕັດມືແລະຕີນເປັນຕົ້ນ
ຂອງພຣະປັນຈາລະຈັນທະຣາດຊະກຸມານເຊັ່ນດຽວກັນ

[ກ໓໗]	ຖ້າພຣະອົງຮັບສັ່ງໃຫ້ຕັດມື ຕີນ ຫູ ແລະດັງຂອງຂ້າພຣະອົງ
ພຣະເຈົ້າວິເທຫະກໍຈັກຮັບສັ່ງໃຫ້ຕັດມືແລະຕີນເປັນຕົ້ນ
ຂອງພຣະນາງປັນຈາລະຈັນທະນີຣາດຊະທິດາເຊັ່ນດຽວກັນ

[ກ໓໘]	ຖ້າພຣະອົງຮັບສັ່ງໃຫ້ຕັດມື ຕີນ ຫູ ແລະດັງຂອງຂ້າພຣະອົງ
ພຣະເຈົ້າວິເທຫະກໍຈັກຮັບສັ່ງໃຫ້ຕັດມືແລະຕີນເປັນຕົ້ນ
ຂອງພຣະນາງນັນທາເທວີອັກຄະຣະມະເຫສີເຊັ່ນດຽວກັນ

[ກ໓໙]	ຖ້າພຣະອົງຮັບສັ່ງໃຫ້ຕັດມື ຕີນ ຫູ ແລະດັງຂອງຂ້າພຣະອົງ

ພຣະເຈົ້າວິເທຫະກໍຈັກຮັບສັ່ງໃຫ້ຕັດມືແລະຕີນເປັນຕົ້ນ
ຂອງພຣະໂອຣົດ ແລະພຣະຊາຍາຂອງພຣະອົງເຊັ່ນດຽວກັນ

[໗໘໐] ຖ້າພຣະອົງຮັບສັ່ງໃຫ້ສຽບຊີ້ນຂອງຂ້າພຣະອົງເທິງຫຼາວ
ແລ້ວຢ້າງໃຫ້ສຸກຄືຢ້າງຊີ້ນ
ພຣະເຈົ້າວິເທຫະກໍຈັກຮັບສັ່ງໃຫ້ສຽບພຣະມັງສະ
ຂອງພຣະປັນຈາລະຈັນທະຣາດຊະກຸມານເທິງຫຼາວແລ້ວຢ້າງໃຫ້ສຸກເຊັ່ນດຽວກັນ

[໗໘໑] ຖ້າພຣະອົງຮັບສັ່ງໃຫ້ສຽບຊີ້ນຂອງຂ້າພຣະອົງເທິງຫຼາວ
ແລ້ວຢ້າງໃຫ້ສຸກຄືຢ້າງຊີ້ນ
ພຣະເຈົ້າວິເທຫະກໍຈັກຮັບສັ່ງໃຫ້ສຽບພຣະມັງສະ
ຂອງພຣະນາງປັນຈາລະຈັນທະນີຣາດຊະທິດາເທິງຫຼາວແລ້ວ
ຢ້າງໃຫ້ສຸກເຊັ່ນດຽວກັນ

[໗໘໒] ຖ້າພຣະອົງຮັບສັ່ງໃຫ້ສຽບຊີ້ນຂອງຂ້າພຣະອົງເທິງຫຼາວ
ແລ້ວຢ້າງໃຫ້ສຸກຄືຢ້າງຊີ້ນ
ພຣະເຈົ້າວິເທຫະກໍຈັກຮັບສັ່ງໃຫ້ສຽບພຣະມັງສະ
ຂອງພຣະນາງນັນທາເທວີອັກຄະຣະມະເຫສີແລ້ວຢ້າງໃຫ້ສຸກເຊັ່ນດຽວກັນ

[໗໘໓] ຖ້າພຣະອົງຮັບສັ່ງໃຫ້ສຽບຊີ້ນຂອງຂ້າພຣະອົງເທິງຫຼາວ
ແລ້ວຢ້າງໃຫ້ສຸກຄືຢ້າງຊີ້ນ
ພຣະເຈົ້າວິເທຫະກໍຈັກຮັບສັ່ງໃຫ້ສຽບພຣະມັງສະ
ຂອງພຣະໂອຣົດແລະພຣະຊາຍາຂອງພຣະອົງແລ້ວຢ້າງໃຫ້ສຸກເຊັ່ນດຽວກັນ

[໗໘໔] ຖ້າພຣະອົງຮັບສັ່ງໃຫ້ສຽບຂ້າພຣະອົງແລ້ວໃຊ້ຫອກສຽບແທງ
ພຣະເຈົ້າວິເທຫະກໍຈັກຮັບສັ່ງໃຫ້ສຽບແທງ
ພຣະປັນຈາລະຈັນທະຣາດຊະກຸມານດ້ວຍຫອກເຊັ່ນດຽວກັນ

[໗໘໕] ຖ້າພຣະອົງຮັບສັ່ງໃຫ້ສຽບຂ້າພຣະອົງແລ້ວໃຊ້ຫອກສຽບແທງ
ພຣະເຈົ້າວິເທຫະກໍຈັກຮັບສັ່ງໃຫ້ສຽບແທງ
ພຣະນາງປັນຈາລະຈັນທະນີຣາດຊະທິດາເຊັ່ນດຽວກັນ

[໗໘໖] ຖ້າພຣະອົງຮັບສັ່ງໃຫ້ສຽບຂ້າພຣະອົງແລ້ວໃຊ້ຫອກສຽບແທງ
ພຣະເຈົ້າວິເທຫະກໍຈັກຮັບສັ່ງໃຫ້ໃຊ້ຫອກສຽບແທງ
ພຣະນາງນັນທາເທວີອັກຄະຣະມະເຫສີເຊັ່ນດຽວກັນ

[๓๔๓] ຖ້າພຣະອົງຮັບສັ່ງໃຫ້ສຽບຂ້າພຣະອົງແລ້ວໃຊ້ຫອກສຽບແທງ
ພຣະເຈົ້າວິເທຫະກໍຈັກຮັບສັ່ງໃຫ້ໃຊ້ຫອກສຽບແທງ
ພຣະໂອຣົດແລະພຣະຊາຍາຂອງພຣະອົງເຊັ່ນດຽວກັນ
ຂໍ້ຄວາມດັ່ງຂາບທູນມາແນວນີ້ ຂ້າພຣະອົງກັບພຣະເຈົ້າວິເທຫະ
ໄດ້ເປັກສາຕົກລົງກັນໄວ້ແລ້ວໃນບ່ອນລັບ

[๓๔๘] ໂລ່ໜັງປະມານ ๑๐๐ ປະລະ[๑]
ທີ່ຊ່າງໜັງເຮັດສຳເລັດແລ້ວດ້ວຍມີດຂອງຊ່າງໜັງ
ຍ່ອມຊ່ອຍປ້ອງກັນຕົນເພື່ອຫ້າມລູກສອນສັນໃດ

[๓๔๙] ຂ້າພຣະອົງກໍສັນນັ້ນ ເປັນຜູ້ນຳສຸກມາໃຫ້
ບັນເທົາທຸກຖວາຍພຣະເຈົ້າວິເທຫະຜູ້ຊົງຍົດ
ຈຶ່ງຈຳກັດມະຕິຂອງພຣະອົງສາ
ຄືກຳຈັດລູກສອນດ້ວຍໂລ່ໜັງ ๔๐๐ ປະລະ

[๓๕๐] ຂ້າແດ່ ມະຫາຣາດຜູ້ເປັນກະສັດ ຂໍພຣະອົງຈົ່ງທອດພຣະເນດ
ພຣະຣາດຊະມົນທຽນຂອງພຣະອົງອັນວ່າງເປົ່າ
ພຣະສະໜົມກຳນັນໃນ ພຣະກຸມານ ແລະພຣະມານດາຂອງພຣະອົງ
ຂ້າພຣະອົງໃຫ້ນຳອອກທາງອຸບໂມງ
ນຳໄປຖວາຍພຣະເຈົ້າວິເທຫະແລ້ວ

(ພຣະເຈົ້າຈູລະນີເມື່ອສັ່ງໃຫ້ອຳມາດຄົນໜຶ່ງມາເຝົ້າແລ້ວສົ່ງໄປເພື່ອໃຫ້ຮູ້ຄວາມຈິງ ຈຶ່ງຕັດວ່າ)

[๓๕๑] ເຊີນພວກເຈົ້າຈົ່ງໄປສູ່ຣາດຊະມົນທຽນຂອງເຮົາແລ້ວກວດເບິ່ງ
ຄຳຂອງມະໂຫສົດນີ້ແມ່ນແທ້ຫຼືຕົວະແນວໃດ

(ອຳມາດນັ້ນໄປແລ້ວກັບມາ ຂາບທູນວ່າ)

[๓๕๔] ຂ້າແດ່ ມະຫາຣາດ ມະໂຫສົດຂາບທູນວ່າສັນໃດ
ຄຳນັ້ນເປັນຈິງສັນນັ້ນ
ພຣະຣາດຊະມົນທຽນທຸກແຫ່ງວ່າງເປົ່າ
ແຊວຊະໄປດ້ວຍຝູງກາ

(ມະໂຫສົດບັນດິດໂພທິສັດພັນນາມັກຄາທີ່ພຣະນາງນັນທາເທວີສະເດັດໄປ ຈຶ່ງທູນວ່າ)

[໗໕໓]	ຂ້າແດ່ ມະຫາຣາດ
พຣະນາງບັນທາເທວີຊົງພຣະໂສມງົດງາມທົ່ວທັງສັນພາງ
ມີພຣະໂສນີຜຶ່ງຜາຍງາມຄືດັ່ງແທ່ງຄຳທຳມະຊາດ
ມີປີກາກະຕິຕັດພຣະສຳນຽງອັນອ່ອນຫວານເໝືອນດັ່ງລູກຫົງ
ສະເດັດໄປທາງອຸບໂມງນີ້

[໗໕໔]	ຂ້າແດ່ ມະຫາຣາດ ພຣະນາງບັນທາເທວີຊົງພຣະໂສມ
ງົດງາມທົ່ວທັງສັນພາງ ຊົງພຣະພູສາໂກໄສຍະ
ມີພຣະສະຣີຣະເຫຼືອງອະຫຼ່າມ ມີສາຍຮັດພຣະອົງງົດງາມດ້ວຍຄຳ
ຂ້າພຣະອົງນຳອອກໄປແລ້ວຈາກອຸບໂມງນີ້

[໗໕໕]	ພຣະນາງບັນທາເທວີມີພຣະບາດແດງສົດໃສ
ຊົງພຣະໂສມງົດງາມ ມີສາຍຮັດພຣະອົງເປັນແກ້ວມະນີແກມຄຳ
ມີດວງພຣະເນດດັ່ງໜ່ວຍຕານົກກາງແກ ມີພຣະສະຣີຣະງົດງາມ
ມີປາກແດງດັ່ງໝາກຕຳນິນສຸກສະໂອດສະອົງ

[໗໕໖]	ມີບັ້ນພຣະອົງນ້ອຍບາງດັ່ງເຄືອນາຄະລະດາທີ່ເກີດດີແລ້ວ
ແລະຄືການຈະນະໄພທີ ມີພຣະເກສາຍາວດຳ
ມີປາຍຊ້ອນຂຶ້ນເລັກໜ້ອຍ

[໗໕໗]	ມີດວງພຣະເນດເຊື່ອງຄືດວງຕາຂອງລູກເນື້ອຊາຍທີ່ເກີດດີແລ້ວ
ແລະຄືແປວໄຟໃນລະດູໜາວ
ຄືແມ່ນ້ຳໃກ້ພູຜາອັນເດຍລະດາດໄປດ້ວຍໄມ້ໄຜ່ຕົ້ນນ້ອຍ ໆ

[໗໕໘]	ພຣະນາງມີພຣະເພົາງາມດັ່ງງວງໄອຍະຣາ (ຊ້າງ)
ທີ່ສຳຄັນມີພຣະຖັນຍຸຄົນດັ່ງຄູ່ໝາກພັບ
ມີພຣະສັນຖານສັນທັດ ບໍ່ສູງຫຼາຍ ບໍ່ຕ່ຳຫຼາຍ
ມີພຣະຂະໂນງພໍງາມ ບໍ່ຫຼາຍປານໃດ

(ມະໂຫສົດບັນດິດໂພທິສັດ ຮູ້ວ່າພຣະເຈົ້າຈູລະນີມີຄວາມສະເນ່ຫາເກີດຂຶ້ນ ຈຶ່ງຂາບທູນຕໍ່ອີກວ່າ)

[໗໕໙]	ຂ້າແດ່ ພຣະອົງຜູ້ມີພາຫະນະທີ່ສົມບູນດ້ວຍສີຣີ
ພຣະອົງຄົງຈະຊົງຍິນດີກັບການທີວົງຄົດ
ຂອງພຣະນາງບັນທາເທວີເປັນແນ່

ຂ້າພຣະອົງແລະພຣະນາງປັນທາເທວີ
ກໍຈະພາກັນໄປສຳນັກຂອງພະຍາຍົມນຳກັນແນ່

(ລຳດັບນັ້ນ ພຣະເຈົ້າຈູລະນີຈຶ່ງຕັດຖາມມະໂຫສົດບັນດິດໂພທິສັດວ່າ)

[ກຜ໐] ມະໂຫສົດຜູ້ໄດ້ປ່ອຍພຣະເຈົ້າວິເທຫະ
ສັດຕູຜູ້ຕົກຢູ່ໃນເງື້ອມມືຂອງເຮົາເຮັດເລ່ກົນທິບຫຼືເຮັດພາບລວງຕາ

(ມະໂຫສົດບັນດິດໂພທິສັດໄດ້ຟັງພຣະຣາດຊະດຳຣັດນັ້ນ ຈຶ່ງຂາບທູນວ່າ)

[ກຜ໑] ຂ້າແດ່ ມະຫາຣາດ ບັນດິດທັງຫຼາຍໃນໂລກນີ້
ຍ່ອມເຮັດເລ່ກົນອັນເປັນທິບ
ຊົນຜູ້ມີປັນຍາມີມັນສະຫມອງເຫຼົ່ານັ້ນຍ່ອມປົດເປື້ອງຕົນໄດ້

[ກຜ໔] ເຫຼົ່າທະຫານໜຸ່ມຜູ້ຮັບໃຊ້ເປັນຄົນສະຫຼາດ
ເປັນຜູ້ຂຸດອຸບໂມງຂອງຂ້າພຣະອົງຜູ້ໄດ້ສ້າງຫົນທາງ
ທີ່ພຣະເຈົ້າວິເທຫະໄດ້ສະເດັດໄປນະຄອນມິຖິລາໄວ້ມີຢູ່

(ມະໂຫສົດບັນດິດໂພທິສັດຮູ້ຄວາມປະສົງຂອງພຣະເຈົ້າຈູລະນີ ຈຶ່ງທູນວ່າ)

[ກຜ໓] ຂ້າແດ່ ມະຫາຣາດ ຂໍພຣະອົງທອດພຣະເນດອຸບໂມງ
ທີ່ສ້າງໄວ້ດີແລ້ວງົດງາມ ເຮືອງຮອງດ້ວຍຖ່ອງແຖວແຫ່ງກອງພົນຊ້າງ
ກອງພົນມ້າ ກອງພົນລົດ ແລະກອງພົນຣາບ
ເຊິ່ງເຂົາເຮັດເປັນຮູບປັ້ນແລະເປັນລວດລາຍໄວ້ທີ່ສຳເລັດດີແລ້ວເທີ້ນ

(ພຣະເຈົ້າຈູລະນີຊົງເຫັນອຸບໂມງແລ້ວ ຊົງຍ້ອງຍໍຄຸນຂອງມະໂຫສົດບັນດິດໂພທິສັດວ່າ)

[ກຜ໔] ມະໂຫສົດ ເປັນລາບຂອງຊົນຊາວແຄວ້ນວິເທຫະນໍ
(ແລະ)ເປັນລາບຂອງຜູ້ທີ່ມີເຫຼົ່າບັນດິດແນວນີ້
ຢູ່ໃນເຮືອນໃນແຄວ້ນຄືມີເຈົ້າ

(ລຳດັບນັ້ນ ພຣະເຈົ້າຈູລະນີຕັດດ້ວຍປະສົງຈະໃຫ້ມະໂຫສົດບັນດິດໂພທິສັດຢູ່ໃນສຳນັກຂອງຕົນວ່າ)

[ກຜ໕] ເຮົາຈະໃຫ້ເຄື່ອງດຳເນີນຊີວິດ ທີ່ບໍລິຫານ
ເບ້ຍລ້ຽງແລະບຳເໜັດເປັນ ໔ ເທົ່າ

ໃຫ້ໂພຄະອັນເຕັມປ່ຽມ ເຈົ້າຈົ່ງໃຊ້ສອຍແລະຍິນດີໃນກາມເທີ້ນ
ເຈົ້າບໍ່ກັບໄປສູ່ແຄວ້ນວິເທຫະ ພຣະເຈົ້າວິເທຫະຈັກຊົງເຮັດຫຍັງໄດ້

(ມະໂຫສົດບັນດິດໂພທິສັດເມື່ອຈະປະຕິເສດ ຈຶ່ງຂາບທູນວ່າ)

[໗໕໕] ຂ້າແດ່ ມະຫາຣາດ ບຸກຄົນຜູ້ທີ່ສະລະທ່ານຜູ້ຊຸບລ້ຽງຕົນ
ຍ້ອນເຫດແຫ່ງຊັບ
ຍ່ອມຖືກຕົນແລະຄົນອື່ນທັງ ໔ ຝ່າຍຕິຕຽນໄດ້
ຂ້າພຣະອົງບໍ່ເພິ່ງຢູ່ໃນແຄວ້ນຂອງຜູ້ອື່ນໄດ້
ຕາບເທົ່າເວລາທີ່ພຣະເຈົ້າວິເທຫະຍັງຊົງດໍາລົງພະຊົນຢູ່

[໗໕໗] ຂ້າແດ່ ມະຫາຣາດ ບຸກຄົນຜູ້ທີ່ສະລະທ່ານຜູ້ຊຸບລ້ຽງຕົນ
ຍ້ອນເຫດແຫ່ງຊັບ
ຍ່ອມຖືກຕົນແລະຄົນອື່ນທັງ ໔ ຝ່າຍຕິຕຽນໄດ້
ຂ້າພຣະອົງບໍ່ເພິ່ງເປັນຣາດຊະບຸຣຸດຂອງພຣະຣາຊາອົງອື່ນໄດ້
ຕາບເທົ່າເວລາທີ່ພຣະເຈົ້າວິເທຫະຍັງຊົງດໍາລົງພະຊົນຢູ່

(ໃນເວລາທີ່ມະໂຫສົດບັນດິດໂພທິສັດທູນລາ ພຣະເຈົ້າຈູລະນີ ຕັດວ່າ)

[໗໕໘] ມະໂຫສົດ ເຮົາຈະໃຫ້ຄໍາ ໑,໐໐໐ ແທ່ງ
ບ້ານ ໘໐ ໝູ່ບ້ານໃນແຄວ້ນກາສີແກ່ທ່ານ
ໃຫ້ທາສີ ໔໐໐ ຄົນ ແລະພັນລະຍາ ໑໐໐ ຄົນແກ່ທ່ານ
ທ່ານຈົ່ງພາກອງທັບທັງປວງໄປໂດຍໂດຍປອດໄພເທີ້ນ

[໗໕໙] ຊົນທັງຫຼາຍຈົ່ງໃຫ້ອາຫານແກ່ຊ້າງແລະມ້າທັງຫຼາຍ
ຢ່າງລະ ໔ ເທົ່າພຽງໃດ ກໍຈົ່ງລ້ຽງກອງພົນລົດແລະກອງພົນຣາບ
ໃຫ້ອີ່ມໜໍາດ້ວຍເຂົ້າແລະນໍ້າພຽງນັ້ນເທີ້ນ

[໗໗໐] ມະໂຫສົດບັນດິດ ທ່ານຈົ່ງພາເອົາກອງພົນຊ້າງ ກອງພົນມ້າ
ກອງພົນລົດ ແລະກອງພົນຣາບໄປເທີ້ນ
ພຣະເຈົ້າວິເທຫະມະຫາຣາດຈົ່ງທອດພຣະເນດ
ທ່ານຜູ້ໄປເຖິງນະຄອນມິຖິລາແລ້ວເທີ້ນ

(ຝ່າຍພຣະເຈົ້າວິເທຫະຊົງເຫັນກອງທັບໃຫຍ່ ຕົກພຣະທະໄທຕັດກັບບັນດິດທັງ ໔ ວ່າ)

[ກາງ໑]	ກອງພົນຊ້າງ ກອງພົນມ້າ ກອງພົນລົດ ແລະກອງພົນຮາບ
ຜາກົດຫຼວງຫຼາຍຄົບທັງ ໔ ກອງພົນທີ່ເປັນຕາຢ້ານ
ບັນດິດທັງຫຼາຍຈະເຂົ້າໃຈແນວໃດນໍ

(ລຳດັບນັ້ນ ເສນະກະບັນດິດຂາບທູນວ່າ)

[ກາງ๔]	ຂ້າແດ່ ມະຫາຣາດ ຄວາມຍິນດີອັນສູງສິ່ງຈິ່ງຜາກົດແກ່ພຣະອົງ
ມະໂຫສົດບັນດິດໄດ້ພາກອງທັບທັງໝົດມາເຖິງໂດຍໂດຍປອດໄພແລ້ວ

(ພຣະເຈົ້າວິເທຫະສະເດັດລຸກຂຶ້ນສວມກອດມະໂຫສົດບັນດິດໂພທິສັດແລ້ວ ຊົງປະຕິສັນຖານຕັດວ່າ)

[ກາງ๓]	ຄົນທັງ ໔ ຖິ້ມຮ່າງຄົນຕາຍໄວ້ໃນປ່າຊ້າແລ້ວກັບໄປສັນໃດ
ເຮົາທັງຫຼາຍກໍຖິ້ມທ່ານໄວ້ໃນກະປິລະຣັດແລ້ວກັບມາບ່ອນນີ້ສັນນັ້ນ

[ກາງ๔]	ເມື່ອເປັນແນວນັ້ນ ເຈົ້າປົດເປື້ອງຕົນໄດ້
ຍ້ອນເຫດ ຍ້ອນປັດໄຈ ຫຼືຍ້ອນປະໂຫຍດອັນໃດ

(ລຳດັບນັ້ນ ມະໂຫສົດບັນດິດໂພທິສັດຈຶ່ງຂາບທູນວ່າ)

[ກາງ๕]	ຂ້າແດ່ ພຣະເຈົ້າວິເທຫະຜູ້ເປັນກະສັດ
ຂ້າພຣະອົງລ້ອມປະໂຫຍດໄວ້ດ້ວຍປະໂຫຍດ
ລ້ອມຄວາມຄິດໄວ້ດ້ວຍຄວາມຄິດ
ລ້ອມພຣະຣາຊາໄວ້ຄືນ້ຳທະເລລ້ອມຊົມພູທະວີບໄວ້

(ມະໂຫສົດບັນດິດໂພທິສັດຂາບທູນເຖິງບັນນາການທີ່ພຣະເຈົ້າຈູລະນີພຣະຣາດຊະທານແກ່ຕົນໃຫ້ຊົງຮູ້ວ່າ)

[ກາງ๖]	ພຣະເຈົ້າພົມມະທັດຊົງພຣະຣາດຊະທານຄຳ ໑,໐໐໐ ແທ່ງ
ບ້ານ ๗໐ ໝູ່ບ້ານໃນແຄວັນກາສີ
ທາສີ ๔໐໐ ຄົນ ແລະພັນລະຍາ ໑໐໐ ຄົນແກ່ຂ້າພຣະອົງ
ຂ້າພຣະອົງພາກອງທັບທັງໝົດມາບ່ອນນີ້ໂດຍໂດຍປອດໄພແລ້ວ

(ພຣະເຈົ້າວິເທຫະຊົງຍິນດີ ປາບປື້ມຢ່າງຍິ່ງ ຊົງຍ້ອງຍໍຄຸນຂອງມະໂຫສົດບັນດິດໂພທິສັດວ່າ)

[ກາງກາ]	ທ່ານອາຈານເສນະກະ ການຢູ່ຮ່ວມກັບບັນດິດທັງຫຼາຍ

ເປັນສຸກດີບໍ ຍ້ອນມະໂຫສົດບັນດິດປົດເປື້ອງພວກເຮົາ
ຜູ້ຕົກຢູ່ໃນເງື້ອມມືຂອງສັດຕູ
ຄືຄົນຊ່ອຍປ່ອຍນົກທີ່ຕິດຢູ່ໃນກົງໃຫ້ລອດພົ້ນ
ແລະຄືຄົນຊ່ອຍປ່ອຍປາທີ່ຕິດຢູ່ໃນຮ່າງແຫໃຫ້ລອດພົ້ນ

(ຝ່າຍເສນະກະບັນດິດຮັບພຣະຣາດຊະດຳຣັດແລ້ວຂາບທູນວ່າ)

[໖໖໘] ຂ້າແດ່ ມະຫາຣາດ ຂໍ້ຄວາມນີ້ກໍເປັນແນວນີ້
ຍ້ອນພວກບັນດິດເປັນຜູ້ນຳສຸກມາໃຫ້
ມະໂຫສົດໄດ້ຊ່ອຍປົດເປື້ອງພວກເຮົາຜູ້ຕົກຢູ່ໃນເງື້ອມມືຂອງສັດຕູ
ຄືຄົນຊ່ອຍປ່ອຍນົກທີ່ຕິດຢູ່ໃນກົງ
ແລະປາທີ່ຕິດຢູ່ໃນຮ່າງແຫໃຫ້ພົ້ນໄປ

(ພຣະເຈົ້າວິເທຫະຮັບສັ່ງໃຫ້ຊາວພຣະນະຄອນທ່ຽວຕີກອງປະກາດວ່າ)

[໖໖໙] ຂໍປະຊາຊົນທັງຫຼາຍຈົ່ງດີດພິນທຸກຊະນິດ
ຈົ່ງຕີກອງນ້ອຍ ກອງໃຫຍ່ ແລະມະໂຫຣະທຶກ
ຈົ່ງເປົ່າຫອຍສັງອັນມີສຽງມ່ວນຂອງຊາວເມືອງເທີ້ນ

(ພຣະບໍຣົມມະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໖໗໐] ພວກພຣະສະໜົມກຳນັນໃນ ພຣະກຸມານ ແພດ ແລະພາມ
ຕ່າງກໍໄດ້ນຳເຂົ້ານ້ຳຫຼວງຫຼາຍມາມອບໃຫ້ແກ່ມະໂຫສົດບັນດິດ

[໖໗໑] ພວກກອງພົນຊ້າງ ກອງພົນມ້າ ກອງພົນລົດ ແລະກອງພົນຣາບ
ຕ່າງກໍນຳເຂົ້ານ້ຳຫຼວງຫຼາຍມາມອບໃຫ້ແກ່ມະໂຫສົດບັນດິດ

[໖໗໒] ຊາວຊົນນະບົດແລະຊາວນິຄົມມາປະຊຸມພ້ອມກັນແລ້ວ
ໄດ້ນຳເຂົ້າແລະນ້ຳຫຼວງຫຼາຍມາມອບໃຫ້ແກ່ມະໂຫສົດບັນດິດ

[໖໗໓] ຊົນຫຼວງຫຼາຍໄດ້ເຫັນມະໂຫສົດບັນດິດກັບມາ
ຕ່າງກໍເຫຼື້ອມໃສ ເມື່ອມະໂຫສົດບັນດິດມາເຖິງແລ້ວ
ຕ່າງກໍໂບກຜ້າຢູ່ໄປມາ

**ມະໂຫສົດຊາດົກທີ ໕ ຈົບ**

# ໖. ພູຣິທັດຕະຊາດົກ[១] (໕໔໓)
## ວ່າດ້ວຍພຣະເຈົ້າພູຣິທັດຊົງພໍ່າເພັງສີລະປາຣະມີ

(ເຫຼົ່ານາກມານົບເມື່ອຈະປະກາດຂໍ້ຄວາມນີ້ ຈຶ່ງຂາບທູນພຣະຣາຊາວ່າ)

[໗໔] ຣັດຕະນະແນວໃດແນວໜຶ່ງມີຢູ່ໃນນິເວດຂອງທ້າວທະຕະຣັດຖະ
ຣັດຕະນະທັງໝົດຈົ່ງມາສູ່ພຣະຣາດຊະນິເວດຂອງພຣະອົງ
ຂໍພຣະອົງຈົ່ງພຣະຣາດຊະທານພຣະຣາດຊະທິດາແກ່ພຣະຣາຊາ

(ພຣະເຈົ້າພົມມະທັດເມື່ອໄດ້ສະດັບດັ່ງນັ້ນ ຈຶ່ງຕັດວ່າ)

[໗໕] ບໍ່ວ່າການໃດ ໆ ພວກເຮົາບໍ່ເຄີຍທໍາການວິວາຫະກັບພວກນາກເລີຍ
ພວກເຮົາຈະທໍາການວິວາຫະອັນບໍ່ສົມຄວນນັ້ນໄດ້ແນວໃດ

(ເຫຼົ່ານາກມານົບໄດ້ຟັງພຣະດໍາຣັດນັ້ນ ຈຶ່ງຂູ່ພຣະຣາຊາວ່າ)

[໗໖] ຂ້າແດ່ ພຣະອົງຜູ້ເປັນໃຫຍ່ແຫ່ງມະນຸດ
ພຣະອົງຈໍາຕ້ອງເສຍສະລະພຣະຊົນມະຊີບ
ຫຼືແຄວ້ນເປັນແນ່ ຍ້ອນເມື່ອນາກໂກດແລ້ວ
ຄົນເຊັ່ນພຣະອົງຈະມີຊີວິດຢູ່ບໍ່ໄດ້ດົນ

[໗໗] ຂ້າແດ່ ພຣະອົງຜູ້ສົມມຸດຕິເທບ ພຣະອົງເປັນມະນຸດບໍ່ມີລິດ
ແຕ່ມາດູໝິ່ນພະຍານາກທະຕະຣັດຖະຜູ້ມີລິດ
ເຊິ່ງເປັນລູກໃນເອີກຂອງທ້າວວະຣຸນນາຄະຣາດທີ່ເກີດຢູ່ໃຕ້ແມ່ນໍ້າຍະມຸນາ

(ພຣະເຈົ້າພົມມະທັດຕັດວ່າ)

[໗໘] ເຮົາບໍ່ໄດ້ດູໝິ່ນທ້າວທະຕະຣັດຖະຜູ້ຊົງຍົດ
ຍ້ອນທ້າວທະຕະຣັດຖະເປັນໃຫຍ່ແມ່ນແຫ່ງນາກທັງຫຼາຍ

[໗໙] ເຖິງຈະເປັນພະຍານາກຜູ້ມີອານຸພາບຫຼາຍ
ກໍບໍ່ສົມຄວນກັບທິດາຂອງເຮົາ
ສ່ວນເຮົາເປັນກະສັດຂອງຊາວແຄວ້ນວິເທຫະ
ແລະນາງສະມຸດທະຊາທິດາຂອງເຮົາກໍເປັນອະພິຊາຕະບຸດ

(ທ້າວທະຕະຣັດຖະເມື່ອຊິງສັ່ງໃຫ້ປະຊຸມບໍລິສັດ ຈຶ່ງຕັດວ່າ)

[໗໙໐] ພວກນາກກໍາພິນອັດສະດອນ໋ຈິ່ງກຽມໂຕ
ຈິ່ງໄປປະກາດໃຫ້ນາກທັງປວງຮູ້ກັນ
ຈິ່ງພາກັນໄປນະຄອນພາຣານະສີ ແຕ່ຢ່າໄດ້ບຽດບຽນໃຜ ໆ

(ທ້າວທະຕະຣັດຖະຕັດບອກນາກມານິບເຫຼົ່ານັ້ນວ່າ)

[໗໙໑] ນາກທັງຫຼາຍຈົ່ງແຜ່ພັງພານຫ້ອຍຢູ່ທີ່ນິເວດ
ບຶງ ຖະໜົນ ທາງ ໔ ແຍກ ປາຍໄມ້ ແລະຫຼັກຮົ້ວຕ້າຍ

[໗໙໒] ແມ່ນເຮົາກໍຈະນິຣະມິດໂຕໃຫ້ໃຫຍ່ ຂາວລ້ວນ
ວົງລ້ອມເມືອງໃຫຍ່ດ້ວຍຄົດຫາງ
ທໍາຄວາມຢ້ານໃຫ້ເກີດແກ່ຊາວກາສີ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໗໙໓] ນາກທັງຫຼາຍໄດ້ຟັງຄໍາຂອງທ້າວທະຕະຣັດຖະແລ້ວ
ຕ່າງກໍແປງເພດເປັນຫຼາຍແນວ
ພາກັນເຂົ້າໄປໃນເມືອງພາຣານະສີ ແຕ່ບໍ່ໄດ້ບຽດບຽນໃຜເລີຍ

[໗໙໔] ນາກເຫຼົ່ານັ້ນຕ່າງພາກັນແຜ່ພັງພານຫ້ອຍຢູ່ທີ່ນິເວດ
ບຶງ ຖະໜົນ ທາງ ໔ ແຍກ ປາຍໄມ້ ແລະຫຼັກຮົ້ວຕ້າຍ

[໗໙໕] ພວກຍິງສາວຈໍານວນຫຼາຍໄດ້ເຫັນນາກເຫຼົ່ານັ້ນ
ແຜ່ພັງພານຫ້ອຍຢູ່ຕາມບ່ອນຕ່າງ ໆ
ຫັນໃຈຟູ່ ໆ ຢູ່ ຕ່າງກໍພາກັນຮ້ອງຮໍ່າໄຮ

[໗໙໖] ຊາວນະຄອນພາຣານະສີຕ່າງກໍສະດຸ້ງ ຕົກໃຈ ຢ້ານ ເດືອດຮ້ອນ
ພາກັນໄປປະຊຸມກອດເອີກຮ້ອງທຸກວ່າ
ຂໍພຣະອົງຈົ່ງຊົງພຣະຣາດຊະທານພຣະຣາດຊະທິດາແກ່ພຣະຣາຊາເຫີ້ນ

(ພາມເນສາທະໄປສູ່ສໍານັກພຣະໂພທິສັດຖາມວ່າ)

[໗໙໗] ທ່ານຊື່ແນວໃດ ມີໜ່ວຍຕາແດງ ມີເອິກຜຶ່ງຜາຍ
ນັ່ງຢູ່ໃນທ່າມກາງປ່າອັນເຕັມໄປດ້ວຍດອກໄມ້

ນາຣີ ໑໐ ຄົນຊົງເຄື່ອງປະດັບສ້ອຍສັງວານຄຳ
ນຸ່ງຜ້າສວຍງາມ ຢືນໄຫວ້ຢູ່ເປັນໃຜ

[໗໙໗] ທ່ານເປັນໃຜ ມີແຂນໃຫຍ່ ຮຸ່ງເຮືອງຢູ່ໃນທ່າມກາງປ່າ
ຄືໄຟອັນລຸກເປັນແປວດ້ວຍນ້ຳມັນງົວ
ທ່ານຄົງຈະເປັນຜູ້ມີສັກໃຫຍ່ຄົນໃດຄົນໜຶ່ງ
ເປັນຍັກຫຼືເປັນນາກຜູ້ມີອານຸພາບຫຼາຍ

(ພຣະໂພທິສັດໄດ້ຟັງດັ່ງນັ້ນ ຕັດບອກວ່າຕົນເປັນພະຍານາກວ່າ)

[໗໙໙] ເຮົາເປັນນາກຜູ້ມີລິດອຳນາດ ຍາກທີ່ໃຜ ໆ ຈະລ່ວງລ້ຳໄດ້
ຖ້າເຖິງວ່າເຮົາໂກດແລ້ວ ຈະເພີ່ງຂົບກັດຊົນນະບົດທີ່ຈະເລີນ
ໃຫ້ແຫຼກລານໄປໄດ້ດ້ວຍອຳນາດ

[໘໐໐] ເຮົາມີມານດາຊື່ສະມຸດທະຊາແລະບິດາຊື່ທະຕະຣັດຖະ
ເຮົາເປັນນ້ອງຄົນນ້ອຍຂອງສຸທັດສະນະ ຄົນທັງຫຼາຍຮູ້ຈັກເຮົາວ່າ ພູຣິທັດ

(ພຣະໂພທິສັດຕັດບອກທີ່ຢູ່ຂອງຕົນວ່າ)

[໘໐໑] ທ່ານຈົ່ງແນມເບິ່ງແມ່ນ້ຳເລິກເປັນຕາຢ້ານໄຫຼວົນຢູ່ທຸກເມື່ອ
ນັ້ນເປັນບ່ອນຢູ່ອັນດີເລີດຂອງເຮົາ ເລິກຫຼາຍຮ້ອຍຊົ່ວຄົນ

[໘໐໒] ທ່ານຢ່າຢ້ານເລີຍ ຈົ່ງເຂົ້າໄປຍັງແມ່ນ້ຳຍະມຸນາທີ່ມີນ້ຳສີຂຽວ
ໄຫຼມາຈາກກາງປ່າ ຈຳແຈໄປດ້ວຍສຽງນົກຍູງແລະນົກກະຮຽນ
ເປັນບ່ອນຢູ່ອັນກະເສມສຳຮານຂອງພວກຜູ້ມີອາຈາຣະຂໍ້ວັດປະຕິບັດ

(ພຣະໂພທິສັດພາພາມກັບບຸດທັງ ໔ ໄປສູ່ຝັ່ງແມ່ນ້ຳຍະມຸນາ ຢືນຢູ່ທີ່ແຄມຝັ່ງແລ້ວກ່າວວ່າ)

[໘໐໓] ພາມ ທ່ານພ້ອມດ້ວຍບຸດ
ແລະພັນລະຍາໄປເຖິງນາຄະໂລກແລ້ວ
ເຮົາຈະບູຊາທ່ານດ້ວຍກາມທັງຫຼາຍ
ທ່ານຈັກໄດ້ຄວາມສຸກໃນນາຄະໂລກນັ້ນ

(ພາມເນສາທະພັນນາສົມບັດຂອງພຣະໂພທິສັດວ່າ)

[໘໐໔] ແຜ່ນດິນມີພື້ນຮາບພຽງຮອບດ້ານ

ມີເກດສະໜາຫຼວງຫຼາຍ
ເດຍລະດາດໄປດ້ວຍໝູ່ແມງເຕົ່າຄຳ
ມີຫຍ້າສີຂຽວຊະອຸ່ມອຸດົມສວຍງາມ

[໗໐໕] ແນວປ່າໄມ້ອັນໜ້າອອນຊອນ
ສະໂບກຂະຣະນີທີ່ນິຣະມິດຂຶ້ນດ້ວຍດີໜ້າອອນຊອນໃຈ
ມີດອກປະທຸມບານສະພັ່ງຮ່ວງຫຼົ່ນລົງເດຍລະດາດ

[໗໐໖] ມີເສົາ ໗ ຫຼັ່ງມທີ່ເຮັດໄວ້ດີແລ້ວ
ທຸກຕົ້ນລ້ວນສຳເລັດດ້ວຍແກ້ວໄພທູນ
ຜາສາດມີເສົາ ໑,໐໐໐ ຕົ້ນ ສ່ອງແສງແວວວາວ
ເຕັມໄປດ້ວຍນາງນາກກັນຍາ

[໗໐໗] ພຣະອົງເປັນຜູ້ເຂົ້າເຖິງທິບພະຍະວິມານອັນກວ້າງຂວາງ
ກະເສມສຸກສະບາຍອອນຊອນ
ປະກອບໄປດ້ວຍຄວາມສຸກອັນເລີເລີດດ້ວຍບຸນຂອງຕົນ

[໗໐໗] ພຣະອົງເຫັນຈະບໍ່ຊົງຫວັງວິມານຂອງທ້າວສະຫັດສະໄນ
ຍ້ອນລິດອັນຍິ່ງໃຫ້ໄພບູນຂອງພຣະອົງນີ້
ກໍຄືຂອງທ້າວສັກກະຜູ້ຮຸ່ງເຮືອງ

(ພຣະໂພທິສັດໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໗໐໙] ອານຸພາບຂອງທ້າວສັກກະຜູ້ຮຸ່ງເຮືອງ
ໃຜ ໆ ບໍ່ເພິ່ງບັນລຸໄດ້ແມ່ນດ້ວຍໃຈ
ຍົດຂອງເຮົາທັງຫຼາຍຍ່ອມບໍ່ເຖິງສ້ຽວ
ຂອງທ້າວວະສະວັດດີຜູ້ຮັບໃຊ້ພຣະອິນ

(ພຣະໂພທິສັດຕັດບອກຄວາມປາຖະໜາຂອງຕົນວ່າ)

[໗໑໐] ເຮົາປາຖະໜາວິມານຂອງເຫຼົ່າເທວະດາຜູ້ດຳລົງຢູ່ໃນຄວາມສຸກນັ້ນ
ຈຶ່ງເຂົ້າໄປຈຳອຸໂປສົດສີນ ນອນຢູ່ເທິງໂພນປວກ

(ພາມເມື່ອຈະລາກັບ ຈຶ່ງກ່າວວ່າ)

[໗໑໑] ຂ້າພຣະອົງພ້ອມດ້ວຍບຸດເຂົ້າໄປປ່າສະແຫວງຫາເນື້ອ

ພວກຍາດ ໆ ກໍຍັງບໍ່ຮູ້ວ່າ
ຂ້າພຣະອົງນັ້ນຕາຍແລ້ວຫຼືຍັງມີຊີວິດຢູ່

[໗໑໒] ຂ້າພຣະອົງຂໍທູນລາພຣະພູຣິທັດຜູ້ຊົງຍົດ
ຜູ້ເປັນພຣະໂອຣົດຂອງພຣະທິດາແຄວັ້ນກາສີ
ພຣະອົງຊົງອະນຸຍາດແລ້ວກໍຈະໄດ້ໄປຢ້ຽມຍາດ ໆ

(ລໍາດັບນັ້ນ ພຣະໂພທິສັດຕັດວ່າ)

[໗໑໓] ແທ້ຈິງ ນັ້ນເປັນຄວາມພໍໃຈຂອງເຮົາ
ທີ່ໃຫ້ທ່ານຢູ່ໃນສໍານັກຂອງເຮົາ
ຍ້ອນວ່າການທັງຫຼາຍແນວນີ້ຈະຫາໄດ້ບໍ່ງ່າຍໃນໝູ່ມະນຸດ

[໗໑໔] ຖ້າທ່ານບໍ່ປາຖະໜາຈະຢູ່ ເຮົາຈະບູຊາທ່ານດ້ວຍການມາຣົມ
ເຮົາອະນຸຍາດໃຫ້ທ່ານໄປຢ້ຽມຍາດ ໆ ໄດ້ໂດຍຄວາມໂດຍປອດໄພ

(ພຣະໂພທິສັດຊົງໃຫ້ແກ້ວມະນີແກ່ພານແລ້ວຕັດວ່າ)

[໗໑໕] ເມື່ອທ່ານຊົງທິບພະຍະມະນີນີ້ຢູ່
ຍ່ອມຈະໄດ້ທັງປະສຸສັດແລະລູກ ໆ
ຂໍທ່ານຈົ່ງຖືເອົາທິບພະຍະມະນີນີ້ໄປເທີ້ນ
ຈົ່ງປາສະຈາກໂລກໄພ ປະສົບສຸກເທີ້ນ ພານ

(ພານຈຶ່ງກ່າວວ່າ)

[໗໑໖] ຂ້າແດ່ ພຣະພູຣິທັດ ພຣະດໍາຣັດຂອງພຣະອົງເປັນກຸສົນ
ຂ້າພຣະອົງຍິນດີຍິ່ງ
ຂ້າພຣະອົງແກ່ແລ້ວຈັກບວດ ບໍ່ປາຖະໜາການທັງຫຼາຍ

(ພຣະໂພທິສັດຕັດວ່າ)

[໗໑໗] ຫາກພົມມະຈັນມີການແຕກທໍາລາຍ
ກິດທີ່ຕ້ອງເຮັດດ້ວຍໂພຄະຊັບທັງຫຼາຍຈະເກີດຂຶ້ນ
ທ່ານຢ່າໄດ້ມີຄວາມຫວັ່ນໃຈ ຄວນມາຫາເຮົາ
ເຮົາຈະໃຫ້ຊັບແກ່ທ່ານຫຼາຍ ໆ

(ພາມເນສາທະກ່າວວ່າ)

[໓໑໓] ຂ້າແດ່ ພຣະພູຣິທັດ ພຣະດຳຣັດຂອງພຣະອົງເປັນກຸສົນ
ຂ້າພຣະອົງຍິນດີຍິ່ງ
ຂ້າພຣະອົງຈັກກັບມາອີກ ຖ້າມີຄວາມຕ້ອງການ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໓໑໗] ພຣະພູຣິທັດໄດ້ຟັງຄຳນີ້ແລ້ວຈຶ່ງໃຊ້ໃຫ້ຊິນ ໔ ຄົນໄປສັ່ງວ່າ
ທ່ານທັງຫຼາຍຈົ່ງລຸກຂຶ້ນມາໄປເທີ້ນ
ຈົ່ງກຸມໂຕພາພາມໄປສົ່ງໂດຍໄວ
[໓໔໐] ຊິນທັງ ໔ ທີ່ພຣະພູຣິທັດໃຊ້ໃຫ້ໄປສົ່ງ
ຟັງພຣະດຳຣັດຂອງພຣະພູຣິທັດແລ້ວ
ລຸກຂຶ້ນພາພາມໄປສົ່ງຈົນເຖິງໂດຍທັນທີ

(ພາມເນສາທະກ່າວກັບພາມອະລຳປາຍະນະວ່າ)

[໓໔໑] ແກ້ວມະນີທີ່ສົມມຸດກັນວ່າເປັນມຸງຄຸນ ເປັນຂອງດີ
ເປັນເຄື່ອງພໍໃຈ ໜ້າອອນຊອນໃຈ ເກີດແຕ່ຫີນ
ສົມບູນດ້ວຍລັກສະນະທີ່ທ່ານຖືຢູ່ນີ້ ໃຜໃຫ້ມາ

(ລຳດັບນັ້ນ ພາມອະລຳປາຍະນະກ່າວວ່າ)

[໓໔໔] ແກ້ວມະນີນີ້ພວກນາງນາກມານະອີກາປະມານ ໑,໐໐໐
ລ້ວນແຕ່ມີໜ່ວຍຕາແດງ ວົງລ້ອມໄວ້ໂດຍຮອບ
ເຮົາເດີນທາງໄປໄດ້ແກ້ວມະນີນີ້ມາໃນມື້ນີ້

(ພາມເນສາທະປະສົງຈະລວງພາມອະລຳປາຍະນະ ປະກາດໂທດຂອງແກ້ວມະນີ ປະສົງຈະຮັບເປັນຂອງຕົນ ຈຶ່ງໄດ້ກ່າວວ່າ)

[໓໔໓] ແກ້ວມະນີອັນເກີດແຕ່ຫີນນີ້ທີ່ຫາມາໄດ້ດ້ວຍດີ
ທີ່ບຸກຄົນບູຊານັບຖື ວາງໄວ້ ເກັບໄວ້ເປັນຢ່າງດີທຸກເມື່ອ
ເພິ່ງເຮັດປະໂຫຍດທຸກຢ່າງໃຫ້ສຳເລັດໄດ້

[໓໔໔] ເມື່ອບຸກຄົນປາສະຈາກການລະມັດລະວັງໃນການເກັບຮັກສາ
ຫຼືໃນການວາງໄວ້ ເກັບໄວ້

ແກ້ວມະນີທີ່ເກີດແຕ່ຫີນນີ້ທີ່ບຸກຄົນຫາມາໄດ້ແລ້ວບໍ່ໃສ່ໃຈ
ຍ່ອມນຳມາເຊິ່ງຄວາມພິນາດ

[໙໔໕] ຄົນຜູ້ບໍ່ມີກຸສົນບໍ່ຄວນປະດັບແກ້ວມະນີທິບນີ້
ເຮົາຈັກໃຫ້ຄຳ ໑໐໐ ແທ່ງແກ່ທ່ານ
ທ່ານຈົ່ງໃຫ້ແກ້ວມະນີນີ້ແກ່ເຮົາເທີ້ນ

(ລຳດັບນັ້ນ ພາມອະລຳປາຍະນະກ່າວວ່າ)

[໙໔໖] ແກ້ວມະນີຂອງເຮົານີ້ບໍ່ຄວນແລກປ່ຽນດ້ວຍງົວຫຼືຣັດຕະນະ
ຍ້ອນແກ້ວມະນີອັນເກີດແຕ່ຫີນນີ້ສົມບູນດ້ວຍລັກສະນະ
ດັ່ງນັ້ນ ເຮົາບໍ່ຄວນແລກປ່ຽນເລີຍ

(ພາມເນສາທະກ່າວວ່າ)

[໙໔໗] ຖ້າທ່ານບໍ່ແລກປ່ຽນແກ້ວມະນີດ້ວຍງົວຫຼືຣັດຕະນະ
ເມື່ອເປັນແນວນັ້ນ ທ່ານຈະແລກປ່ຽນແກ້ວມະນີດ້ວຍອັນໃດ
ເຮົາຖາມແລ້ວ ຂໍທ່ານຈົ່ງບອກຂໍ້ນັ້ນແກ່ເຮົາ

(ພາມອະລຳປາຍະນະກ່າວວ່າ)

[໙໔໘] ຜູ້ໃດບອກນາກໃຫຍ່ຜູ້ມີອຳນາດຍາກທີ່ບຸກຄົນຈະລ່ວງເກີນໄດ້ແກ່ເຮົາ
ເຮົາຈະໃຫ້ແກ້ວມະນີອັນເກີດແຕ່ຫີນນີ້
ອັນເປັນຄືຮຸ່ງເຮືອງດ້ວຍອຳນາດແກ່ຜູ້ນັ້ນໄປ

(ພາມເນສາທະກ່າວວ່າ)

[໙໔໙] ຄຸດໂຕປະເສີດຫຼືອັນໃດນໍ
ແປງເພດເປັນພາມມາສະແຫວງຫານາກ
ປະສົງຈະນຳໄປເປັນພັກສາຂອງຕົນ

(ພາມອະລຳປາຍະນະກ່າວວ່າ)

[໙໕໐] ທ່ານພາມ ເຮົາບໍ່ໄດ້ເປັນພະຍາຄຸດ
ເຮົາບໍ່ເຄີຍເຫັນຄຸດ ເຮົາເປັນຜູ້ສົນໃຈດ້ວຍງູພິດ
ຊົນທັງຫຼາຍຮູ້ຈັກເຮົາວ່າ ເປັນໝໍງູ

(ພາມເນສາທະກ່າວວ່າ)

[໗໓໑]　ທ່ານມີກຳລັງອັນໃດ ມີສີລະປະອັນໃດ
ທ່ານເປັນຜູ້ໄດ້ຮັບການສະໜັບສະໜູນໃນເລື້ອງອັນໃດ
ຈຶ່ງບໍ່ຢຳເກງນາກ

(ພາມອະລຳປາຍະນະນັ້ນເມື່ອຈະສະແດງພະລັງຂອງຕົນ ຈຶ່ງກ່າວວ່າ)

[໗໓໒]　ຄຸດມາບອກວິຊາໝໍງູອັນປະເສີດ
ແກ່ລືສີໂກສິຍະໂຄດຜູ້ຢູ່ປ່າປະຈຳ
ປະພຶດຕະບະມາເປັນເວລາດົນ

[໗໓໓]　ເຮົາເຂົ້າໄປຫາລືສີຕົນໜຶ່ງບັນດາລືສີ
ຜູ້ພ່ຳເພັງຕົນຢູ່ໃນລະຫວ່າງພູ
ໄດ້ປົນນິບັດທ່ານດ້ວຍຄວາມເຄົາລົບ
ບໍ່ໄດ້ຂີ້ຄ້ານທັງກາງເວັນແລະກາງຄືນ

[໗໓໔]　ໃນການນັ້ນ ທ່ານພ່ຳເພັງຂໍ້ວັດປະຕິບັດແລະພົມມະຈັນ
ເປັນຜູ້ມີໂຊກ ເມື່ອໄດ້ສະມາຄົມກັບເຮົາ
ຈຶ່ງສອນມົນທິບໃຫ້ແກ່ເຮົາດ້ວຍຄວາມຮັກ

[໗໓໕]　ເຮົາໄດ້ຮັບການສະໜັບສະໜູນໃນມົນນັ້ນ ຈຶ່ງບໍ່ຢ້ານນາກ
ເຮົາເປັນອາຈານຂອງພວກໝໍກຳຈັດພິດ
ຊົນທັງຫຼາຍຮູ້ຈັກເຮົາວ່າ ອະລຳປາຍະນະ

(ພາມເນສາທະໄດ້ຟັງດັ່ງນັ້ນ ເມື່ອເປີກສາກັບບຸດ ຈຶ່ງກ່າວວ່າ)

[໗໓໖]　ລູກໂສມະທັດ ພວກເຮົາຮັບແກ້ວມະນີໄວ້ ເຈົ້າຈົ່ງເຂົ້າໃຈ
ເຮົາທັງ ໔ ຢ່າລະສິຣິທີ່ມາເຖິງຕົນດ້ວຍອາດຍາຕາມຄວາມພໍໃຈ

(ໂສມະທັດຜູ້ເປັນບຸດຂອງພາມເນສາທະກ່າວວ່າ)

[໗໓໗]　ພໍ່ພາມ ພູຣິທັດນາຄະຣາຊາບູຊາທ່ານພໍ່ຜູ້ໄປຮອດບ່ອນຢູ່ຂອງຕົນ
ຍ້ອນເຫດໃດ ທ່ານພໍ່ຈຶ່ງປາຖະໜາທີ່ຈະປະທຸດສະຮ້າຍ
ຕໍ່ມິດຜູ້ທຳຄວາມດີຍ້ອນຄວາມຫຼົງແນວນີ້ນໍ

[໗໓໗]	ຖ້າພໍ່ຕ້ອງການຊັບ ພຣະພູຣິທັດກໍຄົງຈະໃຫ້
ພໍ່ຈົ່ງໄປຂໍເທີ້ນ ພຣະພູຣິທັດຄົງຈະໃຫ້ຊັບຫຼວງຫຼາຍແກ່ພໍ່

(ພາມເນສາທະກ່າວວ່າ)

[໗໓໙]	ໂສມະທັດ ການກິນຂອງທີ່ເຖິງມີເຖິງພາຊະນະ
ຫຼືຕັ້ງຢູ່ເບື້ອງໜ້າເປັນຄວາມປະເສີດ
ປະໂຫຍດທີ່ເຫັນປະຈັກຢ່າໄດ້ລ່ວງເລີຍເຮົາໄປເລີຍ

(ໂສມະທັດກ່າວວ່າ)

[໗໔໐]	ຄົນຜູ້ປະທຸດສະຮ້າຍມິດສະລະຄວາມເກື້ອກູນ
ຈະຕ້ອງມີກາໄໝ້ຢູ່ໃນນະຣົກອັນຮ້າຍແຮງ
ແຜ່ນດິນຍ່ອມສູບຜູ້ນັ້ນ ຫຼືເຖິງມີຊີວິດຢູ່ກໍຊູບຊິດ

[໗໔໑]	ຖ້າພໍ່ຕ້ອງການຊັບ ລູກເຂົ້າໃຈວ່າ
ພໍ່ຈັກຕ້ອງປະສົບເວນທີ່ຕົນໄດ້ເຮັດໄວ້ໃນບໍ່ຊ້າ

(ພາມເນສາທະກ່າວວ່າ)

[໗໔໒]	ພາມທັງຫຼາຍບູຊາມະຫາຍັນແນວນີ້ແລ້ວຍ່ອມບໍລິສຸດໄດ້
ເຮົາຈັກບູຊາມະຫາຍັນ ກໍຈັກພົ້ນຈາກບາບໄດ້ແນວນີ້

(ໂສມະທັດກ່າວວ່າ)

[໗໔໓]	ເຊີນເທີ້ນ ບັດນີ້ ລູກຈະຂໍແຍກທາງໄປ
ມື້ນີ້ ລູກຈະບໍ່ຂໍຢູ່ຮ່ວມກັບພໍ່ ຈະບໍ່ຂໍເດີນທາງ
ຮ່ວມກັບພໍ່ຜູ້ເຮັດກຳຫຍາບຊ້າແນວນີ້ຈັກກ້າວດຽວ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໗໔໔]	ໂສມະທັດຜູ້ເປັນພະຫູສູດເມື່ອກ່າວຄຳນີ້ກັບບິດາ
ປະກາດກັບເທວະດາທັງຫຼາຍແລ້ວ ໄດ້ຫຼີກໄປຈາກບ່ອນນັ້ນ

(ພາມເນສາທະພາພາມອະລຳປາຍະນະໄປ ເຫັນພະຍານາກພູຣິທັດນອນຂົດຢູ່ເທິງໂພນປວກຈຶ່ງ ຊີ້ມືບອກວ່າ)

[໗໔໕] ທ່ານຈຶ່ງຈັບນາກໃຫຍ່ນັ້ນ ຈຶ່ງສົ່ງແກ້ວມະນີນີ້ມາໃຫ້ແກ່ເຮົາ
ນາກໃຫຍ່ນີ້ມີພິວພັນດັ່ງສີແມງເຕົ່າຄຳ ຫົວແດງ

[໗໔໖] ກາຍນັ້ນຜາກົດດັ່ງກອງປຸຍຝ້າຍນອນຢູ່ເທິງໂພນປວກນັ້ນ
ທ່ານຈຶ່ງຈັບເອົາເທີ້ນ ພາມ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໗໔໗] ລຳດັບນັ້ນ ພາມອະລຳປາຍະນະເອົາທິບພະຍະໂອສົດລູບທາໂຕ
ແລະຈົ່ມມົນປ້ອງກັນໂຕແນວນີ້ ຈຶ່ງສາມາດຈັບພະຍານາກນັ້ນໄດ້

(ລຳດັບນັ້ນ ນາກສຸທັດສະນະພຣະໂອຣົດອົງໃຫຍ່ຂອງພຣະນາງສະມຸດທະຊາ ທູນຖາມມານດາ ວ່າ)

[໗໔໘] ຍ້ອນໄດ້ທອດພຣະເນດເຫັນຂ້າພຣະອົງ
ຜູ້ໃຫ້ສຳເລັດສິ່ງທີ່ໜ້າຕ້ອງການທັງປວງມາເຝົ້າແລ້ວ
ອິນຊີຂອງພຣະແມ່ເຈົ້າຈຶ່ງບໍ່ຜ່ອງໃສ
ພຣະພັກຂອງພຣະແມ່ເຈົ້າກໍແຫ້ມດຳ

[໗໔໙] ຍ້ອນໄດ້ທອດພຣະເນດເຫັນຂ້າພຣະອົງແນວນີ້
ພຣະພັກຂອງພຣະແມ່ເຈົ້າກໍແຫ້ມດຳ
ຄືດອກບົວທີ່ຖືກຍ່ອງຢູ່ໃນມື

[໗໕໐] ໃຜດ່າທ່ານບໍ ພຣະແມ່ເຈົ້າມີເວທະນາອັນໃດບໍ
ຍ້ອນໄດ້ທອດພຣະເນດເຫັນຂ້າພຣະອົງຜູ້ມາເຝົ້າ
ພຣະພັກຂອງພຣະແມ່ເຈົ້າແຫ້ມດຳຍ້ອນເຫດໃດ

(ພຣະນາງສະມຸດທະຊາຕັດບອກແກ່ສຸທັດສະນະວ່າ)

[໗໕໑] ລູກຮັກ ແມ່ໄດ້ຝັນລ່ວງມາໄດ້ໜຶ່ງເດືອນແລ້ວວ່າ
ມີຊາຍມາຕັດແຂນຂອງແມ່ເບິ່ງຄືວ່າຈະເປັນຂ້າງຂວາ
ຖືເອົາໄປທັງທີ່ຍັງເປື້ອນເລືອດ ເມື່ອແມ່ກຳລັງຮ້ອງໄຫ້ຢູ່

[໗໕໒] ຕັ້ງແຕ່ແມ່ໄດ້ຝັນເຫັນແລ້ວ ພໍ່ສຸທັດສະນະ ເຈົ້າຈົ່ງຮູ້ເທີ້ນວ່າ
ແມ່ບໍ່ໄດ້ຄວາມສຸກທັງກາງເວັນທັງກາງຄືນ

(ພຣະນາງສະມຸດທະຊາເມື່ອກ່າວແນວນີ້ແລ້ວ ກໍຮ່ຳໄຮຢູ່ວ່າ)

[໗໕໓] ແຕ່ກ່ອນ ພຣະພູຣິທັດຜູ້ທີ່ນາງນາກກັນຍາ
ຜູ້ມີຮ່າງກາຍສວຍງາມ ຄຸມດ້ວຍຕາໜ່າງຄຳພາກັນບຳເລີ
ຍັງບໍ່ຜາກົດໂຕ

[໗໕໔] ແຕ່ກ່ອນ ພຣະພູຣິທັດຜູ້ເຊິ່ງເສນາທັງຫຼາຍຖືດາບອັນຄົມກ້າ
ຫ້ອມລ້ອມດັ່ງດອກກັນນິກາບານເດຍລະດາດຍັງບໍ່ຜາກົດໂຕ

[໗໕໕] ເອີາລະ ບັດນີ້ ເຮົາຈັກໄປບ່ອນຢູ່ຂອງພຣະພູຣິທັດ
ຈະໄປຢ້ຽມຢາມນ້ອງຊາຍຂອງເຈົ້າ
ຜູ້ດຳລົງຢູ່ໃນທຳ ສົມບູນດ້ວຍສີນ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໗໕໖] ພັນລະຍາທັງຫຼາຍຂອງນາກພູຣິທັດ
ເມື່ອໄດ້ເຫັນພຣະມານດາຂອງນາກພູຣິທັດກຳລັງສະເດັດມາ
ຈຶ່ງພາກັນເຂົ້າປະຄອງແຂນຮ່ຳໄຮວ່າ

[໗໕໗] ຂ້າແດ່ ພຣະແມ່ເຈົ້າ ຕະຫຼອດໜຶ່ງເດືອນລ່ວງໄປແຕ່ມື້ນີ້
ພວກຂ້ານ້ອຍຍັງບໍ່ຮູ້ວ່າ
ພຣະພູຣິທັດຜູ້ຊົງຍົດພຣະໂອຣົດຂອງພຣະແມ່ເຈົ້າສິ້ນຊີບແລ້ວ
ຫຼືວ່າຍັງດຳລົງພະຊົນຢູ່

[໗໕໘] ເມື່ອພວກເຮົາບໍ່ເຫັນພຣະພູຣິທັດກໍຈັກຣະທົມທຸກສິ້ນການລະນານ
ຄືແມ່ນົກທີ່ລູກຖືກຂ້າຕາຍເຫັນແຕ່ຮັງທີ່ວ່າງເປົ່າ

[໗໕໙] ເມື່ອພວກເຮົາບໍ່ເຫັນພຣະພູຣິທັດກໍຈັກຣະທົມທຸກສິ້ນການລະນານ
ຄືແມ່ນົກເຂົາທີ່ລູກຖືກຂ້າຕາຍເຫັນແຕ່ຮັງທີ່ວ່າງເປົ່າ

[໗໖໐] ເມື່ອພວກເຮົາບໍ່ເຫັນພຣະພູຣິທັດ
ກໍຈັກໝົ່ນໄໝ້ໄປດ້ວຍທຸກສິ້ນການລະນານ
ຄືນາງນົກຈັກພາກເທິງເປືອກຕົມທີ່ປາສະຈາກນ້ຳເປັນແມ່

[໗໖໑] ຄືເບົ້າຫຼອມຄຳຂອງພວກຊ່າງຄຳ
ຍ່ອມໄໝ້ຢູ່ຂ້າງໃນບໍ່ໄດ້ໄໝ້ຂ້າງນອກສັນໃດ

ພວກເຮົາເມື່ອບໍ່ເຫັນພຣະພູຣິທັດກໍຍ່ອມໝົ່ນໄໝ້ດ້ວຍຄວາມໂສກສັນນັ້ນ

(ພຣະສາດສະດາເມື່ອຈະຊົງປະກາດຂໍ້ຄວາມນັ້ນ ຈຶ່ງຕັດວ່າ)

[໗໖໘] ບຸດແລະພັນລະຍາໃນບ່ອນຢູ່ຂອງພຣະພູຣິທັດ
ຕ່າງພາກັນລົ້ມນອນຣະເກາະຣະກະ
ຄືຕົ້ນຮັງທີ່ຖືກລົມພັດເຮັດໃຫ້ຍ່ອຍຍັບໄປ

[໗໖໙] ເມື່ອໄດ້ຍິນສຽງກຶກກ້ອງຂອງບຸດແລະພັນລະຍາເຫຼົ່ານັ້ນ
ໃນບ່ອນຢູ່ຂອງພຣະພູຣິທັດແລ້ວ
ນາກອະຣິດຖະແລະສຸໂພກະຕ່າງກໍແລ່ນວຸ່ນໄປໃນລະຫວ່າງໄດ້ເວົ້າຂຶ້ນວ່າ

[໗໖໔] ຂ້າແດ່ ພຣະແມ່ເຈົ້າ ຈົ່ງເບົາພຣະຫະໄທເທີ້ນ ຢ່າເສົ້າໂສກເລີຍ
ຍ້ອນສັດທັງຫຼາຍມີແນວນີ້ເປັນທຳມະດາ
ຄື ຍ່ອມເກີດ ຍ່ອມຕາຍ
ການຕາຍແລະການເກີດນີ້ເປັນຄວາມຜັນແປຂອງສັດນັ້ນ

(ພຣະນາງສະມຸດທະຊານານດາກ່າວວ່າ)

[໗໖໕] ລູກຮັກ ເຖິງແມ່ຈະຮູ້ວ່າ
ສັດທັງຫຼາຍມີແນວນີ້ເປັນທຳມະດາ
ແຕ່ວ່າເມື່ອບໍ່ເຫັນພຣະພູຣິທັດ ແມ່ກໍໄດ້ຮັບຄວາມໂສກເສົ້າ

[໗໖໖] ລູກສຸທັດສະນະ ເຈົ້າຈົ່ງຮູ້ໄວ້ເທີ້ນ
ຖ້າຄືນນີ້ນີ້ ເມື່ອຍັງບໍ່ເຫັນພຣະພູຣິທັດ
ແມ່ເຂົ້າໃຈວ່າຈັກຕ້ອງຕາຍແນ່

(ສຸທັດສະນະກຸມານກ່າວວ່າ)

[໗໖໗] ຂ້າແດ່ ພຣະແມ່ເຈົ້າ ຈົ່ງເບົາພຣະຫະໄທເທີ້ນ ຢ່າເສົ້າໂສກເລີຍ
ລູກທັງຫຼາຍຈັກນຳທ່ານອ້າຍພູຣິທັດມາ
ຈັກທ່ຽວໄປຊອກຫາທ່ານອ້າຍພູຣິທັດຕາມທິດນ້ອຍໃຫຍ່

[໗໖໗] ທີ່ພູ ຮ່ອມພູ ບ້ານ ແລະນິຄົມ
ພຣະແມ່ເຈົ້າຈະໄດ້ຊົງເຫັນທ່ານອ້າຍກັບມາພາຍໃນ ໆ ມື້

(ພາມອະລຳປາຍະນະກ່າວວ່າ)

[໗໓໙] ນາກລຸດຈາກມືເລືອໄປຟຸບລົງທີ່ຕີນໂດຍກະທັນຫັນ
ຂ້າແດ່ພໍ່ ທ່ານພໍ່ຖືກມັນກັດເອົາແລ້ວຕີບໍ
ທ່ານພໍ່ຢ່າຢ້ານເລີຍ ຈົ່ງໄດ້ຮັບຄວາມສຸກເທີ້ນ

(ສຸທັດສະນະກຸມານຜູ້ປອມໂຕເປັນດາບົດຊອກຫານາກພູຣິທັດຜູ້ເປັນອ້າຍກ່າວວ່າ)

[໗໗໐] ນາກໂຕນີ້ບໍ່ສາມາດຈະເຮັດຄວາມທຸກອັນໃດໃຫ້ເຮົາໄດ້ເລີຍ
ໝໍງູເທົ່າທີ່ມີຢູ່ກໍບໍ່ມີຄົນໃດຈະດີຍິ່ງກວ່າເຮົາ

(ພາມອະລຳປາຍະນະກ່າວວ່າ)

[໗໗໑] ໃຜກັນນໍ ເງິ່ງະ ແປງເພດເປັນພາມ
ມາຍັງສຳນັກບໍລິສັດ ອວດອ້າງຍຸດທະການທີ່ດີ
ຂໍບໍລິສັດຈົ່ງຟັງຂ້າພະເຈົ້າ

(ສຸທັດສະນະກຸມານກ່າວວ່າ)

[໗໗໒] ໝໍງູ ທ່ານຈົ່ງຕໍ່ສູ້ກັບເຮົາດ້ວຍນາກ
ເຮົາຈັກຕໍ່ສູ້ກັບທ່ານດ້ວຍລູກຂຽດ ໃນການຮົບຂອງເຮົານັ້ນ
ເຮົາທັງ ໒ ຈົ່ງພະນັນກັນດ້ວຍຊັບພຽງ ໕,໐໐໐

(ພາມອະລຳປາຍະນະກ່າວວ່າ)

[໗໗໓] ມານົບ ເຮົາທີ່ນັ້ນເປັນຜູ້ຮັ່ງມີດ້ວຍຊັບ
ທ່ານເປັນຄົນທຸກ ໃຜນໍຈະເປັນຄົນຄ້ຳປະກັນທ່ານ
ແລະອັນໃດເປັນເດີມພັນຂອງທ່ານນໍ

[໗໗໔] ສ່ວນຂ້າພະເຈົ້າມີທັງເດີມພັນ ແລະມີທັງຄົນຄ້ຳປະກັນເຊັ່ນນັ້ນ
ໃນການຂັນສູ້ຂອງເຮົາທັງ ໒ ນັ້ນ
ເຮົາທັງ ໒ ຈົ່ງພະນັນກັນດ້ວຍຊັບພຽງ ໕,໐໐໐

(ສຸທັດສະນະກຸມານເຂົ້າໄປເຝົ້າພຣະຣາຊາຂາບທູນວ່າ)

[໗໗໕] ມະຫາບໍພິດ ຂໍພຣະອົງໂຜດສະດັບຄຳຂອງອາດຕະມາພາບ
ຂໍມະຫາບໍພິດຈົ່ງຊົງພຣະຈະເລີນ ຂໍມະຫາບໍພິດຜູ້ຊົງກຽດ

ຈິ່ງຊົງຄ້ຳປະກັນຊັບ ໕,໐໐໐ ໃຫ້ອາດຕະມາພາບເທີ້ນ

(ພຣະຣາຊາຕັດວ່າ)

[໘໗໖] ໜີ້ເປັນຂອງຕົກຄ້າງມາແຕ່ບິດາ ຫຼືທ່ານກໍ່ມັນຂຶ້ນມາເອງ
ທ່ານພາມ ຍ້ອນເຫດໃດ
ທ່ານຈຶ່ງຂໍຊັບຂ້າພະເຈົ້າຫຼວງຫຼາຍແນວນີ້

(ສຸທັດສະນະກຸມານຂາບທູນວ່າ)

[໘໗໗] ພາມອະລຳປາຍະນະປາຖະໜາຈະຕໍ່ສູ້ກັບອາດຕະມາພາບດ້ວຍນາກ
ອາດຕະມາພາບຈະໃຫ້ລູກຂຽດກັດພາມອະລຳປາຍະນະ

[໘໗໘] ມະຫາບໍພິດຜູ້ຊົງຜະດຸງຣັດໃຫ້ຈະເລີນ
ຂໍເຊີນພຣະອົງຜູ້ຊົງຄັບຄັ່ງໄປດ້ວຍໝູ່ກະສັດ
ສະເດັດອອກໄປທອດພຣະເນດນາກໃນມື້ນີ້ເທີ້ນ

(ພາມອະລຳປາຍະນະກ່າວວ່າ)

[໘໗໙] ມານົບ ເຮົາບໍ່ໄດ້ດູໝິ່ນທ່ານດ້ວຍວາທະສິລະປະເລີຍ
ແຕ່ທ່ານມົວເມົາສິລະປະເກີນໄປ ຈຶ່ງບໍ່ຢຳເກງນາກ

(ສຸທັດສະນະກຸມານກ່າວວ່າ)

[໘໘໐] ທ່ານພາມ ແມ່ນອາດຕະມາກໍບໍ່ໄດ້ດູໝິ່ນທ່ານດ້ວຍວາທະສິລະປະ
ແຕ່ທ່ານກ້າລວງປະຊາຊົນດ້ວຍນາກທີ່ປາສະຈາກພິດ

[໘໘໑] ປະຊາຊົນຈະເພິ່ງຮູ້ເລື້ອງນີ້ຄືອາດຕະມາພາບຮູ້ຈັກທ່ານ
ທ່ານຈັກບໍ່ໄດ້ແກບຈັກກຳມືໜຶ່ງເລີຍ
ທ່ານຈະໄດ້ຊັບແຕ່ບ່ອນໃດນໍ ອະລຳປາຍຳນະ

(ພາມອະລຳປາຍະນະກ່າວວ່າ)

[໘໘໔] ທ່ານຄົນສົກກະປົກ ມ້ອນຊະດາ ລຸ່ມລ່າມ
ນຸ່ງຫົ່ມໜັງສັດຊຸຂະ ຄືຄົນເງີງະເຂົ້າມາຍັງບໍລິສັດ
ເຊິ່ງດູໝິ່ນນາກຜູ້ມີພິດເຖິງປານນີ້ວ່າບໍ່ມີພິດ

[໗໗໓] ທ່ານເຂົ້າມາໃກ້ແລ້ວນັ້ນແລ ຈຶ່ງຈະຮູ້ນາກນັ້ນໄດ້ວ່າ
ເຕັມໄປດ້ວຍອຳນາດຮ້າຍແຮງໆ ຂ້າພະເຈົ້າແນ່ໃຈວ່າ
ນາກໂຕນີ້ຈັກເຮັດທ່ານໃຫ້ເປັນຄືກອງຂີ້ເຖົ່າໄປທັນທີ

(ສຸທັດສະນະກຸມານກ່າວວ່າ)

[໗໗໔] ງູເຮືອນ ງູປາ ງູຂຽວຕ່າງຫາກມີພິດ
ແຕ່ນາກຫົວແດງບໍ່ມີພິດເລີຍ

(ພາມອະລຳປາຍະນະກ່າວວ່າ)

[໗໗໕] ຂ້າພະເຈົ້າໄດ້ຍິນມາຈາກເຫຼົ່າພຣະອະຣະຫັນ
ຜູ້ສັງລວມ ຜູ້ພ່ຳເພັງຕະບະແນວນີ້ວ່າ
ທາຍົກທັງຫຼາຍໃຫ້ທານໃນໂລກນີ້ແລ້ວຍ່ອມໄປສະຫວັນ
ທ່ານຈົ່ງໃຫ້ທານສາແຕ່ຍັງມີຊີວິດເທີ້ນ ຖ້າທ່ານມີຄວາມປະສົງຈະໃຫ້

[໗໗໖] ນາກນີ້ມີລິດຫຼາຍ ມີອຳນາດຍາກທີ່ໃຜຈະລ່ວງເກີນໄດ້
ຂ້າພະເຈົ້າຈະໃຫ້ມັນກັດທ່ານ ມັນຈັກເຮັດທ່ານໃຫ້ເປັນຂີ້ເຖົ່າໄປໄດ້

(ສຸທັດສະນະກຸມານກ່າວວ່າ)

[໗໗໗] ສະຫາຍ ແມ່ນເຮົາກໍໄດ້ຍິນມາຈາກເຫຼົ່າພຣະອະຣະຫັນ
ຜູ້ສັງລວມ ຜູ້ພ່ຳເພັງຕະບະແນວນີ້ວ່າ
ທາຍົກທັງຫຼາຍໃຫ້ທານໃນໂລກນີ້ແລ້ວຍ່ອມໄປສະຫວັນ
ທ່ານນັ້ນແລເມື່ອຍັງມີຊີວິດຢູ່ຈົ່ງໃຫ້ທານ
ຖ້າທ່ານມີຄວາມປະສົງຈະໃຫ້

[໗໗໘] ລູກຂຽດຊື່ວ່າອັດຈິມຸຂີນີ້ເຕັມໄປດ້ວຍອຳນາດຮ້າຍແຮງ
ເຮົາຈະໃຫ້ລູກຂຽດນັ້ນກັດທ່ານ ມັນຈັກເຮັດທ່ານໃຫ້ເປັນຂີ້ເຖົ່າໄປໄດ້

[໗໗໙] ນາງເປັນທິດາຂອງທ້າວທະຕະຣັດຖະເປັນນ້ອງສາວຕ່າງມານດາຂອງເຮົາ
ນາງອັດຈິມຸຂີເຕັມໄປດ້ວຍອຳນາດຮ້າຍແຮງຈົ່ງກັດທ່ານ

[໗໙໐] ພິມມະທັດມະຫາບໍພິດ
ຂໍພຣະອົງໄດ້ໂຜດຮູ້ໄວ້ເທີ້ນ
ຫາກອາດຕະມາພາບປ່ອຍພິດລົງເທິງແຜ່ນດິນ

ຕົ້ນຫຍ້າລະດາວັນແລະຣຸກຂະຊາດທີ່ເປັນຢາທັງຫຼາຍ
ກໍຈະເພິ່ງເສົາແຫ້ງໄປໂດຍບໍ່ຕ້ອງສົງໄສ

[໗໙໑]      ພົມມະທັດມະຫາບໍພິດ
ຂໍພຣະອົງໄດ້ໂຜດຮູ້ໄວ້ເທີ້ນ
ຫາກອາດຕະມາພາບຈັກປ່ອຍພິດຂຶ້ນໄປເທິງອາກາດ
ຝົນກໍຈະບໍ່ຕົກ ຫິມະກໍຈະບໍ່ຕົກຕະຫຼອດ ໆ ປີ

[໗໙໔]      ພົມມະທັດມະຫາບໍພິດ
ຂໍພຣະອົງໄດ້ໂຜດຮູ້ໄວ້ເທີ້ນ
ຫາກອາດຕະມາພາບຈັກປ່ອຍພິດລົງໄປໃນແມ່ນ້ຳ
ຝູງສັດຄືປາແລະເຕົ່າທີ່ເກີດໃນນ້ຳ
ຕ່າງກໍຈະຕ້ອງລົ້ມຕາຍໄປທັງໝົດ

(ພາມເນສາທະກ່າວວ່າ)

[໗໙໓]      ເມື່ອເຮົາກຳລັງອາບນ້ຳອັນສັກສິດຂອງໂລກ໌
ເຊິ່ງຂັງຢູ່ທີ່ທ່ານ້ຳປະຍາຄະ
ມີພູດອັນໃດມາດຶງເຮົາລົງສູ່ແມ່ນ້ຳຍະມຸນາອັນເລິກ

(ສຸໂພຄະກຸມານນ້ອງຊາຍນາກພູຣິທັດກ່າວວ່າ)

[໗໙໔]      ພະຍານາກໂຕປະເສີດໃດທີ່ເປັນໃຫຍ່ໃນໂລກ
ເຮືອງຍົດ ປົກຄຸມນະຄອນພາຣານະສີໄວ້ໂດຍຮອບ
ເຮົາເປັນລູກຂອງພະຍານາກໂຕປະເສີດນັ້ນ
ພາມ ນາກທັງຫຼາຍຮຽກເຮົາວ່າ ສຸໂພຄະ

(ພາມເນສາທະກ່າວວ່າ)

[໗໙໕]      ຖ້າທ່ານເປັນໂອຣົດຂອງພະຍານາກຜູ້ປະເສີດ
ເປັນເຈົ້າແຫ່ງຊາວກາສີ ເປັນໃຫຍ່ແຫ່ງເທວະດາ
ພຣະບິດາຂອງທ່ານມີສັກດາຫຼາຍຜູ້ໜຶ່ງ
ແລະພຣະມານດາຂອງທ່ານກໍບໍ່ມີໃຜທັດທຽມໄດ້ໃນໝູ່ມະນຸດ
ຜູ້ມີອານຸພາບຫຼາຍເຊັ່ນທ່ານ
ບໍ່ສົມຄວນດຶງແມ່ນພຽງແຕ່ຂ້າທາດຂອງພາມໃຫ້ຈົມນ້ຳເລີຍ

(ສຸໂພຄະກຸມານກ່າວວ່າ)

[໗໙໖]　ເຈົ້າຈອບລີ້ຕົ້ນໄມ້ ຍິງລະມັ່ງທີ່ມາເພື່ອຈະດື່ມນ້ຳ
ເຈົ້າລະມັ່ງມາຍາໂຕນັ້ນຖືກຍິງແລ້ວ
ຍັງແລ່ນໄປໄດ້ໃກດ້ວຍກຳລັງສອນ

[໗໙໗]　ເຈົ້າໄດ້ເຫັນມັນລົ້ມລົງໃນປ່າໃຫຍ່
ເຈົ້ານັ້ນຈຶ່ງຫາບຊີ້ນຂອງມັນເຂົ້າໄປຫາຕົ້ນໄຮໃນເວລາຄໍ່າ
ເປັນຕົ້ນໄມ້ມີໃບເຫຼືອງ ຣະເກະຣະກະໄປດ້ວຍຮາກ

[໗໙໘]　ກຶກກ້ອງໄປດ້ວຍສຽງຮ້ອງຂອງນົກແຂກເຕົ້າແລະນົກສາລິກາ
ມີຝູງນົກກາເວົ້າສົ່ງສຽງຮ້ອງຣະງົມ ໜ້າອອນຊອນໃຈ
ມີຫຍ້າແຝກຊຽວຢູ່ສະເໝີ

[໗໙໙]　ອ້າຍຂອງເຮົານັ້ນມີອານຸພາບຫຼາຍ ຮຸ່ງເຮືອງດ້ວຍລິດແລະຍົດ
ຫ້ອມລ້ອມໄປດ້ວຍນາງນາກກັນຍາທັງຫຼາຍ
ຜາກົດໂຕຕໍ່ທ່ານຜູ້ຢູ່ທີ່ຕົ້ນໄຮນັ້ນ
[໙໐໐]　ເຂົາປິ່ນເປີເຈົ້ານັ້ນໃຫ້ເອີບອີ່ມດ້ວຍສິ່ງທີ່ໜ້າຕ້ອງການທຸກຢ່າງ
ເຈົ້າຍັງປະທຸດສະຮ້າຍຕໍ່ເຂົາຜູ້ບໍ່ໄດ້ປະທຸດສະຮ້າຍ
ເວນຂອງເຈົ້ານັ້ນມາເຖິງບ່ອນນີ້ແລ້ວ
[໙໐໑]　ເຈົ້າຈົ່ງຟ້າວຍື່ນຄໍອອກມາ ເຮົາຈັກບໍ່ໃຫ້ຊີວິດແກ່ເຈົ້າ
ເມື່ອຣະນຶກເຖິງເວນທີ່ເຈົ້າກໍ່ໄວ້ຕໍ່ອ້າຍຂອງເຮົາ
ເຮົາຈັກຕັດຫົວຂອງເຈົ້າ

(ພາມເນສາທະກ່າວວ່າ)

[໙໐໘]　ພາມຖືການສາທະຍາຍ(ເວທະ)
ເປັນຜູ້ປະກອບໃນການອ້ອນວອນ ແລະເປັນຜູ້ບູຊາໄຟ
ຈຶ່ງບໍ່ຄວນຖືກຂ້າດ້ວຍເຫດ ໓ ປະການນີ້

(ສຸໂພຄະກຸມານກ່າວວ່າ)

[໙໐໓]　ເມືອງຂອງທ້າວທະຕະຣັດຖະຢູ່ພາຍໃຕ້ແມ່ນ້ຳຍະມຸນາ
ຮອດພູຫິມະພານ ເຊິ່ງຕັ້ງຢູ່ບໍ່ຫ່າງຈາກແມ່ນ້ຳຍະມຸນາ
ລ້ວນໄປດ້ວຍຄຳງາມຮຸ່ງເຮືອງ

[໙໐໔] ອ້າຍນ້ອງຮ່ວມອຸທອນຂອງເຮົາລ້ວນແຕ່ເປັນຄົນຂີ້ນຊື່ລືຊາ
ອ້າຍນ້ອງຂອງເຮົາເຫຼົ່ານັ້ນໃນເມືອງນັ້ນຈັກວ່າແນວໃດ
ເຈົ້າກໍຈັກຕ້ອງເປັນແນວນັ້ນ

(ນາກການາຣິດຖະ ກ່າວຄຳເວົ້າທີ່ຜິດວ່າ)

[໙໐໕] ອ້າຍສຸໂພຄະ ຍັນແລະພຣະເວດທັງຫຼາຍໃນໂລກ
ທີ່ພວກພາມປະກອບຂຶ້ນ ບໍ່ແມ່ນຂອງເລັກໜ້ອຍ^໑
ຍ້ອນແນວນັ້ນ ຜູ້ຕິຕຽນພາມຜູ້ທີ່ບໍ່ຄວນຕິຕຽນ
ຊື່ວ່າຍ່ອມລະເລີຍຊັບເຄື່ອງພໍໃຈແລະທຳຂອງສັດຕະບຸຣຸດ

[໙໐໖] ພວກພາມຖືການສາທະຍາຍ(ເວທະ)
ພວກກະສັດປົກຄອງແຜ່ນດິນ
ພວກແພດຍຶດກະເສດຕະກຳແລະພວກສູດຍຶດການຮັບໃຊ້
ວັນນະທັງ ໔ ນີ້ເຂົ້າເຖິງວຽກງານຕາມທີ່ອ້າງມາແຕ່ລະແນວ
ກ່າວກັນວ່າ ມະຫາພົມຜູ້ມີອຳນາດສ້າງຂຶ້ນໄວ້

[໙໐໗] ແມ່ນພວກເທບພະເຈົ້າເຫຼົ່ານີ້ ຄື ທ້າວທາດາ ວິທາດາ
ວະຣຸນ ກຸເວນ ໂສມະ ພຣະຍົມ ພຣະຈັນ ພຣະວາຍຸ
ແລະພຣະອາທິດ ຕ່າງກໍບູຊາຍັນໂດຍວິທີການຕ່າງ ໆ
ແລະໃຫ້ສິ່ງທີ່ໜ້າຕ້ອງການທຸກຢ່າງແກ່ພວກພາມຜູ້ສາທະຍາຍ

[໙໐໘] ທ້າວອັດຊຸນະແລະພີມະເສນຜູ້ມີກຳລັງຫຼາຍ
ມີແຂນເປັນພັນ ບໍ່ມີໃຜສະເໝີຄືໃນແຜ່ນດິນ
ຍົກທະນູຂຶ້ນໄດ້ເຖິງ ໕໐໐ ຄັນ ກໍໄດ້ຊົງບູຊາໄຟໃນຄັ້ງນັ້ນ

[໙໐໙] ອ້າຍສຸໂພຄະ ຜູ້ລ້ຽງດູພວກພາມມາເປັນເວລາດົນ
ດ້ວຍເຂົ້າແລະນ້ຳຕາມກຳລັງຄວາມສາມາດ
ມີຈິດເຫຼື້ອມໃສອະນຸໂມທະນາຢູ່ ໄດ້ເປັນເທບພະເຈົ້າອົງໜຶ່ງ

[໙໑໐] ພຣະເຈົ້າມຸຈະລິນສາມາດບູຊາເທວະດາຄືໄຟຜູ້ກິນຫຼາຍ
ມີຣັດສະໝີບໍ່ຕ່ຳຊາມໃຫ້ອີ່ມໜຳດ້ວຍເນີຍໃສ
ຊົງບູຊາຍັນວິທີແກ່ເທວະດາຄືໄຟຜູ້ປະເສີດແລ້ວ
ໄດ້ໄປບັງເກີດໃນທິບພະຍະຄະຕິ

[໙໑໑] ພຣະເຈົ້າທຸທີປະຜູ້ມີອານຸພາບຫຼາຍ
ມີພຣະຊົນມາຍຸຍືນເຖິງ ໑,໐໐໐ ປີ ມີພຣະຮູບງາມໜ້າເບິ່ງຍິ່ງ
ຊົງລະແຄວ້ນອັນບໍ່ມີບ່ອນສຸດພ້ອມທັງເສນາ
ສະເດັດອອກບວດແລ້ວ ໄດ້ສະເດັດໄປສູ່ສະຫວັນ

[໙໑໒] ອ້າຍສຸໂພຄະ ພຣະເຈົ້າສາຄະຣະຊົງຜາບແຜ່ນດິນອັນມີສາຄອນເປັນບ່ອນສຸດ
ຮັບສັ່ງໃຫ້ຕັ້ງເສົາພຣະໄຊອັນງາມຍິ່ງ ລ້ວນແລ້ວດ້ວຍຄໍາ
ຊົງບູຊາໄຟແລ້ວ ໄດ້ເປັນເທບພະເຈົ້າອົງໜຶ່ງ

[໙໑໓] ອ້າຍສຸໂພຄະ ແມ່ນໍ້າຄົງຄາທີ່ໄຫຼໄປສູ່ມະຫາສະມຸດເປັນທີ່ສັ່ງສົມນົມສົ້ມ
ຍ່ອມເປັນໄປດ້ວຍອານຸພາບຂອງຜູ້ໃດ
ຜູ້ນັ້ນຄືພຣະເຈົ້າອັງຄະໂລມະບາດ ຊົງບູຊາໄຟແລ້ວ
ສະເດັດໄປເກີດໃນພຣະນະຄອນຂອງທ້າວສະຫັດສະໄນ

[໙໑໔] ເທວະດາຜູ້ປະເສີດມີຣິດຫຼາຍ ເຮືອງຍົດ
ເປັນເສນາບໍດີຂອງທ້າວວາສະວະໃນສະຫວັນຊັ້ນຕາວະຕິງສາ
ກໍາຈັດມົນທິນດ້ວຍວິທີໂສມຍາຄະ ໄດ້ເປັນເທບພະເຈົ້າອົງໜຶ່ງ

[໙໑໕] ເທບຜູ້ປະເສີດມີລິດມີຍົດອົງໃດໄດ້ຊົງສ້າງໂລກນີ້
ໂລກໜ້າ ແມ່ນໍ້າພາຄີຣະຖີ ພູຫິມະພານ ແລະພູວິດຊະ
ແມ່ນເທບອົງນັ້ນກໍຊົງໄດ້ບໍາເລີໄຟໃນການນັ້ນ

[໙໑໖] ພູມາລາຄີຣີກໍດີ ພູຫິມະພານກໍດີ ພູຄິດຊະກູດກໍດີ
ພູສຸທັດສະນະກໍດີ ພູນິສະພະກໍດີ ພູກາກະເວຣຸກໍດີ
ພູເຫຼົ່ານີ້ແລະພູໃຫຍ່ອື່ນ ໆ ວ່າກັນວ່າ
ພວກພາມຜູ້ບູຊາຍັນສ້າງຂຶ້ນໄວ້

[໙໑໗] ຊົນທັງຫຼາຍຮຽກພາມຖືການສາທະຍາຍ (ເວທະ)
ຜູ້ເຂົ້າເຖິງຄຸນແຫ່ງມົນ ຜູ້ມີຕະບະໃນໂລກນີ້ວ່າ
ຜູ້ປະກອບການອ້ອນວອນມະຫາສະມຸດຊັດຖ້ວມພາມນັ້ນ
ຜູ້ກໍາລັງກະກຽມນໍ້າຢູ່ທີ່ຝັ່ງສະມຸດ
ຍ້ອນແນວນັ້ນ ນໍ້າໃນສະມຸດຈຶ່ງດື່ມບໍ່ໄດ້

[໙໑໘] ວັດຖຸທີ່ຄວນບູຊາທັງຫຼາຍ ຄື ພວກພາມ

ມີຢູ່ຫຼາຍໃນແຜ່ນດິນຂອງທ້າວວາສະວະ
ພາມເຫຼົ່ານັ້ນມີຢູ່ທັງໃນທິດຕາເວັນອອກ ທິດຕາເວັນຕົກ
ທິດໃຕ້ ແລະທິດເໜືອຍ່ອມທຳຄວາມຮູ້ໃຫ້ເກີດ

(ພຣະໂພທິສັດກ່າວສະເຫຼີຍວ່າ)

[໗໑໙] ອະຣິດຖະ ແທ້ຈິງ ການຮຽນຮູ້ພຣະເວດ
ເປັນໂທດຂອງເຫຼົ່ານັກປາດ
ແຕ່ເປັນການກະທຳຂອງພວກຄົນພານ
ຄືອາການຂອງແປວແດດ
ຍ້ອນເປັນຂອງແນມເຫັນບໍ່ໄດ້ສະເໝີໄປ
ມີຄຸນທາງຫຼອກລວງ ພາເອົາຄົນຜູ້ມີປັນຍາໄປບໍ່ໄດ້

[໗໘໐] ເວດທັງຫຼາຍບໍ່ໄດ້ມີເພື່ອປ້ອງກັນຄົນຜູ້ປະທຸດສະຮ້າຍມິດ
ຜູ້ລ້າງຜານຄວາມຈະເລີນ ຄືໄຟທີ່ບຸກຄົນບຳເລີແລ້ວ
ຍ່ອມປ້ອງກັນຄົນໂທສະຈະຣິດໃຫ້ເຮັດກຳຊົ່ວບໍ່ໄດ້

[໗໘໑] ຖ້າຄົນທັງຫຼາຍຈະນຳເອົາໄມ້ທີ່ມີຢູ່ໃນໂລກທັງໝົດ
ພ້ອມທັງຊັບສົມບັດຂອງຕົນປະສົມກັບຫຍ້າໃຫ້ໄຟເຜົາ
ໄຟທີ່ມີອຳນາດອັນບໍ່ມີໃຜທຽມເຜົາສິ່ງທັງໝົດ
ນີ້ທ່ານຜູ້ມີລີ້ນສອງແສກ ໃຜນໍຈະເພິ່ງເຮັດໃຫ້ໄຟນັ້ນອີ່ມໄດ້

[໗໘໒] ນົມສົດປ່ຽນໄປໄດ້ເປັນທຳມະດາ ຄື
ເປັນນົມສົ້ມແລ້ວກໍກັບກາຍໄປເປັນເນີຍຊຸ້ນສັນໃດ
ໄຟກໍມີຄວາມປ່ຽນໄປເປັນທຳມະດາໄດ້ສັນນັ້ນ
ໄຟທີ່ປະກອບດ້ວຍຄວາມພຽນໃນການສີໄຟຈິ່ງເກີດໄຟໄດ້

[໗໘໓] ບໍ່ຜາກົດວ່າໄຟເຂົ້າໄປຢູ່ໃນໄມ້ແຫ້ງແລະໄມ້ດິບ
ເມື່ອຄົນບໍ່ສີໄຟ ໄຟກໍບໍ່ເກີດ
ໄຟຍ່ອມບໍ່ເກີດຍ້ອນບໍ່ມີຄົນເຮັດໃຫ້ເກີດ

[໗໘໔] ກໍຖ້າໄຟຈະເພິ່ງເຂົ້າໄປຢູ່ພາຍໃນໄມ້ແຫ້ງແລະໄມ້ດິບ
ປ່າທັງໝົດໃນໂລກກໍຈະເພິ່ງແຫ້ງໄປ
ແລະໄມ້ແຫ້ງກໍຈະເພິ່ງລຸກເປັນແປວຂຶ້ນເອງໄດ້

[໙໘໕] ຖ້າຄົນລັງງດູໄຟທີ່ມີແປວຄວັນກຳລັງສ່ອງແສງຢູ່
ໃຫ້ເຜົາ(ກິນ)ໄມ້ແລະຫຍ້າ ຊື່ວ່າໄດ້ເຮັດບຸນ
ຄົນເຜົາຖ່ານ ຄົນຕົ້ມເກືອ ພໍ່ຄົວ ແລະຄົນເຜົາສົບ
ກໍຊື່ວ່າເພິ່ງໄດ້ເຮັດບຸນດ້ວຍ

[໙໘໖] ຖ້າຫາກພາມເຫຼົ່ານີ້ເຮັດບຸນໄດ້ຍ້ອນລ້ຽງໄຟ
ດ້ວຍການຮຽນມົນ ຍ້ອນລ້ຽງໄຟໃຫ້ອີ່ມໜຳ
ຄົນລາງຄົນໃນໂລກນີ້ຜູ້ເອົາເຊື້ອໄຟໃຫ້ໄຟເຜົາໄໝ້
ຈະບໍ່ຊື່ວ່າໄດ້ເຮັດບຸນແນວໃດນໍ

[໙໘໗] ນີ້ທ່ານຜູ້ມີລີ້ນສອງແສກ ຍ້ອນເຫດໃດ
ຍ້ອນໄຟເປັນສິ່ງທີ່ໂລກຢຳເກງ
ເພິ່ງກິນໄດ້ທັງຂອງທີ່ມີກິ່ນບໍ່ໜ້າພໍໃຈ ຄົນຫຼວງຫຼາຍບໍ່ມັກ
ແລະຂອງທີ່ພວກມະນຸດຫຼີກຫຼີບບໍ່ປະເສີດນັ້ນ

[໙໘໘] ຄວາມຈິງ ຄົນລາງພວກນັບຖືໄຟເປັນເທວະດາ
ສ່ວນພວກມິລັກຂະນັບຖືນ້ຳເປັນເທວະດາ
ຄົນທັງໝົດນີ້ກ່າວຕົວະ ໄຟແລະນ້ຳບໍ່ແມ່ນເທບພະເຈົ້າຕົນໃດຕົນໜຶ່ງ

[໙໘໙] ຊາວໂລກບຳເລີໄຟທີ່ບໍ່ມີອິນຊີ ບໍ່ມີກາຍທີ່ຈະຮັບຮູ້ສຶກໄດ້
ສ່ອງແສງສະຫວ່າງ ເປັນເຄື່ອງເຮັດວຽກງານຂອງປະຊາຊົນ
ເມື່ອຍັງເຮັດບາບກຳຢູ່ ຈະເພິ່ງເຖິງສຸກຄະຕິໄດ້ແນວໃດ

[໙໙໐] ພວກພາມຜູ້ຕ້ອງການລ້ຽງຊີວິດຂອງຕົນໃນໂລກນີ້ກ່າວວ່າ
ພຣະພົມຄອບງຳໄດ້ທັງໝົດ ແລະວ່າພຣະພົມບຳເລີໄຟ
ເມື່ອພຣະພົມມີອານຸພາບແລະມີອຳນາດທຸກສິ່ງ
ເປັນຫຍັງຈຶ່ງບໍ່ສ້າງຕົນເອງ ແຕ່ກັບມາໄຫວ້ໄຟທີ່ຕົນສ້າງຂຶ້ນ

[໙໙໑] ຄຳຂອງພວກພາມໜ້າຫົວຂວັນ[๑]
ບໍ່ຄວນສູດ ບໍ່ເປັນຄວາມຈິງ
ພາມເຫຼົ່ານັ້ນໄດ້ກ່າວຄຳຕົວະໄວ້ກ່ອນ
ຍ້ອນເຫດແຫ່ງສັກກາຣະ ພາມເຫຼົ່ານັ້ນ
ເມື່ອລາບສັກກາຣະຍັງບໍ່ຜາກົດຂຶ້ນ ກໍຮ້ອຍກອງຍັນທີ່ຊື່ວ່າ
ສັນຕິທຳ ໂຍງເຂົ້າກັບການຂ້າສັດ[๒] (ບູຊາຍັນ)

[໔໓໒] ພວກພາມຖືການສາທະຍາຍ (ມົນ)
ພວກກະສັດປົກຄອງແຜ່ນດິນ
ພວກແພດຍຶດກະເສດຕະກຳ ແລະພວກສູດຍຶດການຮັບໃຊ້
ວັນນະທັງ ໔ ນີ້ເຂົ້າເຖິງວຽກງານຕາມທີ່ອ້າງມາແຕ່ລະແນວ
ກ່າວກັນວ່າ ມະຫາພົມຜູ້ມີອຳນາດໄດ້ສ້າງຂຶ້ນໄວ້

[໔໓໓] ຖ້າຄຳນີ້ຈະເພິ່ງເປັນຄຳຈິງຄືທີ່ພວກພາມໄດ້ກ່າວໄວ້
ຜູ້ທີ່ບໍ່ແມ່ນກະສັດກໍບໍ່ເພິ່ງໄດ້ຣາດຊະສົມບັດ
ຜູ້ທີ່ບໍ່ແມ່ນພາມກໍບໍ່ເພິ່ງສຶກສາມົນ
ຄົນນອກຈາກແພດກໍບໍ່ເພິ່ງເຮັດກະເສດຕະກຳ
ແລະພວກສູດກໍບໍ່ເພິ່ງພົ້ນຈາກການຮັບໃຊ້ຜູ້ອື່ນ

[໔໓໔] ແຕ່ຍ້ອນຄຳນີ້ບໍ່ຈິງ ເປັນຄຳຕົວະ
ດັ່ງນັ້ນ ພວກຄົນເຫຼົ່ານີ້ຈຶ່ງກ່າວຕົວະທັງນັ້ນຍ້ອນເຫັນແກ່ທ້ອງ[໑]
ພວກຄົນມີປັນຍາໜ້ອຍຍ່ອມເຊື່ອຖືຄຳນັ້ນ
ພວກບັນດິດຍ່ອມພິຈາລະນາເຫັນຄຳນັ້ນດ້ວຍຕົນເອງ

[໔໓໕] ຍ້ອນພວກກະສັດຍ່ອມເກັບພາສີອາກອນຈາກພວກແພດ
ພວກພາມກໍຖືອາວຸດຫ່ຽວຂ້າສັດ
ຍ້ອນເຫດໃດ ພຣະພົມຈຶ່ງບໍ່ບັນດານ
ໂລກທີ່ປັ່ນປ່ວນແຕກຕ່າງກັນເຊັ່ນນັ້ນໃຫ້ທ່ຽງທຳສານໍ

[໔໓໖] ຍ້ອນຖ້າພຣະພົມເປັນໃຫຍ່ໃນໂລກທັງປວງ
ເປັນເຈົ້າຊີວິດຂອງໝູ່ສັດ
ຍ້ອນເຫດໃດ ຈຶ່ງເຮັດໂລກທັງປວງໃຫ້ມີທຸກ
ຍ້ອນເຫດໃດ ຈຶ່ງບໍ່ບັນດານໂລກທັງປວງໃຫ້ມີແຕ່ຄວາມສຸກ
[໔໓໗] ຍ້ອນຖ້າພຣະພົມນັ້ນເປັນໃຫຍ່ໃນໂລກທັງປວງ
ເປັນເຈົ້າຊີວິດຂອງໝູ່ສັດ
ຍ້ອນເຫດໃດ ຈຶ່ງລາກຈູງໃຫ້ໂລກເຮັດແຕ່ຄວາມພິນາດໂດຍບໍ່ເປັນທຳ
ເຊັ່ນ ມີມາຍາ ເວົ້າຕົວະ ແລະມົວເມົານໍ
[໔໓໘] ອະຣິດຖະ ຍ້ອນຖ້າພຣະພົມນັ້ນເປັນໃຫຍ່ໃນໂລກທັງປວງ
ເປັນເຈົ້າຊີວິດຂອງໝູ່ສັດ ແຕ່ເປັນເຈົ້າຊີວິດທີ່ບໍ່ຖືກຕ້ອງຕາມທຳ
ເມື່ອທຳມີຢູ່ ກໍບໍ່ຈັດຕັ້ງທຳ ກັບຈັດຕັ້ງອະທຳ

[໗໓໗] ຕັກກະແຕນ ກະເບື້ອ ງູ ແມງພູ່ ໜອນ
ແລະແມງວັນ ໃຜຂ້າແລ້ວຍ່ອມບໍລິສຸດ
ທຳເຫຼົ່ານີ້ເປັນທຳຂອງອະນາລະຍະຊົນ
ເຊິ່ງເປັນທຳທີ່ຜິດຂອງຊາວກຳໂພຊະຈຳນວນຫຼາຍ

[໗໔໐] ກໍຖ້າຄົນຂ້າຜູ້ອື່ນຈະບໍລິສຸດໄດ້
ແມ່ນຄົນຜູ້ຖືກຂ້າກໍເຂົ້າເຖິງແດນສະຫວັນໄດ້
ພວກພາມກໍຄວນຂ້າພວກພາມ
ແລະພວກຄົນທີ່ເຊື່ອພາມເຫຼົ່ານັ້ນດ້ວຍ

[໗໔໑] ພວກເນື້ອ ປະສຸສັດ ແລະງົວແຕ່ລະພວກ
ບໍ່ໄດ້ອ້ອນວອນເພື່ອໃຫ້ຂ້າຕົນເອງເລີຍ
ລ້ວນແຕ່ດີ້ນຮົນຕ້ອງການມີຊີວິດຢູ່ໃນໂລກນີ້
ຄົນທັງຫຼາຍຍ່ອມນຳສັດແລະປະສຸສັດເຂົ້າມັດໄວ້ທີ່ເສົາຍັນ

[໗໔໒] ພວກຄົນພາມຍື່ນໜ້າເວົ້ານຳໄປທີ່ເສົາບູຊາຍັນເຊິ່ງເປັນທີ່ຜູກມັດສັດ
ດ້ວຍການພັນນາອັນວິຈິດວ່າ ເສົາຍັນນີ້ຈັກໃຫ້
ສິ່ງທີ່ໜ້າຕ້ອງການແກ່ເຈົ້າໃນໂລກອື່ນໃນສຳປະຣາຍະພົບແນ່ນອນ

[໗໔໓] ຖ້າບຸກຄົນຈະເພິ່ງໄດ້ແກ້ວມະນີ ຫອຍສັງ ແກ້ວມຸກດາ ເຂົ້າເປືອກ
ຊັບ ເງິນ ຄຳ ທີ່ເສົາຍັນທັງທີ່ໄມ້ແຫ້ງແລະໄມ້ດິບ
ຖ້າເສົາຍັນຈະເພິ່ງໃຫ້ສິ່ງທີ່ໜ້າຕ້ອງການທຸກຢ່າງໃນໄຕຣທິບໄດ້
ໝູ່ພາມຜູ້ຊ່ຽວຊານໃນໄຕຣເພດທໍ່ນັ້ນຈຶ່ງຄວນບູຊາຍັນ
ຜູ້ບໍ່ແມ່ນພາມກໍບໍ່ຄວນໃຫ້ພາມບູຊາຍັນໃຫ້ເລີຍ

[໗໔໔] ແກ້ວມະນີ ຫອຍສັງ ແກ້ວມຸກດາ ເຂົ້າເປືອກ ຊັບ ເງິນ ຄຳ
ຈັກມີທີ່ເສົາຍັນ ທີ່ໄມ້ແຫ້ງ ແລະໄມ້ດິບຢູ່ໄສ
ເສົາຍັນຈະເພິ່ງໃຫ້ສິ່ງທີ່ໜ້າຕ້ອງການທັງປວງໃນໄຕຣທິບບ່ອນໃດເດ

[໗໔໕] ພາມເຫຼົ່ານີ້ເປັນຜູ້ໂອ້ອວດ ຫຍາບຊ້າ
ໂງ່ຈ້າ ໂລບໂພດ ຍື່ນປາກເວົ້ານຳໄປ
ດ້ວຍການພັນນາທີ່ຍົດຍ້ອຍຕ່າງ ໆ ວ່າ
ຈົ່ງຮັບເອົາໄຟໄປ ຈົ່ງໃຫ້ຊັບແກ່ເຮົາ
ແຕ່ນັ້ນ ທ່ານຈັກມີຄວາມສຸກໃນສິ່ງທີ່ໜ້າປາຖະໜາທັງປວງ

[໑໘໗໘] ຂ້ານ້ອຍອາໄສສະຫາຍຊົ່ວເຮັດບາບກຳໄວ້ຫຼາຍ
ຫ່ຽວປະພຶດຜິດໃນພັນລະຍາຂອງຜູ້ອື່ນຄືຈະບໍ່ຕາຍ

[໑໘໗໙] ກຳນັ້ນຍັງບໍ່ທັນໃຫ້ຜົນຄືໄຟທີ່ຖືກປົກໄວ້ດ້ວຍຂີ້ເຖົ່າ
ຕໍ່ມາ ດ້ວຍກຳອື່ນ ໆ ຂ້ານ້ອຍຈຶ່ງໄດ້ເກີດໃນແຄວ້ນວັງສະ

[໑໘໘໐] ຂ້າແດ່ ມະຫາຣາດ ຂ້ານ້ອຍເປັນບຸດຄົນດຽວ
ໃນຕະກູນເສດຖີທີ່ຮັ່ງມີສົມບູນ
ມີຊັບຫຼາຍໃນນະຄອນໂກສຳພີ
ໄດ້ຮັບສັກກາຣະບູຊາຢູ່ປະຈຳ

[໑໘໘໑] ໃນຊາດນັ້ນ ຂ້ານ້ອຍໄດ້ຄົບຫາມິດສະຫາຍ
ຜູ້ຍິນດີໃນກຳອັນງາມ ຜູ້ເປັນບັນດິດ ເປັນພະຫູສູດ
ສະຫາຍນັ້ນໄດ້ແນະນຳໃຫ້ຂ້ານ້ອຍຕັ້ງຢູ່ໃນກຳອັນເປັນປະໂຫຍດ

[໑໘໘໒] ຂ້ານ້ອຍໄດ້ຮັກສາອຸໂປສົດສິນ
ໃນມື້ ໑໔ ຄ່ຳ ໑໕ ຄ່ຳ ຕະຫຼອດຣາຕີຫຼວງຫຼາຍ
ກຳນັ້ນຍັງບໍ່ທັນໃຫ້ຜົນຄືຂຸມຊັບທີ່ຝັງໄວ້ໃຕ້ນ້ຳ

[໑໘໘໓] ເມື່ອຕໍ່ມາ ບັນດາບາບກຳທັງຫຼາຍ
ກຳຄືການລ່ວງລະເມີດພັນລະຍາຂອງຜູ້ອື່ນໃດ
ທີ່ຂ້ານ້ອຍໄດ້ກະທຳໄວ້ໃນແຄວ້ນມະຄົດ
ຜົນຂອງກຳນັ້ນໄດ້ມາເຖິງຂ້ານ້ອຍເຂົ້າແລ້ວໃນພາຍຫຼັງ
ຄືດື່ມຢາພິດອັນຮ້າຍແຮງ

[໑໘໘໔] ຂ້າແດ່ ພຣະເຈົ້າວິເທຫະ
ຂ້ານ້ອຍຈຸຕິຈາກຕະກູນເສດຖີໃນນະຄອນໂກສຳພີນັ້ນແລ້ວ
ຕ້ອງມົກໄໝ້ຢູ່ໃນໂຣຣຸວະນະຮົກຕະຫຼອດການລະນານ
ຍ້ອນກຳຂອງຕົນ ຂ້ານ້ອຍຣະນຶກເຖິງທຸກ
ທີ່ຕົນເຄີຍໄດ້ສະເຫວີຍມາໃນນະຮົກນັ້ນ ບໍ່ໄດ້ຮັບຄວາມສຸກເລີຍ

[໑໘໘໕] ຂ້ານ້ອຍເຮັດທຸກຫຼວງຫຼາຍໃຫ້ໝົດສິ້ນໄປ
ໃນນະຮົກນັ້ນຫຼວງຫຼາຍຫຼາຍປີແລ້ວ
ຈຶ່ງເກີດເປັນລາຖືກຕອນຢູ່ໃນພິນນາຄະຕະນະຄອນ

[໑໘໗໐] ຂ້ານ້ອຍຕ້ອງພາລູກອຳມາດໄປດ້ວຍຫຼັງແດ່ ດ້ວຍລົດແດ່
ນັ້ນເປັນຜົນຂອງກຳທີ່ລ່ວງລະເມີດພັນລະຍາຂອງຄົນອື່ນຂອງຂ້ານ້ອຍ

[໑໘໗໑] ຂ້າແດ່ ພຣະອົງຜູ້ຄອງແຄວ້ນວິເທຫະ
ຂ້ານ້ອຍຈຸຕິຈາກຊາດເປັນລານັ້ນແລ້ວໄດ້ໄປເກີດເປັນລີງໃນປ່າໃຫຍ່
ຖືກຫົວໜ້າຝູງໂຕຄະນອງກັດລູກອັນທະອອກ
ນັ້ນເປັນຜົນຂອງກຳທີ່ລ່ວງລະເມີດພັນລະຍາຂອງຄົນອື່ນຂອງຂ້ານ້ອຍ

[໑໘໗໒] ຂ້າແດ່ ພຣະເຈົ້າວິເທຫະ
ຂ້ານ້ອຍຈຸຕິຈາກຊາດເປັນລີງນັ້ນແລ້ວ
ໄດ້ໄປເກີດເປັນງົວໃນແຄວ້ນທະສັນນະ ຖືກຕອນ ມີກຳລັງແຂງແຮງດີ
ຂ້ານ້ອຍຕ້ອງຫຼຽມຍານຢູ່ເປັນເວລາດົນ
ນັ້ນເປັນຜົນຂອງກຳທີ່ລ່ວງລະເມີດພັນລະຍາຜູ້ອື່ນຂອງຂ້ານ້ອຍ

[໑໘໗໓] ຂ້າແດ່ ພຣະເຈົ້າວິເທຫະ
ຂ້ານ້ອຍຈຸຕິຈາກຊາດເປັນງົວນັ້ນແລ້ວ
ໄດ້ໄປເກີດເປັນກະເທຍໃນຕະກູນທີ່ມີໂພກະສົມບັດຫຼາຍໃນແຄວ້ນວັດຊີ
ຈະໄດ້ເກີດເປັນມະນຸດກໍແສນຍາກ
ນັ້ນເປັນຜົນຂອງກຳຄືການລ່ວງລະເມີດພັນລະຍາຄົນອື່ນຂອງຂ້ານ້ອຍ

[໑໘໗໔] ຂ້າແດ່ ພຣະເຈົ້າວິເທຫະ
ຂ້ານ້ອຍຈຸຕິຈາກຊາດເປັນກະເທຍນັ້ນແລ້ວ
ໄດ້ໄປເກີດເປັນນາງອັບປະສອນໃນພຣະອຸທະຍານນັນທະວັນຊັ້ນຕາວະຕິງສາໂລກ
ມີສະຫວີວັນງາມໜ້າຮັກແພງ

[໑໘໗໕] ມີຜ້າແລະອາພອນງາມວິຈິດ ໃສ່ຕຸ້ມຫູແກ້ວມະນີ
ເກ່ງໃນການຟ້ອນລຳຂັບຮ້ອງ ເປັນປະຣິຈາຣິກາຂອງທ້າວສັກກະ

[໑໘໗໖] ຂ້າແດ່ ພຣະເຈົ້າວິເທຫະ
ເມື່ອຂ້ານ້ອຍຢູ່ໃນຊັ້ນຕາວະຕິງສາໂລກນັ້ນ
ຣະນຶກຊາດແມ່ນໃນອະນາຄົດໄດ້ອີກ ໗ ຊາດ
ທີ່ຂ້ານ້ອຍຈຸຕິຈາກຕາວະຕິງສາໂລກນັ້ນແລ້ວຈັກເກີດຕໍ່ໄປ

[໑໘໗໗] ກຸສົນທີ່ຂ້ານ້ອຍໄດ້ເຮັດໄວ້ໃນນະຄອນໂກສຳພີໄດ້ຕາມມາໃຫ້ຜົນ

ຂ້ານ້ອຍຈຸຕິຈາກຕາວະຕິງສາໂລກແລ້ວ
ທ່ອງທ່ຽວໄປໃນເທວະດາແລະມະນຸດ

[໑໘໗໘] ຂ້າແດ່ ມະຫາຣາດ ຂ້ານ້ອຍນັ້ນ
ໄດ້ຮັບສັກກາຣະບູຊາເປັນປະຈຳມາຕະຫຼອດ ໗ ຊາດ
ຂ້ານ້ອຍບໍ່ພົ້ນຈາກຄວາມເປັນຍິງຕະຫຼອດ ໖ ຊາດ

[໑໘໗໙] ຂ້າແດ່ ສົມມຸດຕິເທບ ຊາດທີ ໗
ຂ້ານ້ອຍຈັກໄດ້ເກີດເປັນເທວະດາຜູ້ຊາຍ
ຄື ເປັນເທບພະບຸດຜູ້ມີລິດຫຼາຍ ເປັນຜູ້ສູງສຸດໃນໝູ່ເທວະດາ

[໑໘໘໐] ແມ່ນມື້ນີ້ ເຫຼົ່ານາງອັບປະສອນຜູ້ເປັນປະຣິຈາຣິກາຂອງຂ້ານ້ອຍ
ຍັງຊ່ອຍກັນຮ້ອຍດອກໄມ້ເປັນພວງມາໄລຢູ່ໃນພຣະອຸທະຍານນັນທະວັນ
ເທບພະບຸດນາມວ່າຊະວະ ຍັງຮັບພວງມາໄລຂອງຂ້ານ້ອຍຢູ່

[໑໘໘໑] ໑໖ ປີໃນມະນຸດນີ້ເປັນຄືບຶດໜຶ່ງຂອງເທວະດາ
໑໐໐ ປີຂອງມະນຸດເປັນຄືນໜຶ່ງມື້ໜຶ່ງຂອງເທວະດາ

[໑໘໘໒] ດັ່ງທີ່ໄດ້ຂາບທູນມານີ້ ກຳທັງຫຼາຍຕິດຕາມໄປໄດ້
ແມ່ນຕັ້ງອະສົງໄຂຊາດ
ດ້ວຍວ່າກຳຈະດີຫຼືຊົ່ວກໍຕາມຍ່ອມບໍ່ພິນາດໄປ

[໑໘໘໓] ບຸກຄົນໃດປາຖະໜາຈະເປັນຊາຍທຸກ ໆ ຊາດໄປ
ບຸກຄົນນັ້ນເພິ່ງເວັ້ນພັນລະຍາຜູ້ອື່ນສາ
ຄືຄົນລ້າງຕີນສະອາດແລ້ວເວັ້ນເປືອກຕົມ

[໑໘໘໔] ຍິງໃດປາຖະໜາຈະເປັນຊາຍທຸກ ໆ ຊາດໄປ
ຍິງນັ້ນກໍເພິ່ງຢຳເກງສາມີຄືນາງເທບອັບປະສອນ
ຜູ້ເປັນປະຣິຈາຣິກາຢຳເກງພຣະອິນ

[໑໘໘໕] ຜູ້ໃດປາຖະໜາໂພຄະຊັບ ອາຍຸ ຍົດ ແລະສຸກທີບ
ຜູ້ນັ້ນເພິ່ງເວັ້ນບາບທັງຫຼາຍແລ້ວປະພຶດທຳ ๓ ຢ່າງ°ເທີ້ນ

[໑໘໘໖] ຍິງຫຼືຊາຍກໍຕາມ ບໍ່ຜະໝາດດ້ວຍກາຍ ວາຈາ ໃຈ
ເປັນຜູ້ມີປັນຍາເປັນເຄື່ອງພິຈາລະນາເພື່ອປະໂຫຍດຂອງຕົນ

[໑໔໗໗] ມະນຸດເຫຼົ່າໃດໃນຊີວະໂລກນີ້
ເປັນຜູ້ມີຍົດ ມີໂພຄະຊັບບໍລິບູນທຸກຢ່າງ
ມະນຸດເຫຼົ່ານັ້ນໄດ້ສັ່ງສົມກຳດີໄວ້ໃນປາງກ່ອນໂດຍບໍ່ຕ້ອງສົງໄສ
ສັດທັງປວງລ້ວນມີກຳເປັນຂອງຂອງຕົນ

[໑໔໗໘] ຂ້າແດ່ ສົມມຸດຕິເທບ ຂໍພຣະອົງຊົງພຣະຣາດຊະດຳຣິ
ດ້ວຍພຣະອົງເທີ້ນ ຂ້າແດ່ ພຣະອົງຜູ້ເປັນຈອມແຫ່ງຊົນ
ພຣະສະໜົມຜູ້ຊົງໂສມງາມຄືດັ່ງນາງເທບອັບປະສອນ
ປະດັບປະດາຄຸມກາຍດ້ວຍຕາໜ່າງຄຳເຫຼົ່ານີ້
ພຣະອົງຊົງໄດ້ມາຍ້ອນຜົນແຫ່ງກຳອັນໃດ

[໑໔໗໙] ພຣະນາງຣຸຈາຣາດຊະກັນຍາຊົງໃຫ້ພຣະເຈົ້າອັງຄະຕິ
ພຣະຊະນົກນາຖະພໍພຣະທະໄທ ພຣະຣາດຊະກຸມາຣີຜູ້ມີຂໍ້ວັດປະຕິບັດດີງາມ
ຊົງຂາບທູນທາງແຫ່ງສຸກຄະຕິແກ່ພຣະຊະນົກນາຖະພຣະອົງນັ້ນແລ້ວ
ຄືບອກທາງໃຫ້ແກ່ຄົນຫຼົງທາງ
ແລະໄດ້ຂາບທູນຂໍ້ທຳຖວາຍດ້ວຍປະການດັ່ງນີ້

[໑໔໙໐] ຕໍ່ມາ ນາຣະທະມະຫາພົມກວດເບິ່ງຊົມພູທະວີບ
ໄດ້ເຫັນພຣະເຈົ້າອັງຄະຕິ ຈຶ່ງມາຈາກພົມມະໂລກເຖິງຖິ່ນມະນຸດ

[໑໔໙໑] ລຳດັບນັ້ນ ນາຣະທະມະຫາພົມໄດ້ຢືນຢູ່ທີ່ຜາສາດ
ເບື້ອງພຣະພັກຂອງພຣະເຈົ້າວິເທຫະ
ພຣະນາງຣຸຈາຣາດຊະກັນຍາໄດ້ເຫັນນາຣະທະລືສີນັ້ນ
ມາເຖິງທີ່ແລ້ວ ຈຶ່ງນະມັດສະການ

[໑໔໙໔] ຄັ້ງນັ້ນ ພຣະຣາຊາຊົງມີພຣະທະໄທຢ້ານກົວ
ສະເດັດລົງຈາກຣາດຊະອາດ ເມື່ອຈະຕັດຖາມນາຣະທະລືສີ
ຈຶ່ງໄດ້ຕັດພຣະດຳຣັດດັ່ງນີ້ວ່າ

[໑໔໙໓] ທ່ານຜູ້ມີຜິວງາມດັ່ງເທວະດາ
ສ່ອງສະຫວ່າງໄປທົ່ວທຸກທິດດັ່ງດວງຈັນ
ທ່ານມາຈາກໄສນໍ ຂ້າພະເຈົ້າຖາມແລ້ວ
ຂໍທ່ານຈົ່ງບອກນາມແລະໂຄດແກ່ຂ້າພະເຈົ້າ
ຄົນທັງຫຼາຍໃນມະນຸດສາໂລກຍ່ອມຮູ້ຈັກທ່ານໄດ້ແນວໃດ

(ນາຣະທະລືສີຂາບທູນວ່າ)

[໑໔໙໔] ອາດຕະມາພາບມາຈາກເທວະໂລກ ໃນບັດນີ້ເອງ
ສ່ອງສະຫວ່າງໄປທົ່ວທຸກທິດດັ່ງດວງຈັນ
ມະຫາບໍພິດຕັດຖາມແລ້ວ
ອາດຕະມາພາບຂໍຖວາຍພຣະພອນນາມແລະໂຄດໃຫ້ຊົງຮູ້
ຄົນທັງຫຼາຍຮູ້ຈັກອາດຕະມາພາບໂດຍນາມວ່ານາຣະທະ
ແລະໂດຍໂຄດວ່າ ກັດສະປະ

(ພຣະຣາຊາຕັດຖາມວ່າ)

[໑໔໙໕] ສັນຖານຂອງທ່ານ ການທີ່ທ່ານເຫາະໄປ
ແລະຢືນຢູ່ເທິງອາກາດໄດ້ໜ້າອັດສະຈັນ
ທ່ານນາຣະທະ ຂ້າພະເຈົ້າຂໍຖາມເນື້ອຄວາມນີ້ກັບທ່ານ
ເມື່ອເປັນແນວນັ້ນ ຍ້ອນເຫດໃດ ທ່ານຈຶ່ງມີລິດແນວນີ້

(ນາຣະທະລືສີທູນຕອບວ່າ)

[໑໔໙໖] ຄຸນນະທຳ ໔ ປະການນີ້ ຄື (໑) ສັດຈະ (໒) ທຳ
(໓) ທະມະ (໔) ຈາຄະ[១] ອາດຕະມາພາບໄດ້ເຮັດໄວ້ແລ້ວໃນພົບກ່ອນ
ຍ້ອນຄຸນນະທຳທີ່ອາດຕະມາພາບໄດ້ເສບມາດີແລ້ວນັ້ນແລ
ອາດຕະມາພາບຈຶ່ງໄປໄດ້ໄວທັນໃຈຕາມຄວາມປາຖະໜາ

(ພຣະຣາຊາຕັດຖາມວ່າ)

[໑໔໙໗] ເມື່ອທ່ານບອກຄວາມສຳເລັດແຫ່ງບຸນ
ຊື່ວ່າທ່ານບອກຄວາມອັດສະຈັນ
ຖ້າເປັນຈິງຄືທີ່ທ່ານກ່າວ ທ່ານນາຣະທະ
ຂ້າພະເຈົ້າຂໍຖາມເນື້ອຄວາມນີ້ກັບທ່ານ
ຂໍທ່ານຈົ່ງພະຍາກອນໃຫ້ດີ

(ນາຣະທະລືສີທູນຕອບວ່າ)

[໑໔໙໘] ຂໍຖວາຍພຣະພອນມະຫາບໍພິດ ຂໍ້ໃດພຣະອົງຊົງສົງໄສ
ຂໍເຊີນມະຫາບໍພິດຕັດຖາມຂໍ້ນັ້ນກັບອາດຕະມາພາບເທີ້ນ

ອາດຕະມາພາບຈະວິສັດຊະນາຖວາຍໃຫ້ມະຫາບໍພິດຊົງສິ້ນສົງໄສ
ທັງໂດຍໄນຍະດ້ວຍຄວາມຮູ້ແລະດ້ວຍເຫດຜົນ

(ພຣະຣາຊາຕັດຖາມວ່າ)

[໑໔໙໙] ທ່ານນາຣະທະ ຂ້າພະເຈົ້າຂໍຖາມເນື້ອຄວາມນີ້ກັບທ່ານ
ທ່ານຢ່າໄດ້ກ່າວມຸສາຕໍ່ຂ້າພະເຈົ້າ ທີ່ຄົນເວົ້າກັນວ່າ
ເທວະດາມີ ມານດາແລະບິດາມີ ປະຣະໂລກມີ ນັ້ນເປັນຈິງບໍ?

(ນາຣະທະລືສີທູນຕອບວ່າ)

[໑໕໐໐] ທີ່ຄົນເວົ້າກັນວ່າ ເທວະດາມີ ມານດາແລະບິດາມີ
ແລະປະຣະໂລກມີ ນັ້ນເປັນຈິງທັງນັ້ນ
ແຕ່ຄົນທັງຫຼາຍໝົກມຸ້ນ ຕິດໃຈ ຫຼົງໄຫຼ
ງົມງວາຍໃນກາມມະຄຸນ ຈຶ່ງບໍ່ຮູ້ຈັກປະຣະໂລກ

(ພຣະຣາຊາຕັດຖາມວ່າ)

[໑໕໐໑] ທ່ານນາຣະທະ ຖ້າທ່ານເຊື່ອວ່າ ປະຣະໂລກມີຈິງ
ເຫຼົ່າສັດທີ່ຕາຍໄປແລ້ວກໍຕ້ອງມີບ່ອນຢູ່ໃນປະຣະໂລກ
ຂໍທ່ານຈົ່ງໃຫ້ຊັບ ໕໐໐ ແກ່ຂ້າພະເຈົ້າໃນໂລກນີ້ແລ
ຂ້າພະເຈົ້າຈັກໃຫ້ແກ່ທ່ານພັນໜຶ່ງໃນປະຣະໂລກ

(ນາຣະທະລືສີທູນຕອບວ່າ)

[໑໕໐໒] ຖ້າອາດຕະມາພາບຮູ້ວ່າ ມະຫາບໍພິດຊົງມີສີນ
ຊົງຮູ້ຄວາມປະສົງຂອງພວກຜູ້ຂໍ
ອາດຕະມາພາບກໍຈະໃຫ້ມະຫາບໍພິດຈັກ ໕໐໐
ແຕ່ມະຫາບໍພິດຫຍາບຊ້າ ຊົງຈຸຕິຈາກໂລກນີ້ແລ້ວ
ຈະຕ້ອງໄປຢູ່ໃນນະຣົກ
ໃຜນໍຈະເພິ່ງໄປທວງຊັບ ໑,໐໐໐ ໃນປະຣະໂລກໄດ້
[໑໕໐໓] ຜູ້ໃດໃນໂລກນີ້ບໍ່ມີສີນລະທຳ ປະພຶດຊົ່ວ
ຂີ້ຄ້ານ ມີກຳຫຍາບ
ບັນດິດທັງຫຼາຍບໍ່ໃຫ້ກູ້ໜີ້ໃນຜູ້ນັ້ນ
ຍ້ອນຈະບໍ່ໄດ້ຊັບຄືນຈາກຄົນເຊັ່ນນັ້ນ

[໑໓໐໔] ສ່ວນຄົນດຸໝັ່ນຂະຫຍັນພຽນ ມີສິນ ຮູ້ຄວາມປະສົງຂອງຜູ້ຂໍ
ຄົນທັງຫຼາຍຮູ້ແລ້ວຍ່ອມນຳໂພຄະຊັບມາເຊື້ອເຊີນເອງ
ດ້ວຍຄິດວ່າ ຜູ້ນີ້ເຮັດວຽກງານສຳເລັດແລ້ວເພິ່ງນຳມາໃຊ້ຄືນໃຫ້

[໑໓໐໕] ຂໍຖວາຍພຣະພອນ ມະຫາບໍພິດຈຸຕິຈາກບ່ອນນີ້ແລ້ວ
ຈັກທອດພຣະເນດເຫັນພຣະອົງເອງຢູ່ໃນນະຮົກນັ້ນ
ຜູ້ຖືກຝູງກາຍາດແຍ່ງດຶງລາກຢູ່
ໃຜນໍຈະໄປທວງຊັບ ໑,໐໐໐ ໃນປະຣະໂລກກັບມະຫາບໍພິດ
ຜູ້ຕົກຢູ່ໃນນະຮົກເຊິ່ງຖືກຝູງກາ ແຮ້ງ ແລະໝາຫຸ້ມກັດກິນ
ໂຕຂາດກະຈັດກະຈາຍ ເລືອດໄຫຼໂຊມຢູ່

[໑໓໐໖] ໃນໂລກັນຕະນະຮົກນັ້ນມືດມິດທີ່ສຸດ
ບໍ່ມີດວງຈັນແລະດວງອາທິດ
ໂລກັນຕະນະຮົກນັ້ນມືດມິດຢູ່ສະເໝີ ເປັນຕາຢ້ານ
ກາງຄືນກາງເວັນບໍ່ຜາກົດ ຜູ້ຕ້ອງການຊັບ
ໃຜນໍຈະເພິ່ງທ່ຽວໄປໃນສະຖານບ່ອນນັ້ນໄດ້

[໑໓໐໗] ໃນໂລກັນຕະນະຮົກນັ້ນມີໝາ ໔ ໂຕ ຄື
ໝາດ່າງແລະໝາດຳແຫຼ້ ມີໂຕກຳຢຳ ລ່ຳສັນ ແຂງແຮງ
ພາກັນໃຊ້ແຂ້ວເຫຼັກກັດກິນຜູ້ທີ່ຈຸຕິຈາກມະນຸດສາໂລກນີ້ແລ້ວ
ໄປຕົກຢູ່ໃນນະຮົກ

[໑໓໐໘] ໃຜນໍຈະເພິ່ງໄປທວງຊັບ ໑,໐໐໐ ໃນປະຣະໂລກກັບມະຫາບໍພິດ
ຜູ້ຖືກຝູງໝາທາລຸນໂຫດຮ້າຍ ໂຕນຳທຸກມາໃຫ້ຫຸ້ມກັດກິນຢູ່
ຢູ່ໃນນະຮົກຈົນໂຕຂາດກະຈັດກະຈາຍ ເລືອດໄຫຼໂຊມ

[໑໓໐໙] ແລະໃນນະຮົກທີ່ໂຫດຮ້າຍ
ມີພວກນາຍນິຣະຍະບານຊື່ກາລະແລະອຸປະກາລະ
ຜູ້ເປັນຂ້າເສິກໃຊ້ດາບແລະຫອກທີ່ລັບໄວ້ເປັນຢ່າງດີ
ປາດເຖືອແລະສຽບແທງຄົນຜູ້ເຮັດກຳຊົ່ວໄວ້ໃນພົບກ່ອນ
[໑໓໑໐] ໃຜນໍຈະເພິ່ງໄປທວງຖາມເອົາຊັບ ໑,໐໐໐ ໃນປະຣະໂລກ
ກັບມະຫາບໍພິດຜູ້ຖືກສຽບແທງເຂົ້າທີ່ທ້ອງ
ທີ່ຫຼັງ ມີທ້ອງມຸ່ນແລ່ນໄປມາຢູ່ໃນນະຮົກ
ມີໂຕຂາດກະຈັດກະຈາຍເລືອດໄຫຼໂຊມໄດ້

[๑๓๑๑] ໃນໂລກັນຕະນະຣົກນັ້ນ ມີທ່າຝົນຊະນິດຕ່າງ ໆ ຄື ຝົນຫອກ
ຝົນດາບ ຝົນແຫຼມ ຝົນຫຼາວ ມີປະກາຍລຸກວາວ
ຄືຖ່ານໄຟຕົກລົງເທິງຫົວ
ສາຍອັດສະນີບາດສີລາແດງຮຸ່ງຕົກລົງທັບສັດນະຣົກຜູ້ມີກຳຫຍາບຊ້າ

[๑๓๑๒] ແລະໃນນະຣົກນັ້ນ ມີລົມຮ້ອນອັນຍາກທີ່ຈະທົນໄດ້
ສັດໃນນະຣົກນັ້ນບໍ່ໄດ້ຮັບຄວາມສຸກແມ່ນແຕ່ໜ້ອຍ
ໃຜນໍຈະເພິ່ງໄປທວງຊັບ ๑,๐๐๐ ໃນປະຣະໂລກກັບມະຫາບໍພິດ
ຜູ້ຊົງກະສັບກະສ່າຍແລ່ນພ່ານໄປມາ ຫາບ່ອນຈອບລີ້ບໍ່ໄດ້

[๑๓๑๓] ໃຜນໍຈະເພິ່ງໄປທວງຊັບ ๑,๐๐๐ ໃນປະຣະໂລກກັບມະຫາບໍພິດ
ຜູ້ຖືກທຽມໄວ້ໃນລົດແລ່ນໄປມາຢູ່
ຕ້ອງຊົງຢຽບແຜ່ນດິນທີ່ລຸກເປັນແປວ
ຖືກສຽບແທງດ້ວຍເຫຼັກແຫຼມຢູ່

[๑๓๑๔] ໃຜນໍຈະເພິ່ງໄປທວງຊັບ ๑,๐๐๐ ກັບມະຫາບໍພິດ
ຜູ້ທົນຢູ່ບໍ່ໄດ້ແລ່ນໄປຂຶ້ນພູທີ່ເດຍລະດາດໄປດ້ວຍຂວາກກົດ
ລຸກເປັນແປວໜ້າອະເຫຍືອງຢ່າງຍິ່ງ ມີໂຕຖືກຕັດຂາດ
ຫຼັ່ງເລືອດໄຫຼໂຊມຢູ່ໄດ້

[๑๓๑๕] ໃຜນໍຈະເພິ່ງໄປທວງຊັບ ๑,๐๐๐ ໃນປະຣະໂລກກັບມະຫາບໍພິດ
ຜູ້ຕ້ອງແລ່ນຂຶ້ນໄປຢຽບຖ່ານໄຟກອງທໍ່ພູທີ່ລຸກເປັນແປວ
ເປັນຕາຢ້ານ ມີໂຕຖືກໄຟໄໝ້ທົນບໍ່ໄຫວ
ຮ້ອງຄວນຄາງຢ່າງໜ້າສົງສານຢູ່ໄດ້

[๑๓๑๖] ຕົ້ນງີ້ວສູງທຽມກ້ອນເພື້ອ ເຕັມໄປດ້ວຍໜາມເຫຼັກຄົມ
ຢາກຈະດູດດື່ມເລືອດຄົນ

[๑๓๑๗] ຍິງທັງຫຼາຍທີ່ປະພຶດນອກໃຈສາມີ
ແລະຊາຍຍິງທັງຫຼາຍທີ່ເປັນຊູ້ກັບພັນລະຍາຂອງຄົນອື່ນ
ຖືກນາຍນິຣະຍະບານຜູ້ເຮັດຕາມຄຳສັ່ງຂອງພະຍາຍົມ
ຖືຫອກໄລ່ສຽບແທງໃຫ້ຂຶ້ນຕົ້ນງີ້ວນັ້ນ

[๑๓๑๘] ໃຜນໍຈະເພິ່ງໄປທວງຊັບນັ້ນ

ກັບມະຫາບໍພິດຜູ້ຕ້ອງປີນຂຶ້ນຕົ້ນງີ້ວໃນນະຮົກ
ມີເລືອດໄຫຼເປິະເປື້ອນ ມີກາຍໄໝ້ແຫ້ມ
ມີໜັງແລະຊີ້ນເຫຼື້ມປອກເປີກກະສັບກະສ່າຍ
ສະເຫວີຍເວທະນາຢ່າງໜັກ

[໑໓໗໙] ໃຜນໍຈະເພິ່ງໄປຫວງຊັບນັ້ນກັບມະຫາບໍພິດ
ຜູ້ເມື່ອຍຫອບມີຄວາມຜິດຍ້ອນບຸບພະກຳໃນທາງຜິດ
ຕົນໂຕມີໜັງລອກປອກເປີກໄປ

[໑໓໘໐] ຕົ້ນງີ້ວສູງທຽມກ້ອນເພື້ອ ເຕັມໄປດ້ວຍໃບເຫຼັກຄົມດັ່ງດາບ
ຢາກຈະດູດດື່ມເລືອດຄົນ

[໑໓໘໑] ໃຜນໍຈະເພິ່ງໄປຫວງຊັບ ໑,໐໐໐ ກັບມະຫາບໍພິດ
ຜູ້ກຳລັງປີນຂຶ້ນຕົ້ນງີ້ວນັ້ນ
ກ້າວໄປຢຽບໃບເຫຼັກອັນຄົມຄືດາບ
ກໍຖືກດາບອັນຄົມນັ້ນບາດ ໂຕຂາດກະຈັດກະຈາຍ
ເລືອດໄຫຼໂຊມຢູ່ໃນປະຣະໂລກໄດ້

[໑໓໘໒] ຊັບຈຳນວນນັ້ນ ໃຜນໍຈະເພິ່ງໄປຂໍກັບມະຫາບໍພິດ
ຜູ້ຍ່າງໜີອອກຈາກຂຸມນະຮົກໄມ້ງີ້ວມີໃບເປັນດາບ
ພາດຕົກລົງໄປສູ່ແມ່ນ້ຳເວດຕະຣະນີໄດ້
[໑໓໘໓] ແມ່ນ້ຳເວດຕະຣະນີມີນ້ຳເປັນກົດ ຫຍາບແຂງ
ເຜັດຮ້ອນ ຂ້າມໄດ້ຍາກ
ປົກຄຸມໄປດ້ວຍບົວເຫຼັກມີໃບຄົມໄຫຼໄປຢູ່
[໑໓໘໔] ຊັບຈຳນວນນັ້ນ ໃຜນໍຈະໄປຂໍກັບມະຫາບໍພິດ
ຜູ້ມີໂຕຂາດກະຈັດກະຈາຍ ມີເລືອດເປິະເປື້ອນ
ລອຍຢູ່ໃນແມ່ນ້ຳເວດຕະຣະນີ ບ່ອນນັ້ນຫາບ່ອນເກາະບໍ່ໄດ້

(ພຣະຣາຊາຕັດວ່າ)

[໑໓໘໕] ຂ້າພະເຈົ້າແທບຈະລົ້ມຄືຕົ້ນໄມ້ທີ່ຖືກຕັດ
ຂ້າພະເຈົ້າຫຼົງສຳຄັນຜິດ ຈຶ່ງບໍ່ຮູ້ຈັກທິດ ທ່ານລືສີ
ຂ້າພະເຈົ້າໄດ້ຟັງຄາຖາພາສິດຂອງທ່ານແລ້ວ
ຮ້ອນໃຈ ຍ້ອນຢ້ານມະຫາໄພ

[๑๓๔๖] ທ່ານລືສີ ຂໍທ່ານຈົ່ງເປັນບ່ອນເພິ່ງຂອງຂ້າພະເຈົ້າ
ຄືນໍ້າສໍາລັບແກ້ຢາກໃນເວລາຮ້ອນ
ຄືເກາະເປັນບ່ອນເພິ່ງຂອງພວກຄົນທີ່ມີເຮືອອັບປາງ
ຫາບ່ອນເພິ່ງບໍ່ໄດ້ໃນມະຫາສະມຸດ
ແລະຄືດວງປະທີບສໍາລັບສ່ອງທາງ
ຂອງພວກຄົນຜູ້ເດີນທາງມືດເທີ້ນ

[๑๓๔๗] ທ່ານລືສີ ຂໍທ່ານຈົ່ງສອນອັດຖະແລະທໍາແກ່ຂ້າພະເຈົ້າ
ໃນການກ່ອນ ຂ້າພະເຈົ້າໄດ້ທໍາຄວາມຜິດໄວ້ສ່ວນດຽວ
ທ່ານນາຣະທະ ຂໍທ່ານຈົ່ງບອກທາງບໍລິສຸດແກ່ຂ້າພະເຈົ້າ
ໂດຍທີ່ຂ້າພະເຈົ້າຈຶ່ງຈະບໍ່ຕົກໄປໃນນະຮົກດ້ວຍເທີ້ນ

(ນາຣະທະລືສີຂາບທູນວ່າ)

[๑๓๔๘] ພຣະຣາຊາ ๖ ພຣະອົງນີ້ ຄື (๑) ທ້າວທະຕະຣັດຖະ
(๒) ທ້າວເວດສາມິຕະ (๓) ທ້າວອັດຖະກະ
(๔) ທ້າວຍະມະທັກຄິ (๕) ທ້າວອຸສິນນະຣະ
(๖) ທ້າວຊິວິຣາດ ໄດ້ຊົງບໍາລຸງສະມະນະແລະພາມທັງຫຼາຍແລ້ວ

[๑๓๔๙] ພຣະຣາຊາເຫຼົ່ານັ້ນແລະພຣະຣາຊາເຫຼົ່າອື່ນສະເດັດໄປສູ່ສະຫວັນສັນໃດ
ມະຫາບໍພິດຜູ້ເປັນເຈົ້າແຜ່ນດິນ ແມ່ນມະຫາບໍພິດກໍສັນນັ້ນ
ຈົ່ງຊົງເວັ້ນອະທໍາແລ້ວຊົງປະພຶດທໍາເທີ້ນ

[๑๓๕๐] ຣາດຊະບຸຣຸດທັງຫຼາຍຈົ່ງຖືອາຫານໄປປະກາດໃນພຣະຣາດຊະນິເວດ
ແລະພາຍໃນພຣະນະຄອນວ່າ ໃຜຫິວ ໃຜຢາກ
ໃຜປາຖະໜາດອກໄມ້ ໃຜປາຖະໜາເຄື່ອງລູບທາ
ໃຜບໍ່ມີຜ້ານຸ່ງຫົ່ມ ກໍຈົ່ງນຸ່ງຫົ່ມຜ້າສີຕ່າງ ໆ ຕາມປາຖະໜາເທີ້ນ

[๑๓๕๑] ໃຜຕ້ອງການຮົ່ມ ໃຜຕ້ອງການເກີບທີ່ອ່ອນນຸ້ມ ສວຍງາມ
ໃນທາງປ່ຽວ ຣາດຊະບຸຣຸດທັງຫຼາຍຈົ່ງປະກາດໄປດັ່ງນີ້
ໃນພຣະນະຄອນຂອງພຣະອົງທັງໃນເວລາຄໍ່າແລະເວລາເຊົ້າ

[๑๓๕๒] ມະຫາບໍພິດຈົ່ງຢ່າໃຊ້ງານຄົນແກ່ ງົວແກ່
ແລະມ້າແກ່ຄືແຕ່ກ່ອນ

ແລະຈິ່ງພຣະຣາດຊະທານເຄື່ອງບໍລິຫານແກ່ຄົນທີ່ເປັນກຳລັງ
ເຊິ່ງເຄີຍໄດ້ທຳຄວາມດີໄວ້ທີ່ເກົ່າເທີ້ນ

[໑໓໓໓] ມະຫາບໍພິດຈິ່ງສຳຄັນພຣະວໍຣະກາຍຂອງພຣະອົງວ່າເປັນດັ່ງລົດ
ມີໃຈເປັນນາຍສາຣະຖີ ເບົາຕົນໂຕ
ມີອະວິຫິງສາເປັນເພົາ ມີປະຣິຈາຄະເປັນຫຼັງຄາ

[໑໓໓໔] ມີການສັງລວມຕີນເປັນກົງ
ມີການສັງລວມມືເປັນດຸມ
ມີການສັງລວມທ້ອງເປັນນ້ຳມັນຢອດ
ມີການສັງລວມວາຈາເປັນຄວາມງຽບສະນິດ

[໑໓໓໕] ມີການກ່າວຄຳສັດເປັນສ່ວນປະກອບລົດທີ່ບໍລິສຸດ
ມີການບໍ່ກ່າວຄຳສັບສົ່ເປັນການເຂົ້າໜ້າໄມ້ໄດ້ແຈບ
ມີການກ່າວຄຳອ່ອນຫວານເປັນເຄື່ອງລົດທີ່ກ້ຽງມື່ນ
ມີການກ່າວພໍປະມານເປັນເຄື່ອງຜູກມັດ

[໑໓໓໖] ມີສັດທາແລະຄວາມບໍ່ໂລບເປັນເຄື່ອງປະດັບ
ມີຄວາມຖ່ອມຕົນແລະການທຳອັນຊະລີເປັນທູບ
ມີຄວາມບໍ່ແຂງກະດ້າງເປັນງອນ
ມີຄວາມສັງລວມສິນເປັນເຊືອກຂັນຊະເນາະ

[໑໓໓໗] ມີຄວາມບໍ່ໂກດເປັນເຄື່ອງກັນກະທົບ
ມີຄຸນນະທຳເປັນສະເຫວດຕະສັດ
ມີພາຫຸສັດຈະເປັນສາຍພານ
ມີຈິດຕັ້ງໝັ້ນເປັນບ່ອນໝັ້ນ

[໑໓໓໘] ມີຄວາມຄິດຮູ້ຈັກການເປັນໄມ້ແກ່ນ
ມີຄວາມແກ່ກ້າເປັນໄມ້ຄ້ຳສາມແສກ
ມີຄວາມປະພຶດຖ່ອມຕົນເປັນເຊືອກຂັນແອກ
ມີຄວາມບໍ່ຈອງຫອງເປັນແອກເບົາ

[໑໓໓໙] ມີຈິດບໍ່ທົດທູ່ເປັນເຄື່ອງປູລາດ
ມີການຄົບຄົນຜູ້ຈະເລີນເປັນເຄື່ອງກຳຈັດທຸລີ

ນັກປາດມີສະຕິເປັນເຫຼັກແຫຼມ
ມີຄວາມພຽນແລະການໃຊ້ການປະຕິບັດເກື້ອກູນເປັນສາຍບັງຫຽນ

[໑໓໔໐] ມີໃຈທີ່ເຝິກຝົນດີແລ້ວຄືມ້າ
ທີ່ໄດ້ຮັບເຝິກສະໝ່ຳສະເໝີເປັນເຄື່ອງນຳທາງ
ຄວາມປາຖະໜາແລະຄວາມໂລບເປັນທາງຄົດ
ສ່ວນຄວາມສັງລວມເປັນທາງຊື່

[໑໓໔໑] ຂໍຖວາຍພຣະພອນມະຫາບໍພິດ
ປັນຍາເປັນເຄື່ອງສຽບແທງມ້າ
ໃນລົດຄືພຣະວໍຣະກາຍຂອງມະຫາບໍພິດ
ທີ່ກຳລັງໂລດແລ່ນໄປໃນຮູບ ສຽງ ກິ່ນ ຣົດ
ໃນລົດຄືພຣະວໍຣະກາຍຂອງມະຫາບໍພິດນັ້ນ
ມີຕົນຄືຈິດຂອງພຣະອົງທີ່ນັ້ນເປັນນາຍສາຣະຖີ

[໑໓໔໒] ຖ້າຄວາມປະພຶດຖືກ
ແລະຄວາມພຽນໝັ້ນຄົງມີຢູ່ກັບຍານນີ້
ລົດນັ້ນຈະໃຫ້ສົມບັດທີ່ໜ້າຕ້ອງການໄດ້ທຸກຢ່າງແລະບໍ່ນຳໄປເກີດໃນນະຣົກ

(ພຣະສາດສະດາຊົງປະຊຸມຊາດົກ ດັ່ງນີ້)

[໑໓໔໓] ອະລາຕະເສນາບໍດີເປັນພຣະເທວະທັດ
ສຸນາມອຳມາດເປັນພຣະພັດທະຊິ
ວິໄຊອຳມາດເປັນພຣະສາຣີບຸດ
ຊີວົກບຸຣຸດເປັນພຣະໂມກຄັນລານະ

[໑໓໔໔] ສຸນັກຂັດຕະເປັນບຸດຂອງເຈົ້າລິດສະຫວີ ຄຸນາຊີວົກເປັນຊີເປືອຍ
ພຣະນາງຣຸຈາຣາດຊະທິດາຜູ້ຊົງນຳພຣະຣາຊາໃຫ້ຊົງເຫຼື້ອມໃສ
ເປັນພຣະອານົນ

[໑໓໔໕] ພຣະເຈົ້າອັງຄະຕິຜູ້ມີທິດຖິຊົ່ວໃນຄັ້ງນັ້ນເປັນພຣະອຸເວລະກັດສະປະ
ທ້າວມະຫາພົມໂພທິສັດເປັນເຮົາຕະຖາຄົດ
ພວກທ່ານຈົ່ງຊົງຈຳຊາດົກໄວ້ດ້ວຍປະການດັ່ງນີ້ແລ

**ມະຫານາຣະທະກັດສະປະຊາດົກທີ ໗ ຈົບ**

# ๗. ວິທຸຣະຊາດົກ[1] (๕๔๖)
## ວ່າດ້ວຍວິທຸຣະບັນດິດພໍ່າເພັງສັດຈະປາຣະມີ

## ໂທຫະລະກັນ

### ຕອນວ່າດ້ວຍຄວາມແພ້ທ້ອງ

(ພະຍານາກຕັດຖາມນາງນາກວິມະລາມະເຫສີວ່າ)

[๑๓๔๖] ນາງມີຜິວພັນເຫຼືອງ ຈ່ອຍເຫຼືອງ ມີກຳລັງໜ້ອຍ
ແຕ່ກ່ອນ ຜິວພັນຂອງນາງບໍ່ໄດ້ເປັນແນວນີ້ເລີຍ
ນ້ອງວິມະລາ ອ້າຍຖາມແລ້ວ ຂໍເຈົ້າຈົ່ງບອກ
ເວທະນາໃນຮ່າງກາຍຂອງເຈົ້າເປັນແນວໃດ

(ນາງນາກວິມະລາທູນຕອບວ່າ)

[๑๓๔๗] ພຣະອົງຜູ້ເປັນຈອມຊົນ ຊື່ວ່າຄວາມແພ້ທ້ອງ
ເປັນທຳມະດາຂອງມານດາທັງຫຼາຍໃນໝູ່ມະນຸດ
ພຣະອົງຜູ້ປະເສີດສຸດໃນໝູ່ນາກ
ຂ້ານ້ອຍປາຖະໜາຢ່າງຍິ່ງເຊິ່ງດວງຫະໄທ
ຂອງວິທຸຣະບັນດິດທີ່ນຳມາໄດ້ໂດຍຖືກຕ້ອງຕາມທຳ ຂ້ານ້ອຍ

(ພະຍານາກຕັດວ່າ)

[๑๓๔๘] ນາງແພ້ທ້ອງປາຖະໜາຫະໄທຂອງວິທຸຣະບັນດິດ
ກໍຈະຄືກັບປາຖະໜາດວງຈັນ
ແລະດວງອາທິດ ຫຼືປາຖະໜາລົມ
ຍ້ອນວ່າວິທຸຣະບັນດິດຍາກທີ່ບຸກຄົນຈະພົບໄດ້
ໃຜນໍຈັກນຳວິທຸຣະບັນດິດມາໃນນາຄະໂລກນີ້ໄດ້

(ນາງນາກອິຣັນທະດີຜູ້ທິດາຂາບທູນວ່າ)

[๑๓๔๙] ຂ້າແດ່ ພຣະບິດາ ເຫດໃດນໍ ພຣະອົງຈຶ່ງຊົງຈຸກເຈົ່າຢູ່
ພຣະພັກຂອງພຣະອົງຄືດອກບົວຫຼວງທີ່ຖືກຍ່ອງດ້ວຍມື

ຂ້າແດ່ ພຣະບິດາຜູ້ເປັນອິດສະຣາທິບໍດີ ເປັນທີ່ເກງຂາມຂອງສັດຕູ
ຍ້ອນເຫດໃດນໍ ພຣະອົງຈຶ່ງຊົງທຸກພຣະທະໄທ
ຂໍຢ່າຊົງເສົ້າໂສກເລີຍ ຂ້ານ້ອຍ

(ພະຍານາກວະຣຸນຕັດວ່າ)

[໑໓໕໐] ອິຣັນທະຕີລູກຮັກ ມານດາຂອງເຈົ້າປາຖະໜາເຊິ່ງດວງທະໄທ
ຂອງວິທຸຣະບັນດິດ ຍ້ອນວິທຸຣະບັນດິດຍາກທີ່ໃຜຈະພົບໄດ້
ໃຜນໍຈັກນຳວິທຸຣະບັນດິດມາໃນນາຄະໂລກນີ້ໄດ້

[໑໓໕໑] ເຈົ້າຈົ່ງທ່ຽວໄປສະແຫວງຫາສາມີ
ຜູ້ເຊິ່ງຈັກນຳວິທຸຣະບັນດິດມາໃນນາຄະໂລກນີ້
ນາງນາກມານະວິການັ້ນໄດ້ສະດັບພຣະດຳຣັດຂອງພຣະບິດາແລ້ວ
ມີຈິດຊຸ່ມດ້ວຍກິເລດອອກໄປທ່ຽວຕະຫຼອດຄືນ

(ນາງນາກອິຣັນທະຕີກ່າວວ່າ)

[໑໓໕໒] ຄົນທັນ ຣາກສົດ ນາກ ກິນນະຣະ ຫຼືມະນຸດພວກໃດ
ຄົນໃດເປັນບັນດິດສາມາດຈະໃຫ້ສິ່ງທີ່ໜ້າຕ້ອງການທັງປວງໄດ້
ເຂົາຈັກເປັນສາມີຂອງເຮົາຕະຫຼອດການ

(ເສນາບໍດີຍັກກ່າວວ່າ)

[໑໓໕໓] ນາງຜູ້ມີໜ່ວຍຕາຫາທີ່ຕິບໍ່ໄດ້ ຂໍທ່ານຈົ່ງເບົາໃຈເທີ້ນ
ເຮົາຈັກເປັນຜູ້ລ້ຽງດູທ່ານ
ຍ້ອນປັນຍາຂອງເຮົາສາມາດຈະນຳຊີ້ນດວງທະໄທ
ຂອງວິທຸຣະບັນດິດມາໃຫ້ໄດ້
ຂໍຈົ່ງເບົາໃຈເທີ້ນ ນາງຈັກເປັນພັນລະຍາຂອງເຮົາ

[໑໓໕໔] ນາງອິຣັນທະຕີຜູ້ມີໃຈກຳໜັດຮັກແພງ
ຍ້ອນເຄີຍຮ່ວມອະພິຣົມກັນມາໃນພົບກ່ອນ
ໄດ້ກ່າວກັບປຸນນະກະຍັກວ່າ
ມາເທີ້ນທ່ານ ເຮົາຈັກໄປໃນສຳນັກຂອງພຣະບິດາຂອງເຮົາ
ພຣະບິດາຂອງເຮົານີ້ແລ້ວຈັກຕັດບອກເນື້ອຄວາມນີ້ແກ່ທ່ານ

[໑໓໕໔]    ນາງອິຣັນທະດີປະດັບຕົກແຕ່ງນຸ່ງຜ້າຮຽບຮ້ອຍແລ້ວ
ທັດຊົງດອກໄມ້ປະພົມດ້ວຍຈຸນແກ່ນຈັນ
ຈູງມືປຸນນະກະຍັກເຂົ້າໄປສູ່ສຳນັກຂອງພຣະບິດາ

(ປຸນນະກະຍັກຂາບທູນວ່າ)

[໑໓໕໕]    ຂ້າແດ່ ພຣະອົງຜູ້ປະເສີດກວ່າໝູ່ນາກ
ຂໍພຣະອົງໄດ້ໂຜດສະດັບຄຳເວົ້າຂອງຂ້າພຣະອົງ
ຂໍພຣະອົງຈົ່ງຊົງຮັບສິນສອດຕາມສົມຄວນ
ຂ້າພຣະອົງປາຖະໜາພຣະນາງອິຣັນທະດີ
ຂໍພຣະອົງໄດ້ຊົງພຣະກະລຸນາໂຜດໃຫ້ຂ້າພຣະອົງ
ໄດ້ຢູ່ຮ່ວມກັບພຣະນາງອິຣັນທະດີເທີ້ນ

[໑໓໕໖]    ຂ້າແດ່ ພຣະອົງຜູ້ປະເສີດ
ຂໍພຣະອົງໂຜດໄດ້ຊົງພຣະກະລຸນາຮັບສິນສອດນັ້ນ
ຄື ຊ້າງ ໑໐໐ ເຊືອກ ມ້າ ໑໐໐ ໂຕ
ລົດທີ່ທຽມດ້ວຍມ້າອັດສະດອນ ໑໐໐ ຄັນ
ກວຽນບັນທຸກຂອງເຕັມດ້ວຍຣັດຕະນະຕ່າງ ໆ ໑໐໐ ເຫຼັ້ມ
ຂໍໄດ້ໂຜດພຣະຣາດຊະທານພຣະຣາດຊະທິດາອິຣັນທະດີໃຫ້ແກ່ຂ້າພຣະອົງເທີ້ນ

(ພະຍານາກຕັດວ່າ)

[໑໓໕໗]    ຂໍທ່ານຈົ່ງຖ້າຢູ່ຈົນກວ່າເຮົາຈະໄດ້ເປີກສາຫາລື
ກັບບັນດາຍາດ ມິດ ແລະເພື່ອນທີ່ສະນິດສາກ່ອນ
(ຍ້ອນ) ກຳທີ່ກະທຳລົງໄປໂດຍບໍ່ໄດ້ເປີກສາຫາລືກັນນັ້ນ
ຍ່ອມເດືອດຮ້ອນໃຈໃນພາຍຫຼັງ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໑໓໕໘]    ລຳດັບນັ້ນ ທ້າວວະຣຸນນາຄະຣາດສະເດັດເຂົ້າໄປສູ່ນິເວດ
ເປີກສາກັບພຣະຊາຍາ ຕັດຄຳນີ້ວ່າ

[໑໓໖໐]    ປຸນນະກະຍັກນີ້ນັ້ນມາຂໍລູກອິຣັນທະດີກັບເຮົາ
ເຮົາຈະໃຫ້ລູກອິຣັນທະດີຜູ້ເປັນທີ່ຮັກຂອງເຮົາແກ່ປຸນນະກະຍັກນັ້ນ
ຍ້ອນໄດ້ຊັບເຄື່ອງພໍໃຈເປັນຈຳນວນຫຼາຍບໍ

(ນາງນາກວິມະລາມະເຫສີຂາບທູນວ່າ)

[໑໓໕໑] ປຸນນະກະຍັກບໍ່ເພິ່ງໄດ້ລູກອິຣັນທະດີຂອງເຮົາ
ຍ້ອນຊັບ ຍ້ອນສິ່ງທີ່ໜ້າພໍໃຈ
ແຕ່ຖ້າປຸນນະກະຍັກຈະເພິ່ງໄດ້ຫະໄທຂອງບັນດິດ
ນຳມາໃນນາຄະໂລກນີ້ໄດ້ໂດຍຖືກຕ້ອງຕາມທຳ
ເຂົາຈະເພິ່ງໄດ້ລູກສາວຂອງເຮົາຍ້ອນສິ່ງທີ່ໜ້າພໍໃຈນັ້ນ
ຂ້ານ້ອຍບໍ່ປາຖະໜາຊັບອື່ນຍິ່ງກວ່ານີ້

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໑໓໕໒] ລຳດັບນັ້ນ ທ້າວວະຣຸນນາຄະຣາດສະເດັດອອກຈາກນິເວດ
ຕັດຮຽກປຸນນະກະຍັກມາແລ້ວຕັດດັ່ງນີ້ວ່າ
[໑໓໕໓] ທ່ານບໍ່ເພິ່ງໄດ້ລູກອິຣັນທະດີຂອງເຮົາ
ຍ້ອນຊັບ ຍ້ອນສິ່ງທີ່ໜ້າພໍໃຈ
ຖ້າທ່ານໄດ້ຫະໄທຂອງບັນດິດນຳມາໃນນາຄະໂລກນີ້ໄດ້ໂດຍຖືກຕ້ອງຕາມທຳ
ທ່ານຈະເພິ່ງໄດ້ລູກສາວຂອງເຮົາຍ້ອນສິ່ງທີ່ໜ້າພໍໃຈນັ້ນ
ເຮົາບໍ່ປາຖະໜາຊັບອື່ນຍິ່ງໄປກວ່ານີ້

(ປຸນນະກະຍັກຂາບທູນວ່າ)

[໑໓໕໔] ຂ້າແດ່ ພຣະອົງຜູ້ປະເສີດໃນໂລກນີ້
ຄົນລາງຄົນຍ່ອມຮຽກຄົນໃດວ່າເປັນບັນດິດ
ຄົນອີກພວກໜຶ່ງກັບຮຽກຄົນນັ້ນນັ້ນແລວ່າເປັນພານ
ໃນເລື້ອງນີ້ ຄົນທັງຫຼາຍຍັງກ່າວແຍ້ງກັນຢູ່
ຂໍພຣະອົງໄດ້ຕັດບອກແກ່ຂ້າພຣະອົງ
ພຣະອົງຊົງຮຽກໃຜນໍວ່າ ເປັນບັນດິດ

(ພະຍານາກວະຣຸນຕັດວ່າ)

[໑໓໕໕] ບັນດິດຊື່ວ່າວິທຸຣະ ຜູ້ທຳການສັ່ງສອນອັດຖະທຳ
ແກ່ພຣະເຈົ້າທະນັນໄຊໂກຣັບພະຍະ ຖ້າທ່ານໄດ້ຍິນໄດ້ຟັງມາແລ້ວ
ຂໍທ່ານຈົ່ງໄປນຳບັນດິດນັ້ນມາ
ເມື່ອທ່ານໄດ້ມາໂດຍຖືກຕ້ອງຕາມທຳແລ້ວ
ນາງອິຣັນທະດີຈົ່ງເປັນຜູ້ບຳເລີຕີນ (ພັນລະຍາ) ຂອງທ່ານເທີ້ນ

(ພຣະສາດສະດາເມື່ອຈະຊີ້ງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໑໓໗໓] ຝ່າຍປຸນນະກະຍັກໄດ້ສະດັບພຣະດຳຣັດ
ຂອງທ້າວວະຣຸນນາຄະຣາດນີ້ແລ້ວ
ກໍຍິນດີຍິ່ງ ລຸກຂຶ້ນແລ້ວໄປສັ່ງບຸຣຸດຄົນໃຊ້ຂອງຕົນ
ຜູ້ຢູ່ໃນບ່ອນນັ້ນນັ້ນແລວ່າ
ເຈົ້າຈົ່ງນຳມ້າອາຊາໄນທີ່ກຽມໄວ້ມາທີ່ນີ້ນັ້ນແລໃຫ້ໄດ້

[໑໓໗໗] ມ້າອາຊາໄນໂຕນັ້ນມີຫູທັງ ໔ ຂ້າງປະດັບດ້ວຍຄຳ
ມີກີບຫຸ້ມແລ້ວດ້ວຍແກ້ວມະນີແດງ
ມີເຄື່ອງປະດັບເອີກເຮັດດ້ວຍຄຳຊົມພູນຸດອັນສຸກປັ່ງ

(ພຣະສາດສະດາເມື່ອຈະຊີ້ງປະກາດເນື້ອຄວາມນັ້ນ ຈຶ່ງຕັດພຣະດຳຣັດນີ້ວ່າ)

[໑໓໗໘] ປຸນນະກະຍັກຜູ້ປະດັບແລ້ວ
ຈັດແຈງແຕ່ງຜົມແລະໜວດດີແລ້ວ
ກໍຂຶ້ນຂີ່ມ້າອັນເປັນຍານພາຫະນະຂອງເທວະດາ
ເຫາະໄປໃນອາກາດກາງຫາວ

[໑໓໗໙] ປຸນນະກະຍັກນັ້ນກຳໜັດດ້ວຍກາມຣາຄະ
ກຳລັງປາຖະໜານາງອິຣັນທະດີນາກກັນຍາ
ໄປຂາບທູນທ້າວກຸເວນເວດສຸວັນນະຜູ້ເຮືອງຍົດເປັນໃຫຍ່ແຫ່ງພູດວ່າ

[໑໓໘໐] ພິບນາກນັ້ນເຂົາຮຽກວ່າ ໂພຄະວະດີນະຄອນແດ່
ວາດສະໜານະຄອນແດ່ ຫິຣັນວະດີນະຄອນແດ່
ເປັນເມືອງນິຣະມິດລ້ວນແຕ່ຄຳ
ສຳເລັດແກ່ພະຍານາກຜູ້ສົມບູນດ້ວຍໂພຄະຊັບທຸກຢ່າງ

[໑໓໘໑] ປ້ອມແລະເຊີງເທີນສ້າງມີຮູບຊົງຄືຄໍອູດ
ເຮັດດ້ວຍແກ້ວແດງແລະແກ້ວລາຍ
ໃນນາຄະໂລກນັ້ນ ມີຜາສາດເຮັດດ້ວຍສີລາ
ມຸງດ້ວຍກະເບື້ອງຄຳ

[໑໓໘໔] ໃນນາຄະໂລກນັ້ນ ມີໄມ້ໝາກມ່ວງ ໄມ້ໝາກເມົ່າ
ໄມ້ຫວ້າ ໄມ້ຕີນເປັດ ໄມ້ຈິກ

ໄມ້ເກດ ໄມ້ປະຍົງ ໄມ້ດອກຄູນ
ໄມ້ໝາກມ່ວງຫອມ ໄມ້ຊະບາ ແລະໄມ້ຍ່ານຊາຍ

[໑໓໗໓] ໄມ້ຈຳປາ ໄມ້ກາກະທິງ ມະລິຊ້ອນ ມະລິລາ
ແລະໄມ້ໝາກກະເບົາ ຕົ້ນໄມ້ໃນນາຄະໂລກເຫຼົ່ານີ້
ມີງ່າອຽງເຂົ້າຫາກັນ ຍັງມົນທຽນຂອງນາຄະຣາດໃຫ້ງາມຍິ່ງ

[໑໓໗໔] ໃນນາຄະໂລກນັ້ນ ມີຕົ້ນອິນທະຜຳສຳເລັດແລ້ວດ້ວຍແກ້ວອິນທະນິນ
ແຕກດອກລ້ວນແຕ່ຄຳຢູ່ຕະຫຼອດຈຳນວນຫຼາຍ
ເຊິ່ງເປັນບ່ອນຢູ່ຂອງທ້າວວະຣຸນນາຄະຣາດຜູ້ມີລິດຫຼາຍ ຜູ້ຜຸດເກີດ

[໑໓໗໕] ພະຍານາກນັ້ນມີມະເຫສີກຳລັງສາວລຸ້ນຊຶ່ງພຣະນາມວ່າວິມະລາ
ມີພຣະຮູບໂສມສະງ່າງາມດັ່ງແທ່ງຄຳ
ສູງໂປ່ງສະໂອດສະອົງດັ່ງໜໍ່ເຄືອຈິງຈໍ້ດຳ
ຖັນທັງຄູ່ມີສັນຖານດັ່ງຜົນໝາກພັບງົດງາມໜ້າຊົມຍິ່ງ

[໑໓໗໖] ມີພຣະສະຫວີວັນນະແດງເໝືອນນ້ຳຄັ່ງ
ປຽບເໝືອນດອກກັນນິກາທີ່ແຍ້ມບານນ້ອມລົງ
ຄືດັ່ງນາງອັບປະສອນທີ່ທ່ຽວໄປໃນພົບຊັ້ນຕາວະຕິງສາ
ຫຼືຄືສາຍຟ້າແມບອອກຈາກກີບກ້ອນເພື້ອ

[໑໓໗໗] ຂ້າແດ່ ພຣະອົງຜູ້ເປັນໃຫຍ່ ພຣະນາງວິມະລານັ້ນຊຶ່ງແພ້ທ້ອງ
ຊົງປາຖະໜາເຊິ່ງດວງຫະໄທຂອງວິທຸຣະບັນດິດ
ຂ້າພຣະອົງຈະຖວາຍດວງຫະໄທຂອງວິທຸຣະບັນດິດນັ້ນ
ແກ່ທ້າວວະຣຸນນາຄະຣາດແລະພຣະນາງວິມະລາທັງ ໔ ພຣະອົງນັ້ນ
ຍ້ອນເຫດນັ້ນ ພຣະອົງທັງ ໔ ພຣະອົງນັ້ນ
ຈະພຣະຣາດຊະທານພຣະນາງອິຣັນທະດີໃຫ້ແກ່ຂ້າພຣະອົງ

[໑໓໗໘] ປຸນນະກະຍັກນັ້ນທູນລາທ້າວກຸເວນເວດສຸວັນຜູ້ເຮືອງຍົດ
ເປັນໃຫຍ່ແຫ່ງໝູ່ຍັກແລ້ວ
ໄປສັ່ງບຸຣຸດຄົນໃຊ້ຂອງຕົນໃນບ່ອນນັ້ນນັ້ນແລວ່າ
ເຈົ້າຈົ່ງນຳມ້າອາຊາໄນທີ່ກຽມໄວ້ມາໃນບ່ອນນີ້ເທີ້ນ

[໑໓໗໙] ມ້າອາຊາໄນໂຕນັ້ນມີຫູທັງ ໔ ຂ້າງປະດັບດ້ວຍຄຳ

ມີກີບຫຸ້ມແລ້ວແກ້ວມະນີແດງ
ມີເຄື່ອງປະດັບເອີກເຮັດດ້ວຍຄຳຊົມພູນຸດອັນສຸກປັ່ງ

[໑໓໗໐] ປຸນນະກະຍັກຜູ້ປະດັບແລ້ວ
ຈັດແຈງແຕ່ງຜົມແລະໜວດດີແລ້ວ
ກໍຂຶ້ນຂີ່ມ້າອັນເປັນຍານພາຫະນະຂອງເທວະດາ
ເຫາະໄປໃນອາກາດກາງຫາວ

[໑໓໗໑] ປຸນນະກະຍັກນັ້ນໄດ້ເຫາະໄປສູ່ນະຄອນຣາດຊະຄືອັນໜ້າອອນຊອນຫຼາຍ
ເປັນນະຄອນຂອງພຣະເຈົ້າອັງຄະທີ່ພວກຂ້າເສິກບໍ່ກ້າເຂົ້າໃກ້
ມີພັກສາຫານ ເຂົ້າ ແລະນ້ຳຫຼວງຫຼາຍ
ດັ່ງພົບຂອງທ້າວວາສະວະ ເຊິ່ງຊື່ວ່າມະສັກກະສາຣະ

[໑໓໗໔] ເປັນນະຄອນທີ່ອຶກກະທຶກກຶກກ້ອງໄປດ້ວຍຝູງນົກຍູງແລະນົກກະຣຽນ
ອື້ອຶງໄປດ້ວຍຝູງນົກຕ່າງ ໆ ຊະນິດ
ເປັນບ່ອນຢູ່ອາໄສຂອງຝູງນົກ
ມີນົກຕ່າງ ໆ ສົ່ງສຽງຮ່ຳຮ້ອງຢູ່ແຊວ ໆ
ມີເນີນສວຍງາມ ເດຍລະດາດໄປດ້ວຍດອກໄມ້ຄືພູຫິມະພານ

[໑໓໗໓] ປຸນນະກະຍັກນັ້ນຂຶ້ນເວປຸນລະບັນພົດເຊິ່ງເປັນພູສິລາລ້ວນ
ເປັນບ່ອນອາໄສຢູ່ຂອງໝູ່ກິນນະຣະ
ທ່ຽວສະແຫວງຫາແກ້ວມະນີດວງປະເສີດຢູ່
ຈຶ່ງໄດ້ເຫັນແກ້ວມະນີນັ້ນໃນທ່າມກາງຈອມພູ

[໑໓໗໔] ເມື່ອໄດ້ເຫັນແກ້ວມະນີອັນມີຣັດສະໝີຜຸດຜ່ອງ
ເປັນແກ້ວມະນີທີ່ປະເສີດສຸດ
ສາມາດນຳຊັບມາໃຫ້ໄດ້ດັ່ງໃຈມຸ້ງໝາຍ
ຮຸ່ງເຮືອງສະຫວ່າງສະໄຫວຢູ່ກັບໝູ່ແກ້ວບໍລິວານຫຼວງຫຼາຍ
ສະຫວ່າງສະໄຫວຢູ່ດັ່ງສາຍຟ້າໃນອາກາດ

[໑໓໗໕] ຈຶ່ງໄດ້ຖືແກ້ວໄພທູນຊື່ວ່າ ມະໂນຫະຣະຈິນດາ
ອັນມີຄ່າຫຼາຍ ມີອານຸພາບຫຼາຍ ເປັນຜູ້ມີວັນນະບໍ່ຊາມ
ຂຶ້ນຂີ່ຫຼັງມ້າອາຊາໄນເຫາະໄປໃນອາກາດກາງຫາວ

[໑໖໗໖] ປຸນນະກະຍັກນັ້ນໄດ້ເຫາະໄປເຖິງນະຄອນອິນທະປັດ
ລົງມາແລ້ວເຂົ້າໄປສູ່ທີ່ປະຊຸມຂອງຊາວກຸຣຸຣັດ
ບໍ່ເກງກົວພຣະຣາຊາ ໑໐໑ ພຣະອົງ
ທີ່ປະຊຸມພ້ອມພຽງກັນຢູ່ບ່ອນນັ້ນ
ກ່າວທ້າທາຍດ້ວຍສະກາວ່າ

[໑໖໗໗] ບັນດາພຣະຣາຊາໃນຣາດຊະສະມາຄົມນີ້ ພຣະອົງໃດນໍ
ຈະຊິງຊິງເອົາແກ້ວມະນີອັນປະເສີດຂອງຂ້າພຣະອົງໄດ້
ຫຼືຂ້າພຣະອົງຈະເພິ່ງຊະນະພຣະຣາຊາພຣະອົງໃດ
ດ້ວຍຊັບອັນປະເສີດ
ເມື່ອຊະນະຈະຊິງເອົາແກ້ວມະນີອັນປະເສີດອັນຍອດຢ້ຽມ
ກັບພຣະຣາຊາພຣະອົງໃດ
ອີກປະການໜຶ່ງ ພຣະຣາຊາພຣະອົງໃດຈະຊົງຊະນະຂ້າພຣະອົງ
ດ້ວຍຊັບອັນປະເສີດ

(ພຣະເຈົ້າໂກຣັບພະຍະຕັດຖາມວ່າ)

[໑໖໗໘] ຊາດພູມຂອງທ່ານຢູ່ແຄວ້ນໃດ
ຄຳເວົ້າຂອງທ່ານນີ້ບໍ່ແມ່ນຄຳເວົ້າຂອງຊາວກຸຣຸຣັດເລີຍ
ທ່ານບໍ່ໄດ້ເກງກົວເຮົາທັງມວນດ້ວຍຣັດສະໝີແຫ່ງຜິວພັນ
ທ່ານຈົ່ງບອກຊື່ແລະພວກພ້ອງຂອງທ່ານແກ່ເຮົາ

(ປຸນນະກະຍັກທູນຕອບວ່າ)

[໑໖໗໙] ຂ້າແດ່ ພຣະຣາຊາ ຂ້າພຣະອົງເປັນມານົບ
ກັດຈາຍະນະໂຄດຊື່ອະນູນະ
ຍາດ ໆ ແລະພວກພ້ອງຂອງຂ້າພຣະອົງຢູ່ໃນແຄວ້ນອັງຄະ
ຕ່າງກໍພາກັນຮຽກຂ້າພຣະອົງແນວນີ້
ຂ້າແດ່ ສົມມຸດຕິເທບ ຂ້າພຣະອົງມາເຖິງເມືອງນີ້
ດ້ວຍຕ້ອງການທີ່ຈະຫຼິ້ນການພະນັນສະກາ

(ພຣະຣາຊາທັງຫຼາຍຕັດວ່າ)

[໑໖໘໐] ພຣະຣາຊາຊົງຊ່ຽວຊານການຫຼິ້ນສະກາ

ເມື່ອຊິງຊະນະຈະເພິ່ງນຳເອົາແກ້ວເຫຼົ່າໃດໄປ
ແກ້ວເຫຼົ່ານັ້ນຂອງມານົບມີຢູ່ບໍ
ແກ້ວຂອງພຣະຣາຊາມີຢູ່ເປັນຈຳນວນຫຼາຍ
ທ່ານເປັນຄົນເຂັ້ນໃຈຈະມາພະນັນກັບພຣະຣາຊາເຫຼົ່ານັ້ນ
ຜູ້ມີຊັບຫຼວງຫຼາຍໄດ້ແນວໃດ

(ປຸນນະກະຍັກຂາບທູນວ່າ)

[໑໓໗໑] ແກ້ວມະນີຂອງຂ້າພຣະອົງນີ້
ຊື່ວ່າສາມາດນຳຊັບມາໃຫ້ໄດ້ດັ່ງໃຈປາຖະໜາ
ນັກເລງສະກາຊະນະຂ້າພຣະອົງແລ້ວເພິ່ງນຳແກ້ວມະນີດວງປະເສີດ
ສາມາດນຳຊັບມາໃຫ້ໄດ້ດັ່ງໃຈປາຖະໜາ
ແລະມ້າອາຊາໄນເປັນທີ່ເກງຂາມຂອງສັດຕູ
ຂອງຂ້າພຣະອົງທັງ ໔ ນີ້ໄປ

(ພຣະຣາຊາທັງຫຼາຍຕັດວ່າ)

[໑໓໗໔] ມານົບ ແກ້ວມະນີດວງດຽວຈັກເຮັດຫຍັງໄດ້
ສ່ວນມ້າອາຊາໄນໂຕດຽວຈັກເຮັດຫຍັງໄດ້
ແກ້ວມະນີຂອງພຣະຣາຊາມີຢູ່ເປັນຈຳນວນຫຼາຍ
ມ້າອາຊາໄນທີ່ມີກຳລັງວ່ອງໄວດັ່ງລົມ
ຂອງພຣະຣາຊາມີບໍ່ແມ່ນໜ້ອຍເລີຍ

**ໂທຫະລະຈົບ**

## ມະນີກັນ

## ຕອນວ່າດ້ວຍອານຸພາບແກ້ວມະນີ

(ປຸນນະກະຍັກຂາບທູນວ່າ)

[໑໓໗໓] ຂ້າແດ່ ພຣະອົງຜູ້ສູງສຸດກວ່າປະຊາຊົນ
ຂໍພຣະອົງຊົງທອດພຣະເນດເບິ່ງແກ້ວມະນີຂອງຂ້າພຣະອົງດວງນີ້ເທີ້ນ
ມີຮູບຍິງແລະຮູບຊາຍຜາກົດເປັນໝູ່ ໆ ຢູ່ໃນແກ້ວມະນີດວງນີ້

[໑໓໗໕] ມີຮູບເນື້ອແລະຮູບນົກຜາກົດເປັນໝູ່ ໆ ຢູ່ໃນແກ້ວມະນີດວງນີ້

ມີພະຍານາກແລະພະຍາຄຸດຜາກົດຢູ່ໃນແກ້ວມະນີດວງນີ້
ຂໍທູນເຊີນພຣະອົງທອດພຣະເນດເບິ່ງສິ່ງທີ່ໜ້າອັດສະຈັນ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້ເທີ້ນ

[໑໓໙໕] ຂໍທູນເຊີນພຣະອົງທອດພຣະເນດເບິ່ງຈະຕຸຣົງຄີນີເສນານີ້
ຄື ກອງພົນຊ້າງ ກອງພົນມ້າ ກອງພົນລົດ ແລະກອງພົນຣາບ
ທີ່ໃສ່ເກາະອັນທຳມະດາໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້ເທີ້ນ

[໑໓໙໖] ຂໍທູນເຊີນພຣະອົງຊົງທອດພຣະເນດເບິ່ງ
ເຫຼົ່າພົນທະຫານທີ່ຈັດໄວ້ເປັນກົມ ໆ ຄື
ກອງພົນຊ້າງ ກອງພົນມ້າ ກອງພົນລົດ ແລະກອງພົນຣາບ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້ເທີ້ນ

[໑໓໙໗] ຂໍທູນເຊີນພຣະອົງຊົງທອດພຣະເນດເບິ່ງພຣະນະຄອນ
ທີ່ມີປ້ອມພ້ອມມູນ ມີກຳແພງແລະຄ່າຍຫຼວງຫຼາຍ
ມີຖະໜົນສາມແຍກ ສີ່ແຍກ ມີພື້ນທີ່ສວຍງາມ
ອັນທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້ເທີ້ນ

[໑໓໙໘] ຂໍທູນເຊີນພຣະອົງຊົງທອດພຣະເນດເບິ່ງຫຼັກຮົ້ວຕ້າຍ
ຄູຄອງ ກອນປະຕູເຫຼັກ ປ້ອມຄ່າຍ ແລະຊຸ້ມປະຕູ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້ເທີ້ນ

[໑໓໙໙] ຂໍທູນເຊີນພຣະອົງຊົງທອດພຣະເນດເບິ່ງຝູງນົກນານາຊະນິດ
ເປັນຈຳນວນຫຼວງຫຼາຍທີ່ປາຍເສົາຄ່າຍ
ຄື ຝູງຫົງ ນົກກະຣຽນ ນົກຍູງ ນົກຈັກພາກ ແລະນົກເຂົາ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້ເທີ້ນ

[໑໔໐໐] ຂໍທູນເຊີນພຣະອົງທອດພຣະເນດເບິ່ງພຣະນະຄອນ
ອັນອັ່ງອໍໄປດ້ວຍຝູງນົກຊະນິດຕ່າງ ໆ
ຄື ຝູງນົກກາເວົາດຳ ນົກກາເວົາທີ່ມີປີກລາຍງົດງາມ ໄກ່ຟ້າ
ແລະນົກໂພຣະດົກ ເປັນຈຳນວນຫຼາຍ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້ເທີ້ນ

[໑໔໐໑] ຂໍທູນເຊີນພຣະອົງທອດພຣະເນດເບິ່ງພຣະນະຄອນ

ທີ່ລ້ອມດ້ວຍກຳແພງຄຳ
ໜ້າອັດສະຈັນຊວນໃຫ້ຂົນຫົວລຸກ
ດັ່ງທຸງຂຶ້ນເປັນປະຈຳ ໜ້າອອນຊອນ ໂຮຍດ້ວຍຊາຍຄຳ

[໑໘໐໒] ຂໍທູນເຊີນພຣະອົງທອດພຣະເນດຮ້ານຕະຫຼາດ
ທີ່ເຕັມໄປດ້ວຍສິນຄ້ານານາຊະນິດ
ເຮືອນ ສິ່ງຂອງໃນເຮືອນ ຖະໜົນ ຮ່ອມ ແລະຖະໜົນຫຼວງ

[໑໘໐໓] ຂໍທູນເຊີນພຣະອົງທອດພຣະເນດໂຮງຂາຍສຸຣາ
ນັກເລງສຸຣາ ພໍ່ຄົວ ເຮືອນຄົວ ພໍ່ຄ້າ
ຍິງແພດສະຫຍາ ຍິງງາມເມືອງ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໘໐໔] ຂໍທູນເຊີນພຣະອົງທອດພຣະເນດພວກຊ່າງດອກໄມ້
ຊ່າງຍ້ອມ ຊ່າງປຸງຂອງຫອມ ຊ່າງທໍຜ້າ
ຊ່າງຄຳ ແລະພວກຊ່າງແກ້ວມະນີ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໘໐໕] ຂໍທູນເຊີນພຣະອົງທອດພຣະເນດພວກຄົນເຮັດຂອງຫວານ
ຄົນເຮັດຂອງຄາວ ພວກນັກດົນຕີ ຄື
ລາງພວກຟ້ອນລຳຂັບຮ້ອງ ລາງພວກຕົບມື ລາງພວກຕີສິ່ງ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໘໐໖] ຂໍທູນເຊີນພຣະອົງທອດພຣະເນດກອງ ກອງຕະໂພນ ຫອຍສັງ
ບັນເດາະ ມະໂຫຣະທຶກ ແລະເຄື່ອງດົນຕີທຸກຊະນິດ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໘໐໗] ຂໍທູນເຊີນພຣະອົງທອດພຣະເນດເປີງມາງ (ສິ່ງ) ກັງສະດານ ພິນ
ການຟ້ອນລຳຂັບຮ້ອງ ເຄື່ອງດົນຕີດີດສີຕີເປົ່າທີ່ເຂົາປະໂຄມກຶກກ້ອງ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໘໐໘] ອັນໜຶ່ງ ຂໍທູນເຊີນພຣະອົງທອດພຣະເນດພວກນັກກະໂດດ
ນັກມວຍ ນັກຫຼິ້ນກົນ ຍິງງາມ ຊາຍງາມ ຄົນເຝົ້າຍາມ
ແລະຊ່າງຕັດຜົມ ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໔໐໗] ກໍໃນແກ້ວມະນີດວງນີ້ ມີມະໂຫຣະສົບທີ່ຫຼາກຫຼາຍໄປດ້ວຍຊາຍຍິງ
ຂໍທູນເຊີນພຣະອົງທອດພຣະເນດພື້ນທີ່ສຳລັບຫຼິ້ນມະໂຫຣະສົບ
ເທິງຕຽງຊ້ອນກັນເປັນຊັ້ນ ໆ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໔໑໐] ຂໍທູນເຊີນພຣະອົງທອດພຣະເນດພວກນັກມວຍ
ຜູ້ກຳລັງຕີຕ່ອຍກັນຢູ່ໃນສະໜາມມວຍ
ທີ່ວົງຮອບເປັນສອງຊັ້ນ ທັງຜູ້ຊະນະແລະຜູ້ປຣາໄຊ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໔໑໑] ຂໍທູນເຊີນທອດພຣະເນດໝູ່ເນື້ອນານາຊະນິດ
ເປັນຈຳນວນຫຼາຍທີ່ຕີນພູ ເຊັ່ນ
ຣາດຊະສີ ເສືອໂຄ່ງ ຊ້າງ ໝີ ໝາໃນ ເສືອດາວ

[໑໔໑໒] ແຣດ ງົວລານ ຄວາຍ ລະມັ່ງ ກວາງ
ເນື້ອຊາຍ ຣະມາດ ງົວ ໝູບ້ານ

[໑໔໑໓] ຊະມົດ ແມວປ່າ ກະຕ່າຍ ແລະກະແຕ
ເຊິ່ງມີຢູ່ເກື່ອນກາດ
ຂໍທູນເຊີນພຣະອົງທອດພຣະເນດໝູ່ເນື້ອນານາຊະນິດ
ທີ່ມີຢູ່ທົ່ວໄປເຊິ່ງທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໔໑໔] ໃນແກ້ວມະນີດວງນີ້ ມີແມ່ນ້ຳທີ່ມີທ່ານ້ຳສວຍງາມ
ລາດດ້ວຍຊາຍຄຳ ມີນ້ຳໃສສະອາດໄຫຼໄປບໍ່ຂາດສາຍ
ເປັນບ່ອນຢູ່ອາໄສຂອງຝູງປາ

[໑໔໑໕] ອັນໜຶ່ງ ໃນແມ່ນ້ຳນີ້ ມີຝູງແຂ້
ມັງກອນ ຕະໂຂງ ເຕົ່າ ປາຕອງ
ປາກະບອກ ປາກົດ ປາເຄົ້າ
ແລະປາວຽນໄຟແຫວກລອຍໄປມາ

[໑໔໑໖] ຂໍທູນເຊີນພຣະອົງທອດພຣະເນດສະໂບກຂະຣະນີ
ທີ່ກໍ່ສ້າງດ້ວຍແກ້ວໄພທູນ
ເຊິ່ງອັ່ງອໍໄປດ້ວຍຝູງປານານາຊະນິດ

ເດຍລະດາດໄປດ້ວຍໝູ່ໄມ້ຊະນິດຕ່າງ ໆ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໔໑໗] ຂໍທູນເຊີນພຣະອົງທອດພຣະເນດສະໂບກຂະຣະນີໃນແກ້ວມະນີດວງນີ້
ທີ່ທຳມະຊາດເນຣະມິດໄວ້ເປັນຢ່າງດີທັງ ໔ ທິດ
ອັ່ງອໍໄປດ້ວຍຝູງປານານາຊະນິດ
ເປັນບ່ອນຢູ່ອາໄສຂອງຝູງປາໃຫຍ່

[໑໔໑໘] ຂໍທູນເຊີນພຣະອົງທອດພຣະເນດແຜ່ນດິນທີ່ມີນ້ຳອ້ອມຮອບ
ເປັນແກ່ງແຫ່ງສາຄອນປະກອບຣາວໄພ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໔໑໙] ຂໍທູນເຊີນພຣະອົງທອດພຣະເນດບຸບພະວິເທຫະທະວີບທາງຂ້າງໜ້າ
ອະປະຣະໂຄຍານທະວີບທາງຂ້າງຫຼັງ
ອຸດຕະຣະກຸຣຸທະວີບແລະຊົມພູທະວີບທາງດ້ານຂວາ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໔໒໐] ຂໍທູນເຊີນພຣະອົງທອດພຣະເນດດວງຈັນແລະດວງອາທິດ
ທີ່ກຳລັງໝູນຮອບພູສິເນຣຸ
ສ່ອງແສງສະຫວ່າງສະໄຫວໄປທົ່ວທິດທັງ ໔ ແລະສິ່ງມະຫັດສະຈັນ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໔໒໑] ຂໍທູນເຊີນພຣະອົງທອດພຣະເນດພູສິເນຣຸ ພູຫິມະພານ
ສະມຸດສາຄອນ ພື້ນແຜ່ນດິນໃຫຍ່ ແລະທ້າວມະຫາຣາດທັງ ໔
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໔໒໒] ຂໍທູນເຊີນພຣະອົງທອດພຣະເນດພຸ່ມໄມ້ໃນສວນ ຫີນດາດ
ແລະເນີນຫີນທີ່ໜ້າອອນຊອນ ອັ່ງອໍໄປດ້ວຍກິນນະຣະ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໔໒໓] ຂໍທູນເຊີນພຣະອົງທອດພຣະເນດສວນສະຫວັນ
ຄື ປາຣຸສະກະວັນ ຈິດລະດາວັນ ມິດສະກະວັນ
ນັນທະວັນ ແລະເວຊະຍັນຕະຜາສາດ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໔໔໔] ຂໍທູນເຊີນພຣະອົງທອດພຣະເນດສະພາຊື່ສຸທຳມາ
ຕົ້ນປາຣິສັດທີ່ມີດອກບານເດຍລະດາດ ແລະພະຍາຊ້າງເອຣາວັນ
ເຊິ່ງມີຢູ່ໃນສະຫວັນຊັ້ນຕາວະຕິງສາ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໔໔໕] ຂໍທູນເຊີນພຣະອົງທອດພຣະເນດເທີ້ນ ຂ້ານ້ອຍ
ຂໍທູນເຊີນທອດພຣະເນດເຫຼົ່ານາງເທບກັນຍາ
ຜູ້ເລີໂສມຍິ່ງ ດັ່ງສາຍຟ້າແມບອອກຈາກກີບກ້ອນເຟືອ
ຜູ້ກຳລັງທ່ຽວໄປຢູ່ໃນນັນທະວັນນັ້ນ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໔໔໖] ຂໍທູນເຊີນພຣະອົງທອດພຣະເນດເທີ້ນ ຂ້ານ້ອຍ
ຂໍທູນເຊີນທອດພຣະເນດເຫຼົ່ານາງເທບກັນຍາ
ຜູ້ປະເລົ້າປະໂລມເທບພະບຸດ
ເຊິ່ງກຳລັງອະພິຣົມເຫຼົ່າເທບພະບຸດຢູ່ໃນນັນທະວັນນັ້ນ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໔໔໗] ຂໍທູນເຊີນພຣະອົງທອດພຣະເນດຜາສາດ
ເກີນກວ່າ ໑,໐໐໐ ຫຼັງ
ເຊິ່ງມີພື້ນລາດດ້ວຍແຜ່ນແກ້ວໄພທູນ ມີຣັດສະໝີເຮືອງຮອງ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໔໔໘] ຂໍທູນເຊີນພຣະອົງທອດພຣະເນດສະຫວັນຊັ້ນຕາວະຕິງສາ
ຊັ້ນຍາມາ ຊັ້ນດຸສິດ ຊັ້ນນິມມານະຣະດີ
ແລະຊັ້ນປະຣະນິມມິຕະວະສະວັດດີ
ທີ່ທຳມະຊາດໄດ້ເນຣະມິດໄວ້ໃນແກ້ວມະນີດວງນີ້

[໑໔໔໙] ຂໍທູນເຊີນພຣະອົງທອດພຣະເນດສະໂບກຂະຣະນີ
ທີ່ມີນ້ຳໃສສະອາດ ເຊິ່ງເດຍລະດາດໄປດ້ວຍດອກມົນທາລົກ
ດອກບົວຫຼວງ ແລະດອກບົວໃນສະຫວັນນີ້

[໑໔໙໐] ໃນແກ້ວມະນີດວງນັ້ນ ມີລາຍຂາວ ໑໐ ລາຍ
ສວຍງາມໜ້າອອນຊອນໃຈ ລາຍສີເຫຼືອງອ່ອນ ໔໑ ລາຍ
ແລະລາຍເຫຼືອງຂີ້ມີ້ນ ໑໔ ລາຍ ຜາກົດຢູ່

[໑໔໓໑] ໃນແກ້ວມະນີດວງນັ້ນ ມີລາຍສີຄຳ ໔໐ ລາຍ
ລາຍສີເງິນ ໔໐ ລາຍ ຜາກົດຢູ່
ລາຍສີແມງເຕົ່າຄຳ ໓໐ ລາຍ ຜາກົດຢູ່

[໑໔໓໔] ໃນແກ້ວມະນີດວງນີ້ ມີລາຍສີດຳ ໑໖ ລາຍ
ລາຍສີດອກຊະບາ ໔໕ ລາຍ ແຊມດ້ວຍລາຍດອກຫອນໄກ່
ອັນງາມຕະການຕາດ້ວຍດອກບົວຊຽວຜາກົດຢູ່

[໑໔໓໓] ຂ້າແດ່ ມະຫາຣາດຜູ້ສູງສົ່ງກວ່າຊາວປະຊາ
ຂໍທູນເຊີນພຣະອົງຊົງທອດພຣະເນດແກ້ວມະນີດວງນີ້
ເຊິ່ງມີຣັດສະໝີເຮືອງຮອງຜ່ອງໃສ ສົມບູນທຸກ ໆ ສ່ວນແນວນີ້
ອັນເປັນລາງວັນແກ່ຜູ້ຊະນະພະນັນ

**ມະນີກັນ ຈົບ**

# ອັກຂະກັນ

## ຕອນວ່າດ້ວຍການຫຼິ້ນສະກາ

(ຕໍ່ຈາກນັ້ນ ປຸນນະກະຍັກໄດ້ຂາບທູນຕໍ່ໄປວ່າ)

[໑໔໓໔] ຂ້າແດ່ ພຣະຣາຊາ ວຽກງານໃນໂຮງຫຼິ້ນການພະນັນ (ສະກາ)
ສຳເລັດລົງແລ້ວ ຂໍເຊີນພຣະອົງສະເດັດເຂົ້າໄປ
ສະຖານທີ່ຈະຊົງຫຼິ້ນການພະນັນເທີ້ນ
ແກ້ວມະນີແນວນີ້ສຳລັບພຣະອົງບໍ່ມີ
ເຮົາທັງ ໔ ເມື່ອຫຼິ້ນກໍຈະເພິ່ງຊະນະກັນໂດຍທຳ
ຂໍຈົ່ງຢ່າຊະນະກັນໂດຍບໍ່ຊອບທຳ
ຖ້າພຣະອົງປຣາໄຊແລ້ວ ຂໍຢ່າໄດ້ຊົງເຮັດໃຫ້ລ້າຊ້າ

[໑໔໓໕] ຂ້າແດ່ ພຣະເຈົ້າສຸຣະເສນປັນຈາລະຜູ້ມີພຣະກິດຕິສັບໂດ່ງດັງ
ຂ້າແດ່ ພຣະເຈົ້າມັດສະ ພຣະເຈົ້າມັດທະ
ພ້ອມດ້ວຍຊາວເກກາກະຊົນນະບົດທັງຫຼາຍ
ຂໍພຣະຣາຊາເຫຼົ່ານີ້ຈົ່ງຊົງທອດພຣະເນດການຕໍ່ສູ້
ຂອງຂ້າພຣະອົງທັງຫຼາຍໂດຍການບໍ່ສໍ້ໂກງ
ບໍ່ແມ່ນບໍ່ຊົງເຮັດໃຜໃຫ້ເປັນພະຍານໃນບ່ອນປະຊຸມເລີຍ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນີ້ ຈຶ່ງຕັດວ່າ)

[໑໘໓໖] ພຣະຣາຊາຂອງຊາວແຄວ້ນກຸຣຸແລະປຸນນະກະຍັກທັງ ໒ ນັ້ນ
ຕ່າງກໍມົວເມົາໃນການຫຼິ້ນການພະນັນພາກັນເຂົ້າໄປສູ່ໂຮງຫຼິ້ນການພະນັນ
ພຣະຣາຊາຊົງເລືອກຢູ່ຈຶ່ງໄດ້ຮັບຄວາມປຣາໄຊ
ສ່ວນປຸນນະກະຍັກໄດ້ໄຊຊະນະ

[໑໘໓໗] ພຣະຣາຊາແລະປຸນນະກະຍັກທັງ ໒ ນັ້ນ
ເມື່ອລູກສະກາມີພ້ອມແລ້ວກໍໄດ້ຫຼິ້ນການພະນັນໃນໂຮງຫຼິ້ນການພະນັນນັ້ນ
ປຸນນະກະຍັກໄດ້ໄຊຊະນະພຣະຣາຊາຜູ້ແກ່ກ້າແລະປະເສີດກວ່າຊົນ
ໃນທ່າມກາງພຣະຣາຊາແລະພະຍານທັງຫຼາຍ
ສຽງບັນລືລັ່ນໄດ້ມີຂຶ້ນໃນສະໜາມການພະນັນນັ້ນ

(ປຸນນະກະຍັກຂາບທູນວ່າ)

[໑໘໓໘] ຂ້າແດ່ ມະຫາຣາດ ບັນດາເຮົາທັງ ໒ ທີ່ຍັງພະຍາຍາມຫຼິ້ນຢູ່
ຄວາມຊະນະແລະຄວາມປຣາໄຊຍ່ອມຕົກແກ່ຝ່າຍໃດຝ່າຍໜຶ່ງ
ຂ້າແດ່ ພຣະອົງຜູ້ເປັນຈອມຊົນ
ພຣະອົງຊົງເສື່ອມຈາກຊັບອັນປະເສີດແລ້ວ ຊົງປຣາໄຊແລ້ວ
ຂໍພຣະອົງຈົ່ງຊົງພຣະຣາດຊະທານຊັບແກ່ຂ້າພຣະອົງໂດຍໄວເທີ້ນ

(ພຣະຣາຊາຕັດວ່າ)

[໑໘໓໙] ທ່ານກັດຈານະ ຊ້າງ ມ້າ ງົວ ຕຸ້ມຫູແກ້ວມະນີ
ແລະຣັດຕະນະທີ່ປະເສີດກວ່າຊັບທັງຫຼາຍມີຢູ່ໃນແຜ່ນດິນຂອງເຮົາ
ທ່ານຈົ່ງຮັບໄປເທີ້ນ ເຊີນຂົນໄປຕາມປາຖະໜາເທີ້ນ

(ປຸນນະກະຍັກຂາບທູນວ່າ)

[໑໘໔໐] ຊ້າງ ມ້າ ງົວ ຕຸ້ມຫູແກ້ວມະນີ
ຣັດຕະນະແມ່ນອື່ນໃດທີ່ມີຢູ່ໃນແຜ່ນດິນຂອງພຣະອົງ
ບັນດິດຊື່ວ່າວິທຸຣະເປັນຜູ້ປະເສີດກວ່າຣັດຕະນະທັງປວງເຫຼົ່ານັ້ນ
ຂ້າພຣະອົງໄດ້ຊະນະພຣະອົງແລ້ວ
ໂຜດພຣະຣາດຊະທານວິທຸຣະບັນດິດນັ້ນໃຫ້ແກ່ຂ້າພຣະອົງເທີ້ນ

(พระราชาตัดว่า)

[๑๘๘๑] วิทุระบัณฑิตนั้นเป็นคือโตของเรา เป็นสะระนะ เป็นคะติ
เป็นบ่อนเพิ่ง เป็นบ่อนลี้ และเป็นจุดมุ้งหมายปายทางของเรา
ท่านบ่ควรปุงบวิทุระบัณฑิตนั้นกับซับของเรา
วิทุระบัณฑิตนี้ที่กับชีวิดของเรา คือโตเราเอง

(ปุนนะกะยักขาบทูนว่า)

[๑๘๘๒] การโต้ถຽงกันของข้าพระอົງກັບพระອົງຈະເພິ່ງເປັນໄປດົນ
ພວກເຮົາໄປຖາມວິທຸຣະບັນດິດນັ້ນເບິ່ງດີກວ່າ
ວິທຸຣະບັນດິດນີ້ແລຈະໄຂຂໍ້ຂ້ອງໃຈນີ້ແກ່ເຮົາທັງຫຼາຍໄດ້
ວິທຸຣະບັນດິດຈັກກ່າວຄຳໃດ ຄຳນັ້ນກໍຈັກເປັນແນວນັ້ນແກ່ເຮົາທັງ ໒

(ພຣະຣາຊາຕັດວ່າ)

[໑໘໘໓] ມານົບ ທ່ານເວົ້າຖືກ ແລະບໍ່ໄດ້ເວົ້າຄຳຮຸນແຮງແກ່ເຮົາ
ພວກເຮົາໄປຖາມວິທຸຣະບັນດິດກັນເບິ່ງເທີ້ນ
ເຮົາທັງ ໒ ຄົນຈົ່ງຍິນດີຄຳທີ່ວິທຸຣະບັນດິດເວົ້ານັ້ນ

(ປຸນນະກະຍັກຂາບທູນວ່າ)

[໑໘໘໔] ເທວະດາທັງຫຼາຍຮູ້ຈັກອຳມາດໃນແຄວັນກຸຣຸຊື່ວ່າວິທຸຣະ
ຜູ້ຕັ້ງຢູ່ໃນທຳແມ່ນບໍ? ການບັນຍັດຊື່ວ່າວິທຸຣະໃນໂລກນັ້ນ
ທ່ານເປັນອັນໃດ ຄື ເປັນຂ້າທາດຫຼືເປັນພຣະຍາດຂອງພຣະຣາຊາ

(ວິທຸຣະບັນດິດຂາບທູນວ່າ)

[໑໘໘໕] ຂ້າທາດມີ ໔ ຈຳພວກ ຄື
(໑) ຂ້າທາດໃນເຮືອນເບ້ຍ
(໒) ຂ້າທາດທີ່ຊື້ມາດ້ວຍຊັບ
(໓) ຂ້າທາດທີ່ຍອມຕົນເຂົ້າເປັນຂ້າເຝົ້າ
(໔) ຂ້າທາດຊະເລີຍ[១]

[໑໘໘໖] ໃນໝູ່ຄົນມີຂ້າທາດ ໔ ຈຳພວກເຫຼົ່ານີ້
ແມ່ນຂ້າພຣະອົງກໍເປັນຂ້າທາດໂດຍກຳເນີດຢ່າງແທ້ຈິງ
ຄວາມຈະເລີນຫຼືຄວາມເສື່ອມຈະມີແກ່ພຣະຣາຊາກໍຕາມ
ຂ້າພຣະອົງໄປສູ່ທີ່ອື່ນກໍຍັງຄົງເປັນຂ້າທາດຂອງສົມມຸດຕິເທບຢູ່ນັ້ນເອງ
ມານົບ ພຣະຣາຊາກໍຈະເພິ່ງພຣະຣາດຊະທານໂຕຂ້າພະເຈົ້າແກ່ທ່ານໂດຍທຳ

(ປຸນນະກະຍັກຂາບທູນວ່າ)

[໑໘໘໗] ໄຊຊະນະນີ້ເປັນໄຊຊະນະຄັ້ງທີ ໘ ຂອງຂ້າພຣະອົງໃນມື້ນີ້
ຍ້ອນວ່າວິທຸຣະບັນດິດຜູ້ເປັນປາດຖືກຂ້າພຣະອົງຖາມແລ້ວ
ໄດ້ຊີ້ແຈ່ງບັນຫາຢ່າງແຈ່ມແຈ້ງ
ພຣະຣາຊາຜູ້ປະເສີດບໍ່ຊົງຕັ້ງຢູ່ໃນທຳນໍ
ວິທຸຣະບັນດິດໄດ້ກ່າວໄວ້ຖືກຕ້ອງດີແລ້ວ
ພຣະຣາຊາບໍ່ຊົງອະນຸຍາດໃຫ້ວິທຸຣະບັນດິດນີ້ແກ່ຂ້າພຣະອົງ

(ພຣະຣາຊາຕັດວ່າ)

[໑໘໘໘] ກັດຈານະ ຫາກວິທຸຣະບັນດິດໄດ້ຊີ້ແຈ່ງບັນຫາແກ່ພວກເຮົາແນວນີ້ວ່າ
ເຮົາເປັນຂ້າທາດ ເຮົາບໍ່ໄດ້ເປັນຍາດເລີຍ ທ່ານຈົ່ງຮັບເອົາວິທຸຣະບັນດິດ
ຜູ້ເປັນຊັບອັນປະເສີດກວ່າຊັບທັງຫຼາຍ
ພາໄປຕາມທີ່ທ່ານປາຖະໜາເທີ້ນ

**ອັກຂະກັນ ຈົບ**

## ຄະຣາວາສະບັນຫາ
## ບັນຫາໃນການຢູ່ຄອງເຮືອນ

(ພຣະຣາຊາຕັດວ່າ)

[໑໘໘໙] ທ່ານວິທຸຣະ ຄະລິຫັດຜູ້ຢູ່ຄອງເຮືອນຂອງຕົນ
ຈະເພິ່ງມີຄວາມປະພຶດທີ່ປອດໄພໄດ້ແນວໃດ
ຈະເພິ່ງມີການສົງເຄາະໄດ້ແນວໃດ

[໑໘໕໐] ຈະເພິ່ງມີຄວາມບໍ່ບຽດບຽນກັນໄດ້ແນວໃດ
ແລະແນວໃດຄົນຈຶ່ງຈະໄດ້ຊື່ວ່າເປັນຜູ້ມີປິກກະຕິກ່າວຄຳສັດ
ຄົນຈາກໂລກນີ້ໄປສູ່ໂລກໜ້າຈະບໍ່ເສົ້າໂສກໄດ້ແນວໃດ

[໑໘໕໑] ວິທຸຣະບັນດິດຜູ້ມີຄະຕິ ມີຄວາມພຽນ
ມີປັນຍາເຫັນອັດຖະທຳ
ກຳນົດຮູ້ທຳທັງປວງ ໄດ້ຂາບທູນຄຳນີ້
ກັບພຣະຣາຊາພຣະອົງນັ້ນໃນທຳມະສະພານັ້ນວ່າ

[໑໒໕໒] ຜູ້ຢູ່ຄອງເຮືອນບໍ່ຄວນຄົບຍິງສາທາຣະນະ[໑]ເປັນພັນລະຍາ
ບໍ່ຄວນບໍຣິໂພກອາຫານອັນມີຣົດແຊບແຕ່ຜູ້ດຽວ
ບໍ່ຄວນສ້ອງເສບກ່າວຄຳເວົ້າອັນໃຫ້ຕິດຢູ່ໃນໂລກ
ຍ້ອນວ່າຄຳອັນໃຫ້ຕິດຢູ່ໃນໂລກນີ້ບໍ່ເປັນທາງຈະເລີນແຫ່ງປັນຍາ

[໑໒໕໓] ຜູ້ຢູ່ຄອງເຮືອນຄວນເປັນຄົນມີສີນ ສົມບູນດ້ວຍຂໍ້ວັດປະຕິບັດ
ເປັນຜູ້ບໍ່ຜະໝາດ ມີປັນຍາເຫັນປະຈັກ
ມີຄວາມປະພຶດຖ່ອມຕົນ ບໍ່ກະດ້າງ
ສະງົບສະງ່ຽມ ເວົ້າຄຳມ່ວນຈັບໃຈ ສຸພາບອ່ອນໂຍນ

[໑໒໕໔] ຜູ້ຢູ່ຄອງເຮືອນເພິ່ງເປັນຜູ້ສົງເຄາະມິດ
ຈຳແນກແຈກທານ ຮູ້ຈັກເຮັດກິດວຽກງານ
ບຳລຸງສະມະນະແລະພາມດ້ວຍເຂົ້ານ້ຳທຸກເມື່ອ

[໑໒໕໕] ຜູ້ຢູ່ຄອງເຮືອນເພິ່ງເປັນຜູ້ຕ້ອງການທຳ ຊົງສຸຕະ
ໝັ່ນສອບຖາມ ເຂົ້າໄປຫາທ່ານຜູ້ມີສີນ ເປັນພະຫູສູດ ໂດຍຄວາມເຄົາລົບ

[໑໒໕໖] ຄະລຶຫັດຜູ້ຢູ່ຄອງເຮືອນຂອງຕົນ
ຄວນມີຄວາມປະພຶດປອດໄພແນວນີ້
ຄວນສົງເຄາະໄດ້ແນວນີ້

[໑໒໕໗] ບໍ່ຄວນບຽດບຽນກັນແລະກັນແນວນີ້
ແລະຄົນຄວນປະຕິບັດແນວນີ້ຈຶ່ງຊື່ວ່າເປັນຜູ້ມີປົກກະຕິກ່າວຄຳສັດ
ຈາກໂລກນີ້ແລ້ວໄປສູ່ໂລກໜ້າຈະບໍ່ເສົ້າໂສກໄດ້ດ້ວຍປະການດັ່ງນີ້

**ຄະຣາວາສະບັນຫາ ຈົບ**

## ລັກຂະນະກັນ

### ຕອນວ່າດ້ວຍລັກສະນະຂອງບັນດິດ

(ປຸນນະກະຍັກຂາບທູນວ່າ)

[໑໒໕໘] ມາເທີ້ນທ່ານ ບຶດດ່ຽວເຮົາຈັກໄປກັນ
ພຣະຣາຊາຜູ້ເປັນໃຫຍ່
ໄດ້ຊົງພຣະຣາດຊະທານທ່ານໃຫ້ແກ່ຂ້າພະເຈົ້າແລ້ວ

ຂໍທ່ານຈົ່ງປະຕິບັດສິ່ງທີ່ເປັນປະໂຫຍດແກ່ຂ້າພະເຈົ້າທໍ່ນັ້ນ
ນີ້ເປັນທຳເກົ່າ

(ວິທຸຣະບັນດິດກ່າວວ່າ)

[໑໔໕໙] ມານົບ ຂ້າພະເຈົ້າຮູ້ວ່າ ຂ້າພະເຈົ້າເປັນຜູ້ທີ່ທ່ານໄດ້ແລ້ວ
ຂ້າພະເຈົ້າເປັນຜູ້ທີ່ພຣະຣາຊາຜູ້ເປັນໃຫຍ່ຊົງພຣະຣາດຊະທານໃຫ້ທ່ານແລ້ວ
ແຕ່ພວກເຮົາຂໍໃຫ້ທ່ານພັກຢູ່ໃນເຮືອນຂອງຕົນຈັກ ໓ ມື້
ແລະຂໍໃຫ້ທ່ານຍັບຍັ້ງຖ້າຢູ່ຕະຫຼອດເວລາ
ທີ່ຂ້າພະເຈົ້າຈະໄດ້ສັ່ງສອນບຸດທັງຫຼາຍກ່ອນ

(ປຸນນະກະຍັກກ່າວວ່າ)

[໑໔໖໐] ຄຳທີ່ທ່ານກ່າວມາທັງໝົດນັ້ນ
ຈົ່ງເປັນໄປຕາມທີ່ທ່ານກ່າວແນວນັ້ນ
ຂ້າພະເຈົ້າຈະພັກຢູ່ ໓ ມື້ ຕັ້ງແຕ່ມື້ນີ້ໄປ
ຂໍທ່ານຈົ່ງເຮັດໜ້າທີ່ໃນເຮືອນເທີ້ນ
ຈົ່ງສັ່ງສອນບຸດແລະພັນລະຍາສາແຕ່ໃນມື້ນີ້
ໂດຍວິທີທີ່ບຸດແລະພັນລະຍາຂອງທ່ານຈະເພິ່ງມີຄວາມສຸກໃຈ
ເມື່ອທ່ານຈາກໄປແລ້ວ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໑໔໖໑] ປຸນນະກະຍັກຜູ້ມີໂພຄະຊັບຈຳນວນຫຼາຍກ່າວວ່າ ຕົກລົງ
ແລ້ວໄດ້ຫຼີກໄປພ້ອມກັບວິທຸຣະບັນດິດ
ເປັນອາຣະຍະຊົນຜູ້ມີມາຣະຍາດປະເສີດສຸດ
ໄດ້ເຂົ້າໄປສູ່ພາຍໃນເມືອງຂອງວິທຸຣະບັນດິດ
ທີ່ເຕັມໄປດ້ວຍຊ້າງແລະມ້າອາຊາໄນ

[໑໔໖໒] ຜາສາດຂອງພຣະໂພທິສັດມີຢູ່ ໓ ຫຼັງ ຄື
(໑) ໂກນຈະນະຜາສາດ (໒) ມະຍູຣະຜາສາດ (໓) ປິຍະເກຕະຜາສາດ
ໃນຜາສາດ ໓ ຫຼັງນັ້ນ ພຣະໂພທິສັດໄດ້ພາປຸນນະກະຍັກ
ເຂົ້າໄປສູ່ຜາສາດເຊິ່ງເປັນທີ່ໜ້າອອນຊອນຢ່າງຍິ່ງ
ມີພັກສາພຽງພໍ ມີເຂົ້ານ້ຳຫຼວງຫຼາຍ

ດັ່ງວິມານຂອງທ້າວວາສະວະ ເຊິ່ງຊື່ວ່າມະສັກກະສາຣະ

[໑໔໓໓] ໃນຜາສາດຫຼັງນັ້ນ ມີນາຣີທັງຫຼາຍປະດັບຢ່າງງົດງາມ
ຟ້ອນລຳຂັບຮ້ອງເພງທີ່ມ່ວນຈັບໃຈ
ຄືນາງເທບອັບປະສອນໃນເທວະໂລກກ່ອມປຸນນະກະຍັກຢູ່

[໑໔໓໔] ພຣະໂພທິສັດຜູ້ຮັກສາທຳໄດ້ຮັບຮອງປຸນນະກະຍັກ
ດ້ວຍນາງບຳເລີທີ່ໜ້າຍິນດີ ທັງເຊົ້າແລະນໍ້າແລ້ວ
ຄິດເຖິງປະໂຫຍດສ່ວນຕົນ ໄດ້ເຂົ້າໄປໃນສຳນັກຂອງພັນລະຍາໃນການນັ້ນ

[໑໔໓໕] ໄດ້ກ່າວກັບພັນລະຍາຜູ້ລູບທາດ້ວຍຈຸນແກ່ນຈັນແລະນໍ້າຫອມ
ຜູ້ມີຜິວພັນຜຸດຜ່ອງດັ່ງແທ່ງຄຳຊົມພູນຸດວ່າ
ນາງຜູ້ຈະເລີນ ຜູ້ມີດວງຕາສີນໍ້າຕານ ມານີ້ເທີ້ນ
ຈົ່ງຮຽກບຸດທັງຫຼາຍມາຟັງຄຳສັ່ງສອນ

[໑໔໓໖] ນາງອະໂນຊາໄດ້ຟັງຄຳຂອງສາມີແລ້ວ
ໄດ້ກ່າວກັບລູກໃພ້ຜູ້ມີເລັບແດງ ມີໜ່ວຍຕາງາມວ່າ
ເຈົ້າຜູ້ມີຜິວພັນດັ່ງດອກບົວຂຽວ
ເຈົ້າຈົ່ງຮຽກບຸດທັງຫຼາຍເຫຼົ່ານັ້ນມາເທີ້ນ

[໑໔໓໗] ພຣະໂພທິສັດຜູ້ຮັກສາທຳໄດ້ຈູບບຸດເຫຼົ່ານັ້ນ
ຜູ້ມາແລ້ວທີ່ກະໝ່ອມ ເປັນຜູ້ບໍ່ຫວັ່ນໄຫວ
ເມື່ອຮຽກມາແລ້ວໄດ້ສັ່ງສອນວ່າ
ພຣະຣາຊາໃນນະຄອນອິນທະປັດນີ້ໄດ້ພຣະຣາດຊະທານພໍ່ໃຫ້ແກ່ມານົບ

[໑໔໓໘] ຕັ້ງແຕ່ມື້ນີ້ໄປ ພໍ່ຈະມີຄວາມສຸກຂອງຕົນເອງໄດ້ພຽງ ໓ ມື້
ຕໍ່ຈາກນັ້ນໄປ ພໍ່ກໍຈະຕ້ອງເປັນຢູ່ໃນອຳນາດຂອງມານົບນັ້ນ
ເຂົາຈະພາພໍ່ໄປຕາມທີ່ເຂົາປາຖະໜາ
ພໍ່ກັບມາເພື່ອຈະສັ່ງສອນລູກ ໆ ວ່າ
ພໍ່ຍັງບໍ່ໄດ້ເຮັດເຄື່ອງປ້ອງກັນໃຫ້ແກ່ລູກ ໆ ແລ້ວຈະເພິ່ງໄປໄດ້ແນວໃດ

[໑໔໓໙] ຖ້າພຣະຣາຊາແຫ່ງຊາວແຄວ້ນກຸຣຸ
ຜູ້ມີໂພຄະຊັບທີ່ໜ້າຕ້ອງການເປັນຈຳນວນຫຼາຍ
ຊົງປະສານຊົນຜູ້ເປັນມິດ ເພິ່ງຕັດຖາມລູກທັງຫຼາຍວ່າ

ແຕ່ກ່ອນ ພວກທ່ານຮູ້ເຫດການເກົ່າ ໆ ອັນໃດແດ່
ພໍ່ຂອງພວກທ່ານໄດ້ພໍ່າສອນອັນໃດໄວ້ຕັ້ງແຕ່ກ່ອນແດ່

[໑໘໗໐] ກໍຖ້າພຣະຣາຊາຈະເພິ່ງຕັດວ່າ
ພວກທ່ານເປັນຜູ້ມີອາສະນະສະເໝີກັນກັບເຮົາໃນຣາດຊະຕະກູນນີ້
ຄົນອື່ນໃຜນໍຈະເປັນຄົນມີຊາດຕະກູນສົມຄວນກັບພຣະຣາຊາບໍ່ມີ
ລູກທັງຫຼາຍເພິ່ງປະນົມມືຂາບທູນພຣະຣາຊານັ້ນແນວນີ້ວ່າ
ຂ້າແດ່ ສົມມຸດຕິເທບ ພຣະອົງຢ່າໄດ້ຮັບສັ່ງແນວນີ້ເລີຍ
ຍ້ອນນັ້ນບໍ່ແມ່ນທໍາຂອງພວກຂ້າພຣະອົງ
ຂ້າແດ່ ສົມມຸດຕິເທບ ພວກຂ້າພຣະອົງ
ຈະເພິ່ງມີອາສະນະສະເໝີກັບພຣະອົງໄດ້ແນວໃດ
ຄືໝາຈອກໂຕມີຊາດຕໍ່າຕ້ອຍ
ຈະເພິ່ງມີອາສະນະສະເໝີກັບເສືອໄດ້ແນວໃດ ຂ້ານ້ອຍ

**ລັກຂະນະກັນ ຈົບ**

## ຣາຊະວະສະຕິທໍາ
## ວ່າດ້ວຍທໍາສໍາລັບຜູ້ຢູ່ໃນຣາດຊະສໍານັກ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໑໘໗໑] ວິທຸຣະບັນດິດນັ້ນມີຄວາມດໍາຣິໃນໃຈທີ່ບໍ່ຫົດຫູ່
ໄດ້ກ່າວກັບບຸດ ທິດາ ອໍາມາດ ຍາດ ແລະເພື່ອນສະນິດດັ່ງນີ້ວ່າ

[໑໘໗໒] ລູກຮັກທັງຫຼາຍ ລູກທັງຫຼາຍຈົ່ງພາກັນມາ
ນັ່ງຟັງຣາຊະວະສະຕິທໍາ[໑] ທີ່ເປັນເຫດໃຫ້ບຸກຄົນ
ຜູ້ເຂົ້າໄປສູ່ຣາດຊະຕະກູນແລ້ວໄດ້ຍົດ

[໑໘໗໓] ຍ້ອນບຸກຄົນຜູ້ເຂົ້າໄປສູ່ຣາດຊະຕະກູນ
ມີຄຸນຄວາມດີຍັງບໍ່ຜາກົດ ຍ່ອມບໍ່ໄດ້ຍົດ
ຜູ້ເປັນຣາດຊະສະເວກບໍ່ຄວນກ້າເກີນໄປ
ບໍ່ຄວນຢ້ານເກີນໄປ ຄວນເປັນຜູ້ບໍ່ຜະໝາດບໍ່ວ່າໃນການໃດ ໆ

[໑໘໗໔] ເມື່ອໃດ ພຣະຣາຊາຊົງຮູ້ປັນຍາ

ແລະຄວາມບໍລິສຸດຂອງຣາດຊະສະເວກນັ້ນ
ເມື່ອນັ້ນ ພຣະອົງກໍຊົງວາງພຣະຫະໄທ
ແລະບໍ່ຊົງປົກປິດຄວາມລັບຂອງພຣະອົງ

[໑໘໗໔] ຣາດຊະສະເວກທີ່ພຣະຣາຊາຕັດຣັບສັ່ງໃຊ້
ກໍບໍ່ເພິ່ງຫວັ່ນໄຫວດ້ວຍອຳນາດຄວາມພໍໃຈເປັນຕົ້ນ
ເພິ່ງເປັນຜູ້ສະໝ່ຳສະເໝີຄືຕາຊັ່ງທີ່ບຸກຄົນຈັບປະຄອງ
ໃຫ້ມີຄັນທ່ຽງຕົງສະໝ່ຳສະເໝີດີສັນນັ້ນ
ຣາດຊະສະເວກຜູ້ປານນີ້ນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໘໗໕] ຣາດຊະສະເວກເມື່ອກະທຳຣາດຊະກິດທຸກຢ່າງ
ຄືຕາຊັ່ງທີ່ບຸກຄົນຈັບປະຄອງ
ໃຫ້ມີຄັນທ່ຽງຕົງສະໝ່ຳສະເໝີດີ
ເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໘໗໗] ຣາດຊະສະເວກນີ້ຜູ້ສະຫຼາດໃນຣາດຊະກິດທັງຫຼາຍ
ທີ່ພຣະຣາຊາຕັດຣັບສັ່ງໃຊ້ໃນເວລາກາງເວັນຫຼືກາງຄືນກໍຕາມ
ບໍ່ເພິ່ງຫວາດຫວັ່ນ ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໘໗໘] ຣາດຊະສະເວກຕ້ອງເປັນຜູ້ສະຫຼາດໃນຣາດຊະກິດທັງຫຼາຍ
ເຮັດຣາດຊະກິດທຸກຢ່າງບໍ່ວ່າເວລາກາງເວັນຫຼືກາງຄືນ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໘໗໙] ທາງໃດທີ່ເຂົາເຮັດປະດັບຕົກແຕ່ງໄວ້ຮຽບຮ້ອຍດີ
ເພື່ອສະເດັດພຣະຣາດຊະດຳເນີນຂອງພຣະຣາຊາ ພຣະອົງຊົງອະນຸຍາດແລ້ວ
ຣາດຊະສະເວກກໍບໍ່ຄວນຍ່າງຕາມທາງນັ້ນ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໘໘໐] ຣາດຊະສະເວກບໍ່ເພິ່ງບໍຣິໂພກການທັດທຽມກັບພຣະຣາຊາ
ບໍ່ວ່າໃນການໃດ ໆ ເພິ່ງດຳເນີນການຕາມຫຼັງໃນທຸກ ໆ ແນວ[១]
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໘໘໑] ຣາດຊະສະເວກບໍ່ເພິ່ງໃຊ້ສອຍເສື້ອຜ້າ ປະດັບປະດາດອກໄມ້
ເຄື່ອງລູບທາທັດທຽມກັບພຣະຣາຊາ

ບໍ່ເພິ່ງປະພຶດອາກັບກິຣິຍາຫຼືການເວົ້າຈາທັດທຽມກັບພຣະຣາຊາ
ແຕ່ຄວນເຮັດອາກັບກິຣິຍາອີກແນວໜຶ່ງຕ່າງຫາກ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໔໗໔] ເມື່ອພຣະຣາຊາຊົງພຣະກະເສມສຳຣານຢູ່ກັບອຳມາດ
ພຣະສະໜົມກຳນັນໃນແທ່ແທນຢູ່ ອຳມາດຕ້ອງເປັນຄົນສະຫຼາດ
ບໍ່ເພິ່ງທຳການໃກ້ຊິດໃນພຣະຊາຍາທັງຫຼາຍຂອງພຣະຣາຊາ

[໑໔໗໓] ຣາດຊະສະເວກບໍ່ເພິ່ງເປັນຄົນຟຸ້ງຊ່ານ ຫຼອກລວງ
ເພິ່ງມີປັນຍາເປັນເຄື່ອງຮັກສາຕົນ
ສັງລວມອິນຊີ ເຖິງພ້ອມດ້ວຍຄວາມເປັນຜູ້ມີຈິດຕັ້ງໝັ້ນ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໔໗໔] ຣາດຊະສະເວກບໍ່ເພິ່ງຫຼິ້ນຫົວ ເຈລະຈາປາໄສ
ໃນບ່ອນລັບກັບພຣະຊາຍາທັງຫຼາຍຂອງພຣະຣາຊານັ້ນ
ບໍ່ເພິ່ງບຽດບັງຊັບຈາກພຣະຄັງຫຼວງ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໔໗໕] ຣາດຊະສະເວກບໍ່ເພິ່ງຫຼັບນອນຫຼາຍເກີນໄປ
ບໍ່ເພິ່ງດື່ມສຸຣາຈົນເມົາມາຍ
ບໍ່ເພິ່ງຂ້າເນື້ອໃນສະຖານທີ່ພຣະຣາດຊະທານອະໄພ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໔໗໖] ຣາດຊະສະເວກບໍ່ເພິ່ງນັ່ງຮ່ວມພຣະພັດທະຣະບິດ
ພຣະບັນລັງ ຕັ່ງພຣະທີ່ນັ່ງ
ເຮືອພຣະທີ່ນັ່ງ ແລະລົດພຣະທີ່ນັ່ງ
ດ້ວຍການທະນົງໂຕວ່າເປັນຄົນພໍໃຈ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໔໗໗] ຣາດຊະສະເວກຕ້ອງເປັນຜູ້ມີປັນຍາເປັນເຄື່ອງພິຈາລະນາ
ບໍ່ຄວນເຝົ້າຫ່າງເກີນໄປ ໃກ້ເກີນໄປ
ຄວນຢືນເຝົ້າໃນບ່ອນສະເພາະພຣະພັກ
ພໍໃຫ້ທອດພຣະເນດເຫັນໄດ້ຖະໜັດ

[໑໔໗໗] ຣາດຊະສະເວກບໍ່ຄວນທຳຄວາມວາງໃຈວ່າ
ພຣະຣາຊາເປັນເພື່ອນຂອງເຮົາ
ພຣະຣາຊາເປັນຄູ່ຫູກັບເຮົາ
ພຣະຣາຊາທັງຫຼາຍຊົງພິໂຣດໄດ້ໄວໆ
ຄືໜ່ວຍຕາຖືກຝຸ່ນໄຫງ່ກະທົບ

[໑໔໗໙] ຣາດຊະສະເວກບໍ່ຄວນຖືໂຕວ່າເປັນນັກປາດເປັນບັນດິດ
ພຣະຣາຊາຊົງບູຊາ ບໍ່ຄວນເພັດທູນຄຳເວົ້າທີ່ໃຫ້ຊົງພິໂຣດ
ກັບພຣະຣາຊາຜູ້ປະທັບຢູ່ໃນຣາດຊະບໍລິສັດ

[໑໔໙໐] ຣາດຊະສະເວກຜູ້ໄດ້ຮັບພຣະຣາດຊະທານພຣະທະວານເປັນພິເສດ
ບໍ່ຄວນວາງໃຈໃນພຣະຣາຊາທັງຫຼາຍ
ຄວນເປັນຜູ້ສັງລວມ ຄືຢູ່ໃກ້ໄຟ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໔໙໑] ພຣະຣາຊາຈະຊົງຍ້ອງຍໍພຣະໂອຣົດ
ຫຼືເຊື້ອພຣະວົງຂອງພຣະອົງດ້ວຍບ້ານ ນິຄົມ
ແຄວັນ ຫຼືຊົນນະບົດ ຣາດຊະສະເວກຄວນຈະມິດເບິ່ງກ່ອນ
ບໍ່ຄວນເພັດທູນຄຸນຫຼືໂທດໃນເວລານັ້ນ

[໑໔໙໔] ພຣະຣາຊາຈະຊົງປູນບຳເໜັດລາງວັນໃຫ້ແກ່ກອງພົນຊ້າງ ກອງພົນມ້າ
ກອງພົນລົດ ແລະກອງພົນຣາບ ຕາມຄວາມຊອບໃນຣາດຊະການຂອງເຂົາ
ຣາດຊະສະເວກບໍ່ຄວນທັດທານຄົນເຫຼົ່ານັ້ນ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໔໙໓] ຣາດຊະສະເວກຜູ້ເປັນປາດເພິ່ງໂອນອ່ອນຄືຄັນທະນູ
ແລະເພິ່ງໂອນເອນໄປນຳຄືໄມ້ໄຜ່ ບໍ່ຄວນທູນທັດທານ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໔໙໔] ຣາດຊະສະເວກເພິ່ງເປັນຜູ້ມີທ້ອງນ້ອຍຄືຄັນທະນູ
ເປັນຜູ້ບໍ່ມີລີ້ນຄືປາ໑ ຮູ້ຈັກປະມານໃນການບໍຣິໂພກ
ມີປັນຍາຮັກສາຕົນ ແກ່ກ້າ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໔໙໕] ຣາດຊະສະເວກບໍ່ເພິ່ງສຳຜັດຍິງເຊິ່ງເປັນເຫດໃຫ້ເຖິງຄວາມສິ້ນອຳນາດ
ຄົນທີ່ສິ້ນປັນຍາຍ່ອມເຂົ້າເຖິງພະຍາດໄອ ພະຍາດມອງຄໍ່
ຄວາມກະວົນກະວາຍ ຄວາມອ່ອນກຳລັງ

[໑໔໙໖] ຣາດຊະສະເວກບໍ່ຄວນເວົ້າຫຼາຍເກີນໄປ ບໍ່ຄວນມິດໄປທຸກເມື່ອ
ເມື່ອເຖິງເວລາ ຄວນເວົ້າພໍປະມານ ບໍ່ພ່ຳເພື້ອ

[໑໔໙໗] ຣາດຊະສະເວກເປັນຄົນບໍ່ມັກໂກດ ບໍ່ກະທົບຜູ້ອື່ນ
ເປັນຄົນເວົ້າຈິງ ອ່ອນຫວານ ບໍ່ສັບສໍ່ ບໍ່ເວົ້າຄຳເວົ້າບໍ່ມີສາຣະ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໔໙໘] ຣາດຊະສະເວກເພິ່ງລ້ຽງດູມານດາແລະບິດາ
ປະພຶດອ່ອນນ້ອມຕໍ່ຜູ້ໃຫຍ່ໃນຕະກູນ
ມີວາຈາອ່ອນຫວານ ກ່າວວາຈາລະມຸນລະໄມ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໔໙໙] ຣາດຊະສະເວກເປັນຜູ້ໄດ້ຮັບແນະນຳດີ ມີສິລະປະ ເຝິກຝົນແລ້ວ
ເປັນຜູ້ເຮັດປະໂຫຍດ ແນ່ນອນ ອ່ອນໂຍນ
ບໍ່ຜະໝາດ ສະອາດແລະດຸໝັ່ນ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໕໐໐] ຣາດຊະສະເວກເປັນຜູ້ມີຄວາມປະພຶດອ່ອນນ້ອມຖ່ອມຕົນ
ມີຄວາມເຄົາລົບຢຳເກງໃນທ່ານຜູ້ຈະເລີນເປັນຜູ້ສະງົບສະງ່ຽມ
ຢູ່ຮ່ວມກັນເປັນສຸກ ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໕໐໑] ຣາດຊະສະເວກເພິ່ງເວັ້ນໄກເຊິ່ງທູດຜູ້ທີ່ພຣະຣາຊາຝ່າຍປໍຣະປັກ
ສົ່ງມາເພື່ອຄວາມລັບ ເພິ່ງເບິ່ງແຍງແຕ່ສະເພາະພຣະຣາດຊະວົງທີ່ນັ້ນ
ບໍ່ເພິ່ງຢູ່ໃນສຳນັກຂອງພຣະຣາຊາຝ່າຍອື່ນ

[໑໕໐໒] ຣາດຊະສະເວກເພິ່ງຄົບຫາສະມາຄົມກັບສະມະນະແລະພາມ
ຜູ້ມີສີນ ເປັນພະຫູສູດໂດຍຄວາມເຄົາລົບ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໕໐໓] ຣາດຊະສະເວກເມື່ອຄົບຫາສະມາຄົມກັບສະມະນະແລະພາມ
ຜູ້ມີສີນ ເປັນພະຫູສູດ

ເພື່ອສະມາທານຮັກສາອຸໂປສົດສີນໂດຍຄວາມເຄົາລົບ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໕໐໔] ຣາດຊະສະເວກເພິ່ງບຳລຸງລ້ຽງດູສະມະນະແລະພາມ
ຜູ້ມີສີນ ເປັນພະຫູສູດ ດ້ວຍເຂົ້າແລະນ້ຳ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໕໐໕] ຣາດຊະສະເວກຜູ້ຫວັງຄວາມຈະເລີນແກ່ຕົນ
ເພິ່ງຄົບຫາສະມາຄົມກັບສະມະນະແລະພາມ
ຜູ້ມີສີນ ເປັນພະຫູສູດ ມີປັນຍາ

[໑໕໐໖] ຣາດຊະສະເວກບໍ່ເພິ່ງເຮັດທານທີ່ເຄີຍພຣະຣາດຊະທານມາ
ໃນສະມະນະແລະພາມໃຫ້ເສື່ອມໄປ
ອັນໜຶ່ງ ເຫັນພວກວະນິພົກທີ່ມາໃນເວລາພຣະຣາດຊະທານ
ບໍ່ຄວນຫ້າມອັນໃດເລີຍ

[໑໕໐໗] ຣາດຊະສະເວກເພິ່ງເປັນຜູ້ມີປັນຍາ ມີຄວາມຮູ້ພ້ອມມູນ
ສະຫຼາດໃນວິທີຈັດການຣາດຊະກິດ ເປັນຜູ້ຮູ້ຈັກການສະໄໝ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໕໐໘] ຣາດຊະສະເວກເປັນຄົນດຸໝັ່ນຂະຫຍັນພຽນ ບໍ່ຜະໝາດ
ມີປັນຍາສອດສ່ອງພິຈາລະນາໃນວຽກງານທີ່ຕົນຈະເພິ່ງເຮັດ
ຈັດວຽກງານໄດ້ສຳເລັດຮຽບຮ້ອຍດີ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໕໐໙] ອັນໜຶ່ງ ຣາດຊະສະເວກເພິ່ງໄປກວດກາເບິ່ງລານເຂົ້າສາລີ
ປະສຸສັດ ແລະນາຢູ່ສະເໝີ ໆ
ເພິ່ງຕວງເຂົ້າເປືອກໃຫ້ຮູ້ປະມານແລ້ວໃຫ້ເກັບໄວ້ໃນເລົ້າ
ເພິ່ງນັບເບິ່ງຄົນຂ້າງຄຽງໃນເຮືອນແລ້ວ
ຈຶ່ງໃຫ້ຫຸງຕົ້ມເຂົ້າແຕ່ພໍປະມານທໍ່ນັ້ນ

[໑໕໑໐] ບໍ່ເພິ່ງຕັ້ງບຸດຫຼືອ້າຍນ້ອງ
ຜູ້ບໍ່ຕັ້ງໝັ້ນໃນສີນໃຫ້ເປັນໃຫຍ່
ຍ້ອນຄົນເຫຼົ່ານັ້ນເປັນພານ ບໍ່ຈັດວ່າເປັນອ້າຍນ້ອງ

ຄົນເຫຼົ່ານັ້ນເປັນຄືຄົນຕາຍແລ້ວ
ແຕ່ເມື່ອຄົນເຫຼົ່ານັ້ນມາຫານັ່ງຢູ່ແລ້ວ
ກໍຄວນໃຫ້ຜ້າ ເຄື່ອງນຸ່ງຫົ່ມ ແລະອາຫານ

[໑໕໑໑] ເພິ່ງຕັ້ງຂ້າທາດ ກຳມະກອນ ຄົນໃຊ້ ຜູ້ຕັ້ງໝັ້ນຢູ່ໃນສິນ
ເປັນຄົນດຸໝັ່ນຂະຫຍັນພຽນໃຫ້ເປັນໃຫຍ່

[໑໕໑໒] ຣາດຊະສະເວກເພິ່ງເປັນຜູ້ມີສິນ ບໍ່ໂລບ
ແລະຄວນໄປນຳພຣະຣາຊາ
ປະພຶດປະໂຫຍດແກ່ພຣະຣາຊານັ້ນທັງຕໍ່ໜ້າແລະລັບຫຼັງ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໕໑໓] ຣາດຊະສະເວກເພິ່ງເປັນຜູ້ຮູ້ຈັກພຣະອັດທະຍາໄສຂອງພຣະຣາຊາ
ແລະປະຕິບັດຕາມພຣະປະສົງຂອງພຣະຣາຊາ
ບໍ່ຄວນປະພຶດຂັດຕໍ່ພຣະປະສົງຂອງພຣະຣາຊາ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໕໑໔] ໃນເວລາຜັດປ່ຽນພຣະພູສາຊົງແລະໃນເວລາອາບນ້ຳ
ຣາດຊະສະເວກຄວນກົ້ມຫົວລົງຊຳຣະພຣະບາດ
ແມ່ນຈະຖືກໂກດກໍບໍ່ຄວນໂກດ
ຣາດຊະສະເວກນັ້ນເພິ່ງຢູ່ໃນຣາດຊະສຳນັກໄດ້

[໑໕໑໕] ບຸຣຸດຜູ້ຫວັງຄວາມຈະເລີນແກ່ຕົນເພິ່ງທຳອັນຊະລີແມ່ນໝໍ້ນ້ຳ
ແລະກະທຳປະທັກຂິນແມ່ນນົກແອ່ນລົມໄດ້
ເປັນຫຍັງນໍ ເຂົາຈຶ່ງຈະບໍ່ນອບນ້ອມພຣະຣາຊາຜູ້ເປັນປາດສູງສຸດ
ຜູ້ພຣະຣາດຊະທານສົມບັດທີ່ໜ້າຕ້ອງການທຸກຢ່າງໃຫ້

[໑໕໑໖] ພຣະຣາຊາຜູ້ເຊິ່ງຊົງພຣະຣາດຊະທານບ່ອນນອນ
ຜ້ານຸ່ງຫົ່ມ ຍານ ເຮືອນບ່ອນຢູ່ອາໄສ
ຊົງຍັງໂພຄະໃຫ້ຕົກໄປທົ່ວເຖິງ
ຄືກ້ອນເພື້ອຍັງນ້ຳຝົນໃຫ້ຕົກໄປເປັນປະໂຫຍດແກ່ສັດທົ່ວໄປສັນນັ້ນ

[໑໕໑໗] ພວກເຈົ້າທັງຫຼາຍ ນີ້ຊື່ວ່າຣາຊະວະສະຕິທຳ
ເມື່ອຄົນປະພຶດຕາມ ຍ່ອມເຮັດໃຫ້ພຣະຣາຊາພໍໃຈ
ແລະຍ່ອມໄດ້ການບູຊາໃນຫົວໜ້າທັງຫຼາຍ

**ຣາຊະວະສະຕິທຳ ຈົບ**

# ອະນັນຕະຣະເປີຍຍາລະ
# ວ່າດ້ວຍເນື້ອຄວາມທີ່ຫຍໍ້ໄວ້ໃນລະຫວ່າງ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໑໕໑໗] ວິທຸຣະບັນດິດຜູ້ມີປັນຍາເປັນເຄື່ອງພິຈາລະນາ
ເມື່ອພ່ຳສອນໝູ່ຍາດແນວນີ້ແລ້ວ
ມີໝູ່ຍາດເພື່ອນທີ່ສະນິດຫ້ອມລ້ອມເຂົ້າໄປເຝົ້າພຣະຣາຊາ

[໑໕໑໙] ຖວາຍບັງຄົມພຣະບາດດ້ວຍຂະໜ່ອມ
ແລະກະທຳປະທັກຂິນພຣະອົງແລ້ວ ປະນົມມືຂາບບັງຄົມທູນດັ່ງນີ້ວ່າ

[໑໕໘໐] ຂ້າແດ່ ພຣະອົງຜູ້ຊົງປາບອະຣິຣາດຊະສັດຕູ
ມານົບນີ້ປາຖະໜາຈະເຮັດຕາມປະສົງ ຈຶ່ງນຳຂ້າພຣະອົງໄປ
ຂ້າພຣະອົງຈັກຂາບທູນປະໂຫຍດຂອງຍາດທັງຫຼາຍ
ຂໍພຣະອົງໂຜດສະດັບປະໂຫຍດນັ້ນ

[໑໕໘໑] ຂໍພຣະອົງໄດ້ຊົງພຣະກະລຸນາເອົາພຣະທະໄທໃສ່
ເບິ່ງແຍງບຸດພັນລະຍາຂອງຂ້າພຣະອົງ
ແລະຊັບແນວອື່ນ ໆ ທີ່ມີຢູ່ໃນເຮືອນ
ໂດຍປະການທີ່ໝູ່ຍາດຂອງຂ້າພຣະອົງຈະບໍ່ເສື່ອມໃນພາຍຫຼັງ
ໃນເມື່ອຂ້າພຣະອົງຖວາຍບັງຄົມລາໄປແລ້ວ

[໑໕໘໘] ຄວາມຜິດພາດຂອງຂ້າພຣະອົງນີ້
ກໍຄືຄົນພະລາດລົ້ມລົງເທິງແຜ່ນດິນ
ແລ້ວກັບຢືນຂຶ້ນໄດ້ເທິງແຜ່ນດິນຄືກັນ
ດັ່ງນັ້ນ ຂ້າພຣະອົງຍ່ອມເຫັນໂທດນັ້ນ

(ພຣະຣາຊາຕັດວ່າ)

[໑໕໘໓] ທ່ານບໍ່ອາດຈະໄປໄດ້ ນັ້ນແລເປັນຄວາມພໍໃຈຂອງເຮົາ
ເຮົາຈະສັ່ງໃຫ້ຂ້າປາດເຖືອ(ມານົບນັ້ນ)ອອກເປັນທ່ອນ ໆ
ແລ້ວມັກໄວ້ໃຫ້ມິດຊິດໃນເມືອງນີ້ ທ່ານຈົ່ງຢູ່ບ່ອນນີ້ແລ
ການເຮັດໄດ້ດັ່ງນີ້ ເຮົາພໍໃຈ

ທ່ານບັນດິດຜູ້ມີປັນຍາອັນສູງສົ່ງກວ້າງຂວາງຄືແຜ່ນດິນ
ທ່ານຢ່າໄປເລີຍ

(ວິທຸຣະບັນດິດຂາບທູນວ່າ)

[໑໕໘໔] ຂໍພຣະອົງຢ່າຊົງຕັ້ງພຣະຫະໄທໄວ້ໃນອະທຳເລີຍ
ຂໍຈົ່ງຊົງປະກອບພຣະອົງໄວ້ໃນອັດຖະແລະທຳເທີ້ນ
ກຳອັນເປັນອະກຸສົນບໍ່ປະເສີດ ບັນດິດຕິຕຽນວ່າ
ຜູ້ເຮັດກຳອັນເປັນອະກຸສົນເພິ່ງເຂົ້າເຖິງນະຮົກໃນພາຍຫຼັງ

[໑໕໘໕] ນີ້ບໍ່ແມ່ນທຳເລີຍ ບໍ່ເຂົ້າເຖິງກິດທີ່ຄວນເຮັດ
ຂ້າແດ່ ພຣະອົງຜູ້ຈອມຊົນ ທຳມະດາວ່ານາຍຜູ້ເປັນໃຫຍ່ຂອງຂ້າທາດ
ຈະທຸບຕີກໍໄດ້ ຈະເຜົາກໍໄດ້ ຈະຂ້າກໍໄດ້
ຂ້າພຣະອົງບໍ່ມີຄວາມຄຽດເລີຍ ແລະຂໍຂາບບັງຄົມທູນລາໄປ

[໑໕໘໖] ພຣະມະຫາສັດນັ້ນມີໜ່ວຍຕາທັງ ໘ ຂ້າງນອງດ້ວຍນໍ້າຕາ
ກໍາຈັດຄວາມກະວົນກະວາຍໃນຫະໄທແລ້ວ
ສວມກອດບຸດຄົນໃຫຍ່ແລ້ວເຂົ້າໄປສູ່ເຮືອນຫຼວງ

[໑໕໘໗] ບຸດທັງຫຼາຍແລະພັນລະຍາໃນເຮືອນຂອງວິທຸຣະບັນດິດ
ຕ່າງກໍນອນຮ້ອງໄຫ້ຮໍ່າໄຮໄປມາຢູ່
ຄືປ່າໄມ້ຮັງຖືກພາຍຸພັດລົ້ມລະເນລະນາດ

[໑໕໘໘] ພັນລະຍາ ໑,໐໐໐ ຄົນ ແລະຍິງຮັບໃຊ້ ໗໐໐ ຄົນ
ຕ່າງປະຄອງແຂນທັງຫຼາຍຮ້ອງໄຫ້ຮໍ່າໄຮ
ໃນນິເວດຂອງວິທຸຣະບັນດິດ

[໑໕໘໙] ພຣະສະໜົມກຳນັນໃນ ພຣະກຸມານ ແພດ ແລະພາມທັງຫຼາຍ
ຕ່າງພາກັນປະຄອງແຂນຮ້ອງໄຫ້ຮໍ່າໄຮໃນນິເວດຂອງວິທຸຣະບັນດິດ

[໑໕໙໐] ກອງພົນຊ້າງ ກອງພົນມ້າ ກອງພົນລົດ ແລະກອງພົນຣາບ
ຕ່າງພາກັນປະຄອງແຂນທັງຫຼາຍຮ້ອງໄຫ້ຮໍ່າໄຮ
ໃນນິເວດຂອງວິທຸຣະບັນດິດ

[໑໕໙໑] ຊາວຊົນນະບົດແລະຊາວນິຄົມມາປະຊຸມພ້ອມກັນແລ້ວ
ຕ່າງພາກັນປະຄອງແຂນຮ້ອງໄຫ້ຮໍ່າໄຮໃນນິເວດຂອງວິທຸຣະບັນດິດ

[໑໕໓໔] ພັນລະຍາ ໑,໐໐໐ ຄົນ ແລະຍິງຮັບໃຊ້ ໗໐໐ ຄົນ
ຕ່າງພາກັນປະຄອງແຂນທັງຫຼາຍຮ້ອງໄຫ້ຮ່ຳໄຮວ່າ
ຍ້ອນເຫດໃດ ທ່ານຈຶ່ງລະຖິ້ມເຮົາທັງຫຼາຍໄປ

[໑໕໓໓] ພຣະສະໜົມກຳນັນໃນ ພຣະກຸມານ ແພດ ແລະພາມທັງຫຼາຍ
ຕ່າງພາກັນປະຄອງແຂນທັງຫຼາຍຮ້ອງໄຫ້ຮ່ຳໄຮວ່າ
ຍ້ອນເຫດໃດ ທ່ານຈຶ່ງລະຖິ້ມເຮົາທັງຫຼາຍໄປ

[໑໕໓໔] ກອງພົນຊ້າງ ກອງພົນມ້າ ກອງພົນລົດ ແລະກອງພົນຮາບ
ຕ່າງພາກັນປະຄອງແຂນທັງຫຼາຍຮ້ອງໄຫ້ຮ່ຳໄຮວ່າ
ຍ້ອນເຫດໃດ ທ່ານຈຶ່ງລະຖິ້ມເຮົາທັງຫຼາຍໄປ

[໑໕໓໕] ຊາວຊົນນະບົດແລະຊາວນິຄົມມາປະຊຸມພ້ອມກັນແລ້ວ
ຕ່າງພາກັນປະຄອງແຂນທັງຫຼາຍຮ້ອງໄຫ້ຮ່ຳໄຮວ່າ
ຍ້ອນເຫດໃດ ທ່ານຈຶ່ງລະຖິ້ມເຮົາທັງຫຼາຍໄປ

[໑໕໓໖] ພຣະມະຫາສັດເຮັດກິດທັງຫຼາຍໃນເຮືອນ
ສັ່ງສອນຄົນຂອງຕົນ ຄື ມິດ ອຳມາດ ຄົນໃຊ້
ບຸດ ທິດາ ພັນລະຍາ ແລະພວກພ້ອງ

[໑໕໓໗] ຈັດວຽກງານ ບອກມອບຊັບໃນເຮືອນ ຂຸມຊັບ
ແລະການໃຊ້ໜີ້ ແລ້ວຈຶ່ງໄດ້ກ່າວກັບປຸນນະກະຍັກດັ່ງນີ້ວ່າ

[໑໕໓໘] ທ່ານກັດຈານະ
ທ່ານໄດ້ພັກຢູ່ໃນເຮືອນຂອງຂ້າພະເຈົ້າ ໓ ມື້ແລ້ວ
ກິດທັງຫຼາຍທີ່ຄວນເຮັດໃນເຮືອນຂອງຂ້າພະເຈົ້າກໍໄດ້ເຮັດແລ້ວ
ອັນໜຶ່ງ ບຸດ ທິດາ ແລະພັນລະຍາ ຂ້າພະເຈົ້າກໍໄດ້ສັ່ງສອນແລ້ວ
ບັດນີ້ ຂ້າພະເຈົ້າຍອມເຮັດກິດຕາມອັດທະຍາໄສຂອງທ່ານ

(ປຸນນະກະຍັກກ່າວວ່າ)

[໑໕໓໙] ທ່ານມະຫາອຳມາດຜູ້ສຳເລັດຣາດຊະກິດທັງປວງ
ກໍຖ້າທ່ານໄດ້ສັ່ງສອນບຸດ ທິດາ ພັນລະຍາ ແລະຄົນອາໄສແລ້ວ
ຂໍເຊີນທ່ານຟ້າວໄປ ໃນບັດນີ້ເທີ້ນ
ຍ້ອນທາງຂ້າງໜ້າຍັງຢູ່ອີກໄກແສນໄກ

[໑໕໔໐] ທ່ານຢ່າໄດ້ຢ້ານເລີຍ ຈົ່ງຈັບຫາງມ້າອາຊາໄນເທີ້ນ
ນີ້ເປັນການເຫັນຊີວະໂລກຄັ້ງສຸດທ້າຍຂອງທ່ານ

(ວິທຸຣະບັນດິດກ່າວວ່າ)

[໑໕໔໑] ຂ້າພະເຈົ້າຈັກສະດຸ້ງຢ້ານໄປເຮັດຫຍັງ
ຍ້ອນຂ້າພະເຈົ້າບໍ່ມີກຳຊົ່ວທາງກາຍ ວາຈາ ແລະໃຈ
ທີ່ຈະເປັນເຫດໃຫ້ໄປສູ່ທຸກຄະຕິ

[໑໕໔໒] ພະຍາມ້ານັ້ນນຳວິທຸຣະບັນດິດເຫາະໄປ
ໃນອາກາດກາງຫາວບໍ່ກະທົບງ່າໄມ້ແລະພູເລີຍ
ເຫາະໄປເຖິງພູກາລາຄີຣີຢ່າງວ່ອງໄວ

[໑໕໔໓] ພັນລະຍາ ໑,໐໐໐ ຄົນ ແລະຍິງຮັບໃຊ້ ໗໐໐ ຄົນ
ຕ່າງພາກັນປະຄອງແຂນທັງຫຼາຍຮ້ອງໄຫ້ຮ່ຳໄຮວ່າ
ຯລຯ ຍັກໄດ້ແປງເປັນພາມນຳວິທຸຣະບັນດິດໄປ
ພຣະສະໜົມກຳນັນໃນ ພຣະກຸມານ ແພດ ແລະພາມທັງຫຼາຍ
ຕ່າງພາກັນປະຄອງແຂນທັງຫຼາຍຮ້ອງໄຫ້ຮ່ຳໄຮວ່າ
ຯລຯ ຍັກໄດ້ແປງເປັນພາມນຳວິທຸຣະບັນດິດໄປ
ກອງພົນຊ້າງ ກອງພົນມ້າ ກອງພົນລົດ ແລະກອງພົນຣາບ
ຕ່າງປະຄອງແຂນທັງຫຼາຍຮ້ອງໄຫ້ຮ່ຳໄຮວ່າ
ຯລຯ ຍັກໄດ້ແປງເປັນພາມນຳວິທຸຣະບັນດິດໄປ

[໑໕໔໔] ຊາວຊົນນະບົດແລະຊາວນິຄົມມາປະຊຸມພ້ອມກັນແລ້ວ
ຕ່າງພາກັນປະຄອງແຂນທັງຫຼາຍຮ້ອງໄຫ້ຮ່ຳໄຮວ່າ
ຯລຯ ຍັກໄດ້ແປງເປັນພາມນຳວິທຸຣະບັນດິດໄປ

[໑໕໔໕] ພັນລະຍາ ໑,໐໐໐ ຄົນ ແລະຍິງຮັບໃຊ້ ໗໐໐ ຄົນ
ຕ່າງພາກັນປະຄອງແຂນທັງຫຼາຍຮ້ອງໄຫ້ຮ່ຳໄຮວ່າ
ບັນດິດນັ້ນໄປບ່ອນໃດແລ້ວ

(ພຣະສະໜົມກຳນັນໃນ ພຣະກຸມານ ແພດ ແລະພາມທັງຫຼາຍ
ຕ່າງພາກັນປະຄອງແຂນທັງຫຼາຍຮ້ອງໄຫ້ຮ່ຳໄຮວ່າ
ບັນດິດນັ້ນໄປບ່ອນໃດແລ້ວ

ກອງພົນຊ້າງ ກອງພົນມ້າ ກອງພົນລົດ ແລະກອງພົນຮາບ
ຕ່າງພາກັນປະຄອງແຂນທັງຫຼາຍຮ້ອງໄຫ້ຮ່ຳໄຮວ່າ
ບັນດິດນັ້ນໄປບ່ອນໃດແລ້ວ)

[໑໕໔໖] ຊາວຊົນນະບົດແລະຊາວນິຄົມມາປະຊຸມພ້ອມກັນແລ້ວ
ຕ່າງພາກັນປະຄອງແຂນຮ້ອງໄຫ້ຮ່ຳໄຮວ່າ
ບັນດິດນັ້ນໄປບ່ອນໃດແລ້ວ
[໑໕໔໗] ຖ້າບັນດິດນັ້ນຈັກບໍ່ມາພາຍໃນ ໗ ມື້
ຂ້າພຣະອົງຈັກພາກັນເຂົ້າໄປສູ່ກອງໄຟທັງໝົດ
ຂ້າພຣະອົງທັງຫຼາຍບໍ່ມີຄວາມຕ້ອງການດ້ວຍຊີວິດ

(ພຣະຣາຊາຕັດວ່າ)

[໑໕໔໘] ວິທຸຣະບັນດິດເປັນຄົນສະຫຼາດຫຼັກແຫຼມ
ສາມາດສະແດງປະໂຫຍດແລະບໍ່ແມ່ນປະໂຫຍດໄດ້ແຈ່ມແຈ້ງ
ມີປັນຍາເປັນເຄື່ອງພິຈາລະນາ ຄົງຈະປົດເປື້ອງຕົນໄດ້ທັນທີ
ທ່ານທັງຫຼາຍຢ່າຢ້ານໄປເລີຍ
ວິທຸຣະບັນດິດປົດເປື້ອງຕົນໄດ້ແລ້ວຈັກຟ້າວກັບມາ

**ອະນັນຕະຣະເປີຍຍາລະ ຈົບ**

## ສາທຸນະຣະທຳກັນ
## ຕອນວ່າດ້ວຍທຳຂອງຄົນດີ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໑໕໔໙] ປຸນນະກະຍັກນັ້ນໄປຢືນຄິດຢູ່ເທິງຈອມພູກາລາຄີຣີນັ້ນວ່າ
ເຈຕະນາຍ່ອມເປັນຂອງສູງ ໆ ຕ່ຳ ໆ
ປະໂຫຍດອັນໃດດ້ວຍຄວາມເປັນຢູ່ຂອງວິທຸຣະບັນດິດນີ້ບໍ່ມີແກ່ເຮົາ
ເຮົາຈັກຂ້າວິທຸຣະບັນດິດນີ້ແລ້ວຈັກນຳເອົາແຕ່ຫົວໃຈຂອງເຂົາໄປ
[໑໕໕໐] ປຸນນະກະຍັກມີຈິດຄິດປະທຸດສະຮ້າຍລົງຈາກຈອມພູ
ໄປສູ່ຕີນພູ ພັກພຣະມະຫາສັດໄວ້ໃນລະຫວ່າງພູ
ທຳລາຍເຂົ້າໄປພາຍໃນພູນັ້ນ ຈັບພຣະມະຫາສັດ
ເອົາຫົວຍ່ອນລົງແລ້ວດຶກລົງໄປທີ່ພື້ນດິນທີ່ບໍ່ມີອັນໃດກີດຂວາງ

[໑໕໕໑] ວິທຸຣະບັນດິດເປັນອຳມາດຜູ້ປະເສີດສຸດຂອງຊາວແຄວ້ນກຸຣຸ
ເມື່ອຖືກຫ້ອຍຫົວລົງໃນເຫວຊັນທີ່ເປັນຕາຢ້ານ
ໜ້າສະຫຍົດສະຫຍອງ ເປັນຕາເຫຍືອງ ກໍບໍ່ສະດຸ້ງຢ້ານ
ໄດ້ກ່າວກັບປຸນນະກະຍັກດັ່ງນີ້ວ່າ

[໑໕໕໒] ທ່ານມີຮູບຮ່າງດັ່ງຜູ້ປະເສີດແຕ່ບໍ່ແມ່ນເປັນຄົນປະເສີດເລີຍ
ຄ້າຍຈະເປັນຄົນສັງລວມ ແຕ່ບໍ່ສັງລວມ
ເຮັດກຳຫຍາບຊ້າ ບໍ່ມີປະໂຫຍດຢ່າງຍິ່ງ
ກຸສົນແມ່ນແຕ່ໜ້ອຍໜຶ່ງກໍບໍ່ມີໃນໃຈຂອງທ່ານ

[໑໕໕໓] ທ່ານປາຖະໜາຈະໂຍນຂ້າພະເຈົ້າລົງໄປໃນເຫວ
ທ່ານຈະໄດ້ປະໂຫຍດອັນໃດດ້ວຍຄວາມຕາຍຂອງຂ້າພະເຈົ້າ
ມື້ນີ້ ຜິວພັນຂອງທ່ານຄືຂອງອະມະນຸດ
ທ່ານຈົ່ງບອກຂ້າພະເຈົ້າ ທ່ານເປັນເທວະດາໄດ້ແນວໃດ

(ປຸນນະກະຍັກຕອບວ່າ)

[໑໕໕໔] ຖ້າທ່ານຮູ້ມາແລ້ວວ່າຂ້າພະເຈົ້າຊື່ປຸນນະກະ
ແລະເປັນອຳມາດຄູ່ຊີບຂອງທ້າວກຸເວນພະຍານາກໃຫຍ່ນາມວ່າວະຣຸນ
ຜູ້ຄອບຄອງນາຄະໂລກ ມີຮູບງາມສະອາດ
ເຖິງພ້ອມດ້ວຍຜິວພັນແຫ່ງສະຣີຣະແລະກຳລັງ

[໑໕໕໕] ຂ້າພະເຈົ້າຮັກແພງຍາກໄດ້ນາງນາກກັນຍາ
ຊື່ອິຣັນທະດີ ຜູ້ເປັນທິດາຂອງພະຍານາກນັ້ນ
ທ່ານຜູ້ເປັນປາດ ຍ້ອນເຫດແຫ່ງນາງອິຣັນທະດີ
ຜູ້ມີແອວງາມໜ້າຮັກນັ້ນ ຂ້າພະເຈົ້າຈຶ່ງຕົກລົງໃຈຈະຂ້າທ່ານ

(ວິທຸຣະບັນດິດກ່າວວ່າ)

[໑໕໕໖] ຍັກ ທ່ານຢ່າໄດ້ລຸ້ມຫຼົງໂພດເລີຍ
ສັດໂລກເປັນຈຳນວນຫຼາຍພິນາດໄປຍ້ອນຄວາມຖືຜິດ
ຍ້ອນເຫດໃດ ທ່ານຈຶ່ງທຳຄວາມຮັກແພງ
ໃນນາງອິຣັນທະດີຜູ້ມີແອວງາມໜ້າຮັກ
ທ່ານຈະໄດ້ປະໂຫຍດອັນໃດດ້ວຍຄວາມຕາຍຂອງຂ້າພະເຈົ້າ
ເຊີນເທີ້ນ ຂ້າພະເຈົ້າຂໍຟັງເລື້ອງທັງໝົດ

(ປຸນນະກະຍັກກ່າວວ່າ)

[໑໘໘໗] ຂ້າພະເຈົ້າປາຖະໜາທິດາຂອງພະຍາວະຣຸນນາຄະຣາດ
ຜູ້ມີອານຸພາບຫຼາຍ ຂ້າພະເຈົ້າຊື່ວ່າເປັນຜູ້ຮັບອາສາ
ນຳຍາດຂອງນາງອີຣັນທະດີມາ ຍາດເຫຼົ່ານັ້ນໄດ້ສຳຄັນຂ້າພະເຈົ້າວ່າ
ຖືກການຄອບງຳດ້ວຍດີ
ດັ່ງນັ້ນ ພະຍາວະຣຸນນາຄະຣາດ ພໍ່ເຖົ້າຈຶ່ງໄດ້ຕັດກັບຂ້າພະເຈົ້າ
ຜູ້ກຳລັງທູນຂໍນາງອີຣັນທະດີນາກັນຍານັ້ນວ່າ

[໑໘໘໘] ເຮົາທັງຫຼາຍເພິ່ງໃຫ້ທິດາຂອງເຮົາຜູ້ມີຮ່າງກາຍງົດງາມ
ມີເນດງາມທີ່ໜ້າພິດສະຫວົງ ມີໂຕລູບທາດ້ວຍຈຸນແກ່ນຈັນ
ຖ້າທ່ານຈະເພິ່ງໃຫ້ດວງຫະໄທຂອງບັນດິດ
ນຳມາໃນນາຄະໂລກນີ້ໂດຍທຳ
ຍ້ອນຄວາມດີຄວາມຊອບນີ້ ທ່ານກໍຈະໄດ້ທິດາຂອງເຮົາ
ເຮົາທັງຫຼາຍບໍ່ໄດ້ປາຖະໜາຊັບອື່ນຍິ່ງໄປກວ່ານັ້ນ

[໑໘໘໙] ທ່ານມະຫາອຳມາດ ຂ້າພະເຈົ້າບໍ່ໄດ້ເປັນຄົນຫຼົງ
ທ່ານຈົ່ງຟັງໃຫ້ຮູ້ເລື້ອງແນວນີ້
ອັນໜຶ່ງ ຂ້າພະເຈົ້າບໍ່ໄດ້ມີຄວາມຖືຜິດອັນໃດ ໆ ເລີຍ
ຍ້ອນຫະໄທຂອງທ່ານທີ່ຂ້າພະເຈົ້າໄດ້ໄປໂດຍຖືກຕ້ອງຕາມທຳ
ທ້າວວະຣຸນນາຄະຣາດແລະນາງວິມະລາ
ຈະປະທານນາງອີຣັນທະດີນາກັນຍາໃຫ້ແກ່ຂ້າພະເຈົ້າ

[໑໘໙໐] ຍ້ອນແນວນັ້ນ ຂ້າພະເຈົ້າຈຶ່ງພະຍາຍາມຂ້າທ່ານ
ຂ້າພະເຈົ້າຈະໄດ້ປະໂຫຍດດ້ວຍການຕາຍຂອງທ່ານແນວນີ້
ຈຶ່ງຂັບໄລ່ທ່ານໃຫ້ຕົກລົງໃນເຫວນີ້
ຂ້າແລ້ວຈະນຳເອົາດວງຫະໄທນັ້ນໄປ

(ວິທຸຣະບັນດິດກ່າວວ່າ)

[໑໘໙໑] ຈົ່ງວາງຂ້າພະເຈົ້າລົງໂດຍໄວເທີ້ນ
ຖ້າທ່ານມີຄວາມຈຳເປັນທີ່ຈະຕ້ອງເຮັດດ້ວຍຫະໄທຂອງຂ້າພະເຈົ້າ
ຂ້າພະເຈົ້າຈະເຮັດທຳເຫຼົ່ານັ້ນທັງໝົດໃຫ້ຜາກົດໃນມື້ນີ້

[໑໕໗໔] ປຸນນະກະຍັກນັ້ນຟ້າວວາງວິທຸຣະບັນດິດ
ຜູ້ປະເສີດສຸດຂອງຊາວແຄວ້ນກຸຣຸລົງເທິງຈອມພູ
ເຫັນວິທຸຣະບັນດິດຜູ້ມີປັນຍາບໍ່ຕໍ່າຊາມ
ໄດ້ຄວາມເບົາໃຈນັ່ງຢູ່ ຈຶ່ງຖາມວ່າ

[໑໕໗໓] ຂ້າພະເຈົ້າໄດ້ຍົກທ່ານຂຶ້ນມາຈາກເຫວແລ້ວ
ມື້ນີ້ ຂ້າພະເຈົ້າຍັງມີຄວາມຈໍາເປັນທີ່ຕ້ອງເຮັດດ້ວຍຫະໄທຂອງທ່ານຢູ່
ທ່ານຈົ່ງເຮັດທໍາເຫຼົ່ານັ້ນທັງໝົດໃຫ້ຜາກົດແກ່ຂ້າພະເຈົ້າໃນມື້ນີ້ເທີ້ນ

(ວິທຸຣະບັນດິດກ່າວວ່າ)

[໑໕໗໔] ທ່ານໄດ້ຍົກຂ້າພະເຈົ້າຂຶ້ນມາຈາກເຫວແລ້ວ
ຖ້າທ່ານຍັງມີຄວາມຈໍາເປັນທີ່ຕ້ອງເຮັດດ້ວຍຫະໄທຂອງຂ້າພະເຈົ້າ
ຂ້າພະເຈົ້າຈະເຮັດທໍາເຫຼົ່ານັ້ນທັງໝົດໃຫ້ຜາກົດໃນມື້ນີ້

[໑໕໗໕] ມານົບ ທ່ານຈົ່ງຍ່າງໄປຕາມທາງທີ່ທ່ານຍ່າງໄປແລ້ວ
ຈົ່ງຢ່າເຜົາຝາມືອັນປຽກຊຸ່ມ
ຢ່າໄດ້ປະທຸດສະຮ້າຍໃນມິດທັງຫຼາຍໃນການໃດ ໆ
ຢ່າຕົກຢູ່ໃນອໍານາດຂອງເຫຼົ່າອະສະຕີ[๑]

(ປຸນນະກະຍັກຖາມວ່າ)

[໑໕໗໖] ບຸກຄົນຊື່ວ່າເປັນຜູ້ຍ່າງໄປຕາມທາງທີ່ຍ່າງໄປແລ້ວແນວໃດ
ຊື່ວ່າເຜົາຝາມືອັນປຽກຊຸ່ມແນວໃດ ບຸກຄົນແນວໃດ
ຈຶ່ງຊື່ວ່າເປັນຜູ້ປະທຸດສະຮ້າຍມິດ ຍິງຢ່າງໃດຊື່ວ່າອະສະຕີ
ຂ້າພະເຈົ້າຖາມແລ້ວ ຂໍທ່ານຈົ່ງບອກເນື້ອຄວາມນີ້ເທີ້ນ

(ວິທຸຣະບັນດິດຕອບວ່າ)

[໑໕໗໗] ຜູ້ໃດເພິ່ງເຊື້ອເຊີນຄົນທີ່ບໍ່ເຄີຍຢູ່ຮ່ວມກັນ
ບໍ່ເຄີຍພົບເຫັນກັນດ້ວຍອາສະນະ
ບຸຣຸດເພິ່ງເຮັດປະໂຫຍດແກ່ຜູ້ນັ້ນທໍ່ນັ້ນ
ບັນດິດກ່າວວ່າບຸຣຸດນັ້ນຍ່າງຕາມທາງທີ່ທ່ານຍ່າງໄປແລ້ວ

[໑໕໗໘] ບຸກຄົນເພິ່ງຢູ່ໃນເຮືອນຂອງຜູ້ໃດແມ່ນຄືນດຽວ

ເພິ່ງໄດ້ທັງເຂົ້າແລະນໍ້າ ບໍ່ຄວນຄິດຮ້າຍແກ່ຜູ້ນັ້ນແມ່ນດ້ວຍໃຈ
ຜູ້ຄິດຮ້າຍບຸກຄົນເຊັ່ນນັ້ນ ຊື່ວ່າເຜົາຝາມືອັນປຽກຊຸ່ມ
ແລະຊື່ວ່າປະທຸດສະຮ້າຍມິດ

[໑໕໓໙] ບຸກຄົນເພິ່ງນັ່ງຫຼືນອນທີ່ຮົ່ມຂອງຕົ້ນໄມ້ໃດ
ບໍ່ຄວນຫັກຮານງ່າຂອງຕົ້ນໄມ້ນັ້ນ
ຍ້ອນຜູ້ປະທຸດສະຮ້າຍມິດເປັນຄົນຊົ່ວຊາມ

[໑໕໗໐] ຫາກບຸຣຸດເພິ່ງໃຫ້ແຜ່ນດິນນີ້ທີ່ບໍລິບູນດ້ວຍຊັບ
ແກ່ຍິງຜູ້ທີ່ສາມີຍ້ອງຍໍເປັນຢ່າງດີ
ຍິງນັ້ນໄດ້ໂອກາດແລ້ວເພິ່ງດູໝິ່ນບຸຣຸດນັ້ນກໍໄດ້
ບຸກຄົນບໍ່ເພິ່ງຕົກຢູ່ໃນອໍານາດຂອງອສະຕີ

[໑໕໗໑] ບຸກຄົນຊື່ວ່າເປັນຜູ້ຍ່າງຕາມທາງທີ່ທ່ານຍ່າງໄປແລ້ວແນວນີ້
ຊື່ວ່າເຜົາຝາມືອັນປຽກຊຸ່ມແນວນີ້
ຊື່ວ່າຕົກຢູ່ໃນອໍານາດຂອງອະສະຕີແນວນີ້
ແລະຊື່ວ່າເປັນຜູ້ປະທຸດສະຮ້າຍມິດແນວນີ້
ທ່ານຈົ່ງເປັນຜູ້ຕັ້ງຢູ່ໃນທໍາ ລະເລີກອະທໍາເທີ້ນ

**ສາທຸນະຣະທໍາກັນ ຈົບ**

## ກາລາຄິຣິກັນ
## ຕອນວ່າດ້ວຍພູສີດໍາ

(ປຸນນະກະຍັກກ່າວວ່າ)

[໑໕໗໔] ຂ້າພະເຈົ້າໄດ້ພັກຢູ່ໃນເຮືອນຂອງທ່ານ ໓ ມື້
ທັງເປັນຜູ້ທີ່ທ່ານບໍາລຸງດ້ວຍເຂົ້າແລະນໍ້າ
ທ່ານເປັນມິດຂອງຂ້າພະເຈົ້າ ຂ້າພະເຈົ້າຈະປົດປ່ອຍທ່ານ
ທ່ານຜູ້ມີປັນຍາອັນສູງສົ່ງ
ເຊີນທ່ານກັບໄປເຮືອນຂອງທ່ານຕາມຕ້ອງການເທີ້ນ

[໑໕໗໓] ຄວາມຕ້ອງການຂອງຕະກູນນາກຈະເສື່ອມໄປກໍຕາມເທີ້ນ
ເຫດທີ່ຈະໄດ້ນາງນາກກັນຍາ ຂ້າພະເຈົ້າຍົກເລີກແລ້ວ

ທ່ານຜູ້ມີປັນຍາ ຍ້ອນຄຳສຸພາສິດຂອງຕົນເອງແທ້ ໆ
ທ່ານຈຶ່ງພົ້ນຈາກຂ້າພະເຈົ້າຜູ້ຈະຂ້າທ່ານໃນມື້ນີ້

(ວິທຸຣະບັນດິດກ່າວວ່າ)

[໑໕໗໔] ປຸນນະກະຍັກ ເຊີນທ່ານນຳຂ້າພະເຈົ້າໄປ
ໃນສຳນັກຂອງພໍ່ເຖົ້າຂອງທ່ານເທີ້ນ
ຈົ່ງປະພຶດປະໂຫຍດໃນຂ້າພະເຈົ້າ
ແມ່ນຂ້າພະເຈົ້າກໍຢາກເຫັນທ້າວວະຣຸນອະທິບໍດີຂອງນາກ
ແລະວິມານຂອງພຣະອົງທີ່ຂ້າພະເຈົ້າບໍ່ເຄີຍເຫັນ

(ປຸນນະກະຍັກກ່າວວ່າ)

[໑໕໗໕] ຄົນຜູ້ມີປັນຍາບໍ່ຄວນຈະເບິ່ງ
ສິ່ງທີ່ບໍ່ເປັນໄປເພື່ອປະໂຫຍດເກື້ອກູນແກ່ຄົນ
ທ່ານຜູ້ມີປັນຍາອັນສູງສົ່ງ
ເມື່ອເປັນແນວນັ້ນ ຍ້ອນເຫດໃດນໍ
ທ່ານຈຶ່ງປາຖະໜາຈະໄປສູ່ເຮືອນຂອງສັດຕູນໍ

(ວິທຸຣະບັນດິດກ່າວວ່າ)

[໑໕໗໖] ແມ່ນຂ້າພະເຈົ້າກໍຮູ້ແຈ້ງເຖິງສິ່ງທີ່ຜູ້ມີປັນຍາບໍ່ຄວນຈະເບິ່ງ
ແຕ່ຂ້າພະເຈົ້າບໍ່ມີກຳຊົ່ວທີ່ໄດ້ເຮັດໄວ້ແລ້ວໃນບ່ອນໃດເລີຍ
ຍ້ອນແນວນັ້ນ ຂ້າພະເຈົ້າຈຶ່ງບໍ່ລັງກຽດຄວາມຕາຍທີ່ຈະມາເຖິງຕົນ

(ປຸນນະກະຍັກກ່າວວ່າ)

[໑໕໗໗] ທ່ານບັນດິດ ເຊີນເທີ້ນ ທ່ານຈົ່ງມາກັບຂ້າພະເຈົ້າໄປເບິ່ງໂລກ
ຂອງພະຍານາກ ເຊິ່ງມີອານຸພາບຫຼາຍ ຫາບ່ອນປຽບບໍ່ໄດ້
ເປັນບ່ອນຢູ່ອັນມີການຟ້ອນລຳຂັບຮ້ອງຕາມປາຖະໜາ
[໑໕໗໘] ຄືນິກິລິຕະຣາດຊະທານີເປັນທີ່ປະທັບຢູ່ຂອງທ້າວເວດສຸວັນສັນນັ້ນ
ນາຄະໂລກນັ້ນເປັນທີ່ທ່ຽວຫຼິ້ນເປັນໝູ່ ໆ
ຂອງນາງນາກກັນຍາຕະຫຼອດວັນແລະຄືນຢູ່ແນວນັ້ນ
ມີດອກໄມ້ເດຍລະດາດຢູ່ຫຼວງຫຼາຍຊະນິດ
ສະຫວ່າງສະໄຫວດັ່ງສາຍຟ້າໃນອາກາດ

[໑໕໗໙] ປະກອບດ້ວຍເຂົ້າແລະນ້ຳ
ພຽບພ້ອມດ້ວຍການຟ້ອນລຳຂັບຮ້ອງແລະການເສບງັນ
ເຕັມໄປດ້ວຍນາງນາກກັນຍາທີ່ປະດັບຢ່າງສວຍງາມ
ງົດງາມໄປດ້ວຍຜ້ານຸ່ງຫົ່ມແລະເຄື່ອງປະດັບ

[໑໕໘໐] ປຸນນະກະຍັກນັ້ນເຊີນໃຫ້ວິທຸຣະບັນດິດ
ຜູ້ປະເສີດສຸດຂອງຊາວແຄວັ້ນກຸຣຸໄປນັ່ງເທິງອາສະນະທາງຫຼັງ
ໄດ້ພາວິທຸຣະບັນດິດຜູ້ມີປັນຍາບໍ່ຕ່ຳຊາມເຂົ້າສູ່ພິບຂອງພະຍານາກ
[໑໕໘໑] ວິທຸຣະບັນດິດຮອດບ່ອນຢູ່ຂອງພະຍານາກເຊິ່ງມີອານຸພາບຫຼາຍ
ຫາບ່ອນປຽບບໍ່ໄດ້ແລ້ວ ໄດ້ຢູ່ທາງຫຼັງຂອງປຸນນະກະຍັກ
ພະຍານາກໄດ້ທອດພຣະເນດເຫັນລູກເຂີຍຂອງຕົນກໍ່ຄວາມສາມັກຄີ
ຕົນເອງກໍຟ້າວຕັດທັກທາຍກ່ອນໂລດວ່າ
[໑໕໘໒] ທ່ານໄດ້ໄປສູ່ໂລກມະນຸດ
ທ່ຽວສະແຫວງຫາດວງຫະໄທຂອງວິທຸຣະບັນດິດ
ກັບມາເຖິງນາຄະໂລກນີ້ດ້ວຍຄວາມສຳເລັດບໍ
ຫຼືວ່າທ່ານໄດ້ພາເອົາວິທຸຣະບັນດິດຜູ້ມີປັນຍາບໍ່ຕ່ຳຊາມມານຳ

(ປຸນນະກະຍັກຂາບທູນວ່າ)

[໑໕໘໓] ທ່ານຜູ້ນີ້ແລຄືວິທຸຣະບັນດິດ
ທີ່ພຣະອົງຊົງປາຖະໜາມາແລ້ວ
ທ່ານວິທຸຣະບັນດິດຜູ້ຮັກສາທຳ
ຂ້າພຣະອົງໄດ້ມາແລ້ວໂດຍທຳ
ເຊີນພຣະອົງທອດພຣະເນດວິທຸຣະບັນດິດ
ຜູ້ຈະສະແດງທຳຖວາຍດ້ວຍສຽງອັນມ່ວນສະເພາະພຣະພັກ
ການສະມາຄົມກັບສັດຕະບຸຣຸດທັງຫຼາຍເປັນເຫດນຳສຸກມາໃຫ້ໂດຍແທ້

**ກາລາຄີຣີກັນ ຈົບ**

(ພະຍານາກຕັດຖາມວ່າ)

[໑໕໘໔] ທ່ານເປັນມະນຸດມາເຫັນນາຄະໂລກທີ່ຕົນບໍ່ເຄີຍເຫັນ
ຖືກໄພຄືຄວາມຕາຍຄຸກຄາມແລ້ວ ບໍ່ຢ້ານແລະບໍ່ອະພິວາດ
ອາການແນວນີ້ເບິ່ງຄືວ່າຈະບໍ່ມີແກ່ຜູ້ມີປັນຍາ

(ວິທຸຣະບັນດິດຂາບທູນວ່າ)

[໑໘໗໔] ຂ້າແດ່ ພະຍານາກ ຂ້າພຣະອົງບໍ່ຢ້ານ
ແລະບໍ່ຖືກໄພຄືຄວາມຕາຍຄຸກຄາມ
ນັກໂທດປະຫານບໍ່ເພິ່ງຂາບໄຫວ້ເພດຊະຄາດ
ຫຼືເພດຊະຄາດກໍບໍ່ເພິ່ງໃຫ້ນັກໂທດປະຫານໄຫວ້ຕົນ

[໑໘໗໕] ຄົນຈະຂາບໄຫວ້ຜູ້ປາຖະໜາຈະຂ້າຕົນ
ຫຼືຜູ້ປາຖະໜາຈະຂ້າເຂົາຈະເພິ່ງໃຫ້ຜູ້ທີ່ຕົນຈະຂ້າ
ຂາບໄຫວ້ຕົນໄດ້ແນວໃດ ກໍານັ້ນຍ່ອມບໍ່ສໍາເລັດ

(ພະຍານາກຕັດວ່າ)

[໑໘໗໖] ບັນດິດ ຄໍານັ້ນຖືກຄືທີ່ທ່ານເວົ້າ ທ່ານເວົ້າຈິງ
ນັກໂທດປະຫານບໍ່ຄວນຂາບໄຫວ້ເພດຊະຄາດ
ຫຼືເພດຊະຄາດກໍບໍ່ຄວນໃຫ້ນັກໂທດປະຫານຂາບໄຫວ້ຕົນ

[໑໘໗໗] ຄົນຈະຂາບໄຫວ້ຜູ້ປາຖະໜາຈະຂ້າຕົນ
ຫຼືຜູ້ປາຖະໜາຈະຂ້າເຂົາຈະເພິ່ງໃຫ້ຜູ້ທີ່ຕົນຈະຂ້າ
ຂາບໄຫວ້ຕົນໄດ້ແນວໃດ ກໍານັ້ນຍ່ອມບໍ່ສໍາເລັດ

(ວິທຸຣະບັນດິດຂາບທູນວ່າ)

[໑໘໗໙] ຂ້າແດ່ ນາຄະຣາຊາ ວິມານຂອງພຣະອົງນີ້
ເປັນຂອງບໍ່ທ່ຽງ ແຕ່ເປັນຄືທ່ຽງ
ລິດ ຄວາມຮຸ່ງເຮືອງ ກໍາລັງ ຄວາມພຽນ
ແລະການອຸບັດໃນນາຄະໂລກໄດ້ມີແລ້ວແກ່ພຣະອົງ
ຂ້າພຣະອົງຂໍທູນຖາມເນື້ອຄວາມນັ້ນກັບພຣະອົງ
ວິມານນີ້ພຣະອົງຊົງໄດ້ມາແນວໃດນໍ

[໑໘໙໐] ວິມານນີ້ພຣະອົງຊົງໄດ້ມາຍ້ອນອາໄສອັນໃດ
ຫຼືເປັນຂອງເກີດຂຶ້ນຕາມລະດູ
ພຣະອົງຊົງສ້າງຂຶ້ນເອງຫຼືເຫຼົ່າເທວະດາຖວາຍພຣະອົງ
ຂ້າແດ່ ພະຍານາກ ຂໍພຣະອົງຕັດບອກເນື້ອຄວາມນີ້ແກ່ຂ້າພຣະອົງ
ຕາມທີ່ພຣະອົງຊົງໄດ້ວິມານນີ້ເທີ້ນ

(ພະຍານາກຕັດວ່າ)

[໑໕໗໑] ວິມານນີ້ ເຮົາຈະໄດ້ມາຍ້ອນອາໄສອັນໃດກໍເປັນໄປບໍ່ໄດ້
ຈະເກີດຂຶ້ນຕາມລະດູກໍເປັນໄປບໍ່ໄດ້
ເຮົາບໍ່ໄດ້ເຮັດຂຶ້ນເອງ ເຫຼົ່າເທວະດາກໍບໍ່ໄດ້ຖວາຍ
ວິມານນີ້ເຮົາໄດ້ມາດ້ວຍບຸນກຳອັນບໍ່ຕໍ່າຊາມຂອງເຮົາເອງ

(ວິທຸຣະບັນດິດທູນຖາມວ່າ)

[໑໕໗໘] ຂ້າແດ່ ນາຄະຣາຊາ ອັນໃດເປັນຂໍ້ວັດປະຕິບັດ
ອັນໃດເປັນພົມມະຈັນຂອງພຣະອົງ
ລິດ ຄວາມຮຸ່ງເຮືອງ ກຳລັງ ຄວາມພຽນ
ແລະການອຸບັດໃນນາຄະໂລກ ທັງວິມານໃຫຍ່ຂອງພຣະອົງນີ້
ເປັນຜົນຂອງກຳອັນໃດທີ່ພຣະອົງຊົງປະພຶດໄວ້ດີແລ້ວ

(ພະຍານາກຕັດວ່າ)

[໑໕໗໙] ເຮົາແລະພັນລະຍາທັງ ໔ ເມື່ອຄັ້ງຍັງຢູ່ໃນມະນຸດສາໂລກ
ເປັນຜູ້ມີສັດທາ ເປັນທານະບໍດີ
ຄັ້ງນັ້ນ ເຮືອນຂອງເຮົາເປັນດັ່ງນໍ້າສ້າງ
ເຮົາໄດ້ບຳລຸງສະມະນະແລະພາມທັງຫຼາຍໃຫ້ອີ່ມໜຳສຳຮານແລ້ວ

[໑໕໘໐] ເຮົາທັງ ໔ ໄດ້ຖວາຍທານ ຄື ດອກໄມ້ ຂອງຫອມ
ເຄື່ອງລູບທາ ເຄື່ອງໄຕ້ ບ່ອນນອນ ບ່ອນພັກ
ຜ້ານຸ່ງຫົ່ມ ຜ້າປູນອນ ເຂົ້າ ແລະນໍ້າ ໂດຍເຄົາລົບ

[໑໕໘໑] ທານທີ່ໄດ້ຖວາຍໂດຍຄວາມເຄົາລົບນັ້ນເປັນຂໍ້ວັດປະຕິບັດຂອງເຮົາ
ແລະການສະມາທານຂໍ້ວັດປະຕິບັດນັ້ນເປັນພົມມະຈັນຂອງເຮົາ
ທ່ານນັກປາດ ລິດ ຄວາມຮຸ່ງເຮືອງ ກຳລັງ ຄວາມພຽນ
ການອຸບັດໃນນາຄະໂລກ ແລະວິມານໃຫຍ່ຂອງເຮົານີ້
ເປັນຜົນແຫ່ງຂໍ້ວັດປະຕິບັດແລະພົມມະຈັນນັ້ນທີ່ເຮົາປະພຶດດີແລ້ວ

(ວິທຸຣະບັນດິດຂາບທູນວ່າ)

[໑໕໘໒] ຖ້າວິມານນີ້ພຣະອົງຊົງໄດ້ມາດ້ວຍອານຸພາບແຫ່ງບຸນແນວນີ້

ພຣະອົງຍ່ອມຊົງຮູ້ຜົນບຸນ
ແລະຮູ້ການອຸບັດໃນນາຄະໂລກຍ້ອນຜົນບຸນ
ຍ້ອນເຫດນັ້ນແລ ຂໍພຣະອົງຢ່າຊົງຜະໝາດ
ຈົ່ງຊົງປະພຶດທຳຕາມທີ່ຈະໄດ້ຄອບຄອງວິມານນີ້ຕໍ່ໄປເທີ້ນ

(ພະຍານາກຕັດວ່າ)

[໑໕໙໗] ທ່ານບັນດິດ ໃນນາຄະໂລກນີ້
ບໍ່ມີສະມະນະແລະພາມທີ່ເຮົາຈະຖວາຍເຂົ້າແລະນ້ຳເລີຍ
ເຮົາຖາມແລ້ວ ຂໍທ່ານຈົ່ງບອກເນື້ອຄວາມນີ້ແກ່ເຮົາ
ໂດຍທີ່ເຮົາຈະເພິ່ງໄດ້ຄອບຄອງວິມານຕໍ່ໄປອີກເທີ້ນ

(ວິທຸຣະບັນດິດຂາບທູນວ່າ)

[໑໕໙໘] ຂ້າແດ່ ພະຍານາກ ກໍນາກທັງຫຼາຍທີ່ເປັນພຣະໂອຣົດ
ພຣະທິດາ ພຣະຊາຍາ ທັງພຣະຍາດແລະຂ້າເຝົ້າຂອງພຣະອົງ
ຜູ້ອຸບັດໃນວິມານນີ້ມີຢູ່ ຂໍພຣະອົງຊົງເປັນຜູ້ບໍ່ປະທຸດສະຮ້າຍ
ໃນນາກທີ່ເປັນພຣະໂອຣົດເປັນຕົ້ນເຫຼົ່ານັ້ນ
ດ້ວຍພຣະກາຍແລະພຣະວາຈາເປັນປະຈຳເທີ້ນ

[໑໕໙໙] ພຣະອົງຊົງຮັກສາຄວາມບໍ່ປະທຸດສະຮ້າຍ
ດ້ວຍພຣະກາຍແລະພຣະວາຈາແນວນີ້
ພຣະອົງດຳລົງຢູ່ໃນວິມານນີ້ໄດ້ຈົນຕະຫຼອດພຣະຊົນມາຍຸແລ້ວ
ຈັກສະເດັດໄປສູ່ເທວະໂລກເຊິ່ງສູງຂຶ້ນໄປກວ່ານາຄະໂລກນີ້

(ປຸນນະກະຍັກກ່າວວ່າ)

[໑໖໐໐] ທ່ານເປັນອຳມາດຄູ່ຊີບຂອງພຣະຣາຊາຜູ້ປະເສີດສຸດພຣະອົງໃດ
ພຣະຣາຊາຜູ້ປະເສີດສຸດພຣະອົງນັ້ນພາກຈາກທ່ານແລ້ວ
ຍ່ອມຊົງເສົ້າໂສກແນ່ແທ້ ຄົນຜູ້ຖືກຄວາມທຸກຄອບງຳກໍດີ
ຄົນຜູ້ປ່ວຍໜັກກໍດີ ໄດ້ສະມາຄົມກັບທ່ານແລ້ວເພິ່ງໄດ້ຄວາມສຸກ

(ວິທຸຣະບັນດິດຂາບທູນວ່າ)

[໑໖໐໑] ຂ້າແດ່ ພະຍານາກ ພຣະອົງຕັດທຳຂອງເຫຼົ່າສັດຕະບຸຣຸດ

ເຊິ່ງເປັນສ່ວນແຫ່ງປະໂຫຍດອັນປະເສີດ
ທີ່ນັກປາດໄດ້ປະພຶດດີແລ້ວໂດຍແທ້
ຍ້ອນບັນດາອັນຕະລາຍທັງຫຼາຍ ເມື່ອໄພແນວນີ້ເກີດຂຶ້ນ
ຄຸນວິເສດຂອງເຫຼົ່າບຸກຄົນຜູ້ມີປັນຍາເຊັ່ນຂ້າພຣະອົງຍ່ອມຜາກົດ

(ພະຍານາກຕັດຖາມວ່າ)

[໑໖໐໔] ຂໍທ່ານຈົ່ງບອກເຮົາ ປຸນນະກະຍັກນີ້ໄດ້ທ່ານມາຊື່ ໆ ຫຼື
ຂໍທ່ານຈົ່ງບອກເຮົາ ປຸນນະກະຍັກນີ້ຊະນະໃນການຫຼິ້ນການພະນັນ
ຈຶ່ງໄດ້ທ່ານມາ ປຸນນະກະຍັກນີ້ບອກວ່າ ໄດ້ທ່ານມາໂດຍທໍາ
ທ່ານຕົກຢູ່ໃນເງື້ອມມືຂອງປຸນນະກະຍັກນີ້ໄດ້ແນວໃດ

(ວິທຸຣະບັນດິດທູນຕອບວ່າ)

[໑໖໐໕] ປຸນນະກະຍັກນີ້ຫຼິ້ນການພະນັນຊະນະພຣະຣາຊາຂອງຂ້າພຣະອົງ
ຜູ້ເປັນໃຫຍ່ໃນນະຄອນອິນທປັດນັ້ນ
ພຣະຣາຊາພຣະອົງນັ້ນທີ່ປຸນນະກະຍັກຊະນະແລ້ວ
ຈຶ່ງໄດ້ຊົງພຣະຣາດຊະທານຂ້າພຣະອົງແກ່ປຸນນະກະຍັກນີ້
ປຸນນະກະຍັກນີ້ຈຶ່ງໄດ້ຂ້າພຣະອົງມາໂດຍທໍາ
ບໍ່ແມ່ນໄດ້ມາໂດຍບໍ່ເປັນທໍາ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໑໖໐໖] ໃນການນັ້ນ ພະຍານາກຜູ້ປະເສີດຊົງສະດັບຄໍາສຸພາສິດ
ຂອງວິທຸຣະບັນດິດຜູ້ເປັນນັກປາດແລ້ວ
ຊົງຊົມຊື່ນໂສມະນັດມີພຣະທະໄທເຕັມຕື້ນດ້ວຍປິຕິ
ຊົງຈູງມືວິທຸຣະບັນດິດຜູ້ມີປັນຍາບໍ່ຕໍ່າຊາມ
ໄດ້ສະເດັດເຂົ້າໄປໃນບ່ອນຢູ່ຂອງພຣະຊາຍາ ຕັດວ່າ

[໑໖໐໘] ນ້ອງວິມະລາ ຍ້ອນເຫດໃດ ນ້ອງຈຶ່ງຈ່ອຍເຫຼືອງ
ຍ້ອນເຫດໃດ ນ້ອງຈຶ່ງບໍ່ຢາກສະເຫວີຍພຣະກະຍາຫານ
ກໍກຽດຕິຄຸນເຊັ່ນນັ້ນຂອງເຮົາບໍ່ມີ
ທ່ານຜູ້ນີ້ຄືວິທຸຣະບັນດິດຜູ້ບັນເທົາຄວາມມືດຂອງໂລກທັງປວງ

[໑໖໐໙] ນີ້ຄືຜູ້ທີ່ນ້ອງຕ້ອງການຫົວໃຈ ຜູ້ທໍາຄວາມສະຫວ່າງສະໄຫວມາເຖິງແລ້ວ

ເຊີນນ້ອງຕັ້ງໃຈຟັງຄຳເວົ້າຂອງທ່ານ
ການທີ່ຈະໄດ້ເຫັນທ່ານອີກເປັນການຫາໄດ້ຍາກ

(ພຣະສາດສະດາຕັດຕໍ່ໄປວ່າ)

[໑໖໐໗] ນາງວິມະລາທອດພຣະເນດເຫັນວິທຸຣະບັນດິດນັ້ນ
ຜູ້ມີປັນຍາຄືແຜ່ນດິນແລ້ວ ມີພຣະທະໄທຍິນດີໂສມະນັດ
ຊົງຍົກພຣະອົງຄຸລີທັງ ໑໐ ນິ້ວຂຶ້ນໄຫວ້ແລະຕັດກັບວິທຸຣະບັນດິດ
ຜູ້ເປັນນັກປາດປະເສີດທີ່ສຸດແຫ່ງຊາວກຸຣຸຣັດວ່າ

[໑໖໐໘] ທ່ານເປັນມະນຸດມາເຫັນນາຄະໂລກທີ່ຕົນບໍ່ເຄີຍເຫັນ
ຖືກໄພຄືຄວາມຕາຍຄຸກຄາມແລ້ວ ບໍ່ຢ້ານແລະບໍ່ອະພິວາດ
ອາການແນວນີ້ເບິ່ງຄືວ່າຈະບໍ່ມີແກ່ຜູ້ມີປັນຍາ

(ວິທຸຣະບັນດິດຂາບທູນວ່າ)

[໑໖໐໙] ຂ້າແດ່ ພຣະນາງເຈົ້ານາຄີ ຂ້າພຣະອົງບໍ່ຢ້ານ
ແລະບໍ່ຖືກໄພຄືຄວາມຕາຍຄຸກຄາມ
ນັກໂທດປະຫານບໍ່ເພິ່ງຂາບໄຫວ້ເພດຊະຄາດ
ຫຼືເພດຊະຄາດກໍບໍ່ເພິ່ງໃຫ້ນັກໂທດປະຫານຂາບໄຫວ້ຕົນ

[໑໖໑໐] ຄົນຈະຂາບໄຫວ້ຜູ້ປາຖະໜາຈະຂ້າຕົນ
ຫຼືຜູ້ປາຖະໜາຈະຂ້າເຂົາຈະເພິ່ງໃຫ້ຜູ້ທີ່ຂ້າຕົນ
ຂາບໄຫວ້ຕົນໄດ້ແນວໃດ ກຳນັ້ນຍ່ອມບໍ່ສຳເລັດ

(ນາງນາກວິມະລາຕັດວ່າ)

[໑໖໑໑] ບັນດິດ ຄຳນັ້ນຖືກຄືທີ່ທ່ານເວົ້າ ທ່ານເວົ້າຈິງ
ນັກໂທດປະຫານບໍ່ຄວນຂາບໄຫວ້ເພດຊະຄາດ
ຫຼືເພດຊະຄາດກໍບໍ່ຄວນໃຫ້ນັກໂທດປະຫານຂາບໄຫວ້ຕົນ

[໑໖໑໒] ຄົນຈະຂາບໄຫວ້ຜູ້ປາຖະໜາຈະຂ້າຕົນ
ຫຼືຜູ້ທີ່ປາຖະໜາຈະຂ້າເຂົາຈະເພິ່ງໃຫ້ຜູ້ທີ່ຈະຂ້າຕົນ
ຂາບໄຫວ້ຕົນໄດ້ແນວໃດ ກຳນັ້ນຍ່ອມບໍ່ສຳເລັດ

(ວິທຸຣະບັນດິດທູນຖາມວ່າ)

[໑໖໑໓] ຂ້າແດ່ ນາງນາກກັນຍາ ວິມານຂອງພຣະອົງນີ້
ເປັນຂອງບໍ່ທ່ຽງ ແຕ່ເປັນຄືທ່ຽງ
ລິດ ຄວາມຮຸ່ງເຮືອງ ກຳລັງ ຄວາມພຽນ
ແລະການອຸບັດໃນນາຄະໂລກໄດ້ມີແລ້ວແກ່ພຣະອົງ
ຂ້າພຣະອົງຂໍທູນຖາມເນື້ອຄວາມນັ້ນກັບພຣະອົງ
ວິມານນີ້ພຣະອົງຊົງໄດ້ມາແນວໃດນໍ

[໑໖໑໔] ວິມານນີ້ພຣະອົງຊົງໄດ້ມາຍ້ອນອາໄສອັນໃດ
ຫຼືເປັນຂອງເກີດຂຶ້ນຕາມລະດູ
ພຣະອົງຊົງສ້າງຂຶ້ນເອງຫຼືເຫຼົ່າເທວະດາຖວາຍພຣະອົງ
ຂ້າແດ່ ນາງນາກກັນຍາ ຂໍພຣະອົງຕັດບອກເນື້ອຄວາມນີ້ແກ່ຂ້າພຣະອົງ
ຕາມທີ່ພຣະອົງຊົງໄດ້ວິມານນີ້ເທີ້ນ

(ນາງນາກວິມະລາຕອບວ່າ)

[໑໖໑໕] ວິມານນີ້ ເຮົາຈະໄດ້ມາຍ້ອນອາໄສອັນໃດກໍເປັນໄປບໍ່ໄດ້
ຈະເກີດຂຶ້ນຕາມລະດູກໍເປັນໄປບໍ່ໄດ້
ເຮົາບໍ່ໄດ້ເຮັດຂຶ້ນເອງ ເຫຼົ່າເທວະດາກໍບໍ່ໄດ້ຖວາຍ
ວິມານນີ້ເຮົາໄດ້ມາດ້ວຍບຸນກຳອັນບໍ່ຕ່ຳຊາມຂອງເຮົາເອງ

(ວິທຸຣະບັນດິດທູນຖາມວ່າ)

[໑໖໑໖] ຂ້າແດ່ ພຣະນາງເຈົ້ານາຄີ ອັນໃດເປັນຂໍ້ວັດປະຕິບັດ
ອັນໃດເປັນພົມມະຈັນຂອງພຣະອົງ
ລິດ ຄວາມຮຸ່ງເຮືອງ ກຳລັງ ຄວາມພຽນ
ແລະການອຸບັດໃນນາຄະໂລກ ທັງວິມານໃຫຍ່ຂອງພຣະອົງນີ້
ເປັນຜົນຂອງກຳອັນໃດທີ່ພຣະອົງໄດ້ປະພຶດໄວ້ດີແລ້ວ

(ນາງນາກວິມະລາຕອບວ່າ)

[໑໖໑໗] ເຮົາແລະພຣະສະວາມີຂອງເຮົາທັງ ໔
ເປັນຜູ້ມີສັດທາ ເປັນທານະບໍດີ
ຄັ້ງນັ້ນ ເຮືອນຂອງເຮົາເປັນດັ່ງນ້ຳສ້າງ
ເຮົາໄດ້ບຳລຸງສະມະນະແລະພາມທັງຫຼາຍໃຫ້ອີ່ມໜຳສຳຣານແລ້ວ

[໑໖໑໗] ເຮົາແລະພຣະສະວາມີໄດ້ຖວາຍທານ ຄື ດອກໄມ້ ຂອງຫອມ
ເຄື່ອງລູບທາ ເຄື່ອງໄຕ້ ບ່ອນນອນ ບ່ອນພັກ
ຜ້ານຸ່ງຫົ່ມ ຜ້າປູນອນ ເຂົ້າ ແລະນໍ້າ ໂດຍເຄົາລົບ

[໑໖໑໙] ທານທີ່ໄດ້ຖວາຍໂດຍເຄົາລົບນັ້ນເປັນຂໍ້ວັດປະຕິບັດຂອງເຮົາ
ແລະການສະມາທານຂໍ້ວັດປະຕິບັດນັ້ນເປັນພົມມະຈັນຂອງເຮົາ
ທ່ານນັກປາດ ລິດ ຄວາມຮຸ່ງເຮືອງ ກຳລັງ ຄວາມພຽນ
ການອຸບັດໃນນາຄະໂລກ ແລະວິມານໃຫຍ່ຂອງເຮົານີ້
ເປັນຜົນແຫ່ງຂໍ້ວັດປະຕິບັດແລະພົມມະຈັນນັ້ນທີ່ເຮົາປະພຶດດີແລ້ວ

(ວິທຸຣະບັນດິດທູນຖາມວ່າ)

[໑໖໒໐] ຖ້າວິມານນີ້ພຣະອົງຊົງໄດ້ມາດ້ວຍອານຸພາບແຫ່ງບຸນແນວນີ້
ພຣະອົງຍ່ອມຊົງຮູ້ຜົນບຸນ
ແລະຮູ້ການອຸບັດໃນນາຄະໂລກຍ້ອນຜົນບຸນ
ຍ້ອນເຫດນັ້ນແລ ຂໍພຣະອົງຢ່າຊົງຜະໝາດ
ຈົ່ງຊົງປະພຶດທຳຕາມທີ່ຈະໄດ້ຄອບຄອງວິມານນີ້ຕໍ່ໄປເທີ້ນ

(ນາງນາກວິມະລາກ່າວວ່າ)

[໑໖໒໑] ທ່ານບັນດິດ ໃນນາຄະໂລກນີ້
ບໍ່ມີສະມະນະແລະພາມທີ່ເຮົາຈະຖວາຍເຂົ້າແລະນໍ້າເລີຍ
ເຮົາຖາມແລ້ວ ຂໍທ່ານຈົ່ງບອກເນື້ອຄວາມນີ້ແກ່ເຮົາ
ໂດຍທີ່ເຮົາຈະເພິ່ງໄດ້ຄອບຄອງວິມານຕໍ່ໄປອີກເທີ້ນ

(ວິທຸຣະບັນດິດຂາບທູນວ່າ)

[໑໖໒໒] ຂ້າແດ່ ພຣະນາງເຈົ້ານາຄີ ກໍນາກທັງຫຼາຍທີ່ເປັນພຣະໂອຣົດ
ພຣະທິດາ ພຣະສະວາມີ ທັງພຣະຍາດ ແລະຂ້າເຝົ້າຂອງພຣະອົງ
ຜູ້ອຸບັດໃນວິມານນີ້ມີຢູ່ ຂໍພຣະອົງຊົງເປັນຜູ້ບໍ່ປະທຸດສະຮ້າຍ
ໃນນາກທີ່ເປັນພຣະໂອຣົດເປັນຕົ້ນເຫຼົ່ານັ້ນ
ດ້ວຍພຣະກາຍແລະພຣະວາຈາເປັນປະຈຳເທີ້ນ

[໑໖໒໓] ພຣະອົງຊົງຮັກສາຄວາມບໍ່ປະທຸດສະຮ້າຍ
ດ້ວຍພຣະກາຍແລະພຣະວາຈາແນວນີ້

ພຣະອົງດຳລົງຢູ່ໃນວິມານນີ້ໄດ້ຈົນຕະຫຼອດພຣະຊົນມາຍຸແລ້ວ
ຈັກສະເດັດໄປສູ່ເທວະໂລກເຊິ່ງສູງຂຶ້ນໄປກວ່ານາຄະໂລກນີ້

(ນາງນາກວິມະລາຕັດວ່າ)

[໑໗໘໔] ທ່ານເປັນອຳມາດຄູ່ຊີບຂອງພຣະຣາຊາຜູ້ປະເສີດສຸດພຣະອົງໃດ
ພຣະຣາຊາຜູ້ປະເສີດສຸດພຣະອົງນັ້ນພາກຈາກທ່ານແລ້ວ
ຍ່ອມຊົງເສົ້າໂສກແນ່ແທ້ ຄົນຜູ້ຖືກຄວາມທຸກຄອບງຳກໍດີ
ຄົນຜູ້ປ່ວຍໜັກກໍດີ ໄດ້ສະມາຄົມກັບທ່ານແລ້ວເພິ່ງໄດ້ຄວາມສຸກ

(ວິທຸຣະບັນດິດຂາບທູນວ່າ)

[໑໗໘໕] ຂ້າແດ່ ພຣະນາງເຈົ້ານາຄີ ພຣະອົງຕັດທຳຂອງເຫຼົ່າສັດຕະບຸຣຸດ
ເຊິ່ງເປັນສ່ວນແຫ່ງປະໂຫຍດອັນປະເສີດ
ທີ່ນັກປາດໄດ້ປະພຶດດີແລ້ວໂດຍແທ້
ຍ້ອນບັນດາອັນຕະລາຍທັງຫຼາຍ ເມື່ອໄພແນວນີ້ເກີດຂຶ້ນ
ຄຸນວິເສດຂອງບຸກຄົນຜູ້ມີປັນຍາເຊັ່ນຂ້າພຣະອົງຍ່ອມຜາກົດ

(ນາງນາກວິມະລາຕັດຖາມວ່າ)

[໑໗໘໖] ຂໍທ່ານຈົ່ງບອກເຮົາ ປຸນນະກະຍັກນີ້ໄດ້ທ່ານມາຊື່ ໆ ບໍ
ຂໍທ່ານຈົ່ງບອກເຮົາ ປຸນນະກະຍັກນີ້ຊະນະໃນການຫຼິ້ນການພະນັນ
ຈຶ່ງໄດ້ທ່ານມາ ປຸນນະກະຍັກນີ້ບອກວ່າ ໄດ້ທ່ານມາໂດຍທຳ
ທ່ານຕົກຢູ່ໃນເງື້ອມມືຂອງປຸນນະກະຍັກນີ້ໄດ້ແນວໃດ

(ວິທຸຣະບັນດິດຂາບທູນວ່າ)

[໑໗໘໗] ປຸນນະກະຍັກນີ້ຫຼິ້ນການພະນັນຊະນະພຣະຣາຊາຂອງຂ້າພຣະອົງ
ຜູ້ເປັນໃຫຍ່ໃນນະຄອນອິນທະປັດນັ້ນ
ພຣະຣາຊາພຣະອົງນັ້ນທີ່ປຸນນະກະຍັກຊະນະແລ້ວ
ຈຶ່ງໄດ້ຊົງພຣະຣາດຊະທານຂ້າພຣະອົງແກ່ປຸນນະກະຍັກນີ້
ປຸນນະກະຍັກນີ້ຈຶ່ງໄດ້ຂ້າພຣະອົງມາໂດຍທຳ
ບໍ່ແມ່ນໄດ້ມາໂດຍບໍ່ເປັນທຳ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນີ້ ຈຶ່ງຕັດວ່າ)

[໑໒໔໗] ພະຍານາກວະຣຸນໄດ້ຕັດຖາມບັນຫາກັບບັນດິດສັນໃດ
ແມ່ນພຣະນາງວິມະລານາກກັນຍາກໍຕັດຖາມບັນຫາກັບບັນດິດສັນນັ້ນ

[໑໒໔໙] ວິທຸຣະບັນດິດຜູ້ເປັນນັກປາດທີ່ພະຍານາກວະຣຸນຕັດຖາມແລ້ວ
ໄດ້ພະຍາກອນບັນຫາໃຫ້ພະຍານາກວະຣຸນຊົງຍິນດີສັນໃດ
ແມ່ນພຣະນາງວິມະລານາກກັນຍາກໍໃຫ້ຊົງຍິນດີສັນນັ້ນ

[໑໒໕໐] ວິທຸຣະບັນດິດຜູ້ເປັນນັກປາດຮູ້ວ່າ ພະຍານາກຜູ້ປະເສີດ
ແລະນາງນາກກັນຍາທັງ ໔ ພຣະອົງນັ້ນພໍພຣະທະໄທ
ກໍບໍ່ເກງກົວ ບໍ່ຢ້ານ ບໍ່ຂົນຫົວລຸກ
ໄດ້ຂາບທູນທ້າວວະຣຸນນາຄະຣາຊາວ່າ

[໑໒໕໑] ຂ້າແດ່ ພະຍານາກ ພຣະອົງຢ່າຊົງວິຕົກເລີຍ
ຂ້າພຣະອົງເປັນສ່ວຍ[๑] ຂໍພຣະອົງຈົ່ງຊົງເຮັດກິດ
ດ້ວຍຊີ້ນຫະໄທຕາມທີ່ພຣະອົງຊົງປະສົງເທີ້ນ
ຂ້າພຣະອົງຈະທຳລາຍສະຣີຣະນີ້ຕາມພຣະປະສົງຂອງພຣະອົງເອງ

(ພະຍານາກຕັດວ່າ)

[໑໒໕໒] ປັນຍານັ້ນເອງ ເປັນຫົວໃຈຂອງບັນດິດທັງຫຼາຍ
ພວກເຮົາຍິນດີດ້ວຍປັນຍາຂອງທ່ານຍິ່ງ
ຂໍປຸນນະກະເສນາບໍດີຂອງຍັກຈົ່ງໄດ້ພັນລະຍາ ໃນມື້ນີ້
ແລະຈົ່ງໄປສົ່ງທ່ານໃຫ້ເຖິງແຄວັ້ນກຸຣຸໃນມື້ດຽວກັນນີ້ເທີ້ນ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໑໒໕໓] ປຸນນະກະຍັກນັ້ນໄດ້ນາງອິຣັນທະຕີນາກກັນຍາແລ້ວ
ກໍມີໃຈຊົມຊື່ນໂສມະນັດ ໄດ້ກ່າວກັບວິທຸຣະບັນດິດ
ຜູ້ປະເສີດທີ່ສຸດແຫ່ງຊາວແຄວັ້ນກຸຣຸວ່າ

[໑໒໕໔] ທ່ານວິທຸຣະບັນດິດ ທ່ານໄດ້ເຮັດໃຫ້ຂ້າພະເຈົ້າ
ພ້ອມພຽງກັບພັນລະຍາ
ຂ້າພະເຈົ້າຈະເຮັດກິດໃຫ້ແກ່ທ່ານ ຈະໃຫ້ຣັດຕະນະຄືແກ້ວມະນີນີ້ແກ່ທ່ານ
ແລະຈະນຳທ່ານໄປສົ່ງໃຫ້ເຖິງແຄວັ້ນກຸຣຸໃນມື້ນີ້ເລີຍໂລດ

(ວິທຸຣະບັນດິດກ່າວວ່າ)

[໑໙໓໕] ກັດຈານະ ຂໍທ່ານຈົ່ງມີໄມຕີ
ຢ່າໄດ້ແຕກແຍກກັບພັນລະຍາຜູ້ໜ້າຮັກຂອງທ່ານຕະຫຼອດໄປເທີ້ນ
ຂໍທ່ານຈົ່ງເປັນຜູ້ມີຈິດເບີກບານມີປີຕິໂສມະນັດ
ທ່ານໄດ້ໃຫ້ແກ້ວມະນີແລ້ວ
ຂໍຈົ່ງນໍາຂ້າພະເຈົ້າໄປສູ່ນະຄອນອິນທະປັດດ້ວຍເທີ້ນ

(ພຣະສາດສະດາຕັດຕໍ່ໄປວ່າ)

[໑໙໓໖] ປຸນນະກະຍັກນັ້ນເຊີນໃຫ້ວິທຸຣະບັນດິດ
ຜູ້ປະເສີດສຸດຂອງຊາວແຄວ້ນກຸຣຸ ເຊິ່ງມີປັນຍາບໍ່ຕໍ່າຊາມ
ໃຫ້ຂຶ້ນນັ່ງເທິງອາສະນະທາງໜ້າຂອງຕົນແລ້ວ
ນໍາໄປສູ່ນະຄອນອິນທະປັດ

[໑໙໓໗] ປຸນນະກະຍັກນັ້ນໄດ້ນໍາວິທຸຣະບັນດິດ
ຜູ້ປະເສີດສຸດຂອງຊາວແຄວ້ນກຸຣຸໄປສູ່ນະຄອນອິນທະປັດ
ໄດ້ໄວຍິ່ງກວ່າໃຈຂອງມະນຸດຄິດໄປຮັບອາລົມ໌ສາອີກ

(ປຸນນະກະຍັກກ່າວວ່າ)

[໑໙໓໘] ພູ້ນ ນະຄອນອິນທະປັດຜາກົດຢູ່
ແລະປ່າໝາກມ່ວງທີ່ໜ້າອອນຊອນກໍເຫັນເປັນຫຍ່ອມ ໆ
ຂ້າພະເຈົ້າພ້ອມກັບພັນລະຍາແລະທ່ານກໍໄດ້ເຖິງບ່ອນພັກອາໄສຂອງຕົນ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໑໙໓໙] ປຸນນະກະຍັກຜູ້ມີຜິວພັນຜຸດຜ່ອງນັ້ນ
ໄດ້ຍົກວິທຸຣະບັນດິດຜູ້ປະເສີດທີ່ສຸດຂອງຊາວແຄວ້ນກຸຣຸ
ລົງໄວ້ໃນທ່າມກາງທໍາມະສະພາແລ້ວ
ກໍຂຶ້ນມ້າອາຊາໄນເຫາະໄປໃນອາກາດກາງຫາວ

[໑໙໔໐] ພຣະຣາຊາໄດ້ທອດພຣະເນດເຫັນວິທຸຣະບັນດິດນັ້ນແລ້ວ
ຊົງພຣະປຣິດາປາໂມດເປັນຢ່າງຍິ່ງ
ສະເດັດລຸກຂຶ້ນສວມກອດວິທຸຣະບັນດິດດ້ວຍພຣະພາຫາທັງ ໔

ບໍ່ຊົງຫວັ່ນໄຫວ ຊົງເຊື້ອເຊີນໃຫ້ນັ່ງເທິງອາສະນະ
ທ່ານກາງທຳມະສະພາກົງພຣະພັກ ຕັດວ່າ

[໑໖໔໑] ທ່ານເປັນຜູ້ແນະນຳພວກເຮົາ
ຄືນາຍສາຣະຖີບັງຄັບລົດຫຸ້ມເກາະ
ຊາວແຄວັນກຸຣຸທັງຫຼາຍຍິນດີຍ້ອນໄດ້ເຫັນທ່ານ
ເຮົາໄດ້ຖາມທ່ານແລ້ວ ຂໍຈົ່ງບອກເນື້ອຄວາມນັ້ນ
ທ່ານພົ້ນຈາກມານິບມາໄດ້ແນວໃດ

(ວິທຸຣະບັນດິດຂາບທູນວ່າ)

[໑໖໔໒] ຂ້າແດ່ ພຣະອົງຜູ້ເປັນຈອມແຫ່ງຊົນ
ເຊິ່ງແກ່ກ້າແລະປະເສີດກວ່າຄົນ
ຜູ້ທີ່ພຣະອົງຮຽກວ່າມານົບນັ້ນບໍ່ແມ່ນມະນຸດ
ເຂົາເປັນຍັກຊື່ປຸນນະກະ
ພຣະອົງກໍຊົງເຄີຍໄດ້ຮູ້ຊື່ມາແລ້ວ
ກໍປຸນນະກະຍັກນັ້ນເປັນອຳມາດຄູ່ຊີບຂອງທ້າວກຸເວນ

[໑໖໔໓] ພະຍານາກຊົງພຣະນາມວ່າວະຣຸນຜູ້ຄອງນາຄະໂລກ
ມີພຣະກາຍໃຫຍ່ ສະອາດ ສົມບູນດ້ວຍຜິວພັນແລະກຳລັງ
ປຸນນະກະຍັກຮັກປາຖະໜານາງນາກກັນຍາຊື່ອິຣັນທະດີ
ຜູ້ເປັນທິດາຂອງພະຍານາກນັ້ນ
[໑໖໔໔] ປຸນນະກະຍັກນັ້ນຈຶ່ງຕົກລົງໃຈຈະຂ້າຂ້າພຣະອົງ
ຍ້ອນເຫດແຫ່ງນາງອິຣັນທະດີຜູ້ມີແອວບາງຮ່າງນ້ອຍໜ້າຮັກ
ກໍປຸນນະກະຍັກນັ້ນແລເປັນຜູ້ພ້ອມພຽງກັບພັນລະຍາ
ສ່ວນຂ້າພຣະອົງໄດ້ຮັບອະນຸຍາດພະຍານາກມາ
ແລະໄດ້ແກ້ວມະນີມານຳ

(ພຣະຣາຊາຕັດວ່າ)

[໑໖໔໕] ມີຕົ້ນໄມ້ຕົ້ນໜຶ່ງເກີດແປະປະຕູຣາດຊະມົນທຽນຂອງເຮົາ
ມີປັນຍາເປັນລຳຕົ້ນ ມີສິນເປັນງ່າ
ຕົ້ນໄມ້ນັ້ນປົ່ງໝາກຕ້ອງຕາມອັດຖະແລະທຳ
ມີໝາກເປັນປັນຈະໂຄຣົດ[9] ເດຍລະດາດໄປດ້ວຍຊ້າງ ມ້າ ແລະງົວ

[໑໖໔໖] ເມື່ອມະຫາຊົນກໍາລັງທໍາການບູຊາຕົ້ນໄມ້ນັ້ນ
ຫຼີ້ນເພີນຢູ່ດ້ວຍການຟ້ອນລໍາ ຂັບຮ້ອງ ແລະດົນຕີ
ມີບຸຣຸດຄົນໜຶ່ງໄລ່ທະຫານໃຫ້ໜີໄປແລ້ວລັກຕົ້ນໄມ້ນັ້ນໄປນໍາ
ຕົ້ນໄມ້ຂອງເຮົານັ້ນກັບຄືນມາຕັ້ງຢູ່ຄືເກົ່າ
ວິທຸຣະບັນດິດນີ້ກໍຄືຕົ້ນໄມ້ໃຫຍ່ນັ້ນ
ກັບຄືນມາສູ່ບ່ອນຢູ່ຂອງຕົນຄືເກົ່າແລ້ວ
ຂໍທ່ານທັງຫຼາຍຈົ່ງທໍາຄວາມເຄົາລົບນົບນອບແກ່ຕົ້ນໄມ້ນີ້ເທີ້ນ

[໑໖໔໗] ຂໍເຊີນອໍານາດເຫຼົ່າໃດເຫຼົ່າໜຶ່ງຜູ້ມີຄວາມພໍໃຈດ້ວຍຍົດ
ທີ່ໄດ້ຍ້ອນອາໄສເຮົາທຸກ ໆ ທ່ານ
ຈົ່ງສະແດງຄວາມດີໃຈຂອງຕົນໃຫ້ຜາກົດໃນມື້ນີ້ເທີ້ນ
ທ່ານກະທໍາບັນນາການໃຫ້ຫຼາຍແລ້ວ
ຈົ່ງທໍາຄວາມເຄົາລົບນົບນອບແກ່ຕົ້ນໄມ້ນີ້ເທີ້ນ

[໑໖໔໘] ສັດເຫຼົ່າໃດເຫຼົ່າໜຶ່ງທີ່ຖືກມັດໄວ້ແລະຂັງໄວ້
ເຊິ່ງມີຢູ່ໃນແວ່ນແຄວ້ນຂອງເຮົາ
ຂໍຊົນທັງຫຼາຍຈົ່ງປ່ອຍສັດເຫຼົ່ານັ້ນຈາກເຄື່ອງມັດໃຫ້ໝົດເທີ້ນ
ວິທຸຣະບັນດິດນີ້ລຸດພົ້ນຈາກການຄຸມຂັງແລ້ວສັນໃດ
ຂໍສັດເຫຼົ່ານັ້ນຈົ່ງລຸດພົ້ນຈາກເຄື່ອງມັດຄືກັນສັນນັ້ນ

[໑໖໔໙] ຂໍພວກຊາວນາຊາວໄຮ່ຈົ່ງຢຸດພັກຄາດໄຖໄວ້
ຫຼີ້ນມະໂຫຣະສົບຕະຫຼອດເດືອນໜຶ່ງນີ້ເທີ້ນ
ຂໍເຊີນພາມທັງຫຼາຍຈົ່ງມາບໍຣິໂພກເຂົ້າທີ່ໃສ່ດ້ວຍຊີ້ນ
ພວກນັກເລງສຸຣາແລະພວກທີ່ມັກດື່ມສຸຣາຈົ່ງດື່ມຈາກຖ້ວຍທີ່ເຕັມປ່ຽມ
[໑໖໕໐] ພວກຍິງແພດສະຫຍາທີ່ອາໄສຢູ່ຕາມຖະໜົນໃຫຍ່
ຈົ່ງເລົ້າໂລມຊາຍຜູ້ມີຄວາມຕ້ອງການເປັນປະຈໍາ
ອັນໜຶ່ງ ຣາດຊະບຸດທັງຫຼາຍຈົ່ງຈັດແຈ່ງການຮັກສາໃນແຄວ້ນໃຫ້ເຂັ້ມແຂງ
ຢ່າໄດ້ບຽດບຽນກັນແລະກັນ
ຂໍທ່ານທັງຫຼາຍຈົ່ງທໍາຄວາມເຄົາລົບຢໍາເກງແກ່ຕົ້ນໄມ້ນີ້ເທີ້ນ

(ທ້າວພຣະຣາຊາຕັດແນວນີ້ແລ້ວ)

[໑໖໕໑] ພຣະສະໜົມກໍານັນໃນ ພຣະກຸມານ ແພດ ແລະພວກພາມ
ໄດ້ນໍາເຂົ້າແລະນໍ້າຫຼວງຫຼາຍມາໃຫ້ວິທຸຣະບັນດິດ

[໑໖໕໔] ກອງພົນຊ້າງ ກອງພົນມ້າ ກອງພົນລົດ ແລະກອງພົນຮາບ
ໄດ້ນຳເຂົ້າແລະນ້ຳຫຼວງຫຼາຍມາໃຫ້ວິທຸຣະບັນດິດ

[໑໖໕໓] ຊາວຊົນນະບົດແລະຊາວນິຄົມມາປະຊຸມພ້ອມກັນແລ້ວ
ຕ່າງພາກັນນຳເຂົ້າແລະນ້ຳຫຼວງຫຼາຍມາໃຫ້ວິທຸຣະບັນດິດ

[໑໖໕໔] ຊົນເປັນຈຳນວນຫຼາຍເຫັນວິທຸຣະບັນດິດກັບມາເຖິງແລ້ວ
ຕ່າງກໍເຫຼື້ອມໃສ ເມື່ອວິທຸຣະບັນດິດມາເຖິງໂດຍລຳດັບແລ້ວ
ຕ່າງໂບກຜ້າໄປມາດ້ວຍປະການດັ່ງນີ້ແລ

**ວິທຸຣະຊາດົກທີ ໙ ຈົບ**

## ໑໐. ເວດສັນດອນຊາດົກ[1] (໕໔໗)
## ວ່າດ້ວຍພຣະເຈົ້າເວດສັນດອນຊົງພໍ່າເພັງທານະປາຣະມີຊາດສຸດທ້າຍ

## ກັນທະສະພອນ

(ທ້າວສັກກະຕັດວ່າ)

[໑໖໕໕] ຜຸດດີຜູ້ມີຣັດສະໝີຜິວພັນອັນປະເສີດ
ມີອະໄວຍະວະສ່ວນດ້ານໜ້າສວຍງາມ
ນາງຈົ່ງເລືອກເອົາພອນ ໑໐ ປະການ
ໃນປະຖະພີອັນເປັນທີ່ຮັກແຫ່ງຫະໄທຂອງນາງເທີ້ນ

(ເທບທິດາຜຸດດີຂາບທູນວ່າ)

[໑໖໕໖] ຂ້າແດ່ທ້າວເທວະຣາດ ຂ້ານ້ອຍຂໍນອບນ້ອມແດ່ພຣະອົງ
ຂ້ານ້ອຍໄດ້ເຮັດບາບກຳອັນໃດໄວ້ບໍ
ພຣະອົງຈຶ່ງໃຫ້ຂ້ານ້ອຍຈຸຕິຈາກສະຖານອັນໜ້າອອນຊອນ
ຄືລົມພັດຕົ້ນໄມ້ໃຫຍ່ໃຫ້ໂຄ່ນໄປ

(ທ້າວສັກກະຕັດວ່າ)

[໑໖໕໗] ນາງບໍ່ໄດ້ເຮັດບາບກຳອັນໃດໄວ້ເລີຍ
ແລະນາງຈະບໍ່ເປັນທີ່ຮັກຂອງເຮົາກໍເປັນໄປບໍ່ໄດ້

ແຕ່ບຸນຂອງນາງໄດ້ໝົດລົງແລ້ວ
ເຫດນັ້ນ ເຮົາຈຶ່ງກ່າວກັບນາງແນວນີ້

[໑໖໔໗] ຄວາມຕາຍມາໃກ້ນາງແລ້ວ
ນາງຈັກຕ້ອງພັດພາກຈາກໄປ
ນາງຈົ່ງຮັບພອນ ໑໐ ປະການນີ້ຂອງເຮົາຜູ້ກຳລັງຈະໃຫ້

(ເທບທິດາຜຸດດີຂາບທູນວ່າ)

[໑໖໔໙] ຂ້າແດ່ທ້າວສັກກະຜູ້ເປັນໃຫຍ່ກວ່າພູດທັງປວງ
ຖ້າພຣະອົງຈະປະທານພອນແກ່ຂ້ານ້ອຍ
ຂ້າແດ່ ພຣະອົງຜູ້ຈະເລີນ ຂໍໃຫ້ຂ້ານ້ອຍ
ເພິ່ງເກີດໃນພຣະຣາດຊະນິເວດຂອງພຣະເຈົ້ານະຄອນສີພີ

[໑໖໖໐] ຂ້າແດ່ທ້າວປຸຣິນທະທະ ຂໍໃຫ້ຂ້ານ້ອຍ
(໑) ເພິ່ງເປັນຜູ້ມີຕາດຳຄືລູກເນື້ອຊາຍ ເຊິ່ງມີໜ່ວຍຕາດຳ
(໒) ເພິ່ງມີຂົນຄິ້ວດຳ
(໓) ເພິ່ງມີນາມວ່າຜຸດດີໃນພຣະຣາດຊະນິເວດນັ້ນ

[໑໖໖໑] (໔) ເພິ່ງໄດ້ໂອຣົດຜູ້ໃຫ້ສິ່ງທີ່ປະເສີດ
ປະກອບຄວາມເກື້ອກູນໃນຍາຈົກ
ບໍ່ໄດ້ຂີ້ຖີ່ ເຊິ່ງພຣະຣາຊາທຸກປະເທດບູຊາ ມີກຽດຕິຍົດ

[໑໖໖໒] (໕) ເມື່ອຂ້ານ້ອຍຖືພາ ຂໍຢ່າໃຫ້ທ້ອງນູນຂຶ້ນ
ເພິ່ງມີທ້ອງບໍ່ນູນສະເໝີດັ່ງຄັນສອນ
ທີ່ນາຍຊ່າງສອນເຫຼົາກຽງມື່ນແລ້ວ

[໑໖໖໓] (໖) ຂ້າແດ່ທ້າວວາສະວະ ຂໍຖັນທັງຄູ່ຂອງຂ້ານ້ອຍຢ່າໄດ້ຢ່ອນຍານ
(໗) ຂໍຜົມຫງອກຈົ່ງຢ່າໄດ້ມີ
(໘) ຂໍຜິວຫຸລີຢ່າໄດ້ຕິດເປິະເປື້ອນກາຍ
(໙) ຂໍຂ້ານ້ອຍເພິ່ງໄດ້ປົດປ່ອຍນັກໂທດຜູ້ຕ້ອງປະຫານ

[໑໖໖໔] (໑໐) ຂໍໃຫ້ຂ້ານ້ອຍໄດ້ເປັນອັກຄະຣະມະເຫສີຂອງພຣະເຈົ້ານະຄອນສີພີ
ໃນພຣະຣາດຊະນິເວດນັ້ນອັນກຶກກ້ອງໄປດ້ວຍສຽງຮ້ອງຂອງນົກຍູງ
ແລະນົກກະຣຽນ ຫ້ອມລ້ອມດ້ວຍໝູ່ຂັດຕິຍະນາຣີ

ມີທັງຄົນເຕ້ຍແລະຄົນຄ່ອມອັ່ງອໍ ທີ່ພໍ່ຄົວຊາວແຄວ້ນມະຄົດລ້ຽງດູ

[໑໕໕໔] ກໍກ້ອງໄປດ້ວຍສຽງກອນແລະສຽງບານປະຕູອັນວິຈິດ
ມີຄົນເຊີນໃຫ້ດື່ມສຸຣາແລະກິນກັບແກ້ມເທີ້ນ ຂ້ານ້ອຍ

(ທ້າວສັກກະຕັດວ່າ)

[໑໕໕໕] ນາງຜູ້ງາມທົ່ວທັງສັນພາງກາຍ
ພອນ ໑໐ ປະການໃດ ທີ່ເຮົາໄດ້ໃຫ້ນາງ
ນາງຈັກໄດ້ພອນເຫຼົ່ານັ້ນທັງໝົດ
ໃນແຄວ້ນຂອງພຣະເຈົ້ານະຄອນສີພີ

[໑໕໕໗] ທ້າວວາສະວະມະຄະວານສຸຊຳບໍດີເທວະຣາຊາ
ເມື່ອຕັດພຣະດຳຣັດນີ້ ຈຶ່ງໂຜດປະທານພອນ
ແກ່ພຣະນາງຜຸດດີແລ້ວຊົງອະນຸໂມທະນາ

**ກັນທະສະພອນ ຈົບ**

## ກັນຫິມະພານ

(ພຣະສາດສະດາຕັດເນື້ອຄວາມນີ້ວ່າ)

ພຣະນາງຜຸດດີນັ້ນ
ຈຸຕິຈາກສະຫວັນຊັ້ນຕາວະຕຶງສານັ້ນແລ້ວ
ມາບັງເກີດໃນຕະກູນກະສັດ
ໄດ້ຊົງຢູ່ຮ່ວມກັບພຣະເຈົ້າສົນໄຊໃນນະຄອນເຊຕຸດອນ
ພຣະນາງຜຸດດີຊົງຖືພາຖ້ວນທົດສະມາດແລ້ວ
ເມື່ອຊົງກະທຳປະທັກຂິນພຣະນະຄອນ
ໄດ້ປະສູດເຮົາໃນທ່າມກາງຖະໜົນຂອງພວກພໍ່ຄ້າ
ຊື່ຂອງເຮົາບໍ່ໄດ້ເນື່ອງມາແຕ່ພຣະມານດາແລະບໍ່ໄດ້ເກີດແຕ່ພຣະບິດາ
ເຮົາເກີດທີ່ຖະໜົນຂອງພວກພໍ່ຄ້າ
ດັ່ງນັ້ນ ເຮົາຈຶ່ງຊື່ວ່າ ເວດສັນດອນ
ເມື່ອເຮົາຍັງເປັນເດັກນ້ອຍເກີດໄດ້ ໘ ຂວບ
ນັ່ງຢູ່ເທິງຜາສາດ ຄິດທີ່ຈະບໍລິຈາກທານວ່າ
ເຮົາເພິ່ງໃຫ້ຫະໄທ ດວງຕາ ຊີ້ນ ເລືອດ ແລະຮ່າງກາຍ

ຖ້າວ່າຈະມີໃຜມາຂໍເຮົາ ເຮົາກໍຍິນດີບໍລິຈາກໃຫ້
ເມື່ອເຮົາຄິດຈະບໍລິຈາກທານຕາມສະພາບຄວາມເປັນຈິງ
ໃຈກໍບໍ່ຫວັ່ນໄຫວມຸ້ງໝັ້ນຢູ່ໃນການນັ້ນ
ຄືແຜ່ນດິນມີພູສິເນຣຸແລະໝູ່ໄມ້ເປັນເຄື່ອງປະດັບ

(ພຣະເວດສັນດອນຕັດກັບພວກພາມຜູ້ມາທູນຂໍຊ້າງວ່າ)

[໑໖໗] ພວກພາມຜູ້ມີຂົນຂີ້ແຮ້ດົກ
ແລະມີເລັບຍາວ ມີຂີ້ແຂ້ວເຂ ມີທຸລີເທິງຫົວ
ຢຽດແຂນຂ້າງຂວາອອກ ຈະຂໍອັນໃດເຮົານໍ

(ພວກພາມຂາບທູນວ່າ)

[໑໖໘] ຂ້າແດ່ ສົມມຸດຕິເທບ ຂ້າພຣະອົງທັງຫຼາຍທູນຂໍຣັດຕະນະ
ທີ່ເປັນເຄື່ອງເຮັດໃຫ້ແຄວ້ນຂອງຊາວນະຄອນສີພີຈະເລີນ
ຂໍໄດ້ໂຜດພຣະຣາດຊະທານຊ້າງໂຕປະເສີດ
ມີງາຄືງອນໄຖ ມີກຳລັງສາມາດເທີ້ນ

(ພຣະເວດສັນດອນຕັດວ່າ)

[໑໖໙] ເຮົາຈະໃຫ້ຊ້າງພາຍຊັບມັນໂຕປະເສີດ
ເຊິ່ງເປັນຊ້າງພາຫະນະອັນສູງສຸດ
ທີ່ພວກພາມຂໍເຮົາ ເຮົາບໍ່ໄດ້ຫວັ່ນໄຫວ

[໑໗໑] ພຣະຣາຊາຜູ້ຊົງຜະດຸງແຄວ້ນໃຫ້ຈະເລີນແກ່ຊາວນະຄອນສີພີ
ມີພຣະທະໄທນ້ອມໄປໃນການບໍລິຈາກ
ສະເດັດລົງຈາກຄໍຊ້າງ ຊົງໃຫ້ທານແກ່ພາມທັງຫຼາຍ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໑໗໔] ເມື່ອພຣະເຈົ້ານະຄອນສີພີພຣະຣາດຊະທານຊ້າງໂຕປະເສີດແລ້ວ
ເວລານັ້ນຄວາມເປັນຕາຢ້ານຂົນຫົວລຸກກໍໄດ້ເກີດຂຶ້ນ
ແຜ່ນດິນກໍກຳປະນາດຫວັ່ນໄຫວ

[໑໗໕] ເມື່ອພຣະເວດສັນດອນພຣະຣາດຊະທານຊ້າງໂຕປະເສີດແລ້ວ
ເວລານັ້ນຄວາມເປັນຕາຢ້ານຂົນຫົວລຸກກໍໄດ້ເກີດຂຶ້ນ
ຊາວພຣະນະຄອນກໍກຳເຣີບເສີບສານ

[໑໖໗໔] ເມື່ອພຣະເວດສັນດອນພຣະຣາດຊະທານຊ້າງໂຕປະເສີດແລ້ວ
ຊາວເມືອງກໍວຸ່ນວາຍສັບສົນສຽງດັງເນືອງນັນ
ເປັນທີ່ເປັນຕາຢ້ານແຜ່ກະຈາຍໄປຫຼວງຫຼາຍ
ພຣະນະຄອນກໍປັ່ນປ່ວນ ເມື່ອພຣະເວດສັນດອນ
ຜູ້ຊົງຜະດຸງຣັດໃຫ້ຈະເລີນແກ່ຊາວນະຄອນສີພີ
ໄດ້ພຣະຣາດຊະທານຊ້າງໂຕປະເສີດແລ້ວ
ສຽງອື້ອຶງອັນເປັນຕາຢ້ານຫຼວງຫຼາຍກໍເປັນໄປໃນນະຄອນນັ້ນ

(ພຣະສາດສະດາຕັດວ່າ)

[໑໖໗໕] ພວກຄົນຜູ້ມີຊື່ສຽງ ພຣະຣາດຊະບຸດ
ແພດ ຊາວນາ ພາມ
ກອງພົນຊ້າງ ກອງພົນມ້າ ກອງພົນລົດ ກອງພົນຣາບ

[໑໖໗໖] ຊາວນິຄົມແລະຊາວນະຄອນສີພີທັງມວນມາປະຊຸມພ້ອມກັນ
ຊົນເຫຼົ່ານັ້ນເຫັນພວກພາມນຳພະຍາຊ້າງໄປ
ຈຶ່ງຂາບທູນແດ່ພຣະເຈົ້ານະຄອນສົນໄຊໃຫ້ຊົງຮູ້ວ່າ

[໑໖໗໗] ຂ້າແດ່ ສົມມຸດຕິເທບ
ແຄວ້ນຂອງພຣະອົງຖືກກຳຈັດແລ້ວ
ຍ້ອນເຫດໃດ ພຣະເວດສັນດອນພຣະໂອຣົດຂອງພຣະອົງ
ຈຶ່ງພຣະຣາດຊະທານຊ້າງໂຕປະເສີດຂອງເຮົາທັງຫຼາຍ
ທີ່ຊາວແຄວ້ນບູຊາ

[໑໖໗໘] ເປັນຫຍັງ ພຣະເວດສັນດອນຈຶ່ງໄດ້ພຣະຣາດຊະທານ
ພະຍາກຸນຊອນຂອງເຮົາທັງຫຼາຍໂຕມີງາຄືງອນໄຖ
ແກ່ກ້າສາມາດ ຮູ້ຈັກເຂດແຫ່ງການຮົບທັງປວງ
ເຜືອກຜ່ອງປະເສີດສຸດ

[໑໖໗໙] ຄຸມດ້ວຍຜ້າກຳພົນເຫຼືອງ ຊັບມັນ ອາດຍ່ຳຍີສັດຕູໄດ້
ມີງາໜ້າພໍໃຈ ເຜືອກຜ່ອງດັ່ງພູໄກລາດ
ພ້ອມທັງພັດກັບແສ້

[໑໖໘໐] ເປັນຫຍັງ ພຣະເວດສັນດອນຈຶ່ງໄດ້ພຣະຣາດຊະທານ

ພະຍາຊ້າງຣາດຊະພາຫະນະເຊິ່ງເປັນຍານຊັ້ນເລີດ
ເປັນຊັບອັນປະເສີດ ພ້ອມທັງຄັນຮົ່ມຂາວ ເຄື່ອງປູລາດ
ໝໍຊ້າງ ແລະຄົນລ້ຽງຊ້າງແກ່ພວກພາມ

[໑໙໗໑] ພຣະເວດສັນດອນນັ້ນຄວນຈະພຣະຣາດຊະທານ
ເຂົ້າ ນໍ້າ ຜ້ານຸ່ງຫົ່ມ ແລະບ່ອນນັ່ງບ່ອນນອນ
ທານແນວນີ້ແລເໝາະສົມ ທານນັ້ນແລສົມຄວນແກ່ພາມ

[໑໙໗໘] ຂ້າແດ່ ພຣະເຈົ້ານະຄອນສີນໄຊ ເປັນຫຍັງ ພຣະເວດສັນດອນພຣະໂອຣົດ
ຜູ້ເປັນພຣະຣາຊາໂດຍສືບພຣະຣາດຊະວົງຂອງພຣະອົງນີ້
ຜູ້ຜະດຸງຮັດໃຫ້ຈະເລີນແກ່ຊາວນະຄອນສີພີຈຶ່ງພຣະຣາດຊະທານພະຍາຄົດຊະ
ສານໄປ

[໑໙໗໓] ຖ້າພຣະອົງຈັກບໍ່ຊົງເຮັດຕາມຄໍານີ້ຂອງຊາວນະຄອນສີພີ
ຊາວນະຄອນສີພີເຫັນທີຈັກຢຶດອໍານາດພຣະອົງ
ພ້ອມທັງພຣະໂອຣົດໄວ້ໃນເງື້ອມມື

(ພຣະເຈົ້າສົນໄຊຕັດວ່າ)

[໑໙໗໔] ເຖິງຊົນນະບົດຈະບໍ່ມີ ແລະແມ່ນແຄວ້ນຈະພິນາດໄປກໍຕາມເທີ້ນ
ເຮົາຈະບໍ່ເນຣະເທດພຣະຣາດຊະບຸດຜູ້ບໍ່ມີໂທດ
ອອກໄປຈາກແຄວ້ນຂອງຕົນຕາມຄໍາຂອງຊາວນະຄອນສີພີ
ຍ້ອນພຣະຣາດຊະບຸດເກີດຈາກເອິກຂອງເຮົາ

[໑໙໗໕] ເຖິງຊົນນະບົດຈະບໍ່ມີ ແລະແມ່ນແຄວ້ນຈະພິນາດໄປກໍຕາມເທີ້ນ
ເຮົາຈະບໍ່ເນຣະເທດພຣະຣາດຊະບຸດຜູ້ບໍ່ມີໂທດ
ອອກໄປຈາກແຄວ້ນຂອງຕົນຕາມຄໍາຂອງຊາວນະຄອນສີພີ
ຍ້ອນພຣະຣາດຊະບຸດເກີດແຕ່ໂຕຂອງເຮົາ

[໑໙໗໙] ອັນໜຶ່ງ ເຮົາຈະບໍ່ປະທຸດສະຮ້າຍໃນພຣະຣາດຊະບຸດນັ້ນ
ຍ້ອນທ່ານເປັນຜູ້ມີສີນແລະຂໍ້ວັດປະຕິບັດອັນປະເສີດ
ແມ່ນຄໍາຕິຕຽນຈະເພິ່ງມີແກ່ເຮົາ ແລະເຮົາຈະເພິ່ງປະສົບບາບຫຼວງຫຼາຍ
ເຮົາຈະໃຫ້ປະຫານພຣະເວດສັນດອນໂອຣົດຂອງເຮົາດ້ວຍອາວຸດໄດ້ແນວໃດ

(ຊາວເມືອງຂາບທູນວ່າ)

[໑໖໗໗] ພຣະອົງຢ່າໄດ້ຮັບສັ່ງໃຫ້ປະຫານພຣະເວດສັນດອນນັ້ນ
ດ້ວຍໄມ້ຄ້ອນຫຼືດ້ວຍອາວຸດ
ພຣະເວດສັນດອນນັ້ນບໍ່ຄວນແກ່ເຄື່ອງຄຸມຂັງ
ແຕ່ຈົ່ງຊົງຂັບໄລ່ພຣະເວດສັນດອນນັ້ນ
ຈາກແຄວ້ນໄປຢູ່ທີ່ເຂົາວົງກົດເທີ້ນ

(ພຣະເຈົ້າສົນໄຊຕັດວ່າ)

[໑໖໗໘] ຖ້າຄວາມພໍໃຈຂອງຊາວນະຄອນສີພີເປັນແນວນີ້ ເຮົາກໍບໍ່ຂັດ
ຂໍທ່ານຈົ່ງຢູ່ແລະບໍຣິໂພກການທັງຫຼາຍຕະຫຼອດຄືນນີ້

[໑໖໗໙] ຕໍ່ຈາກນັ້ນ ເມື່ອຣາຕີສະຫວ່າງແລ້ວ ດວງອາທິດຂຶ້ນແລ້ວ
ຊາວນະຄອນສີພີຈົ່ງພ້ອມພຽງກັນຂັບໄລ່ທ່ານເສຍຈາກແຄວ້ນເທີ້ນ

[໑໖໘໐] ນາຍນັກການ ທ່ານຈົ່ງລຸກຂຶ້ນຟ້າວໄປທູນພຣະເວດສັນດອນວ່າ
ຂໍເດຊະ ຊາວນະຄອນສີພີ ຊາວນິຄົມ
ພາກັນໂກດເຄືອງພຣະອົງ ມາຊຸມນຸມກັນແລ້ວ

[໑໖໘໑] ພວກຄົນຜູ້ມີຊື່ສຽງ ພຣະຣາດຊະບຸດ ແພດ ພາມ
ກອງພົນຊ້າງ ກອງພົນມ້າ ກອງພົນລົດ ກອງພົນຣາບ
ທັງຊາວນິຄົມແລະຊາວນະຄອນສີພີທັງມວນກໍມາປະຊຸມພ້ອມກັນແລ້ວ

[໑໖໘໒] ເມື່ອສິ້ນຣາຕີນີ້ແລ້ວ ດວງອາທິດຂຶ້ນແລ້ວ
ຊາວນະຄອນສີພີຈະຊຸມນຸມກັນຂັບໄລ່ພຣະອົງອອກໄປຈາກແຄວ້ນ

[໑໖໘໓] ນາຍນັກການນັ້ນ ເມື່ອໄດ້ຮັບພຣະຣາດຊະດໍາຣັດສັ່ງ
ຈຶ່ງຟ້າວໃສ່ສອດເຄື່ອງປະດັບມື
ນຸ່ງຫົ່ມຮຽບຮ້ອຍ ປະພົມດ້ວຍຈຸນແກ່ນຈັນ

[໑໖໘໔] ສະຫົວໃນນໍ້າ ໃສ່ກຸນທົນແກ້ວມະນີແລ້ວ
ຟ້າວເຂົ້າໄປຕໍາໜັກອັນໜ້າອອນຊອນ
ເຊິ່ງເປັນພຣະຣາດຊະນິເວດຂອງພຣະເວດສັນດອນ

[໑໖໘໕] ໄດ້ເຫັນພຣະເວດສັນດອນຣາດຊະກຸມານ
ເຊິ່ງກໍາລັງຊົງພຣະກະເສມສໍາຣານບັນເທີງຢູ່

ໃນພະຣາດຊະວັງຂອງພຣະອົງເຊິ່ງແໜ້ນໜາໄປດ້ວຍໝູ່ອໍາມາດ
ປຽບປານດັ່ງທ້າວວາສະວະແຫ່ງສະຫວັນຊັ້ນໄຕຣທິດ

[໑໙໙໖] ນາຍນັກການນັ້ນເມື່ອຟ້າວໄປໃນພຣະຣາດຊະນິເວດນັ້ນແລ້ວ
ຈຶ່ງໄດ້ຂາບທູນພຣະເວດສັນດອນວ່າ ຂ້າແດ່ ພຣະອົງຜູ້ຈອມທັບ
ຂ້າພຣະອົງຈະຂາບທູນຄວາມທຸກແດ່ພຣະອົງ
ຂໍພຣະອົງຢ່າໄດ້ຊົງໂກດຂ້າພຣະອົງເລີຍ

[໑໙໙໗] ນາຍນັກການນັ້ນຖວາຍບັງຄົມແລ້ວພ້ອມຮ້ອງໄຫ້ຮ່ຳໄຮ
ຂາບທູນພຣະຣາຊາວ່າ ຂ້າແດ່ ມະຫາຣາດ
ພຣະອົງຊົງຊຸບລ້ຽງຂ້າພຣະອົງ
ຊົງນໍາມາເຊິ່ງຣົດທີ່ໜ້າຕ້ອງການທຸກຢ່າງ

[໑໙໙໘] ຂ້າພຣະບາດຈະຂາບທູນແດ່ພຣະອົງ
ເມື່ອຂ້າພຣະອົງຂາບທູນຂ່າວສານເລື້ອງທຸກຮ້ອນນັ້ນແລ້ວ
ຂໍພຣະອົງຈົ່ງຊົງຍັງຂ້າພຣະອົງໃຫ້ເບົາໃຈດ້ວຍເທີ້ນ
ຂໍເດຊະ ຊາວນະຄອນສີພີແລະຊາວນິຄົມໂກດເຄືອງພຣະອົງ
ມາຊຸມນຸມກັນແລ້ວ

[໑໙໙໙] ພວກຄົນຜູ້ມີຊື່ສຽງ ພຣະຣາດຊະບຸດ ແພດ ພາມ
ກອງພົນຊ້າງ ກອງພົນມ້າ ກອງພົນລົດ ກອງພົນຣາບ
ທັງຊາວນິຄົມແລະຊາວນະຄອນສີພີທັງມວນລ້ວນມາປະຊຸມກັນ

[໑໗໐໐] ເມື່ອສິ້ນຣາຕີນີ້ແລ້ວ ດວງອາທິດຂຶ້ນແລ້ວ
ຊາວນະຄອນສີພີຈະຊຸມນຸມກັນຂັບໄລ່ພຣະອົງອອກໄປຈາກແຄວ້ນ

(ພຣະເວດສັນດອນຕັດຖາມວ່າ)

[໑໗໐໑] ນາຍນັກການ ຍ້ອນເຫດໃດ ຊາວນະຄອນສີພີຈຶ່ງໂກດເຄືອງເຮົາ
ຂໍທ່ານຈົ່ງບອກຄວາມຊົ່ວທີ່ເຮົາແນມບໍ່ເຫັນ
ເປັນຫຍັງ ພວກເຂົາຈຶ່ງຈະຂັບໄລ່ເຮົາ

(ນາຍນັກການຂາບທູນວ່າ)

[໑໗໐໒] ພວກຄົນຜູ້ມີຊື່ສຽງ ພຣະຣາດຊະບຸດ ແພດ ພາມ

ກອງພົນຊ້າງ ກອງພົນມ້າ ກອງພົນລົດ ກອງພົນຮາບ
ຕ່າງພາກັນຕິຕຽນ ຍ້ອນພຣະອົງພຣະຣາດຊະທານພະຍາຊ້າງ
ເຫດນັ້ນ ພວກເຂົາຈຶ່ງຈະຂັບໄລ່ພຣະອົງ

(ພຣະເວດສັນດອນຕັດວ່າ)

[໑໗໐໓] ເຮົາຈະໃຫ້ທະໄທ ໃຫ້ຈັກຂຸ ເງິນ ຄຳ ແກ້ວມຸກດາ ແກ້ວໄພທູນ
ຫຼືແກ້ວມະນີເຊິ່ງເປັນຊັບພາຍນອກຂອງເຮົາກໍຈະເປັນອັນໃດໄປ

[໑໗໐໔] ເມື່ອຍາຈົກມາເຖິງ ເຮົາເຫັນແລ້ວຈະເພິ່ງໃຫ້ແຂນຂວາແຂນຊ້າຍ
ກໍບໍ່ຫວັ່ນໄຫວເລີຍ ໃຈຂອງເຮົາຍິນດີໃນການໃຫ້

[໑໗໐໕] ເຖິງຊາວນະຄອນສີພີທັງມວນຈະຂັບໄລ່ເຮົາຫຼືຈະເຂັ່ນຂ້າເຮົາ
ຫຼືຕັດເຮົາໃຫ້ເປັນ ໗ ທ່ອນກໍຕາມເທີ້ນ
ເຮົາຈະບໍ່ງົດການໃຫ້ເລີຍ

[໑໗໐໖] ຊາວນະຄອນສີພີແລະຊາວນິຄົມປະຊຸມພ້ອມກັນກ່າວແນວນີ້ວ່າ
ພຣະເວດສັນດອນຜູ້ມີຂໍ້ວັດປະຕິບັດອັນງາມຈົ່ງສະເດັດໄປ
ສູ່ອາຣັນຊອນຄີຣີທາງຝັ່ງແມ່ນ້ຳໂກນຕິມາຣາ
ຕາມທາງທີ່ພຣະຣາຊາຜູ້ຖືກຂັບໄລ່ສະເດັດອອກໄປນັ້ນເທີ້ນ

(ພຣະເວດສັນດອນຕັດວ່າ)

[໑໗໐໗] ເຮົານັ້ນຈັກໄປຕາມທາງທີ່ພຣະຣາຊາຜູ້ມີໂທດສະເດັດໄປ
ຂໍໃຫ້ທ່ານທັງຫຼາຍຈົ່ງງົດໂທດແກ່ເຮົາຄືນໜຶ່ງແລະມື້ໜຶ່ງ
ພໍໃຫ້ເຮົາໄດ້ໃຫ້ທານກ່ອນເທີ້ນ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໑໗໐໘] ພຣະຣາຊາຕັດຕັກເຕືອນພຣະນາງມັດທີ
ຜູ້ມີຄວາມງາມທົ່ວສັນພາງກາຍວ່າ
ຊັບແນວໃດແນວໜຶ່ງທີ່ໄດ້ໃຫ້ແກ່ພຣະນາງ
ແລະສິ່ງຂອງທີ່ຄວນສະຫງວນອັນເປັນຂອງພຣະນາງ

[໑໗໐໙] ຄື ເງິນ ຄຳ ແກ້ວມຸກດາ ຫຼືແກ້ວໄພທູນມີຢູ່ຫຼວງຫຼາຍ
ແລະຊັບຝ່າຍບິດາຂອງພຣະນາງເອງ ຄວນເກັບໄວ້ທັງໝົດ

[໑໗໑໐] ພຣະນາງມັດທີຣາດຊະບຸດຕີຜູ້ມີຄວາມງາມທົ່ວສັບພາງກາຍ
ໄດ້ທູນຖາມພຣະເວດສັນດອນນັ້ນວ່າ ຂ້າແດ່ ສົມມຸດຕິເທບ
ຂ້ານ້ອຍຈະເກັບໄວ້ບ່ອນໃດ ຂ້ານ້ອຍໄດ້ທູນຖາມພຣະອົງແລ້ວ
ຂໍໄດ້ໂຜດຕັດບອກເນື້ອຄວາມນັ້ນເທີ້ນ

(ພຣະເວດສັນດອນຕັດວ່າ)

[໑໗໑໑] ມັດທີ ທ່ານເພິ່ງໃຫ້ທານໃນທ່ານຜູ້ມີສີນທັງຫຼາຍຕາມສົມຄວນເທີ້ນ
ຍ້ອນບ່ອນເພິ່ງແນວອື່ນຂອງສັດທັງປວງຍິ່ງໄປກວ່າທານບໍ່ມີ

[໑໗໑໔] ມັດທີ ນາງເພິ່ງເອົາໃຈໃສ່ໃນລູກທັງຫຼາຍ
ເພິ່ງເອົາໃຈໃສ່ໃນແມ່ຜົວແລະພໍ່ຜົວ
ອັນໜຶ່ງ ຜູ້ໃດເພິ່ງຕົກລົງປົງໃຈວ່າຈະເປັນພຣະສະວາມີຂອງນາງ
ກໍເພິ່ງປົນນິບັດຜູ້ນັ້ນໂດຍຄວາມເຄົາລົບ

[໑໗໑໓] ຖ້າບໍ່ມີຜູ້ໃດຕົກລົງປົງໃຈເປັນພຣະສະວາມີຂອງນາງ
ຍ້ອນນາງກັບອ້າຍຈະຕ້ອງພັດພາກຈາກກັນ
ນາງກໍຈົ່ງສະແຫວງຫາຜູ້ອື່ນມາເປັນພຣະສະວາມີເທີ້ນ
ຢ່າລຳບາກຍ້ອນຂາດເຮົາເລີຍ

[໑໗໑໔] ຍ້ອນເຮົາຈະໄປສູ່ປ່າທີ່ເປັນຕາຢ້ານອັນປະກອບໄປດ້ວຍສັດຮ້າຍ
ເມື່ອເຮົາຄົນດຽວຢູ່ໃນປ່າໃຫຍ່ ຊີວິດກໍໜ້າສົງໄສ

[໑໗໑໕] ພຣະນາງມັດທີຣາດຊະບຸດຕີຜູ້ມີຄວາມງາມທົ່ວສັບພາງກາຍ
ໄດ້ທູນຖາມພຣະເວດສັນດອນນັ້ນວ່າ ເປັນຫຍັງພຣະອົງ
ຈຶ່ງຕັດເລື້ອງທີ່ບໍ່ເປັນຈິງ ເປັນຫຍັງຈຶ່ງຕັດເລື້ອງບໍ່ດີ

[໑໗໑໖] ຂ້າແດ່ ມະຫາຣາດຜູ້ເປັນກະສັດ
ການທີ່ພຣະອົງຈະເພິ່ງສະເດັດໄປຕາມລຳພັງນີ້ບໍ່ແມ່ນທຳ
ແມ່ນຂ້ານ້ອຍກໍຈະຕາມສະເດັດໄປຕາມທາງທີ່ພຣະອົງສະເດັດໄປ

[໑໗໑໗] ຄວາມຕາຍຮ່ວມກັບພຣະອົງ
ຫຼືການມີຊີວິດຢູ່ເວັ້ນຈາກພຣະອົງ
ຄວາມຕາຍຮ່ວມກັບພຣະອົງນັ້ນທໍ່ນັ້ນປະເສີດກວ່າ
ການມີຊີວິດຢູ່ເວັ້ນຈາກພຣະອົງຈະປະເສີດອັນໃດ

[໑໗໑໙] ການດັງໄຟໃຫ້ລຸກຮຸ່ງມີແປວເປັນອັນດຽວກັນ
ແລ້ວຈຶ່ງຕາຍໃນໄຟທີ່ລຸກຮຸ່ງນັ້ນປະເສີດກວ່າ
ການມີຊີວິດຢູ່ເວັ້ນຈາກພຣະອົງຈະປະເສີດອັນໃດ

[໑໗໑໙] ຊ້າງພັງຕິດຕາມພະຍາຊ້າງຜູ້ໄດ້ຮັບການເຝິກຢູ່ໃນປ່າ
ທ່ຽວໄປຕາມຮ່ອມພູຮາບພຽງແດ່ ບໍ່ຮາບພຽງແດ່ສັນໃດ

[໑໗໘໐] ຂ້ານ້ອຍຈະພາລູກທັງຫຼາຍຕິດຕາມພຣະອົງໄປທາງຫຼັງສັນນັ້ນ
ຂ້ານ້ອຍຈັກເປັນຜູ້ລ້ຽງງ່າຍສຳລັບພຣະອົງ
ຈັກບໍ່ເປັນຜູ້ລ້ຽງຍາກສຳລັບພຣະອົງ

[໑໗໘໑] ເມື່ອພຣະອົງທອດພຣະເນດເຫັນພຣະກຸມານເຫຼົ່ານີ້
ສົ່ງສຽງມ່ວນ ເວົ້າຈາໜ້າຮັກ ນັ່ງຢູ່ທີ່ພຸ່ມໄມ້ໃນປ່າ
ຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໘໒] ເມື່ອພຣະອົງທອດພຣະເນດເຫັນພຣະກຸມານເຫຼົ່ານີ້
ສົ່ງສຽງມ່ວນ ເວົ້າຈາໜ້າຮັກ ກຳລັງຫຼິ້ນຢູ່ທີ່ພຸ່ມໄມ້ໃນປ່າ
ຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໘໓] ເມື່ອພຣະອົງທອດພຣະເນດເຫັນພຣະກຸມານເຫຼົ່ານີ້
ສົ່ງສຽງມ່ວນ ເວົ້າຈາໜ້າຮັກ ຢູ່ທີ່ອາສົມອັນໜ້າອອນຊອນ
ຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໘໔] ເມື່ອພຣະອົງທອດພຣະເນດເຫັນພຣະກຸມານເຫຼົ່ານີ້
ສົ່ງສຽງມ່ວນ ເວົ້າຈາໜ້າຮັກ ຫຼິ້ນຢູ່ທີ່ອາສົມອັນໜ້າອອນຊອນ
ຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໘໕] ເມື່ອພຣະອົງທອດພຣະເນດເຫັນພຣະກຸມານເຫຼົ່ານີ້
ຜູ້ທັດຊົງມາລາປະດັບອົງຢູ່ທີ່ອາສົມຣຳມະນີຍະສະຖານ
ຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໘໖] ເມື່ອພຣະອົງທອດພຣະເນດເຫັນພຣະກຸມານເຫຼົ່ານີ້
ຜູ້ທັດຊົງມາລາປະດັບອົງຫຼິ້ນເພີດເພີນຢູ່
ໃນອາສົມອັນໜ້າອອນຊອນ
ຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໔໗] ເມື່ອໃດ ພຣະອົງໄດ້ທອດພຣະເນດເຫັນພຣະກຸມານເຫຼົ່ານີ້
ທັດຊົງມາລາຢູ່ໃນອາສົມອັນໜ້າອອນຊອນ
ເມື່ອນັ້ນ ກໍຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໔໘] ເມື່ອໃດ ພຣະອົງໄດ້ທອດພຣະເນດເຫັນພຣະກຸມານທັງຫຼາຍ
ທັດຊົງມາລາ ກໍາລັງຟ້ອນລໍາ
ຫຼິ້ນເພີດເພີນຢູ່ໃນອາສົມອັນໜ້າອອນຊອນ
ເມື່ອນັ້ນ ກໍຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໔໙] ເມື່ອໃດ ພຣະອົງໄດ້ທອດພຣະເນດເຫັນຊ້າງພາຍ
ມີໄວລ່ວງໄດ້ ໖໐ ປີ ກໍາລັງທ່ຽວໄປໃນປ່າຕາມລໍາພັງ
ເມື່ອນັ້ນ ກໍຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໕໐] ເມື່ອໃດ ພຣະອົງໄດ້ທອດພຣະເນດເຫັນຊ້າງພາຍ
ມີໄວລ່ວງໄດ້ ໖໐ ປີ ກໍາລັງທ່ຽວໄປທັງໃນເວລາຄໍ່າເວລາເຊົ້າ
ເມື່ອນັ້ນ ກໍຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໕໑] ເມື່ອໃດ ຊ້າງພາຍມີໄວລ່ວງໄດ້ ໖໐ ປີ
ຍ່າງນໍາໜ້າຝູງຊ້າງພັງໄປ ສົ່ງສຽງຮ້ອງດັງກຶກກ້ອງ
ພຣະອົງໄດ້ຊົງສະດັບສຽງຮ້ອງຂອງຊ້າງທີ່ບັນລືລັ່ນຢູ່ນັ້ນ
ເມື່ອນັ້ນ ກໍຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໕໔] ເມື່ອໃດ ພຣະອົງຜູ້ໃຫ້ສິ່ງທີ່ໜ້າພໍໃຈ
ໄດ້ທອດພຣະເນດເຫັນລໍາເນົາໄພສອງຂ້າງ
ແຫ່ງທາງອັນແໜ້ນໜາໄປດ້ວຍເນື້ອຮ້າຍ
ເມື່ອນັ້ນ ກໍຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໕໓] ພຣະອົງເມື່ອໄດ້ທອດພຣະເນດເຫັນເນື້ອທີ່ຍ່າງມາເປັນຝູງ
ຝູງລະ ໕ ໂຕໃນເວລາຄໍ່າແລະໄດ້ທອດພຣະເນດເຫັນພວກກິນນະຣະ
ກໍາລັງຟ້ອນລໍາຢູ່ ກໍຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໕໔] ເມື່ອໃດ ພຣະອົງໄດ້ຊົງສະດັບສຽງຟົ້ງຂອງແມ່ນໍ້າ
ທີ່ກໍາລັງຫຼັ່ງໄຫຼຢູ່ ແລະສຽງເພງຂັບກ່ອມຂອງພວກກິນນະຣະ
ເມື່ອນັ້ນ ກໍຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໓໕] ເມື່ອໃດ ພຣະອົງໄດ້ຊົງສະດັບສຽງຮ້ອງຂອງນົກເຄົ້າ
ທີ່ບິນທ່ຽວໄປຕາມຮ່ອມພູ
ເມື່ອນັ້ນ ກໍຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໓໖] ເມື່ອໃດ ພຣະອົງໄດ້ຊົງສະດັບສຽງຮ້ອງຂອງເຫຼົ່າສັດຮ້າຍ
ຄື ຣາດຊະສີ ເສືອໂຄ່ງ ແຮດ ແລະງົວລານ
ເມື່ອນັ້ນ ກໍຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໓໗] ເມື່ອໃດ ພຣະອົງໄດ້ທອດພຣະເນດເຫັນນົກຍູງ
ເຊິ່ງລ້ອມສະພັ່ງໄປດ້ວຍນາງນົກຍູງທັງຫຼາຍ
ກຳລັງລຳແພນຫາງຈັບຢູ່ເທິງຈອມພູ
ເມື່ອນັ້ນ ກໍຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໓໘] ເມື່ອໃດ ພຣະອົງໄດ້ທອດພຣະເນດເຫັນນົກຍູງ
ທີ່ມີຂົນປີກງາມຕະການຕາ ເຊິ່ງກຳລັງລຳແພນຫາງຢູ່
ລ້ອມສະພັ່ງໄປດ້ວຍນາງນົກຍູງທັງຫຼາຍ
ເມື່ອນັ້ນ ກໍຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໓໙] ເມື່ອໃດ ພຣະອົງໄດ້ທອດພຣະເນດເຫັນນົກຍູງໂຕມີຄໍສີຂຽວ
ມີຫອນງາມລ້ອມສະພັ່ງໄປດ້ວຍນາງນົກຍູງທັງຫຼາຍຟ້ອນລຳຢູ່
ເມື່ອນັ້ນ ກໍຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໔໐] ເມື່ອໃດ ພຣະອົງໄດ້ທອດພຣະເນດເຫັນຕົ້ນໄມ້ທັງຫຼາຍ
ມີດອກເບັ່ງບານ ກິ່ນຫອມອົບອວນໃນລະດູເຫມັນ
ເມື່ອນັ້ນ ກໍຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໔໑] ເມື່ອໃດ ພຣະອົງໄດ້ທອດພຣະເນດເຫັນພື້ນດິນ
ອັນເດຍລະດາດໄປດ້ວຍແມງເຕົ່າຄຳ
ມີສີຂຽວສົດຊະອຸ່ມໃນເດືອນທ້າຍລະດູເຫມັນ
ເມື່ອນັ້ນ ກໍຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໔໒] ເມື່ອໃດ ພຣະອົງໄດ້ທອດພຣະເນດເຫັນຕົ້ນໄມ້ທັງຫຼາຍ
ມີດອກບານເດຍລະດາດ ຄື ອັນຊັນຂຽວທີ່ກຳລັງປົ່ງຍອດອ່ອນ
ຕົ້ນເໜືອດຫອມ ແລະບົວບົກທີ່ມີດອກບານເດຍລະດາດ

ມີກິ່ນຫອມອົບອວນໄປໃນລະດູເຫມັນ
ເມື່ອນັ້ນ ກໍຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

[໑໗໔໓] ເມື່ອໃດ ພຣະອົງໄດ້ທອດພຣະເນດເຫັນໝູ່ໄມ້
ມີດອກບານເດຍລະດາດ ແລະປະທຸມະຊາດ
ມີດອກຣ່ວງຫລົ່ນລົງໃນເດືອນທ້າຍລະດູເຫມັນ
ເມື່ອນັ້ນ ກໍຈັກບໍ່ຊົງຣະນຶກເຖິງຣາດຊະສົມບັດ

**ກັນຫິມະພານ ຈົບ**

## ກັນທານະກັນ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໑໗໔໔] ພຣະນາງຜຸດຕີຣາດຊະບຸດຕີຜູ້ຊົງຍົດໄດ້ຊົງສະດັບຄຳ
ທີ່ພຣະໂອຣົດແລະພຣະສຸນິສາພ່ຳສົນທະນາກັນ
ຊົງຮ່ຳໄຮວ່າ

[໑໗໔໕] ເຮົາກິນຢາພິດຕາຍສາດີກວ່າ
ເຮົາໂຕນເຫວຕາຍສາດີກວ່າ
ເຮົາເອົາເຊືອກມັດຄໍຕາຍສາດີກວ່າ
ຍ້ອນເຫດໃດ ຊາວນະຄອນສີພີຈຶ່ງຈະໃຫ້ຂັບໄລ່ລູກເວດສັນດອນຜູ້ບໍ່ມີໂທດນໍ

[໑໗໔໖] ຍ້ອນເຫດໃດ ຊາວນະຄອນສີພີຈຶ່ງຈະໃຫ້ຂັບໄລ່ລູກເວດສັນດອນ
ຜູ້ບໍ່ມີໂທດ ຜູ້ປາດເປື່ອງ ເປັນທານະບໍດີ ຄວນແກ່ການຂໍ ບໍ່ຂີ້ຖີ່
ຜູ້ທີ່ພຣະຣາຊາທຸກ ໆ ປະເທດບູຊາ ມີກຽດຕິຍົດ

[໑໗໔໗] ຍ້ອນເຫດໃດ ຊາວນະຄອນສີພີຈຶ່ງຈະໃຫ້ຂັບໄລ່ລູກເວດສັນດອນ
ຜູ້ບໍ່ມີໂທດ ຜູ້ລ້ຽງດູມານດາບິດາ
ປະພຶດຖ່ອມຕົນຕໍ່ຜູ້ໃຫຍ່ໃນຕະກູນ

[໑໗໔໘] ຍ້ອນເຫດໃດ ຊາວນະຄອນສີພີຈຶ່ງຈະໃຫ້ຂັບໄລ່ລູກເວດສັນດອນ
ຜູ້ບໍ່ມີໂທດ ຜູ້ເກື້ອກູນແກ່ພຣະຣາຊາ ພຣະເທວີ
ພຣະຍາດທັງຫຼາຍ ມິດສະຫາຍທັງຫຼາຍ ແລະທົ່ວທັງແຄວ້ນ

[໑໗໔໙] ຊາວນະຄອນສີພີຈະໃຫ້ຂັບໄລ່ລູກຜູ້ບໍ່ມີໂທດ
ແຄວ້ນຂອງພຣະອົງກໍຈະເປັນຄືຮັງເຜີ້ງທີ່ໂຕແມງເຜີ້ງໜີຈາກໄປ
ແລະຄືໝາກມ່ວງສຸກທີ່ຮ່ວງຫຼົ່ນລົງເທິງດິນ

[໑໗໕໐] ພຣະເຈົ້າແຜ່ນດິນຜູ້ອັນພວກອຳມາດປະຖິ້ມແລ້ວ
ຈັກຊົງລຳບາກຢູ່ຕາມລຳພັງ
ຄືທົ່ງມີຂົນປີກໝົດແລ້ວ
ລຳບາກຢູ່ໃນເປືອກຕົມທີ່ບໍ່ມີນ້ຳ

[໑໗໕໑] ຂ້າແດ່ ມະຫາຣາດ ຍ້ອນແນວນັ້ນ
ຂ້ານ້ອຍຈຶ່ງຂໍຂາບທູນພຣະອົງວ່າ
ປະໂຫຍດຢ່າໄດ້ລ່ວງເລີຍພຣະອົງໄປສາ
ຂໍພຣະອົງຢ່າໄດ້ຊົງຂັບໄລ່ລູກຜູ້ບໍ່ມີໂທດນັ້ນ
ຕາມຄຳຂອງຊາວນະຄອນສີພີເລີຍ

(ພຣະເຈົ້າສົນໄຊຕັດວ່າ)

[໑໗໕໒] ເຮົາຍ່ອມທຳຄວາມຢຳເກງຕໍ່ທຳ
ເຮົາຈຶ່ງຂັບໄລ່ລູກຂອງຕົນຜູ້ເປັນທຸງໄຊຂອງຊາວນະຄອນສີພີ
ເຖິງແມ່ນລູກຈະເປັນທີ່ຮັກຍິ່ງກວ່າຊີວິດຂອງເຮົາເອງ

(ພຣະນາງຜຸດດີຊົງຮ່ຳໄຮວ່າ)

[໑໗໕໓] ແຕ່ກ່ອນ ຍອດທຸງປີວສະບັດຕາມສະເດັດພຣະເວດສັນດອນ
ຄືດອກກັນນິກາບານເດຍລະດາດ
ມື້ນີ້ ທ່ານຈັກສະເດັດໄປອົງດຽວທໍ່ນັ້ນ

[໑໗໕໔] ແຕ່ກ່ອນ ຍອດທຸງປີວສະບັດຕາມສະເດັດພຣະເວດສັນດອນ
ຄືສວນດອກກັນນິກາທີ່ບານເດຍລະດາດ
ມື້ນີ້ ທ່ານຈັກສະເດັດໄປອົງດຽວທໍ່ນັ້ນ

[໑໗໕໕] ແຕ່ກ່ອນ ກອງທະຫານເຄີຍຕາມສະເດັດພຣະເວດສັນດອນ
ຄືດອກກັນນິກາທີ່ບານເດຍລະດາດ
ມື້ນີ້ ທ່ານຈັກສະເດັດໄປອົງດຽວທໍ່ນັ້ນ

[໑໗໕໖] ແຕ່ກ່ອນ ກອງທະຫານເຄີຍຕາມສະເດັດພຣະເວດສັນດອນ
ຄືສວນດອກກັນນິກາທີ່ບານເດຍລະດາດ
ມື້ນີ້ ທ່ານຈັກສະເດັດໄປອີງດຽວທໍ່ນັ້ນ

[໑໗໕໗] ແຕ່ກ່ອນ ກອງທະຫານເຄີຍແຕ່ງເຄື່ອງແບບ
ຜ້າກຳພົນເຫຼືອງຈາກແຄວ້ນຄັນທາຣະ
ທໍແສງແວວວັບຄືແມງເຕົ່າຄຳ
ເຄີຍຕາມສະເດັດພຣະເວດສັນດອນ
ມື້ນີ້ ທ່ານຈັກສະເດັດໄປອີງດຽວທໍ່ນັ້ນ

[໑໗໕໘] ແຕ່ກ່ອນ ພຣະເວດສັນດອນເຄີຍສະເດັດໄປ
ດ້ວຍຊ້າງພຣະທີ່ນັ່ງ ວໍ ແລະຣາດຊະລົດຊົງ ເປັນຫຍັງນໍ
ມື້ນີ້ ຈະສະເດັດໄປດ້ວຍພຣະບາດ

[໑໗໕໙] ແຕ່ກ່ອນ ພຣະເວດສັນດອນເຄີຍລູບທາອົງດ້ວຍຈຸນແກ່ນຈັນ
ຕື່ນຢູ່ດ້ວຍການຟ້ອນລຳຂັບຮ້ອງ ເປັນຫຍັງນໍ
ມື້ນີ້ ຈັກຊົງໜັງເສືອອັນຫຍາບແຂງແລະທາບບໍຣິຂານໄປ

[໑໗໖໐] ຍ້ອນເຫດໃດ ກອງທະຫານຈຶ່ງບໍ່ຂົນເອົາຜ້າ
ທີ່ຍ້ອມດ້ວຍນ້ຳຝາດແລະໜັງເສືອ
ຕິດຕາມພຣະເວດສັນດອນຜູ້ສະເດັດໄປໃນປ່າໃຫຍ່ນໍ
ພຣະເວດສັນດອນຈຶ່ງຈະບໍ່ຕ້ອງນຸ່ງຫົ່ມຜ້າຄາກອງ

[໑໗໖໑] ພວກຄົນທີ່ເປັນເຈົ້າຊົງບວດ
ຈະຊົງຄອງຜ້າຄາກອງໄດ້ແນວໃດນໍ
ແມ່ມັດທີຈັກນຸ່ງຫົ່ມຜ້າຄາກອງໄດ້ແນວໃດ

[໑໗໖໒] ພຣະນາງມັດທີເຄີຍໃຊ້ແຕ່ຜ້າແຄວ້ນກາສີ
ແຄວ້ນໂຂມະ ແລະແຄວ້ນໂກທຸມພອນ
ແລ້ວມາໃຊ້ຜ້າຄາກອງຈັກເຮັດໄດ້ແນວໃດ

[໑໗໖໓] ພຣະນາງມັດທີນັ້ນເຄີຍໄປດ້ວຍຍານ ຄານຫາມ ວໍ ແລະລົດ
ມື້ນີ້ ຈະຍ່າງໄປຕາມທາງໄດ້ແນວໃດ

[໑໗໖໔] ພຣະນາງມັດທີຜູ້ມີສິຣິໂສມ ມີຝາມືອັນອ່ອນນຸ້ມ

ມີຄວາມເປັນຢູ່ຢ່າງມີຄວາມສຸກ
ມື້ນີ້ ຈະຍ່າງໄປຕາມທາງໄດ້ແນວໃດ

[໑໗໕໔] ພຣະນາງມັດທີຜູ້ມີຝ່າຕີນອັນອ່ອນນຸ້ມ
ມີຄວາມເປັນຢູ່ຢ່າງມີຄວາມສຸກ
ຍ່າງໄປຢ່າງລຳບາກດ້ວຍເກີບຄຳ
ມື້ນີ້ ຈະຍ່າງໄປຕາມທາງໄດ້ແນວໃດ

[໑໗໕໕] ພຣະນາງມັດທີຜູ້ທັດຊົງມາລາ
ຍ່າງນຳໜ້ານາງຂ້າຫຼວງເປັນພັນ
ມື້ນີ້ ຈະຍ່າງໄປປ່າຄົນດຽວໄດ້ແນວໃດ

[໑໗໕໗] ພຣະນາງມັດທີແຕ່ກ່ອນໄດ້ຍິນສຽງໝາເຫົ່າຫອນ
ກໍສະດຸ້ງຢ້ານກົວປະຈຳ
ມື້ນີ້ ຈະຍ່າງໄປປ່າໄດ້ແນວໃດ

[໑໗໕໘] ພຣະນາງມັດທີຜູ້ໄດ້ຍິນສຽງນົກເຄົ້າແມວ ນົກເຄົ້າຮ້ອງຄວນຄາງ
ກໍຢ້ານກົວໂຕສັ່ນຄືນາງວາຣຸນີ
ມື້ນີ້ ຈະຍ່າງໄປປ່າໄດ້ແນວໃດ

[໑໗໕໙] ຂ້ານ້ອຍກັບມາຍັງນິເວດອັນວ່າງເປົ່ານີ້ແລ້ວ
ກໍຈັກຣະທົມທຸກຕະຫຼອດການລະນານຢ່າງແນ່ນອນ
ຄືແມ່ນົກທີ່ລູກຖືກຂ້າເຫັນແຕ່ຮັງອັນວ່າງເປົ່າ

[໑໗໗໐] ເມື່ອຂ້ານ້ອຍບໍ່ເຫັນລູກຮັກທັງຫຼາຍ
ກໍຈັກຈ່ອຍເຫຼືອງລົງ
ຄືແມ່ນົກທີ່ລູກຖືກຂ້າເຫັນແຕ່ຮັງອັນວ່າງເປົ່າ

[໑໗໗໑] ເມື່ອຂ້ານ້ອຍບໍ່ເຫັນລູກຮັກທັງຫຼາຍ
ກໍຈັກແລ່ນພ່ານໄປຕາມບ່ອນນັ້ນ ໆ
ຄືແມ່ນົກທີ່ລູກຖືກຂ້າເຫັນແຕ່ຮັງອັນວ່າງເປົ່າ

[໑໗໗໒] ຂ້ານ້ອຍມາຍັງນິເວດອັນວ່າງເປົ່ານີ້ແລ້ວ
ກໍຈັກຣະທົມທຸກສິ້ນການລະນານ
ຄືແມ່ນົກອິນຊີທີ່ລູກຖືກຂ້າເຫັນແຕ່ຮັງອັນວ່າງເປົ່າ

[໑໗໗໓] ເມື່ອຂ້ານ້ອຍບໍ່ເຫັນລູກຮັກທັງຫຼາຍ
ກໍຈັກຈ່ອຍເຫຼືອງຢ່າງແນ່ນອນ
ຄືແມ່ນົກອິນຊີທີ່ລູກຖືກຂ້າເຫັນແຕ່ຮັງອັນວ່າງເປົ່າ

[໑໗໗໔] ເມື່ອຂ້ານ້ອຍບໍ່ເຫັນລູກຮັກທັງຫຼາຍ
ກໍຈັກແລ່ນຜ່ານໄປຕາມບ່ອນນັ້ນ ໆ
ຄືແມ່ນົກອິນຊີທີ່ລູກຖືກຂ້າເຫັນແຕ່ຮັງອັນວ່າງເປົ່າ

[໑໗໗໕] ຂ້ານ້ອຍກັບມາຍັງນິເວດອັນວ່າງເປົ່ານີ້ແລ້ວ
ກໍຈັກຣະທົມທຸກຕະຫຼອດການລະນານຢ່າງແນ່ນອນ
ຄືແມ່ນົກຈັກພາກຈຸກເຈົ່າຢູ່ໃນເປືອກຕົມທີ່ບໍ່ມີນໍ້າ

[໑໗໗໖] ເມື່ອຂ້ານ້ອຍບໍ່ເຫັນລູກຮັກທັງຫຼາຍ
ກໍຈັກຈ່ອຍເຫຼືອງຢ່າງແນ່ນອນ
ຄືແມ່ນົກຈັກພາກຈຸກເຈົ່າຢູ່ໃນເປືອກຕົມທີ່ບໍ່ມີນໍ້າ

[໑໗໗໗] ເມື່ອຂ້ານ້ອຍບໍ່ເຫັນລູກຮັກທັງຫຼາຍ
ກໍຈັກແລ່ນຜ່ານໄປຕາມບ່ອນນັ້ນ ໆ
ຄືແມ່ນົກຈັກພາກແລ່ນຜ່ານຢູ່ໃນເປືອກຕົມທີ່ບໍ່ມີນໍ້າ

[໑໗໗໘] ເມື່ອຂ້ານ້ອຍພໍ່າເພີ້ຢູ່ແນວນີ້
ຖ້າພຣະອົງຍັງຊົງໃຫ້ຂັບໄລ່ລູກເວດສັນດອນ
ຜູ້ບໍ່ມີຄວາມຜິດຈາກແວ່ນແຄວ້ນໄປສູ່ປ່າ
ຂ້ານ້ອຍເຫັນຈະລະຊີວິດແນ່

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໑໗໗໙] ພຣະສະໜົມກຳນັນໃນພຣະເຈົ້ານະຄອນສີພີຖ້ວນໜ້າ
ໄດ້ຍິນຄຳຮ່ຳໄຮຂອງພຣະນາງຜຸດດີແລ້ວ
ຕ່າງພາກັນມາປະຊຸມປະຄອງແຂນທັງຫຼາຍຂຶ້ນຮ້ອງໄຫ້

[໑໗໘໐] ພຣະໂອຣົດທັງຫຼາຍແລະພຣະຊາຍາໃນນິເວດ
ຂອງພຣະເວດສັນດອນ ຕ່າງກໍນອນກັນແສງ
ຄືໝູ່ໄມ້ຮັງທີ່ຖືກພາຍຸພັດລົ້ມລະເນລະນາດ

[໑໗໘໑] ພຣະສະໜົມກຳນັນໃນ ພຣະກຸມານ ແພດ ແລະພາມໃນນິເວດ
ຂອງພຣະເວດສັນດອນ ຕ່າງພາກັນປະຄອງແຂນທັງຫຼາຍຮ່ຳໄຮ

[໑໗໘໔] ກອງພົນຊ້າງ ກອງພົນມ້າ ກອງພົນລົດ ແລະກອງພົນຣາບ
ຕ່າງກໍພາກັນປະຄອງແຂນຮ່ຳໄຮໃນນິເວດຂອງພຣະເວດສັນດອນ

[໑໗໘໓] ຕໍ່ຈາກນັ້ນ ເມື່ອຣາຕີສະຫວ່າງແລ້ວ ດວງອາທິດຂຶ້ນແລ້ວ
ຕໍ່ມາພຣະເວດສັນດອນກໍສະເດັດມາສູ່ໂຮງທານ
ເພື່ອຊົງໃຫ້ທານ ໂດຍຮັບສັ່ງວ່າ

[໑໗໘໔] ພວກທ່ານຈົ່ງໃຫ້ຜ້າແກ່ຜູ້ຕ້ອງການຜ້າ
ໃຫ້ເຫຼົ້າແກ່ພວກນັກເລງເຫຼົ້າ
ໃຫ້ໂພຊະນະແກ່ພວກຄົນຜູ້ຕ້ອງການໂພຊະນະໂດຍທົ່ວເຖິງກັນ

[໑໗໘໕] ແລະພວກທ່ານຢ່າໄດ້ບຽດບຽນພວກວະນິພົກຜູ້ມາ ໃນບ່ອນນີ້
ຈົ່ງລ້ຽງດູພວກເຂົາໃຫ້ອີ່ມໜຳດ້ວຍເຂົ້າແລະນ້ຳ
ພວກເຂົາໄດ້ຮັບການບູຊາແລ້ວ ກໍຈົ່ງໄປເທີ້ນ

[໑໗໘໖] ເວລານັ້ນ ມີສຽງອຶກກະທຶກກຶກກ້ອງເປັນຕາຢ້ານ
ເປັນໄປໃນພຣະນະຄອນນີ້ວ່າ
ຊາວນະຄອນສີພີຂັບໄລ່ພຣະເວດສັນດອນນັ້ນຍ້ອນຊົງບໍລິຈາກທານ
ຂໍໃຫ້ພຣະອົງໄດ້ຊົງບໍລິຈາກທານຕໍ່ໄປອີກເທີ້ນ

[໑໗໘໗] ເມື່ອພຣະມະຫາຣາດຜູ້ຜະດຸງຣັດໃຫ້ຈະເລີນ
ແກ່ຊາວນະຄອນສີພີຈະສະເດັດອອກ
ວະນິພົກເຫຼົ່ານັ້ນກໍເປັນດັ່ງຄົນເມົາມີທ່າທາງເມື່ອຍລ່າ
ນັ່ງປັບທຸກກັນແລະກັນວ່າ

[໑໗໘໘] ທ່ານຜູ້ຈະເລີນທັງຫຼາຍ ຊາວນະຄອນສີພີພາກັນຂັບໄລ່ພຣະເວດສັນດອນ
ຜູ້ບໍ່ມີຄວາມຜິດໄປຈາກແຄວ້ນ
ກໍຄືໄດ້ພາກັນຕັດຕົ້ນໄມ້ທີ່ມີໝາກຕ່າງ ໆ

[໑໗໘໙] ທ່ານຜູ້ຈະເລີນທັງຫຼາຍ ຊາວນະຄອນສີພີພາກັນຂັບໄລ່ພຣະເວດສັນດອນ
ຜູ້ບໍ່ມີຄວາມຜິດໄປຈາກແຄວ້ນ
ກໍຄືໄດ້ພາກັນຕັດຕົ້ນໄມ້ທີ່ໃຫ້ສິ່ງທີ່ໜ້າຕ້ອງການທຸກຢ່າງ

[໑໗໙໐] ທ່ານຜູ້ຈະເລີນທັງຫຼາຍ ຊາວນະຄອນສີພີພາກັນຂັບໄລ່ພຣະເວດສັນດອນ
ຜູ້ບໍ່ມີຄວາມຜິດໄປຈາກແຄວ້ນ
ກໍຄືໄດ້ພາກັນຕັດຕົ້ນໄມ້ທີ່ນຳຮົດທີ່ໜ້າຕ້ອງການທຸກຢ່າງມາໃຫ້

[໑໗໙໑] ເມື່ອພຣະມະຫາຣາດຜູ້ຜະດຸງຣັດໃຫ້ຈະເລີນ
ແກ່ຊາວນະຄອນສີພີຈະສະເດັດອອກ
ທັງຄົນແກ່ ເດັກ ແລະຄົນປານກາງ
ຕ່າງພາກັນປະຄອງແຂນທັງຫຼາຍຮ້ອງໄຫ້ຮ່ຳໄຮ

[໑໗໙໒] ເມື່ອພຣະມະຫາຣາດຜູ້ຜະດຸງຣັດໃຫ້ຈະເລີນ
ແກ່ຊາວນະຄອນສີພີຈະສະເດັດອອກ
ພວກຊົງເຈົ້າ ພວກຂັນທີ ສະໜົມຝ່າຍໃນ ແລະໂຫນຫຼວງ
ຕ່າງພາກັນປະຄອງແຂນທັງຫຼາຍຮ້ອງໄຫ້ຮ່ຳໄຮ

[໑໗໙໓] ເມື່ອພຣະມະຫາຣາດຜູ້ຜະດຸງຣັດໃຫ້ຈະເລີນ
ແກ່ຊາວນະຄອນສີພີຈະສະເດັດອອກ
ແມ່ນຍິງທັງຫຼາຍທີ່ຢູ່ໃນນະຄອນນັ້ນຕ່າງກໍພາກັນຮ້ອງໄຫ້ຮ່ຳໄຮ

[໑໗໙໔] ສະມະນະ ພາມ ແລະພວກວະນິພົກເຫຼົ່າອື່ນ
ຕ່າງພາກັນປະຄອງແຂນທັງຫຼາຍຮ້ອງໄຫ້ຮ່ຳໄຮວ່າ
ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ເປັນການບໍ່ຍຸດຕິທຳເລີຍ

[໑໗໙໕] ຍ້ອນເຫດທີ່ພຣະເວດສັນດອນກຳລັງພ່ຳເພັງທານ
ຢູ່ໃນພະຣາດຊະວັງຂອງພຣະອົງ
ຈະສະເດັດອອກໄປຈາກແຄວ້ນຂອງພຣະອົງ
ຍ້ອນຄຳຂອງຊາວນະຄອນສີພີເປັນເຫດ

[໑໗໙໖] ພຣະເວດສັນດອນໄດ້ພຣະຣາດຊະທານຊ້າງ ໗໐໐ ເຊືອກ
ທີ່ປະດັບດ້ວຍເຄື່ອງປະດັບທັງປວງ
ອັນມີສາຍຮັດຄຳແລະສັບຄັບຄຳ

[໑໗໙໗] ມີນາຍຄວານຊ້າງຖືຫອກຊັດແລະຂໍ ຂຶ້ນຂີ່ຄໍປະຈຳແລ້ວ
ສະເດັດອອກຈາກແຄວ້ນຂອງພຣະອົງ

[໑໗໙໘] ພຣະເວດສັນດອນຊົງພຣະຣາດຊະທານມ້າ ໗໐໐ ໂຕ

ທີ່ປະດັບດ້ວຍເຄື່ອງປະດັບທັງປວງ
ເປັນມ້າສິນທົບຊາດອາຊາໄນ ມີການແລ່ນໄວ

[໑໗໙໙] ມີນາຍສາຣະຖີຖືທອນແລະທະນູ ຂຶ້ນຂີ່ປະຈຳແລ້ວ
ສະເດັດອອກຈາກແຄວ້ນຂອງພຣະອົງ

[໑໘໐໐] ພຣະເວດສັນດອນຊົງພຣະຣາດຊະທານລົດ ໗໐໐ ຄັນ
ເຊິ່ງມັດສອດເຄື່ອງຮັບດົງທຸງຂຶ້ນ
ຫຸ້ມດ້ວຍໜັງເສືອເຫຼືອງແລະເສືອໂຄ່ງ
ປະດັບດ້ວຍເຄື່ອງປະດັບທັງປວງ

[໑໘໐໑] ມີນາຍສາຣະຖີໃສ່ເກາະຖືທະນູ ຂຶ້ນຂັບຂີ່ແລ້ວ
ສະເດັດອອກຈາກແຄວ້ນຂອງພຣະອົງ

[໑໘໐໒] ພຣະເວດສັນດອນພຣະຣາດຊະທານສະຕີ ໗໐໐ ນາງ
ນັ່ງປະຈຳໃນລົດຄັນລະນາງ
ສວມສອດດ້ວຍສ້ອຍສັງວານ ຕົບແຕ່ງດ້ວຍເຄື່ອງຄຳ

[໑໘໐໓] ມີເຄື່ອງປະດັບ ຜ້ານຸ່ງ ຜ້າຫົ່ມ
ແລະປະດັບເຄື່ອງອາພອນລ້ວນແຕ່ມີສີເຫຼືອງ
ມີດວງຕາກວ້າງ ໃບໜ້າຍິ້ມແຍ້ມ ສະໂພກງາມ
ແອວບາງຮ່າງນ້ອຍ ແລ້ວສະເດັດອອກຈາກແຄວ້ນຂອງພຣະອົງ

[໑໘໐໔] ພຣະເວດສັນດອນພຣະຣາດຊະທານແມ່ງົວນົມ ໗໐໐ ໂຕ
ພ້ອມດ້ວຍພາຊະນະເງິນສຳລັບຮອງຮັບນ້ຳນົມທຸກ ໆ ໂຕແລ້ວ
ສະເດັດອອກຈາກແຄວ້ນຂອງພຣະອົງ

[໑໘໐໕] ພຣະເວດສັນດອນພຣະຣາດຊະທານທາສີ ໗໐໐ ຄົນ
ແລະຂ້າທາດ ໗໐໐ ຄົນແລ້ວ
ຈຶ່ງສະເດັດອອກຈາກແຄວ້ນຂອງພຣະອົງ

[໑໘໐໖] ພຣະເວດສັນດອນນີ້ພຣະຣາດຊະທານຊ້າງ ມ້າ ລົດ
ແລະນາຣີທີ່ປະດັບຕົບແຕ່ງແລ້ວ
ຈຶ່ງສະເດັດອອກຈາກແຄວ້ນຂອງພຣະອົງ

[໑໗໐໗]　ໃນສະໄໝນັ້ນ ໄດ້ມີສິ່ງທີ່ເປັນຕາຢ້ານຂົນຫົວລຸກ
ເມື່ອພຣະເວດສັນດອນພຣະຣາດຊະທານມະຫາທານແລ້ວ
ແຜ່ນດິນກໍສະທ້ານຫວັ່ນໄຫວ

[໑໗໐໘]　ໃນສະໄໝນັ້ນ ໄດ້ມີສິ່ງທີ່ເປັນຕາຢ້ານຂົນຫົວລຸກ
ເມື່ອພຣະເວດສັນດອນຊົງປະນົມມື
ສະເດັດອອກຈາກແຄວ້ນຂອງພຣະອົງ

[໑໗໐໙]　ເວລານັ້ນ ສຽງອຶກກະທຶກກຶກກ້ອງເປັນຕາຢ້ານ
ເປັນໄປໃນພຣະນະຄອນນີ້ວ່າ
ຊາວນະຄອນສີພີຂັບໄລ່ພຣະເວດສັນດອນນັ້ນຍ້ອນບໍລິຈາກທານ
ຂໍໃຫ້ພຣະອົງໄດ້ຊົງບໍລິຈາກທານຕໍ່ໄປອີກເທີ້ນ

[໑໗໑໐]　ເມື່ອພຣະມະຫາຣາດຜູ້ຜະດຸງຣັດໃຫ້ຈະເລີນ
ແກ່ຊາວນະຄອນສີພີຈະສະເດັດອອກ
ວະນິພົກເຫຼົ່ານັ້ນກໍເປັນດັ່ງຄົນເມົາມີທ່າທາງເມື່ອຍລ່າ
ນັ່ງປັບທຸກກັນແລະກັນ

[໑໗໑໑]　ພຣະເວດສັນດອນຂາບທູນພຣະເຈົ້ານະຄອນສົນໄຊ
ຜູ້ປະເສີດ ຜູ້ຊົງທຳວ່າ
ຂໍເດຊະ ຂໍພຣະອົງຊົງພຣະກະລຸນາໂຜດເນຣະເທດຂ້າພຣະອົງເທີ້ນ
ຂ້າພຣະອົງຈະໄປສູ່ເຂົາວົງກົດ

[໑໗໑໒]　ຂ້າແດ່ ມະຫາຣາດ ສັດເຫຼົ່າໃດເຫຼົ່າໜຶ່ງທີ່ມີມາແລ້ວ
ທີ່ຈະມີມາ ແລະທີ່ມີຢູ່
ສັດເຫຼົ່ານັ້ນຍັງບໍ່ອີ່ມດ້ວຍກາມເລີຍ
ຈະຕ້ອງພາກັນໄປສູ່ສຳນັກຂອງພະຍາຍົມ

[໑໗໑໓]　ຂ້າພຣະອົງນັ້ນພໍ່າເພັງທານຢູ່ໃນບຸຣີຂອງຕົນ
ຍັງຊື່ວ່າບຽດບຽນຊາວເມືອງຂອງຕົນ
ຈະຕ້ອງອອກຈາກແຄວ້ນຂອງຕົນຍ້ອນເຫດແຫ່ງຄຳຂອງຊາວນະຄອນສີພີ

[໑໗໑໔]　ຂ້ານ້ອຍຈັກຕ້ອງໄດ້ສະເຫວີຍຄວາມຄັບແຄ້ນນັ້ນ ໆ ໃນປ່າ
ອັນໜາແໜ້ນໄປດ້ວຍເນື້ອຮ້າຍ

ເຊິ່ງແຣດແລະເສືອເຫຼືອງຢູ່ອາໄສ
ຂ້າພຣະອົງຈະພໍ່າເພັງບຸນ
ຂໍພຣະອົງປະທັບຈົມຢູ່ໃນເປືອກຕົມເທີ້ນ

[໑໗໑໔] ຂ້າແດ່ ພຣະແມ່ເຈົ້າ ຂໍພຣະແມ່ເຈົ້າ
ໄດ້ຊົງໂຜດອະນຸຍາດຂ້ານ້ອຍເທີ້ນ ຂ້ານ້ອຍພໍໃຈການບວດ
ຂ້ານ້ອຍເມື່ອພໍ່າເພັງທານຢູ່ໃນບຸຣີຂອງຕົນ
ຍັງຊື່ວ່າບຽດບຽນຊາວເມືອງຂອງຕົນ
ຈະຕ້ອງອອກຈາກແຄວ້ນຂອງຕົນຍ້ອນເຫດແຫ່ງຄໍາຂອງຊາວນະຄອນສີພີ

[໑໗໑໕] ຂ້ານ້ອຍຈັກຕ້ອງໄດ້ສະເຫວີຍຄວາມຄັບແຄ້ນນັ້ນ ໆ ໃນປ່າ
ອັນໜາແໜ້ນໄປດ້ວຍເນື້ອຮ້າຍ
ເຊິ່ງແຣດແລະເສືອເຫຼືອງຢູ່ອາໄສ
ຂ້ານ້ອຍຈະພໍ່າເພັງບຸນ
ຂໍພຣະອົງປະທັບຈົມຢູ່ໃນເປືອກຕົມເທີ້ນ

(ພຣະນາງຜຸດດີຕັດວ່າ)

[໑໗໑໗] ລູກເອີຍ ແມ່ອະນຸຍາດໃຫ້ລູກ ຂໍການບວດຂອງລູກຈົ່ງສໍາເລັດ
ສ່ວນແມ່ມັດທີຜູ້ມີໂສມງາມ ມີສະໂພກຜຶ່ງຜາຍ ແອວບາງຮ່າງນ້ອຍນີ້
ຈົ່ງຢູ່ກັບລູກ ໆ ເທີ້ນ ຈັກເຮັດຫຍັງໃນປ່າໄດ້

(ພຣະນາງມັດທີຂາບທູນວ່າ)

[໑໗໑໘] ຂ້ານ້ອຍບໍ່ຕ້ອງການນໍາແມ່ນທາສີໄປສູ່ປ່າໂດຍທີ່ທ່ານບໍ່ປາຖະໜາ
ຖ້າທ່ານປາຖະໜາ ຈະຕິດຕາມໄປກໍຕາມໃຈ
ຖ້າບໍ່ປາຖະໜາກໍຈົ່ງຢູ່ເທີ້ນ

[໑໗໑໙] ລໍາດັບນັ້ນ ພຣະມະຫາຣາດສະເດັດດໍາເນີນໄປຊົງວິງວອນພຣະສຸນິສາວ່າ
ແມ່ມັດທີ ຜູ້ມີຮ່າງກາຍອັນຊະໂລມຈັນ
ເຈົ້າຢ່າໄດ້ຊົງໄວ້ເຊິ່ງຄວາມໝັກໝົມດ້ວຍລະອອງທຸລີເລີຍ

[໑໗໔໐] ແມ່ມັດທີເຄີຍຊົງຜ້າແຄວ້ນກາສີ ຢ່າໄດ້ຊົງຜ້າຄາກອງເລີຍ
ການຢູ່ໃນປ່າເປັນຄວາມລໍາບາກ
ແມ່ມັດທີຜູ້ມີລັກສະນະງາມ ເຈົ້າຢ່າໄດ້ໄປເລີຍ

[໑໗໔໑] ພຣະນາງມັດທີຣາດຊະບຸດຕີຜູ້ມີຄວາມງາມທົ່ວສັບພາງກາຍ
ໄດ້ຂາບທູນພຣະສັດສຸຣະນັ້ນວ່າ
ຄວາມສຸກໃດຈະເພິ່ງມີແກ່ຂ້ານ້ອຍໂດຍເວັ້ນຈາກພຣະເວດສັນດອນ
ຂ້ານ້ອຍບໍ່ເພິ່ງປາຖະໜາຄວາມສຸກນັ້ນ

[໑໗໔໒] ພຣະມະຫາຣາດຜູ້ຜະດຸງຣັດໃຫ້ຈະເລີນແກ່ຊາວນະຄອນສີພີ
ໄດ້ຕັດກັບພຣະນາງມັດທີນັ້ນວ່າ
ເຊີນຟັງກ່ອນແມ່ມັດທີ ສັດອັນຈະລົບກວນ
ຍາກທີ່ຈະອົດທົນໄດ້ ສັດເຫຼົ່າໃດມີຢູ່ໃນປ່າ

[໑໗໔໓] ສັດເຫຼົ່ານັ້ນຫຼວງຫຼາຍ ຄື ເຮືອດ ຕັກກະແຕນ
ຍຸງ ແລະເຜີ້ງ ມັນຈະເພິ່ງບຽດບຽນເຈົ້າໃນປ່ານັ້ນ
ຄວາມທຸກຢ່າງຍິ່ງນັ້ນຈະເພິ່ງມີແກ່ເຈົ້າ

[໑໗໔໔] ເຈົ້າຈະຕ້ອງໄດ້ພົບສັດທີ່ເປັນຕາຢ້ານອື່ນອີກ
ທີ່ອາໄສຢູ່ໃກ້ແມ່ນ້ຳ ເຊັ່ນງູເຫຼືອມ
ສັດທີ່ບໍ່ມີພິດ ແຕ່ມີກຳລັງຫຼາຍ

[໑໗໔໕] ມັນຣັດມະນຸດ ຫຼືແມ່ນແຕ່ເນື້ອທີ່ມາໃກ້
ດ້ວຍຄົດແລ້ວນຳມາສູ່ອຳນາດຂອງມັນ

[໑໗໔໖] ແມ່ນເນື້ອຮ້າຍອື່ນ ໆ ເຊັ່ນໝີດຳ
ຄົນທີ່ມັນໄດ້ເຫັນແລ້ວໜີຂຶ້ນຕົ້ນໄມ້ກໍບໍ່ພົ້ນ

[໑໗໔໗] ຄວາຍປ່ຽວຂວິດລັບປາຍເຂົາທັງຄູ່ໃຫ້ແຫຼມ
ທ່ຽວໄປຢູ່ໃນຖິ່ນທີ່ໃກ້ຝັ່ງແມ່ນ້ຳໂສຕຸມພະ

[໑໗໔໘] ແມ່ມັດທີ ເຈົ້າປຽບເໝືອນແມ່ງົວນົມຮັກລູກ
ເຫັນໝູ່ເນື້ອແລະງົວເຖິກທີ່ທ່ອງທ່ຽວຢູ່ໃນປ່າ ຈັກເຮັດແນວໃດ

[໑໗໔໙] ແມ່ມັດທີ ເຈົ້າໄດ້ເຫັນລີງທະໂມນໄພທີ່ເປັນຕາຢ້ານ
ເຊິ່ງບັງເອີນປະຈວບເຂົ້າທີ່ຫົນທາງທີ່ຍ່າງໄດ້ຍາກ
ຄວາມຫວາດຫວັ່ນພັ່ນພຶງອັນໃຫຍ່ຫຼວງ
ກໍຈັກມີແກ່ເຈົ້າຍ້ອນບໍ່ຮູ້ຈັກເຂດ

[໑໗໘໐] ແມ່ມັດທີ ເມື່ອເຈົ້າຢູ່ໃນພຣະນະຄອນ
ໄດ້ຍິນສຽງໝາເຫົ່າຫອນ ຍັງສະດຸ້ງຕົກໃຈຢູ່ປະຈຳ ໆ
ເຈົ້າໄປເຖິງເຂົາວົງກົດຈັກເຮັດແນວໃດ

[໑໗໘໑] ເມື່ອຝູງນົກພາກັນຈັບຊຸມນຸມຢູ່ໃນເວລາທ່ຽງ
ປ່າໃຫຍ່ຄືສິ່ງສຽງກະຫຶ່ມ
ເຈົ້າປາຖະໜາຈະໄປໃນປ່າໃຫຍ່ນັ້ນເຮັດຫຍັງ

[໑໗໘໒] ພຣະນາງມັດທີຣາດຊະບຸດຕີຜູ້ຊົງສິຣິໂສມ
ໄດ້ຂາບທູນຄຳນີ້ກັບພຣະເຈົ້ານະຄອນສີບໄຊນັ້ນວ່າ
ຂ້າແດ່ ພຣະອົງຜູ້ເປັນຈອມທັບ ຂໍພຣະອົງຊົງພຣະກະລຸນາ
ຕັດບອກສິ່ງທີ່ເປັນຕາຢ້ານທີ່ມີຢູ່ໃນປ່າແກ່ຂ້ານ້ອຍ
ຂ້ານ້ອຍຈັກຍອມອົດທົນຕໍ່ສິ່ງທີ່ເປັນຕາຢ້ານເຫຼົ່ານັ້ນທັງໝົດ
ຂ້ານ້ອຍຈະຕ້ອງໄປໃຫ້ໄດ້

[໑໗໘໓] ຂ້ານ້ອຍຈັກແຫວກຕົ້ນເປ້ງ ຫຍ້າຄາ
ຫຍ້າຄົມບາງ ແຝກ ຫຍ້າປ້ອງ
ແລະຫຍ້າມຸ້ງກະຕ່າຍໄປດ້ວຍເອິກ
ຂ້ານ້ອຍຈັກບໍ່ເປັນຜູ້ອັນພຣະເວດສັນດອນນັ້ນນຳໄປໄດ້ໂດຍຍາກ

[໑໗໘໔] ກຸມາຣີໄດ້ສາມີດ້ວຍວັດຕະຈະຣິຍາຫຼວງຫຼາຍ
ຄື ດ້ວຍການອົດອາຫານ ທໍລະມານທ້ອງ
ແລະດ້ວຍການມັດຄາດດ້ວຍໄມ້ຄາງງົວ

[໑໗໘໕] ດ້ວຍການບຳເລີໄຟ ແລະດ້ວຍການດຳນ້ຳ
ຄວາມເປັນໝ້າຍເປັນຄວາມເຈັບປວດໃນໂລກ
ຂ້າແດ່ ພຣະອົງຜູ້ຊົງເປັນຈອມທັບ ຂ້ານ້ອຍຈະຕ້ອງໄປໃຫ້ໄດ້

[໑໗໘໖] ຊາຍໃດຈັບມືແມ່ໝ້າຍນັ້ນຜູ້ບໍ່ປາຖະໜາດຶງລາກໄປ
ຊາຍນັ້ນເປັນຜູ້ບໍ່ຄວນບໍຣິໂພກຂອງທີ່ເປັນເດນຂອງແມ່ໝ້າຍນັ້ນ
ຄວາມເປັນໝ້າຍເປັນຄວາມເຈັບປວດໃນໂລກ
ຂ້າແດ່ ພຣະອົງຜູ້ຊົງເປັນຈອມທັບ ຂ້ານ້ອຍຈະຕ້ອງໄປໃຫ້ໄດ້

[໑໗໘໗] ຊາຍອື່ນດູໝິ່ນຍິງຜູ້ບໍ່ມີສາມີ

ໃຫ້ທຸກຫຼວງຫຼາຍບໍ່ແມ່ນໜ້ອຍແກ່ຍິງຜູ້ບໍ່ມີສາມີນັ້ນ
ດ້ວຍການຈັບຜົມ ເຕະ ຖີບ ຖອງ
ແລະຂັບໄລ່ໃຫ້ລົ້ມລົງເທິງພື້ນດິນ ບໍ່ຍອມຫຼີກໄປ
ຄວາມເປັນໝ້າຍເປັນຄວາມເຈັບປວດໃນໂລກ
ຂ້າແດ່ ພຣະອົງຜູ້ຊົງເປັນຈອມທັບ ຂ້ານ້ອຍຈະຕ້ອງໄປໃຫ້ໄດ້

[໑໗໓໗] ພວກຜູ້ຊາຍເຈົ້າຊູ້ຕ້ອງການແມ່ໝ້າຍຜູ້ມີຜິວພັນຜຸດຜ່ອງ
ໃຫ້ຊັບເລັກໜ້ອຍແລ້ວ ກໍເຂົ້າໃຈວ່າ ຕົນເປັນຜູ້ມີໂຊກດີ
ຍ່ອມຍື້ຍຸດຈັບກຸມດຶງທຶ້ນແມ່ໝ້າຍຜູ້ບໍ່ປາຖະໜາຈະໄປ
ຄືຝູງກາພາກັນຫຸ້ມຫຍຸມນົກເຄົ້າ
ຄວາມເປັນໝ້າຍເປັນຄວາມເຈັບປວດໃນໂລກ
ຂ້າແດ່ ພຣະອົງຜູ້ຊົງເປັນຈອມທັບ ຂ້ານ້ອຍຈະຕ້ອງໄປໃຫ້ໄດ້

[໑໗໓໙] ອັນວ່າແມ່ໝ້າຍ ແມ່ນຈະຢູ່ໃນຕະກູນຍາດ
ທີ່ຈະເລີນຮຸ່ງເຮືອງໄປດ້ວຍເຄື່ອງທອງສຳລິດ
ຈະບໍ່ໄດ້ຮັບຄຳຕິຕຽນລ່ວງເກີນຈາກອ້າຍນ້ອງແລະເພື່ອນຝູງເປັນໄປບໍ່ໄດ້
ຄວາມເປັນໝ້າຍເປັນຄວາມເຈັບປວດໃນໂລກ
ຂ້າແດ່ ພຣະອົງຜູ້ຊົງເປັນຈອມທັບ ຂ້ານ້ອຍຈະຕ້ອງໄປໃຫ້ໄດ້

[໑໗໔໐] ແມ່ນ້ຳທີ່ບໍ່ມີນ້ຳກໍດີ ແວ່ນແຄວ້ນທີ່ບໍ່ມີເຈົ້າຄອງກໍດີ ຍ່ອມຂາດປະໂຫຍດ
ແມ່ນແມ່ໝ້າຍເຖິງຈະມີອ້າຍນ້ອງຕັ້ງ ໑໐ ກໍຄືຢູ່ໂດດດ່ຽວ
ຄວາມເປັນໝ້າຍເປັນຄວາມເຈັບປວດໃນໂລກ
ຂ້າແດ່ ພຣະອົງຜູ້ຊົງເປັນຈອມທັບ ຂ້ານ້ອຍຈະຕ້ອງໄປໃຫ້ໄດ້

[໑໗໔໑] ທຸງເປັນເຄື່ອງໝາຍແຫ່ງລົດ ຄວັນເປັນເຄື່ອງຜາກົດແຫ່ງໄຟ
ພຣະຣາຊາເປັນສັນຍະລັກຂອງແຜ່ນດິນ
ສາມີເປັນສີສະຫງ່າຂອງສະຕີ
ຄວາມເປັນໝ້າຍເປັນຄວາມເຈັບປວດໃນໂລກ
ຂ້າແດ່ ພຣະອົງຜູ້ຊົງເປັນຈອມທັບ ຂ້ານ້ອຍຈະຕ້ອງໄປໃຫ້ໄດ້

[໑໗໔໒] ຍິງໃດຜູ້ມີກຽດ ເປັນຄົນຂັດສົນໃນເວລາສາມີຂັດສົນ
ເປັນຄົນຮັ່ງມີໃນເວລາສາມີຮັ່ງມີ ຍິງນັ້ນແລ
ເທບພະເຈົ້າທັງຫຼາຍຍ່ອມສັນເສີນວ່າ ເຮັດສິ່ງທີ່ເຮັດໄດ້ຍາກ
ຂ້າແດ່ ພຣະອົງຜູ້ຊົງເປັນຈອມທັບ ຂ້ານ້ອຍຈະຕ້ອງໄປໃຫ້ໄດ້

[໑໗໔໓] ຂ້ານ້ອຍຈັກບວດຕິດຕາມພຣະສະວາມີໄປທຸກເມື່ອ
ໃນເມື່ອແມ່ນແຕ່ແຜ່ນດິນຍັງບໍ່ແຕກສະຫຼາຍໄປ
ຄວາມເປັນໝ້າຍເປັນຄວາມເຈັບປວດຂອງຍິງ

[໑໗໔໔] ຂ້ານ້ອຍຂາດພຣະເວດສັນດອນແລ້ວ
ກໍບໍ່ປາຖະໜາແມ່ນແຕ່ແຜ່ນດິນອັນມີສາຄອນເປັນຂອບເຂດ
ເຊິ່ງມີຊັບເຄື່ອງພໍໃຈຫຼວງຫຼາຍ
ບໍລິບູນດ້ວຍຣັດຕະນະນາມັບປະການ

[໑໗໔໕] ຍິງເຫຼົ່າໃດເມື່ອສາມີມີທຸກ ຍ່ອມປາຖະໜາສຸກເພື່ອຕົນ
ຍິງເຫຼົ່ານັ້ນຊົ່ວຊາມແທ້ ຫົວໃຈຂອງພວກນາງເປັນແນວໃດນໍ

[໑໗໔໖] ເມື່ອພຣະມະຫາຣາດຜູ້ຜະດຸງຣັດໃຫ້ຈະເລີນ
ແກ່ຊາວນະຄອນສີພີຈະສະເດັດອອກ
ຂ້ານ້ອຍຈັກຂໍຕິດຕາມພຣະອົງໄປນຳ
ຍ້ອນພຣະອົງເປັນຜູ້ຊົງປະທານ
ສິ່ງທີ່ໜ້າຕ້ອງການທັງປວງແກ່ຂ້ານ້ອຍ

[໑໗໔໗] ພຣະມະຫາຣາດໄດ້ຕັດພຣະດຳຣັດນີ້
ກັບພຣະນາງມັດທີຜູ້ມີຄວາມງາມທົ່ວສັນພາງກາຍວ່າ
ແມ່ມັດທີຜູ້ມີລັກສະນະສວຍງາມ ທ້າວຊາລີແລະນາງກັນຫາຊິນາ
ລູກທັງຫຼາຍເຫຼົ່ານີ້ຂອງເຈົ້າຍັງເປັນເດັກ ເຈົ້າຈົ່ງຝາກຝັງໄວ້ແລ້ວໄປເທີ້ນ
ພວກເຮົາຈະຮັບລ້ຽງດູເດັກທັງຫຼາຍນັ້ນໄວ້ເອງ

[໑໗໔໘] ພຣະນາງມັດທີຣາດຊະບຸດຕີຜູ້ມີຄວາມງາມທົ່ວສັນພາງກາຍ
ໄດ້ຂາບທູນພຣະເຈົ້າສີບໄຊນັ້ນດັ່ງນີ້ວ່າ ຂ້າແດ່ ສົມມຸດຕິເທບ
ທ້າວຊາລີແລະນາງກັນຫາຊິນາເປັນລູກຮັກຂອງຂ້ານ້ອຍ
ລູກທັງ ໔ ນັ້ນຈັກຊະໂລມໃຈຂ້ານ້ອຍ
ຜູ້ມີຊີວິດທີ່ເສົ້າໂສກໃຫ້ອອນຊອນໃນປ່ານັ້ນໄດ້

[໑໗໔໙] ພຣະມະຫາຣາດຜູ້ຜະດຸງຣັດໃຫ້ຈະເລີນແກ່ຊາວນະຄອນສີພີ
ໄດ້ຕັດກັບພຣະນາງມັດທີນັ້ນວ່າ
ເດັກທັງຫຼາຍເຄີຍສະເຫວີຍເຂົ້າສຸກແຫ່ງເຂົ້າສາລີທີ່ປຸງດ້ວຍຊີ້ນອັນສະອາດ
ເມື່ອມາສະເຫວີຍໝາກໄມ້ ຈັກເຮັດແນວໃດ

[໑໗໕໐] ເດັກທັງຫຼາຍເຄີຍສະເຫວີຍໃນຖາດຄຳໜັກປະມານ ໑໐໐ ປະລະ
ເປັນຂອງໃຊ້ປະຈຳຣາດຊະຕະກູນ
ເມື່ອຕ້ອງມາສະເຫວີຍໃນໃບໄມ້ ຈັກເຮັດແນວໃດ

[໑໗໕໑] ເດັກທັງຫຼາຍເຄີຍສວມໃສ່ຜ້າແຄວັນກາສີ
ແຄວັນໂຂມະ ແລະແຄວັນໂກທຸມພອນ
ເມື່ອຕ້ອງມາສວມໃສ່ຜ້າຄາກອງ ຈັກເຮັດແນວໃດ

[໑໗໕໒] ເດັກທັງ ໒ ເຄີຍໄປດ້ວຍຄານຫາມ ວໍ ແລະລົດ
ເມື່ອຕ້ອງຍ່າງດ້ວຍຕີນເປົ່າ ຈັກເຮັດແນວໃດ

[໑໗໕໓] ເດັກທັງຫຼາຍເຄີຍນອນໃນເຮືອນຍອດ ມີບານປ່ອງຢ້ຽມອັດແຈບດີ
ເມື່ອຕ້ອງມານອນໃນບ່ອນເຫງົ້າໄມ້ ຈັກເຮັດແນວໃດ

[໑໗໕໔] ເດັກທັງຫຼາຍເຄີຍນອນເທິງພົມທີ່ປູລາດອັນວິຈິດເທິງບັນລັງ
ເມື່ອຕ້ອງມານອນທີ່ລາດດ້ວຍຫຍ້າ ຈັກເຮັດແນວໃດ

[໑໗໕໕] ເດັກທັງຫຼາຍເຄີຍລູບທາດ້ວຍເກດສະໜາແລະຈັນຫອມ
ເມື່ອຕ້ອງມາເປິເປື້ອນລະອອງທຸລີ ຈັກເຮັດແນວໃດ

[໑໗໕໖] ເດັກທັງຫຼາຍເຄີຍດຳລົງຢູ່ໃນຄວາມສຸກ
ມີຜູ້ໃຊ້ແສ້ຈາມະຣີແລະກຳຫາງນົກຍູງພັດວີໃຫ້
ຕ້ອງຖືກເຮືອດແລະຍຸງກັດ ຈັກເຮັດແນວໃດ

[໑໗໕໗] ພຣະນາງມັດທີຣາດຊະບຸດຕີຜູ້ມີຄວາມງາມທົ່ວສັນພາງກາຍ
ໄດ້ຂາບທູນພຣະເຈົ້ານະຄອນສີນໄຊດັ່ງນີ້ວ່າ ຂ້າແດ່ ສົມມຸດຕິເທບ
ຂໍພຣະອົງຢ່າໄດ້ຊົງປະຣິເວທະນາການ ແລະຢ່າໄດ້ເສຍພຣະທະໄທເລີຍ
ຂ້ານ້ອຍທັງຫຼາຍເປັນແນວໃດ ເດັກທັງຫຼາຍກໍຈັກເປັນແນວນັ້ນ

[໑໗໕໘] ພຣະນາງມັດທີຜູ້ມີຄວາມງາມທົ່ວສັນພາງກາຍ
ເມື່ອຂາບທູນດັ່ງນີ້ແລ້ວກໍສະເດັດຈາກໄປ
ພຣະນາງຜູ້ມີລັກສະນະໂສພາຊົງພາພຣະໂອຣົດທັງຫຼາຍ
ສະເດັດໄປຕາມທາງທີ່ພຣະເຈົ້ານະຄອນສີພີເຄີຍສະເດັດໄປ

[໑໗໕໙] ລຳດັບນັ້ນ ພຣະເວດສັນດອນຜູ້ເປັນກະສັດ

ເມື່ອໄດ້ຊົງບໍລິຈາກທານແລ້ວກໍຖວາຍບັງຄົມ
ພຣະບິດາແລະພຣະມານດາ ແລະຊົງກະທຳປະທັກຂິນ

[໑໗໘໐] ຟ້າວສະເດັດຂຶ້ນຊົງລົດພຣະທີ່ນັ່ງອັນຫຼູມດ້ວຍມ້າສິນທົບ ໔ ໂຕ
ຊົງພາພຣະໂອຣົດແລະພຣະຊາຍາສະເດັດໄປສູ່ເຂົາວົງກົດ

[໑໗໘໑] ລຳດັບນັ້ນ ພຣະເວດສັນດອນສະເດັດໄປ
ໃນສະຖານທີ່ທີ່ມີໝູ່ຊົນຫຼວງຫຼາຍຢູ່
ຕັດບອກລາວ່າ ເຮົາຈະໄປແລ້ວເດີ
ຂໍໝູ່ຍາດທັງຫຼາຍຈົ່ງເປັນຜູ້ບໍ່ມີພະຍາດເທີ້ນ

[໑໗໘໒] ເຊີນເບິ່ງເທີ້ນມັດທີ ທີ່ປະທັບຂອງພຣະເຈົ້ານະຄອນສີພີຜູ້ປະເສີດ
ຜາກົດເປັນຮູບອັນໜ້າອອນຊອນ
ສ່ວນຕຳໜັກຂອງເຮົາເປັນດັ່ງທີ່ຢູ່ຂອງເຜດ

[໑໗໘໓] ພາມທັງຫຼາຍໄດ້ຕາມພຣະເວດສັນດອນນັ້ນໄປ
ພວກເຂົາໄດ້ທູນຂໍມ້າກັບພຣະອົງ ພຣະອົງຖືກຂໍແລ້ວ
ຈຶ່ງໄດ້ຊົງມອບມ້າ ໔ ໂຕໃຫ້ແກ່ພາມທັງ ໔ ຄົນ

[໑໗໘໔] ເຊີນເບິ່ງເທີ້ນມັດທີ ລະມັ່ງຄຳຜາກົດຮ່າງງົດງາມ
ເປັນດັ່ງມ້າທີ່ໄດ້ຮັບການເຝິກມາດີແລ້ວ ນຳເຮົາໄປ

[໑໗໘໕] ຕໍ່ມາ ພາມຄົນທີ ໕ ໃນປ່ານັ້ນ
ໄດ້ມາທູນຂໍຣາດຊະລົດກັບພຣະອົງ
ພຣະອົງຖືກຂໍແລ້ວ ກໍຊົງພຣະຣາດຊະທານຣາດຊະລົດນັ້ນໃຫ້ແກ່ເຂົາ
ແລະພຣະອົງບໍ່ໄດ້ມີພຣະຫະໄທທໍ້ແທ້ເລີຍ

[໑໗໘໖] ລຳດັບນັ້ນ ພຣະເວດສັນດອນຮັບສັ່ງໃຫ້ຄົນຂອງພຣະອົງລົງແລ້ວ
ຊົງພໍພຣະຫະໄທມອບລົດມ້າພຣະທີ່ນັ່ງ
ໃຫ້ແກ່ພາມຜູ້ສະແຫວງຫາຊັບໄປ

[໑໗໘໗] ມັດທີ ເຈົ້າຈົ່ງອຸ້ມນາງກັນຫາຜູ້ເປັນນ້ອງນີ້ເຊິ່ງເບົາກວ່າ
ສ່ວນອ້າຍຈັກອຸ້ມທ້າວຊາລີ ຍ້ອນວ່າເຂົາເປັນອ້າຍຄົງຈະໜັກກວ່າ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໑໗໓໗]	ພຣະຣາຊາຊົງອຸ້ມພຣະກຸມານ
ສ່ວນພຣະນາງມັດທີຣາດຊະບຸດຕີຊົງອຸ້ມທາຣິກາ
ຊົງຍິນດີຮ່ວມກັນ ທັງຕັດປາໄສຄຳອັນມ່ວນ
ກັບກັນແລະກັນດຳເນີນໄປ

**ກັນທານະກັນ ຈົບ**

# ກັນວະນະປະເວດ

(ພຣະສາດສະດາຕັດເນື້ອຄວາມທີ່ພຣະເວດສັນດອນຕັດກັບພຣະນາງມັດທີວ່າ)

[໑໗໓໙]	ຖ້າມະນຸດລາງຄົນຍ່າງໄປຕາມທາງ ຫຼືຍ່າງສວນທາງມາ
ເຮົາຈະໄດ້ຖາມທາງກັບພວກເຂົາວ່າ ເຂົາວົງກົດຢູ່ບ່ອນໃດ

[໑໗໔໐]	ພວກເຂົາພົບເຮົາໃນລະຫວ່າງທາງນັ້ນ
ຕ່າງກໍພາກັນຮ່ຳໄຮຢ່າງໜ້າສົງສານ
ທຸກຣະທົມຕອບເຮົາວ່າ ເຂົາວົງກົດຍັງຢູ່ອີກໄກ

(ພຣະສາດສະດາຕັດເນື້ອຄວາມນີ້ວ່າ)

[໑໗໔໑]	ຖ້າເດັກອ່ອນທັງຫຼາຍ
ທອດພຣະເນດເຫັນຕົ້ນໄມ້ທີ່ມີໝາກໃນປ່າໃຫຍ່
ຕ່າງກໍຊົງກັນແສງ ຍ້ອນເຫດແຫ່ງໝາກໄມ້ເຫຼົ່ານັ້ນ

[໑໗໔໒]	ໝູ່ໄມ້ສູງໃຫຍ່ດັ່ງຈະເຫັນເດັກອ່ອນຊົງພຣະກັນແສງ
ຈຶ່ງກ່ອງງ່າລົງມາເອງ ຈົນໃກ້ຈະເຖິງເດັກອ່ອນທັງຫຼາຍ

[໑໗໔໓]	ພຣະນາງມັດທີຜູ້ມີຄວາມງາມທົ່ວສັນພາງກາຍ
ເຫັນເຫດອັດສະຈັນບໍ່ເຄີຍມີມາ
ເຊິ່ງເປັນເຫດໃຫ້ເກີດຂົນຫົວລຸກນີ້ແລ້ວ ຈຶ່ງກ່າວສາທຸການວ່າ

[໑໗໔໔]	ເຫດອັນໜ້າອັດສະຈັນນໍ ບໍ່ເຄີຍມີມາໃນໂລກ
ເປັນເຫດໃຫ້ເກີດຂົນຫົວລຸກ
ດ້ວຍອຳນາດແຫ່ງພຣະເວດສັນດອນ ຕົ້ນໄມ້ຈຶ່ງກ່ອງງ່າລົງມາ

[໑໗໔໕]	ທວຍເທບທັງຫຼາຍຕ່າງກໍໄດ້ມາຊ່ອຍຍົ້ນທາງເຂົ້າ

ໃຫ້ກະສັດທັງ ໔ ພຣະອົງສະເດັດເຖິງເຈຕະຣາດໄດ້
ໂດຍໃຊ້ເວລາສະເດັດພຽງມື້ດຽວ
ເພື່ອອະນຸເຄາະເດັກອ່ອນທັງຫຼາຍ

[໑໗໘໖] ກະສັດທັງ ໔ ພຣະອົງນັ້ນຊົງດຳເນີນໄປສິ້ນທາງໄກ
ສະເດັດເຖິງເຈຕະຣາດເຊິ່ງເປັນຊົນນະບົດທີ່ຈະເລີນຮັ່ງມີ
ມີຊີ້ນແລະເຂົ້າຢ່າງດີຫຼວງຫຼາຍ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໑໗໘໗] ຊາວນະຄອນເຈຕະຣາດເຫັນພຣະນາງມັດທີ
ຜູ້ມີລັກສະນະສວຍງາມສະເດັດມາ
ກໍຫ້ອມລ້ອມແຫ່ແຫນດ້ວຍກ່າວກັນວ່າ
ພຣະແມ່ເຈົ້າເປັນກະສັດສຸຂຸມາລະຊາດນໍ
ດຳເນີນມາດ້ວຍພຣະບາດເປົ່າ

[໑໗໘໘] ເຄີຍຊົງຣາດຊະຍານຄານຫາມແລະຣາດຊະລົດ
ມື້ນີ້ ພຣະນາງມັດທີຕ້ອງດຳເນີນດ້ວຍພຣະບາດເປົ່າໃນປ່າ
[໑໗໘໙] ພຣະຍາເຈຕະຣາດທັງຫຼາຍໄດ້ເຫັນພຣະເວດສັນດອນ
ຕ່າງກໍຊົງກັນແສງເຂົ້າໄປເຝົ້າຂາບທູນຖາມວ່າ
ຂ້າແດ່ ສົມມຸດຕິເທບ ພຣະອົງຊົງພຣະກະເສມສຳຣານ
ປາສະຈາກໂຣຄາພາດບໍ ພຣະອົງບໍ່ມີທຸກບໍ
ພຣະຣາດຊະບິດາຂອງພຣະອົງຫາພຣະໂຣຄາພາດບໍ່ໄດ້ບໍ
ຊາວນະຄອນສີພີກໍບໍ່ມີພະຍາດດອກບໍ
[໑໗໙໐] ຂ້າແດ່ ມະຫາຣາດ ພົນນິກາຍຂອງພຣະອົງຢູ່ບ່ອນໃດ
ກະບວນລົດຂອງພຣະອົງຢູ່ບ່ອນໃດ ພຣະອົງບໍ່ມີມ້າຊົງ
ບໍ່ມີຣົດຊົງ ຊົງດຳເນີນມາສິ້ນທາງແສນໄກ
ຖືກພວກອະມິດຢ່ຳຍີບໍ ຈຶ່ງສະເດັດມາເຖິງທີ່ດນີ້

(ພຣະເວດສັນດອນຕັດວ່າ)

[໑໗໙໑] ສະຫາຍທັງຫຼາຍ ຂ້າພະເຈົ້າມີຄວາມສຸກບໍ່ມີພະຍາດບຽດບຽນ
ອັນໜຶ່ງ ພຣະຣາດຊະບິດາຂອງຂ້າພະເຈົ້າກໍຊົງປາສະຈາກພຣະໂຣຄາພາດ
ແລະຊາວນະຄອນສີພີກໍບໍ່ມີພະຍາດບຽດບຽນ

[໑໗໗໔] ຍ້ອນຂ້າພະເຈົ້າໄດ້ໃຫ້ພະຍາກຸນຊອນມີງາຄືງອນໄຖ
ແກ່ກ້າສາມາດຮູ້ຈັກເຂດແຫ່ງການຮົບທັງປວງ
ເພື່ອກຜ່ອງປະເສີດສຸດ

[໑໗໗໓] ຄຸມດ້ວຍຜ້າກຳພົນເຫຼືອງ ຊັບມັນ ອາດຢ່ຳຍີສັດຕູໄດ້
ມີງາໜ້າພໍໃຈ ເພື່ອກຜ່ອງດັ່ງພູໄກລາດ
ພ້ອມທັງພັດກັບແສ້

[໑໗໗໔] ເປັນຫຍັງ ພຣະເວດສັນດອນຈຶ່ງໄດ້ພຣະຣາດຊະທານ
ພະຍາຊ້າງຣາດຊະພາຫະນະເຊິ່ງເປັນຍານຊັ້ນເລີດ
ເປັນຊັບອັນປະເສີດພ້ອມທັງຄັນຮົ່ມຂາວ ເຄື່ອງປູລາດ
ໝໍຊ້າງ ແລະຄົນລ້ຽງຊ້າງແກ່ພວກພາມ

[໑໗໗໕] ຍ້ອນເຫດນັ້ນ ຊາວນະຄອນສີພີຈຶ່ງພາກັນໂກດເຄືອງຂ້າພະເຈົ້າ
ທັງພຣະບິດາກໍຊິງໂກດຂັບໄລ່ຂ້າພະເຈົ້າ
ຂ້າພະເຈົ້າຈະໄປເຂົາວົງກົດ ສະຫາຍທັງຫຼາຍ
ຂໍທ່ານທັງຫຼາຍຈົ່ງຮູ້ໂອກາດເຊິ່ງເປັນບ່ອນຢູ່ໃນປ່າຂອງຂ້າພະເຈົ້າເທີ້ນ

(ພຣະຍາເຈຕະຣາດຂາບທູນວ່າ)

[໑໗໗໖] ຂ້າແດ່ ມະຫາຣາດ ພຣະອົງສະເດັດມາດີ ບໍ່ໄດ້ສະເດັດມາຮ້າຍ
ພຣະອົງຜູ້ຊົງເປັນໃຫຍ່ສະເດັດມາເຖິງແລ້ວ
ຂໍພຣະອົງຕັດບອກພຣະປະສົງສິ່ງທີ່ມີຢູ່ໃນເມືອງນີ້

[໑໗໗໗] ຂ້າແດ່ ມະຫາຣາດ ຂໍເຊີນພຣະອົງສະເຫວີຍສຸທາໂພຊະນາຫານ
ເຂົ້າສາລີ ສົ້ມຜັກ ເຫງົ້າມັນ ນ້ຳເຜີ້ງ ແລະຊີ້ນເທີ້ນ
ພຣະອົງເປັນແຂກທີ່ຂ້າພຣະອົງທັງຫຼາຍສົມຄວນຕ້ອນຮັບ

(ພຣະເວດສັນດອນຕັດວ່າ)

[໑໗໗໗] ສິ່ງໃດທີ່ທ່ານທັງຫຼາຍໃຫ້ແລ້ວ
ຂໍສິ່ງນັ້ນທັງໝົດຈົ່ງເປັນອັນເຮົາໄດ້ຮັບໄວ້ແລ້ວເທີ້ນ
ບັນນາການເປັນອັນທ່ານທັງຫຼາຍໄດ້ເຮັດແລ້ວທຸກຢ່າງ
ພຣະຣາຊາຊົງພິໂຣດຂ້າພະເຈົ້າ ຂ້າພະເຈົ້າຈະໄປສູ່ເຂົາວົງກົດ
ສະຫາຍທັງຫຼາຍ ຂໍທ່ານທັງຫຼາຍຈົ່ງຮູ້
ໂອກາດເຊິ່ງເປັນບ່ອນຢູ່ໃນປ່າຂອງຂ້າພະເຈົ້າເທີ້ນ

(ພຣະຍາເຈຕະຣາດຊາບທູນວ່າ)

[໑໗໗໙] ຂ້າແດ່ ພຣະອົງຜູ້ຊົງເປັນຈອມທັບ
ຂໍເຊີນພຣະອົງສະເດັດປະທັບຢູ່ເຈຕະຣາດນີ້ກ່ອນເທີ້ນ
ຈົນກວ່າຊາວເຈຕະຣາດຈັກໄປເຝົ້າພຣະເຈົ້ານະຄອນສີພີ
ເພື່ອທູນຂໍເຖິງພຣະຣາດຊະສຳນັກ

[໑໗໘໐] ເພື່ອທູນຂໍພຣະມະຫາຣາດຜູ້ຜະດຸງຣັດໃຫ້ຈະເລີນແກ່ຊາວນະຄອນສີພີ
ຊົງອະໄພໂທດໃຫ້ຊາວເຈຕະຣາດໄດ້ບ່ອນເພິ່ງແລ້ວ
ມີຄວາມປຣີດາແຫ່ແຫນຫ້ອມລ້ອມພຣະອົງໄປ
ຂ້າແດ່ ພຣະອົງຜູ້ເປັນກະສັດ ຂໍພຣະອົງຊົງຮູ້ແນວນີ້ເທີ້ນ

(ພຣະເວດສັນດອນຕັດວ່າ)

[໑໗໘໑] ທ່ານທັງຫຼາຍຢ່າໄດ້ພໍໃຈເລີຍ
ການໄປທູນຂໍເຖິງພຣະຣາດຊະສຳນັກເພື່ອໃຫ້ພຣະຣາຊາຊົງອະໄພໂທດໃຫ້
ແມ່ນແຕ່ພຣະຣາຊາກໍບໍ່ຊົງເປັນໃຫຍ່ໃນເລື້ອງນີ້

[໑໗໘໒] ຍ້ອນຖ້າຊາວນະຄອນສີພີພ້ອມທັງພົນນິກາຍ
ແລະຊາວນິຄົມໂກດເຄືອງຍິ່ງແລ້ວ
ກໍປາຖະໜາຈະກຳຈັດພຣະຣາຊາສາຍ້ອນສາເຫດແຫ່ງເຮົາ

(ພຣະຍາເຈຕະຣາດຊາບທູນວ່າ)

[໑໗໘໓] ຂ້າແດ່ ພຣະອົງຜູ້ຜະດຸງຣັດໃຫ້ຈະເລີນ
ຖ້າເຫດການນີ້ໃນຣັດນັ້ນເປັນໄປແນວນີ້ ຂໍພຣະອົງຊົງມີ
ຊາວເຈຕະຣາດຫ້ອມລ້ອມສະເດັດຄອງຣາດຊະສົມບັດໃນຣັດນີ້ເທີ້ນ

[໑໗໘໔] ຣັດນີ້ຮັ່ງມີສົມບູນ ຊົນນະບົດກໍຮັ່ງມີກວ້າງໃຫຍ່
ຂ້າແດ່ ສົມມຸດຕິເທບ ຂໍພຣະອົງຊົງຕົກລົງພຣະຫະໄທຄອງຣາດຊະສົມບັດເທີ້ນ

(ພຣະເວດສັນດອນຕັດວ່າ)

[໑໗໘໕] ຂ້າພະເຈົ້າບໍ່ມີຄວາມພໍໃຈ ບໍ່ຕົກລົງໃຈທີ່ຈະຄອງຣາດຊະສົມບັດ
ບຸດແຫ່ງຊາວເຈຕະຣາດທັງຫຼາຍ ຂໍທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ
ຜູ້ຖືກຂັບໄລ່ຈາກແຄວ້ນເທີ້ນ

[໑໗໙໖] ຊາວນະຄອນສີພີ ພິນນິກາຍ ແລະຊາວນິຄົມຄົງບໍ່ຍິນດີວ່າ
ຊາວເຈຕະຣາດໄດ້ຣາຊາພິເສກຂ້າພະເຈົ້າຜູ້ຖືກຂັບໄລ່ຈາກແຄວ້ນ

[໑໗໙໗] ແມ່ນຄວາມບໍ່ເບີກບານໃຈຈະເພິ່ງມີແກ່ທ່ານທັງຫຼາຍ
ຍ້ອນເຫດແຫ່ງຂ້າພະເຈົ້າແນ່ນອນ
ອັນໜຶ່ງ ຂ້າພະເຈົ້າບໍ່ພໍໃຈຄວາມບາດໝາງໃຈ
ແລະຄວາມຜິດຖຽງກັບຊາວນະຄອນສີພີເລີຍ

[໑໗໙໘] ບໍ່ແມ່ນແຕ່ທໍ່ນັ້ນ ຄວາມບາດໝາງໃຈຈະເພິ່ງຮຸນແຮງຂຶ້ນ
ສົງຄາມໃຫຍ່ກໍອາດຈະມີໄດ້ ຄົນເປັນຈຳນວນຫຼາຍກໍຈະຂ້າຟັນກັນເອງ
ຍ້ອນເຫດແຫ່ງຂ້າພະເຈົ້າຜູ້ດຽວ

[໑໗໙໙] ສິ່ງໃດທີ່ທ່ານທັງຫຼາຍໃຫ້ແລ້ວ
ຂໍສິ່ງນັ້ນທັງໝົດຈົ່ງເປັນອັນຂ້າພະເຈົ້າຮັບໄວ້ແລ້ວເທີ້ນ
ບັນນາການເປັນອັນທ່ານທັງຫຼາຍໄດ້ເຮັດແລ້ວທຸກຢ່າງ
ພຣະຣາຊາຊົງພິໂຣດຂ້າພະເຈົ້າ ຂ້າພະເຈົ້າຈະໄປສູ່ເຂົາວົງກົດ
ສະຫາຍທັງຫຼາຍ ຂໍທ່ານທັງຫຼາຍຈົ່ງຮູ້
ໂອກາດເຊິ່ງເປັນບ່ອນຢູ່ໃນປ່າຂອງຂ້າພະເຈົ້າເທີ້ນ

(ຊາວເຈຕະຣາດຂາບທູນວ່າ)

[໑໙໐໐] ເຊີນເທີ້ນ ຣາດຊະລິສີທັງຫຼາຍຜູ້ຊົງບູຊາໄຟ
ມີພຣະທະໄທຕັ້ງໝັ້ນປະທັບຢູ່ທີ່ປະເທດໃດ
ຂ້າພຣະອົງທັງຫຼາຍຈັກຂາບທູນປະເທດນັ້ນ
ຂໍໃຫ້ຊົງຮູ້ຄືກັບຜູ້ສະຫຼາດໃນຫົນທາງສັນນັ້ນເທີ້ນ

[໑໙໐໑] ຂ້າແດ່ ມະຫາຣາດ ພູ້ນ ພູຄັນທະມາດທີ່ເປັນສີລາລ້ວນ
ເຊິ່ງເປັນສະຖານທີ່ປະທັບຢູ່ຂອງພຣະອົງ
ພ້ອມດ້ວຍພຣະໂອຣົດທັງຫຼາຍແລະພຣະຊາຍາ
[໑໙໐໔] ພຣະຍາເຈຕະຣາດທັງຫຼາຍຕ່າງກໍຊົງກັນແສງ
ມີພຣະເນດນອງດ້ວຍພຣະອັດສຸຊົນ
ຂາບທູນພຣະເວດສັນດອນໃຫ້ຊົງຮູ້ວ່າ ຂ້າແດ່ ມະຫາຣາດ
ຈາກນີ້ໄປ ຂໍເຊີນພຣະອົງຊົງບ່າຍພຣະພັກ
ກົງໄປທາງທິດເໜືອເທີ້ນ

[໑໙໐໓] ຂ້າແດ່ ພຣະອົງຜູ້ຊົງພຣະຈະເລີນ ຕໍ່ຈາກນັ້ນ
ພຣະອົງຈັກຊົງທອດພຣະເນດເຫັນພູເວປຸນລະ
ເຊິ່ງເດຍລະດາດໄປດ້ວຍໝູ່ໄມ້ນານາພັນ
ມີເງົາຮົ່ມເຢັນ ໜ້າອອນຊອນໃຈ

[໑໙໐໔] ຂ້າແດ່ ພຣະອົງຜູ້ຊົງພຣະຈະເລີນ
ພຣະອົງສະເດັດເລີຍພູເວປຸນລະນັ້ນໄປ
ຈາກນັ້ນກໍຈະທອດພຣະເນດເຫັນແມ່ນ້ຳເກຕຸມະດີ
ເຊິ່ງເປັນແມ່ນ້ຳເລິກ ໄຫຼມາຈາກຮ່ອມພູ

[໑໙໐໕] ອັ່ງອໍໄປດ້ວຍຝູງປາຫຼວງຫຼາຍ
ມີທ່ານ້ຳຮາບພຽງດີ ມີນ້ຳຫຼາຍ
ພຣະອົງຈະໄດ້ອາບນ້ຳແລະສະເຫວີຍ ຢູ່ບ່ອນນັ້ນ
ປົກປອບພຣະໂອຣົດແລະພຣະຊາຍາໃຫ້ສຳຣານພຣະຫະໄທ

[໑໙໐໖] ຂ້າແດ່ ພຣະອົງຜູ້ຊົງພຣະຈະເລີນ ຕໍ່ຈາກນັ້ນໄປ
ພຣະອົງຈັກທອດພຣະເນດເຫັນຕົ້ນໄຮ
ທີ່ມີໝາກຫວານ ມີຮົ່ມເງົາເຢືອກເຢັນ ເປັນທີ່ອອນຊອນໃຈ
ເຊິ່ງເກີດຢູ່ເທິງຈອມພູອັນໜ້າອອນຊອນ

[໑໙໐໗] ຂ້າແດ່ ພຣະອົງຜູ້ຊົງພຣະຈະເລີນ ຖັດຈາກນັ້ນໄປ
ພຣະອົງຈັກທອດພຣະເນດເຫັນພູນາລິກະເຊິ່ງເປັນສີລາລ້ວນ
ຫຼາກຫຼາຍໄປດ້ວຍຝູງນົກນານາພັນແລະໝູ່ກິນນະຣະ

[໑໙໐໘] ທາງດ້ານທິດຕາເວັນອອກສຽງເໜືອແຫ່ງພູນາລິກະນັ້ນ
ມີສະມຸຈະລິນທີ່ເດຍລະດາດໄປດ້ວຍດອກບຸນທະຣິກ
ດອກບົວຂາວ ແລະດອກໄມ້ທີ່ມີກິ່ນຫອມ

[໑໙໐໙] ຂໍເຊີນພຣະອົງສະເດັດເຂົ້າໄປສູ່ເຂດປ່າວະນະສະຖານ
ອັນຂຽວຊະອຸ່ມດັ່ງກ້ອນເຟືອຢູ່ສະເໝີ ສະພັ່ງໄປດ້ວຍໄມ້ດອກ
ແລະຕົ້ນໄມ້ໃຫ້ຜົນທັງ ໔ ຄືພະຍາຣາດຊະສີທີ່ມຸ້ງເຫຍື່ອ
[໑໙໑໐] ໃນເຂດປ່ານັ້ນ ມີຝູງນົກຫຼວງຫຼາຍ
ສົ່ງສຽງຂັບຄູກູ່ຮ້ອງກ້ອງມ່ວນ ປະສານສຽງກູ່ຮ້ອງນອງນັນ
ເທິງຕົ້ນໄມ້ທີ່ແຕກດອກອອກຊໍ່ຕາມລະດູ

[໑໙໑໑] ພຣະອົງສະເດັດດຳເນີນເຖິງຮ່ອມພູເຊິ່ງເປັນທາງເດີນລຳບາກ
ແລະເປັນຕົ້ນຂອງແມ່ນ້ຳທັງຫຼາຍ ຈະໄດ້ທອດພຣະເນດເຫັນ
ສະໂບກຂະຣະນີອັນສະພັ່ງໄປດ້ວຍໄມ້ກຸ່ມແລະໄມ້ເຊືອກ

[໑໙໑໒] ອັ່ງອໍໄປດ້ວຍຝູງປາຫຼວງຫຼາຍ
ມີທ່ານ້ຳງາມ ຮາບພຽງດີ ມີນ້ຳຫຼາຍ
ເຕັມປ່ຽມຢູ່ສະເໝີ ເປັນສະສີ່ຫລ່ຽມ
ມີນ້ຳແຊບ ປາສະຈາກກິ່ນເໝັນ

[໑໙໑໓] ທາງດ້ານທິດຕາເວັນອອກສຽງເໜືອແຫ່ງສະໂບກຂະຣະນີນັ້ນ
ພຣະອົງໄດ້ຊົງສ້າງບັນນະສາລາ
ແລ້ວແລ້ວເພິ່ງຊົງພ່ຳເພັງພຽນລ້ຽງພຣະຊົນມະຊີບ
ດ້ວຍການທ່ຽວສະແຫວງຫາມູນຜະລາຫານຢູ່ເທີ້ນ

**ກັນວະນະປະເວດ ຈົບ**

# ກັນຊູຊົກ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນຈຶ່ງຕັດວ່າ)

[໑໙໑໔] ໄດ້ມີພາມຊື່ຊູຊົກ ເຊິ່ງຢູ່ປະຈຳໃນແຄວັ້ນກາລິງຄະ
ເຂົາມີພັນລະຍາສາວຊື່ອະມິດຕະຕາປະນາ

[໑໙໑໕] ຖືກພວກຍິງໃນໝູ່ບ້ານນັ້ນທີ່ພາກັນໄປຕັກນ້ຳທີ່ທ່ານ້ຳ
ຕ່າງແຕກຕື່ນກັນມາຫຸ້ມດ່າຢ່າງຝີດສະໜັ່ນວ່າ

[໑໙໑໖] ມານດາຂອງເຈົ້າຄົງເປັນສັດຕູແນ່ນອນ
ບິດາຂອງເຈົ້າກໍຄົງເປັນສັດຕູແນ່ ຈຶ່ງໄດ້ພາກັນຍົກເຈົ້າ
ທີ່ຍັງເປັນສາວແຮກລຸ້ນໃຫ້ແກ່ພາມເຖົ້າແນວນີ້

[໑໙໑໗] ບໍ່ເກື້ອກູນເລີຍນໍ
ພວກຍາດຂອງເຈົ້າຈອບໄປເປີກສາກັນລັບ ໆ
ຍົກເຈົ້າຜູ້ຍັງເປັນສາວແຮກລຸ້ນໃຫ້ແກ່ພາມເຖົ້າແນວນີ້

[໑໙໑໘] ພວກຍາດຂອງເຈົ້າເປັນສັດຕູນໍ

ໄດ້ພາກັນຈອບໄປເບິກສາກັນລັບ ໆ
ຍົກເຈົ້າຜູ້ຍັງເປັນສາວແຮກລຸ້ນໃຫ້ແກ່ພາມເຖົ້າແນວນີ້

[໑໗໑໗] ເປັນຄວາມຊົ່ວແທ້ນໍ
ທີ່ພວກຍາດຂອງເຈົ້າໄດ້ຈອບໄປເບິກສາກັນລັບ ໆ
ຍົກເຈົ້າຜູ້ຍັງເປັນສາວແຮກລຸ້ນໃຫ້ແກ່ພາມເຖົ້າແນວນີ້

[໑໗໘໐] ເປັນຄວາມຊົ່ວຊາມແທ້ນໍ
ທີ່ພວກຍາດຂອງເຈົ້າໄດ້ຈອບໄປເບິກສາກັນລັບໆ
ຍົກເຈົ້າຜູ້ຍັງເປັນສາວແຮກລຸ້ນໃຫ້ແກ່ພາມເຖົ້າແນວນີ້

[໑໗໘໑] ເປັນທີ່ໜ້າເສຍໃຈນໍ
ທີ່ພວກຍາດຂອງເຈົ້າໄດ້ຈອບໄປເບິກສາລັບ ໆ
ຍົກເຈົ້າຜູ້ຍັງເປັນສາວແຮກລຸ້ນໃຫ້ແກ່ພາມເຖົ້າແນວນີ້

[໑໗໘໘] ເຈົ້າຄົງບໍ່ພໍໃຈຢູ່ກັບຜົວແກ່
ການທີ່ເຈົ້າຢູ່ໃນເຮືອນຂອງພາມເຖົ້າ
ເຈົ້າຕາຍສາຍັງດີກວ່າຢູ່

[໑໗໘໓] ແມ່ຄົນງາມສຸດສວຍ ມານດາແລະບິດາຂອງເຈົ້າ
ຄົງຫາຊາຍອື່ນມາໃຫ້ເປັນຜົວເຈົ້າບໍ່ໄດ້ແນ່
ຈຶ່ງຍົກເຈົ້າຜູ້ຍັງເປັນສາວແຮກລຸ້ນໃຫ້ແກ່ພາມເຖົ້າແນວນີ້

[໑໗໘໔] ໃນດິຖີທີ ໗ ເຈົ້າຄົງຈັກບູຊາຍັນໄວ້ບໍ່ດີ
ຄົງຈັກບໍ່ໄດ້ທຳການບູຊາໄຟ
ມານດາແລະບິດາຂອງເຈົ້າຈຶ່ງຍົກເຈົ້າ
ຜູ້ຍັງເປັນສາວແຮກລຸ້ນໃຫ້ແກ່ພາມເຖົ້າແນວນີ້

[໑໗໘໕] ເຈົ້າຄົງສາບແຊ່ງສະມະນະແລະພາມ
ຜູ້ມີພົມມະຈັນເປັນເບື້ອງໜ້າ
ຜູ້ມີສີນ ເປັນພະຫູສູດໃນໂລກແນ່
ເຈົ້າຈຶ່ງໄດ້ມາຢູ່ໃນເຮືອນຂອງພາມເຖົ້າ
ແຕ່ຍັງເປັນສາວແຮກລຸ້ນແນວນີ້

[໑໗໘໖] ການຖືກງູກັດກໍບໍ່ເປັນທຸກ

ການຖືກແທງດ້ວຍຫອກກໍບໍ່ເປັນທຸກ
ການໄດ້ເຫັນຜົວແກ່ນັ້ນແລເປັນທຸກໜັກໜາ

[໑໙໘໗] ການຫຼິ້ນຫົວກັບຜົວແກ່ກໍບໍ່ມີ ການອອນຊອນກັບຜົວແກ່ກໍບໍ່ມີ
ການສົນທະນາປາໄສກັບຜົວແກ່ກໍບໍ່ມີ ແມ່ນແຕ່ການເຍົ້າຍອກກໍບໍ່ງາມ

[໑໙໘໘] ແຕ່ເມື່ອໃດ ຜົວໜຸ່ມເມຍສາວຫຼິ້ນເຍົ້າຍອກກັນຢູ່ໃນບ່ອນລັບ
ເມື່ອນັ້ນ ຄວາມໂສກເສົ້າທຸກຢ່າງ
ທີ່ສຽດແທງຫົວໃຈຢູ່ ກໍຫາຍໄປສິ້ນ

[໑໙໘໙] ເຈົ້າຍັງເປັນສາວຮູບງາມ ພວກຊາຍໜຸ່ມປາຖະໜາຍິ່ງ
ເຈົ້າຈິ່ງໄປຢູ່ອາໄສໃນຕະກູນຍາດເຫີ້ນ
ຄົນແກ່ຈັກເຮັດໃຫ້ເຈົ້າອອນຊອນໄດ້ແນວໃດ

(ນາງອະມິດຕະຕາປະນາກ່າວວ່າ)

[໑໙໙໐] ພາມ ເຮົາຈັກບໍ່ໄປຕັກນ້ຳທີ່ທ່ານ້ຳເພື່ອທ່ານຕໍ່ໄປອີກ
ຍ້ອນພວກຍິງຊາວບ້ານມັນຫຸ້ມກັນດ່າເຮົາ ເຫດທີ່ທ່ານເປັນຄົນແກ່

(ຊູຊົກປອບວ່າ)

[໑໙໙໑] ເຈົ້າຢ່າໄດ້ເຮັດວຽກງານເພື່ອຂ້ອຍ
ຢ່າໄດ້ຕັກນ້ຳມາເພື່ອຂ້ອຍ
ຂ້ອຍຈັກຕັກນ້ຳເອງ ນາງຜູ້ຈະເລີນ
ເຈົ້າຢ່າໄດ້ໂກດເຄືອງຂ້ອຍ

(ນາງອະມິດຕະຕາປະນາຕອບວ່າ)

[໑໙໙໒] ເຮົາບໍ່ໄດ້ເກີດໃນຕະກູນທີ່ຈະໃຊ້ສາມີຕັກນ້ຳ
ພາມ ທ່ານຈິ່ງຮູ້ແນວນີ້ວ່າ ເຮົາຈັກບໍ່ຢູ່ໃນເຮືອນຂອງທ່ານ

[໑໙໙໓] ພາມ ຖ້າທ່ານຈັກບໍ່ນຳຂ້າທາດຫຼືທາສີມາໃຫ້ເຮົາ
ທ່ານຈິ່ງຮູ້ແນວນີ້ວ່າ ເຮົາຈັກບໍ່ຢູ່ໃນເຮືອນຂອງທ່ານ

(ຊູຊົກກ່າວວ່າ)

[໑໙໙໔] ພາມມະນີ ສິລະປະກຳຫຼືຊັບ

ແລະເຂົ້າເປືອກຂອງຂ້ອຍບໍ່ມີຢູ່ບ່ອນໃດເລີຍ
ຂ້ອຍຈັກນຳຂ້າທາດຫຼືທາສີມາໃຫ້ແກ່ເຈົ້າຜູ້ຈະເລີນໄດ້ຈັ່ງໃດ
ຂ້ອຍຈັກອຸບປະຖຳບຳລຸງເຈົ້າ ເຈົ້າຢ່າໄດ້ໂກດເຄືອງເລີຍ

(ນາງອະມິດຕະຕາປະນາຕອບວ່າ)

[໑໘໓໕] ມາເທີ້ນ ເຮົາຈັກບອກແກ່ທ່ານຕາມທີ່ເຮົາໄດ້ຟັງມາ
ພູ້ນ ພຣະຣາຊາເວດສັນດອນປະທັບຢູ່ທີ່ເຂົາວົງກົດ

[໑໘໓໖] ພາມ ທ່ານຈິ່ງໄປທູນຂໍຂ້າທາດແລະທາສີ
ກັບພຣະອົງເທີ້ນ ເມື່ອທ່ານທູນຂໍແລ້ວ
ພຣະອົງຜູ້ເປັນກະສັດຈັກພຣະຣາດຊະທານຂ້າທາດແລະທາສີໃຫ້ແກ່ທ່ານ

(ຊູຊົກກ່າວວ່າ)

[໑໘໓໗] ນາງຜູ້ຈະເລີນ ຂ້ອຍແກ່ແລ້ວເປັນຄົນທຸບພົບລະພາບ
ທັງຫົນທາງກໍແສນໄກ ຍ່າງໄປໄດ້ແສນຍາກ
ເຈົ້າຢ່າໄດ້ເຮຮົນຮ່ຳໄຮ ຢ່າໄດ້ເສຍໃຈ
ຂ້ອຍຈັກອຸບປະຖຳບຳລຸງເຈົ້າ ເຈົ້າຢ່າໄດ້ໂກດເຄືອງເລີຍ

(ນາງອະມິດຕະຕາປະນາເວົ້າວ່າ)

[໑໘໓໘] ຄົນຢ້ານຍັງບໍ່ທັນເຖິງສະໜາມຮົບ
ຍັງບໍ່ທັນໄດ້ຮົບກໍຍອມປຣາໄຊສັນໃດ
ພາມ ທ່ານຍັງບໍ່ທັນໄດ້ໄປ
ກໍຍອມປຣາໄຊສາແລ້ວກໍຄືກັນສັນນັ້ນ

[໑໘໓໙] ພາມ ຖ້າທ່ານຈັກບໍ່ນຳຂ້າທາດຫຼືທາສີມາໃຫ້ເຮົາ
ທ່ານຈົ່ງຮູ້ແນວນີ້ວ່າ ເຮົາຈັກບໍ່ຢູ່ໃນເຮືອນຂອງທ່ານ
ຈັກທຳການທີ່ບໍ່ພໍໃຈໃຫ້ແກ່ທ່ານ ຂໍ້ນັ້ນຈັກເປັນທຸກແກ່ທ່ານ

[໑໘໔໐] ໃນເວລາມະໂຫຣະສົບເຊິ່ງມີໃນຕົ້ນລະດູນັກຂັດຕະເລີກ
ທ່ານຈັກໄດ້ເຫັນເຮົາແຕ່ງໂຕສວຍງາມ
ອອດອ້ອນຢູ່ກັບຊາຍອື່ນ ຂໍ້ນັ້ນຈັກເປັນທຸກແກ່ທ່ານ

[໑໘໔໑] ພາມ ເມື່ອທ່ານທີ່ເປັນຄົນແກ່ຮ່ຳໄຮຢູ່

ຍ້ອນບໍ່ເຫັນເຮົາ ຮ່າງກາຍທີ່ງຳກໍຈັກງໍຍິ່ງຂຶ້ນ
ແລະຜົມທີ່ຫງອກກໍຈັກຫງອກຫຼາຍຂຶ້ນ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໑໙໔໔] ລຳດັບນັ້ນ ພາມນັ້ນຕົກໃຈຢ້ານ
ຕົກຢູ່ໃນອຳນາດຂອງນາງພາມມະນີ
ຖືກກາມຣາຄະບີບຄັ້ນ ໄດ້ກ່າວກັບນາງພາມມະນີວ່າ

[໑໙໔໙] ພາມມະນີ ທ່ານຈົ່ງເຮັດສະບຽງເດີນທາງໃຫ້ຂ້ອຍ
ທັງເຂົ້າໜົມງາ ເຂົ້າໜົມທຽນ ສັດຕຸກ້ອນ ສັດຕຸຜົງ
ແລະເຂົ້າຜອກ ເຈົ້າຈົ່ງຈັດໃຫ້ດີ

[໑໙໔໔] ຂ້ອຍຈັກນຳພຣະກຸມານທັງ ໔ ມາໃຫ້ເປັນຂ້າທາດ
ພຣະກຸມານທັງ ໔ ອົງນັ້ນເປັນຜູ້ບໍ່ຂີ້ຄ້ານ
ຈັກປົບນິບັດເຈົ້າທັງກາງຄືນແລະກາງເວັນ

[໑໙໔໕] ພາມຊູຊົກຜູ້ເປັນເຜົ່າພັນຂອງພົມ
ເມື່ອກ່າວດັ່ງນີ້ແລ້ວ ກໍໃສ່ເກີບ ພ່ຳສັ່ງເສຍຕໍ່ໄປ
ກະທຳປະທັກຂິນພັນລະຍາແລ້ວ

[໑໙໔໖] ພາມນັ້ນສະມາທານຂໍ້ວັດປະຕິບັດ ມີນ້ຳຕານອງໜ້າ
ຫຼີກໄປສູ່ນະຄອນອັນຈະເລີນຮຸ່ງເຮືອງຂອງຊາວນະຄອນສີພີ
ທ່ຽວໄປສະແຫວງຫາຂ້າທາດ
[໑໙໔໗] ພາມຊູຊົກນັ້ນໄປໃນເມືອງນັ້ນແລ້ວ
ໄດ້ຖາມຊົນທັງຫຼາຍຜູ້ມາປະຊຸມກັນຢູ່ໃນບ່ອນນັ້ນວ່າ
ພຣະຣາຊາເວດສັນດອນປະທັບຢູ່ບ່ອນໃດ
ເຮົາຈະໄປເຝົ້າພຣະອົງຜູ້ເປັນກະສັດໄດ້ຢູ່ໃສ
[໑໙໔໘] ຊົນເຫຼົ່ານັ້ນຜູ້ມາປະຊຸມກັນ ຢູ່ບ່ອນນັ້ນ
ໄດ້ຕອບພາມຊູຊົກນັ້ນໄປວ່າ
ພາມ ພຣະເວດສັນດອນບໍຣົມກະສັດ
ຖືກພວກທ່ານບຽດບຽນ ຍ້ອນຊົງບໍລິຈາກທານຫຼາຍເກີນໄປ
ຈຶ່ງຖືກຂັບໄລ່ໄປຈາກແຄວ້ນຂອງພຣະອົງ
ບັດນີ້ ປະທັບຢູ່ທີ່ເຂົາວົງກົດ

[໑໔໔໗] ພາມ ພຣະເວດສັນດອນຜູ້ເປັນກະສັດ
ຖືກພວກທ່ານບຽດບຽນ ຍ້ອນຊົງບໍລິຈາກທານຫຼາຍເກີນໄປ
ຈຶ່ງຊົງພາພຣະໂອຣົດແລະພຣະຊາຍາ
ໄປປະທັບຢູ່ທີ່ເຂົາວົງກົດ

[໑໔໕໐] ພາມຊູຊົກນັ້ນເປັນຜູ້ມີຄວາມຕິດໃຈໃນກາມ
ຖືກນາງພາມມະນິອະມິດຕະຕາຕັກເຕືອນ
ຈຶ່ງໄດ້ສະເຫວີຍທຸກຫຼວງຫຼາຍໃນປ່າທີ່ມີສັດຮ້າຍສາລະວົນ
ເປັນບ່ອນອາໄສຢູ່ຂອງແຮດແລະເສືອເຫຼືອງ

[໑໔໕໑] ລາວຖືໄມ້ການເທົ້າສີຄືໜ່ອຍໝາກຕູມ ເຄື່ອງບູຊາໄຟ ແລະເຕົ້ານໍ້າ
ເຂົ້າໄປສູ່ປ່າໃຫຍ່ ໃນບ່ອນທີ່ຈະໄດ້ຮູ້ຂ່າວ
ພຣະເວດສັນດອນຜູ້ປະທານສິ່ງທີ່ໜ້າຕ້ອງການ

[໑໔໕໒] ເມື່ອລາວເຂົ້າໄປສູ່ປ່າໃຫຍ່ ຖືກຝູງໝາຫຸ້ມລ້ອມກັດ
ລາວຮ້ອງສຽງຫຼົງ ຍ່າງຜິດທາງຖອຍຫ່າງອອກໄປຈາກທາງ

[໑໔໕໓] ລຳດັບນັ້ນ ພາມນັ້ນຜູ້ໂລບໃນໂພຄະ ບໍ່ສັງລວມ
ຍ່າງຜິດທາງທີ່ຈະໄປສູ່ເຂົາວົງກົດ ໄດ້ກ່າວຄາຖາເຫຼົ່ານີ້ວ່າ

[໑໔໕໔] ໃຜນໍຈະເພິ່ງບອກພຣະຣາດຊະບຸດ
ພຣະນາມວ່າເວດສັນດອນຜູ້ປະເສີດສຸດ
ຊົງຊະນະຄວາມຂີ້ຖີ່ທີ່ໃຜ ໆ ໃຫ້ປຣາໄຊບໍ່ໄດ້
ປະທານຄວາມປອດໄພໃນເວລາມີໄພແກ່ເຮົາ

[໑໔໕໕] ພຣະອົງຊົງເປັນບ່ອນເພິ່ງຂອງພວກຍາຈົກ
ຄືທໍຣະນີເປັນບ່ອນເພິ່ງຂອງສັດທັງຫຼາຍ
ໃຜນໍຈະເພິ່ງບອກພຣະເວດສັນດອນມະຫາຣາດຜູ້ປຽບດັ່ງທໍຣະນີແກ່ເຮົາໄດ້

[໑໔໕໖] ພຣະອົງຊົງເປັນທີ່ເຂົ້າເຝົ້າຂອງພວກຍາຈົກ
ຄືສາຄອນເປັນທີ່ໄຫຼລວມແຫ່ງແມ່ນໍ້າທັງຫຼາຍ
ໃຜນໍຈະເພິ່ງບອກພຣະເວດສັນດອນມະຫາຣາດຜູ້ປຽບດັ່ງທະເລແກ່ເຮົາໄດ້

[໑໔໕໗] ໃຜຈະເພິ່ງບອກພຣະເວດສັນດອນມະຫາຣາດ
ຜູ້ປຽບຄືແມ່ນໍ້າມີທ່າສວຍງາມ ສະອາດ

ມີນ້ຳເຢືອກເຢັນເປັນທີ່ອອນຊອນໃຈ ເດຍລະດາດໄປດ້ວຍດອກບົວຂາວ
ສະພັ່ງໄປດ້ວຍເກສອນດອກບົວແກ່ເຮົາໄດ້

[໑໘໕໗] ໃຜນໍຈະເພິ່ງບອກພຣະເວດສັນດອນມະຫາຣາດ
ຜູ້ປຽບຄືຕົ້ນໂພທີ່ເກີດຢູ່ແຄມທາງ
ມີຮົ່ມເງົາເຢັນເປັນທີ່ໜ້າອອນຊອນໃຈ ເປັນທີ່ພຳນັກອາໄສຂອງຄົນເດີນທາງ
ຜູ້ອ່ອນແຮງອິດເມື່ອຍມາໃນເວລາຮ້ອນແກ່ເຮົາໄດ້

[໑໘໕໘] ໃຜນໍຈະເພິ່ງບອກພຣະເວດສັນດອນມະຫາຣາດ
ຜູ້ປຽບຄືຕົ້ນໄຮທີ່ເກີດຢູ່ແຄມທາງ
ມີຮົ່ມເງົາເຢືອກເຢັນເປັນທີ່ໜ້າອອນຊອນໃຈ
ເປັນທີ່ພຳນັກອາໄສຂອງຄົນເດີນທາງ
ຜູ້ອ່ອນແຮງອິດເມື່ອຍມາໃນເວລາຮ້ອນແກ່ເຮົາໄດ້

[໑໘໙໐] ໃຜນໍຈະເພິ່ງບອກພຣະເວດສັນດອນມະຫາຣາດ
ຜູ້ປຽບຄືຕົ້ນໝາກມ່ວງທີ່ເກີດຢູ່ແຄມທາງ
ທີ່ມີຮົ່ມເງົາເຢືອກເຢັນເປັນທີ່ໜ້າອອນຊອນໃຈ
ເປັນທີ່ພຳນັກອາໄສຂອງຄົນເດີນທາງ
ຜູ້ອ່ອນແຮງອິດເມື່ອຍມາໃນເວລາຮ້ອນແກ່ເຮົາໄດ້

[໑໘໙໑] ໃຜນໍຈະເພິ່ງບອກພຣະເວດສັນດອນມະຫາຣາດ
ຜູ້ປຽບຄືຕົ້ນສາລະທີ່ມີຮົ່ມເງົາເຢືອກເຢັນເປັນທີ່ໜ້າອອນຊອນໃຈ
ເປັນທີ່ພຳນັກອາໄສຂອງຄົນເດີນທາງ
ຜູ້ອ່ອນແຮງອິດເມື່ອຍມາໃນເວລາຮ້ອນແກ່ເຮົາໄດ້

[໑໘໙໒] ໃຜນໍຈະເພິ່ງບອກພຣະເວດສັນດອນມະຫາຣາດ
ຜູ້ປຽບຄືຕົ້ນໄມ້ໃຫຍ່ທີ່ເກີດຢູ່ແຄມທາງ ມີຮົ່ມເງົາເຢືອກເຢັນ
ເປັນທີ່ໜ້າອອນຊອນໃຈ ເປັນທີ່ພຳນັກອາໄສຂອງຄົນເດີນທາງ
ຜູ້ອ່ອນແຮງອິດເມື່ອຍມາໃນເວລາຮ້ອນແກ່ເຮົາໄດ້

[໑໘໙໓] ກໍເມື່ອເຮົາເຂົ້າໄປໃນປ່າໃຫຍ່ ເພີ້ຮ່ຳໄຮຢູ່ແນວນີ້
ຜູ້ໃດເພິ່ງບອກວ່າ ເຮົາຮູ້ຈັກ
ຜູ້ນັ້ນຈະເພິ່ງທຳຄວາມເພີດເພີນໃຫ້ເກີດແກ່ເຮົາໄດ້

[໑໙໖໔] ກໍເມື່ອເຮົາເຂົ້າໄປໃນປ່າໃຫຍ່ ເພີ່ຮ່ຳໄຮຢູ່ແນວນີ້
ຜູ້ໃດເພິ່ງບອກສະຖານທີ່ປະທັບຢູ່
ຂອງພຣະເວດສັນດອນໄດ້ວ່າ ເຮົາຮູ້ຈັກ
ຜູ້ນັ້ນເພິ່ງປະສົບບຸນບໍ່ແມ່ນໜ້ອຍດ້ວຍຄຳຄຳດຽວນັ້ນ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໑໙໖໕] ເຈຕະບຸດພານປ່າໄດ້ຕອບພານຊູຊົກວ່າ
ພາມ ພຣະເວດສັນດອນຜູ້ເປັນກະສັດຖືກພວກທ່ານລົບກວນ
ຍ້ອນຊົງບໍລິຈາກທານຫຼາຍເກີນໄປ ຈຶ່ງຖືກຂັບໄລ່ອອກຈາກແຄວ້ນ
ຂອງພຣະອົງໄປປະທັບຢູ່ທີ່ເຂົາວົງກົດ

[໑໙໖໖] ພາມ ພຣະເວດສັນດອນຜູ້ເປັນກະສັດຖືກພວກທ່ານລົບກວນ
ຍ້ອນຊົງບໍລິຈາກທານຫຼາຍເກີນໄປ ຈຶ່ງຊົງພາພຣະໂອຣົດ
ແລະພຣະຊາຍາໄປປະທັບຢູ່ທີ່ເຂົາວົງກົດ

[໑໙໖໗] ທ່ານເປັນຄົນໂງ່ຈ້າ ເຮັດສິ່ງທີ່ບໍ່ໜ້າເຮັດ
ຈາກແຄວ້ນມາປ່າໃຫຍ່ ທ່ຽວສະແຫວງຫາພຣະຣາດຊະບຸດ
ຄືນົກຍາງທ່ຽວເສາະຫາປາໃນນ້ຳ

[໑໙໖໘] ພາມ ໃນບ່ອນນີ້ ເຮົາຈັກບໍ່ໃຫ້ທ່ານມີຊີວິດຢູ່ໄດ້
ລູກສອນທີ່ເຮົາຍິງນີ້ແລຈັກດູດກິນໂລຫິດຂອງທ່ານ

[໑໙໖໙] ພາມ ເຮົາຈະຕັດຫົວຂອງທ່ານ
ຜ່າຫົວໃຈພ້ອມດ້ວຍໄສ້ພຸງ ບູຊາຍັນຊີ່ປັນຖະສະກຸນະ[໑]
ພ້ອມດ້ວຍຊີ້ນຂອງທ່ານ

[໑໙໗໐] ພາມ ເຮົາຈະປາດເຖືອເອົາຫົວໃຈຂອງທ່ານ
ພ້ອມດ້ວຍຊີ້ນ ມັນຊຸ້ນ ແລະມັນສະໝອງຂອງທ່ານ
ຍົກຂຶ້ນເປັນເຄື່ອງບວງສວງ

[໑໙໗໑] ພາມ ຂໍ້ນັ້ນຈັກເປັນຍັນທີ່ເຮົາບູຊາດີແລ້ວ
ບວງສວງດີແລ້ວ ດ້ວຍຊີ້ນຂອງທ່ານ
ແລະທ່ານຈັກນຳພຣະຊາຍາແລະພຣະໂອຣົດທັງຫຼາຍ
ຂອງພຣະຣາດຊະບຸດໄປບໍ່ໄດ້

(ຊູຊົກຕົວະວ່າ)

[໑໙໗໔] ເຈຕະບຸດ ທ່ານຈົ່ງຟັງເຮົາກ່ອນ ພາມຜູ້ເປັນທູດບໍ່ຄວນຖືກຂ້າ
ຍ້ອນແນວນັ້ນ ເຂົາຈຶ່ງບໍ່ຂ້າທູດ ນີ້ເປັນທຳອັນເກົ່າແກ່

[໑໙໗໕] ຊາວນະຄອນສີພີທຸກຄົນຕົກລົງຍິນຍອມແລ້ວ
ພຣະບິດາກໍຊົງພຣະປະສົງຈະພົບພຣະຣາດຊະບຸດນັ້ນ
ແລະພຣະມານດາຂອງພຣະຣາດຊະບຸດນັ້ນກໍຊົງທຸບພົນລະພາບ
ຄົງບໍ່ດົນປານໃດ ພຣະເນດທັງ ໔ ຂອງພຣະອົງກໍຈັກຊຸ່ນມົວ
[໑໙໗໖] ເຈຕະບຸດ ທ່ານຈົ່ງຟັງເຮົາກ່ອນ
ເຮົາເປັນທູດທີ່ພວກຊາວນະຄອນສີພີນັ້ນສົ່ງມາ
ເຮົາຈັກທູນເຊີນພຣະຣາດຊະບຸດສະເດັດກັບ
ຖ້າທ່ານຮູ້ ຂໍໄດ້ບອກທາງແກ່ເຮົາເທີ້ນ
(ພານເຈຕະບຸດກ່າວວ່າ)
ທ່ານເປັນທູດທີ່ພໍໃຈຂອງພຣະເວດສັນດອນຜູ້ເປັນທີ່ຮັກຂອງເຮົາ
ເຮົາຈະໃຫ້ລາງວັນແກ່ທ່ານ

[໑໙໗໘] ພາມ ເຮົາຈະໃຫ້ນ້ຳເຕົ້າ ແລະຂາເນື້ອຢ່າງດີແກ່ທ່ານ
ແລະຈະບອກສະຖານທີ່ປະທັບຢູ່ຂອງພຣະເວດສັນດອນ
ຜູ້ໃຫ້ສິ່ງທີ່ໜ້າຕ້ອງການແກ່ທ່ານ

**ກັນຊູຊົກ ຈົບ**

# ຈູລະວະນະວັນນະນາ
# ພັນນາກັນຈຸນລະພົນ

(ພານເຈຕະບຸດກ່າວວ່າ)

[໑໙໗໙] ມະຫາພາມ ນັ້ນພູຄັນທະມາດສີລາລ້ວນ
ເຊິ່ງເປັນທີ່ປະທັບຢູ່ຂອງພຣະເວດສັນດອນ
ພ້ອມດ້ວຍພຣະໂອຣົດທັງຫຼາຍແລະພຣະຊາຍາ
[໑໙໘໐] ພຣະອົງຊົງເພດນັກບວດອັນປະເສີດ
ຊົງຂໍເກາະໝາກໄມ້ ເຄື່ອງບູຊາໄຟແລະຊະດາ
ຊົງນຸ່ງຫົ່ມໜັງເສືອ ບັນທົມເໜືອແຜ່ນດິນແລະຊົງບູຊາໄຟຢູ່

[໑໙໗໗]　ທິວໄມ້ຂຽວນັ້ນມີໝາກຫຼາກຫຼາຍ
ແລະພູຜາສູງຍອດສຽດກ້ອນເພື້ອຂຽວຊະອຸ່ມ
ນັ້ນແລເປັນພູທີ່ເຕັມໄປດ້ວຍດອກອັນຊັນ

[໑໙໗໙]　ນັ້ນໝູ່ໄມ້ຕະແບກ ທູກວາງ ໄມ້ແຄນ ໄມ້ຮັງ
ໄມ້ໝາກຄໍ້ ແລະເຄືອໄມ້ ອ່ອນໄຫວໄປຕາມລົມ
ຄືມານົບດື່ມສຸຣາເທື່ອດຽວກໍຊວນເຊໄປມາຢູ່

[໑໙໘໐]　ທ່ານຈະໄດ້ຍິນສຽງນົກນານາຊະນິດ
ທີ່ຈັບຢູ່ເທິງງ່າໄມ້ຄືທິບພະຍະສັງຄີຕະ ຄື
ເຫຼົ່ານົກໂພຣະດົກ ນົກກາເວົາ ສົ່ງສຽງຂັບຄູກູ່ຮ້ອງ
ບິນຂວັກໄຂວ່ໄປມາຈາກຕົ້ນໜຶ່ງໄປສູ່ອີກຕົ້ນໜຶ່ງ

[໑໙໘໑]　ທັງໝູ່ໄມ້ທີ່ຖືກລົມພັດສະບັດງ່າໃບໄຫວພື້ວສຽດສີກັນໄປມາ
ຄືຈະຮຽກຄົນຜູ້ກໍາລັງຍ່າງໄປໃຫ້ຫວນກັບມາ
ແລະຄືຈະເຊີນຊວນເຫຼົ່າຊົນຜູ້ກໍາລັງຍ່າງຜ່ານມາ
ໃຫ້ຊົມຊື່ນອອນຊອນພັກຜ່ອນ ຢູ່ສະຖານທີ່ທີ່ພຣະເວດສັນດອນ
ພ້ອມດ້ວຍພຣະໂອຣົດທັງຫຼາຍປະທັບຢູ່

[໑໙໘໔]　ພຣະອົງຊົງເພດເປັນບັນພະຊິດອັນປະເສີດ
ຊົງຂໍເກາະໝາກໄມ້ ເຄື່ອງບູຊາໄຟແລະຊະດາ
ຊົງນຸ່ງຫົ່ມໜັງເສືອ ບັນທົມເໜືອແຜ່ນດິນແລະຊົງບູຊາໄຟຢູ່

[໑໙໘໓]　ໃນບໍລິເວນອາສົມສະຖານນັ້ນມີໄມ້ໝາກມ່ວງ
ໝາກຂວິດ ໝາກມີ້ ໄມ້ຮັງ ຊົມພູ່ ສົ້ມມໍພິເພກ
ສົ້ມມໍລາດ ໝາກຂາມປ້ອມ ໂພ ແລະໝາກກະທັນ

[໑໙໘໔]　ທັງໝາກພັບຄໍາ ໄຮ ໝາກຂວິດ ໝາກຊາງຫວານ
ແລະໝາກເດື່ອ ມີໜ່ວຍສຸກແດງປັ່ງຢູ່ໃນບ່ອນຕໍ່າ

[໑໙໘໕]　ໝູ່ໄມ້ທີ່ແນມເຫັນຢູ່ຕີນພູປາເຣວະຕະ ໝາກອະງຸ່ນ
ໝາກຈັນມີຣົດຫວານຄືນໍ້າເຜີ້ງ ຮັງເຜີ້ງທີ່ປາສະຈາກໂຕເຜີ້ງ
ຄົນເອື້ອມມືນໍາມາບໍຣິໂພກໄດ້ເອງໃນອາສົມນັ້ນ

[໑໙໘໖]　ຕົ້ນໝາກມ່ວງບາງຕົ້ນກໍແຕກດອກອອກຊໍ່ແຍ້ມບານ

ບາງຕົ້ນມີດອກແລະໃບຣ່ວງຫຼົ່ນ ປົ່ງໝາກດາດດື່ນ
ບາງໜ່ວຍດິບ ບາງໜ່ວຍສຸກ ໝາກມ່ວງທັງດິບແລະສຸກ
ມີສີຄ້າຍຫຼັງກົບ

[໑໙໗໗] ອັນໜຶ່ງ ໃນບໍລິເວນອາສົມນັ້ນ
ຄົນທີ່ຢືນຢູ່ໃຕ້ຕົ້ນໝາກມ່ວງເຫຼົ່ານັ້ນກໍເກັບເອົາຜົນໝາກມ່ວງສຸກໄດ້
ໝາກມ່ວງທັງດິບແລະສຸກມີສີສວຍງາມ ກິ່ນຫອມ ແລະມີຣົດແຊບ

[໑໙໗໘] ສິ່ງທີ່ວ່າມາທັງນີ້ເປັນທີ່ໜ້າອັດສະຈັນແກ່ຂ້າພະເຈົ້າເປັນຢ່າງຍິ່ງ
ຈົນວ່າຂ້າພະເຈົ້າອອກອຸທານວ່າ ອື!
ທີ່ປະທັບຢູ່ຂອງພຣະເວດສັນດອນນັ້ນ
ຄືກັບບ່ອນຢູ່ຂອງພວກເທວະດາ
ງົດງາມປຽບດ້ວຍພຣະອຸທະຍານນັນທະວັນ

[໑໙໗໙] ມີຕົ້ນຕານ ຕົ້ນໝາກພ້າວ ແລະຕົ້ນອິນທະຜາລຳຢູ່ໃນປ່າໃຫຍ່
ມີດອກສີຫຼາກຫຼາຍຄືພວງດອກໄມ້
ທີ່ເຂົາຮ້ອຍໄວ້ເທິງຕົ້ນໄມ້ທີ່ມີດອກບານເດຍລະດາດ
ຕົ້ນໄມ້ເຫຼົ່ານັ້ນ ຍ່ອມຜາກົດດັ່ງຍອດທຸງໄຊ
ຄືດວງດາວປະດັບຟ້າ

[໑໙໘໐] ໃນບໍລິເວນອາສົມນັ້ນມີໝູ່ໄມ້ນານາພັນ
ຄື ໄມ້ໂມກມັນ ໂກດສະຄ້ານ ແຄຝອຍ ບຸນນາກ
ບຸນນາກເຂົາ ແລະໄມ້ສົ້ມກົບ ມີດອກບານເດຍລະດາດ

[໑໙໘໑] ອັນໜຶ່ງ ໃນບໍລິເວນອາສົມນັ້ນມີຕົ້ນດອກຄູນ
ໝາກເກືອ ເກດສະໜາ ຮັກດຳ ໄຮໃຫຍ່ ຫອນໄກ່
ແລະປະດູ່ ຫຼວງຫຼາຍ ມີດອກບານເດຍລະດາດ

[໑໙໘໔] ໃນບໍລິເວນອາສົມນັ້ນມີໄມ້ໂມກຫຼວງ
ໄມ້ແປກ ໄມ້ກະທຸ່ມ ໄມ້ຊໍ່ ໄມ້ຕະແບກ ແລະໄມ້ຮັງ
ລ້ວນມີດອກບານເດຍລະດາດ ເປັນພຸ່ມຄືກອງເພີງ

[໑໙໘໓] ໃນບ່ອນບໍ່ໄກຈາກອາສົມນັ້ນ
ມີສະໂບກຂະຣະນີ ຢູ່ພູມິພາກອັນໜ້າອອນຊອນ

ເດຍລະດາດໄປດ້ວຍດອກປະທຸມແລະດອກອຸບົນ
ຄືສະໂບກຂະຣະນີທີ່ຢູ່ໃນອຸທະຍານນັນທະວັນຂອງເຫຼົ່າເທວະດາ

[໑໙໔] ອັນໜຶ່ງຢູ່ໃກ້ສະໂບກຂະຣະນີນັ້ນ
ມີຝູງນົກກາເວົາເມົາຣົດດອກໄມ້ ສົ່ງສຽງຮ້ອງມ່ວນຈັບໃຈ
ເຮັດໃຫ້ປ່າໃຫຍ່ດັ່ງອຶກກະທຶກກຶກກ້ອງ
ເມື່ອໝູ່ໄມ້ແຕກດອກອອກຊໍ່ເບັ່ງບານຕາມລະດູ

[໑໙໕] ຣົດຫວານປານນ້ຳເຜີ້ງຍ້ອຍຕົກລົງຈາກເກສອນດອກໄມ້
ມາຕິດຄ້າງຢູ່ເທິງໃບບົວ ຈຶ່ງຊື່ວ່ານ້ຳເຜີ້ງໃບບົວ
ອັນໜຶ່ງ ອາສົມນັ້ນ ເມື່ອລົມທິດໃຕ້ແລະທິດຕາເວັນຕົກພັດມາ
ກໍດາດາດໄປດ້ວຍລະອອງເກສອນດອກບົວຫຼວງ

[໑໙໖] ໃນສະໂບກຂະຣະນີນັ້ນມີກະຈັບຂະໜາດໃຫຍ່
ທັງເຂົ້າສາລີອ່ອນແດ່ ແກ່ແດ່
ເຫຼົ່ານັ້ນນັ້ນແລລົ້ມລະເນລະນາດຢູ່ເທິງພື້ນດິນ
ແລະໃນສະໂບກຂະຣະນີນັ້ນ ນ້ຳໃສສະອາດແນມເຫັນຝູງປາ
ເຕົ່າ ແລະປູເປັນຈຳນວນຫຼາຍທີ່ກຳລັງລອຍໄປມາເປັນກຸ່ມ
ຣົດທີ່ໄຫຼອອກຈາກເຫງົ້າບົວແລະຈາກສາຍບົວ
ມີຣົດຫວານຄືນ້ຳເຜີ້ງ ນົມສົດ ແລະເນີຍໃສທີ່ເຈືອປົນດ້ວຍນ້ຳນົມ

[໑໙໗] ໄມ້ປ່ານັ້ນມີກິ່ນຕ່າງ ໆ ມີລົມໂຊຍພັດມາ
ຫອມຟຸ້ງກະຈາຍອົບອວນຄືຈະຍັງຊົນຜູ້ມາເຖິງແລ້ວ
ໃຫ້ບັນເທີງເບີກບານດ້ວຍກິ່ນແລະພວງດອກໄມ້
ໝູ່ພະມອນກໍໂຜບິນແຊ່ວສົ່ງສຽງວີ່ໆວົນຮອບ
ຍ້ອນກິ່ນຫອມຂອງດອກໄມ້

[໑໙໘] ອັນໜຶ່ງ ທີ່ໃກ້ອາສົມນີ້
ມີຝູງນົກຈຳນວນຫຼາຍທີ່ມີສີຕ່າງ ໆ ກັນ
ຕ່າງກໍບັນເທີງໃຈຢູ່ກັບຄູ່ຂອງຕົນ
ກູ່ຮ້ອງປະຊັນສຽງກັນແລະກັນ

[໑໙໙] ຍັງມີຝູງນົກອີກ ໔ ຝູງ[୨] ອາໄສຢູ່ໃກ້ສະໂບກຂະຣະນີ
ຄື ຝູງນົກນັນທິກາ ຝູງນົກຊີວະປຸດຕາ

ຝູງນົກປຸດຕາປີຍາຈະໂນ ຝູງນົກປີຍະປຸດຕາປີຍານັນທາ

[໘໐໐໐] ດອກໄມ້ທັງຫຼາຍ ຕັ້ງລຽງລາຍກັນຢູ່
ຄືພວງມາໄລທີ່ເຂົາຮ້ອຍໄວ້
ໝູ່ໄມ້ເຫຼົ່ານັ້ນຍ່ອມຜາກົດດັ່ງຍອດທຸງໄຊ ມີດອກສີຕ່າງ ໆ ກັນ
ດັ່ງນາຍຊ່າງຜູ້ສະຫຼາດໄດ້ເກັບມາລຽງຮ້ອຍໄວ້ເປັນຢ່າງດີ
ເຊິ່ງເປັນສະຖານທີ່ທີ່ພຣະຣາຊາເວດສັນດອນ
ພ້ອມດ້ວຍພຣະໂອຣົດທັງຫຼາຍປະທັບຢູ່

[໘໐໐໑] ພຣະອົງຊົງເພດເປັນນັກບວດອັນປະເສີດ
ຊົງຂໍເກາະໝາກໄມ້ ເຄື່ອງບູຊາໄຟແລະຊະດາ
ຊົງນຸ່ງຫົ່ມໜັງເສືອ ບັນທົມເໜືອພື້ນດິນແລະຊົງບູຊາໄຟຢູ່

(ຊູຊົກກ່າວວ່າ)

[໘໐໐໘] ກໍເຂົ້າສັດຕຸຜົງທີ່ຜະສົມດ້ວຍນ້ຳເຜິ້ງ
ແລະເຂົ້າສັດຕຸກ້ອນທີ່ມີຣົດຫວານແຊບຂອງເຮົານີ້
ທີ່ນາງອະມິດຕະຕາໄດ້ຈັດແຈ່ງໃຫ້ ເຮົາຈະແບ່ງໃຫ້ແກ່ເຈົ້າ

(ພານເຈຕະບຸດກ່າວວ່າ)

[໘໐໐໓] ທ່ານພາມ ຂໍຈົ່ງເອົາໄວ້ເປັນສະບຽງທາງຂອງທ່ານເທີ້ນ
ຂ້າພະເຈົ້າບໍ່ປາຖະໜາສະບຽງທາງ ທ່ານພາມ
ຂໍທ່ານຈົ່ງຮັບເອົາຄືນໄປຈາກບ່ອນນີ້ເທີ້ນ ຂໍທ່ານຈົ່ງໄປຕາມສະບາຍເທີ້ນ

[໘໐໐໔] ທາງນີ້ເປັນທາງຍ່າງໄປໄດ້ຄົນດຽວ ຊື່ໄປສູ່ອາສົມ
ແມ່ນອັດຈຸຕະລືສີຜູ້ຢູ່ໃນອາສົມນັ້ນເປັນຜູ້ມີຂີ້ແຂ້ວເຂີ
ມີຫົວເປື້ອນດ້ວຍທຸລີ ຊົງເພດເປັນນັກບວດອັນປະເສີດ
ຖືຂໍເກາະໝາກໄມ້ ເຄື່ອງບູຊາໄຟແລະຊະດາຢູ່

[໘໐໐໕] ເປັນຜູ້ນຸ່ງຫົ່ມໜັງເສືອ ນອນເໜືອພື້ນດິນ ແລະບູຊາໄຟ
ເຊີນທ່ານໄປຖາມລືສີນັ້ນເບິ່ງເທີ້ນ ລືສີຈັກບອກທາງໃຫ້ແກ່ທ່ານ

[໘໐໐໖] ຊູຊົກຜູ້ເປັນເຜົ່າພັນແຫ່ງພາມ
ເມື່ອໄດ້ຟັງຄຳແນະນຳນີ້ແລ້ວກະທຳປະທັກຂີນ

ມີໃຈເບີກບານ ອຳລາພານເຈຕະບຸດ
ແລ້ວຫຼີກໄປໃນທາງທີ່ອັດຈຸຕະລືສີຢູ່

**ພັນນາກັນຈຸນລະພົນ ຈົບ**

## ມະຫາວະນະວັນນະນາ
## ພັນນາກັນມະຫາພົນ

[໔໐໐໗] ພາມຊູຊົກພາຣະທະວາຊະນັ້ນ
ເມື່ອຍ່າງໄປກໍໄດ້ພົບອັດຈຸຕະລືສີ ເມື່ອພົບແລ້ວ
ໄດ້ທັກທາຍກັບອັດຈຸຕະລືສີວ່າ

[໔໐໐໘] ພຣະຜູ້ເປັນເຈົ້າບໍ່ມີພະຍາດບຽດບຽນບໍ ສຸກສຳຣານດີບໍ
ລ້ຽງອັດຕະພາບດ້ວຍການສະແຫວງຫາມູນຜະລາຫານສະດວກບໍ
ມູນຜະລາຫານກໍມີຫຼາຍບໍ

[໔໐໐໙] ເຮືອດ ຍຸງ ແລະສັດເລືອຄານມີໜ້ອຍບໍ
ໃນປ່າທີ່ມີເນື້ອຮ້າຍສາລະວົນ ບໍ່ມີມາບຽດບຽນບໍ
(ອັດຈຸຕະລືສີກ່າວວ່າ)

[໔໐໑໐] ພາມ ເຮົາບໍ່ມີພະຍາດບຽດບຽນ ເຮົາສຸກສະບາຍດີ
ອັນໜຶ່ງ ເຮົາລ້ຽງອັດຕະພາບດ້ວຍການສະແຫວງຫາມູນຜະລາຫານສະດວກດີ
ທັງມູນຜະລາຫານກໍມີຫຼາຍ

[໔໐໑໑] ອັນໜຶ່ງ ເຮືອດ ຍຸງ ແລະສັດເລືອຄານກໍມີໜ້ອຍ
ໃນປ່າທີ່ມີເນື້ອຮ້າຍຢູ່ສາລະວົນ ກໍບໍ່ມີມາບຽດບຽນເຮົາເລີຍ

[໔໐໑໒] ຫຼາຍປີມາແລ້ວ ເຮົາມາຢູ່ອາສົມຂອງເຮົາ
ຍັງບໍ່ຮູ້ຈັກອາພາດທີ່ບໍ່ໜ້າອອນຊອນເຊິ່ງຈະເກີດຂຶ້ນ

[໔໐໑໓] ມະຫາພາມ ທ່ານມາດີແລ້ວ ບໍ່ໄດ້ມາຮ້າຍ
ທ່ານຜູ້ຈະເລີນ ຂໍເຊີນເຂົ້າໄປຂ້າງໃນ
ເຊີນລ້າງຕີນທັງ ໔ ຂອງທ່ານເທີ້ນ

[໔໐໑໔] ໝາກພັບ ໝາກຫາດ ໝາກຊາງ ໝາກເມົ່າ
ມີຣົດຫວານຄືນ້ຳເຜິ້ງ ເຊີນທ່ານເລືອກບໍຣິໂພກແຕ່ໜ່ອຍດີ ໆ ເທີ້ນ

[໔໐໑໕] ນ້ຳດື່ມເຢັນສະນິດທີ່ເຮົານຳມາຈາກຮ່ອມພູ
ມະຫາພາມ ຖ້າທ່ານຕ້ອງການ ກໍເຊີນດື່ມເທີ້ນ

(ຊູຊົກກ່າວວ່າ)

[໔໐໑໖] ສິ່ງໃດທີ່ພຣະຜູ້ເປັນເຈົ້າໃຫ້ແລ້ວ
ສິ່ງນັ້ນທັງໝົດເປັນອັນຂ້າພະເຈົ້າຮັບໄວ້ແລ້ວ
ບັນນາການພຣະຜູ້ເປັນເຈົ້າໄດ້ເຮັດໄວ້ທຸກຢ່າງແລ້ວ
ຂ້າພະເຈົ້າມາກໍເພື່ອຈະຢ້ຽມຢາມພຣະຣາຊາເວດສັນດອນ
ພຣະໂອຣົດຂອງພຣະເຈົ້ານະຄອນສີບໄຊ
ເຊິ່ງພັດພາກຈາກຊາວນະຄອນສີພີມາດົນນານ
ຖ້າພຣະຜູ້ເປັນເຈົ້າຮູ້ສະຖານທີ່ປະທັບ
ກໍໂຜດແຈ້ງແກ່ຂ້າພະເຈົ້າເທີ້ນ

(ອັດຈຸຕະລືສີກ່າວວ່າ)

[໔໐໑໗] ທ່ານຜູ້ຈະເລີນ ມາເພື່ອຕ້ອງການບຸນ
ເພື່ອຢ້ຽມຢາມພຣະເວດສັນດອນເຈົ້ານະຄອນສີພີກໍບໍ່ມີ
ເຮົາເຂົ້າໃຈວ່າທ່ານປາຖະໜາ(ຈະມາຂໍ)ພຣະຊາຍາ
ຜູ້ເຄົາລົບນົບນອບພຣະຣາຊາໄປເປັນພັນລະຍາ
ຫຼືບໍ່ດັ່ງນັ້ນ ທ່ານກໍປາຖະໜາ(ຈະມາຂໍ)
ພຣະກັນຫາຊິນາໄປເປັນທາສີແລະພຣະຊາລີໄປເປັນຂ້າທາດ

[໔໐໑໘] ຫຼືບໍ່ ກໍມາເພື່ອຈະນຳທັງພຣະມານດາ
ແລະພຣະໂອຣົດທັງ ໓ ພຣະອົງໄປຈາກປ່າ
ທ່ານພາມ ໂພຄະທັງຫຼາຍ ຊັບສິນ
ແລະເຂົ້າເປືອກຂອງພຣະເວດສັນດອນນັ້ນບໍ່ມີ

(ຊູຊົກກ່າວວ່າ)

[໔໐໑໙] ຂ້າພະເຈົ້າເປັນຜູ້ທີ່ທ່ານຍັງບໍ່ສົມຄວນຈະໂກດເຄືອງ
ຍ້ອນຂ້າພະເຈົ້າບໍ່ໄດ້ມາເພື່ອຂໍ
ການພົບເຫັນພຣະອະຣິຍະເປັນການດີ
ການຢູ່ຮ່ວມກັບພຣະອະຣິຍະເປັນສຸກທຸກເມື່ອ

[໔໐໔໐] ຂ້າພະເຈົ້າບໍ່ເຄີຍໄດ້ພົບພຣະເວດສັນດອນເຈົ້ານະຄອນສີພີ
ຜູ້ຊົງພັດພາກຈາກຊາວນະຄອນສີພີມາດົນ
ຂ້າພະເຈົ້າມາເພື່ອຢ້ຽມຢາມພຣະອົງ
ຖ້າພຣະຜູ້ເປັນເຈົ້າຮູ້ຈັກສະຖານທີ່ປະທັບ
ໂຜດບອກແກ່ຂ້າພະເຈົ້າດ້ວຍເທີ້ນ

(ອັດຈຸຕະລືສີກ່າວວ່າ)

[໔໐໔໑] ມະຫາພາມ ນັ້ນພູຄັນທະມາດສີລາລ້ວນ
ເຊິ່ງເປັນທີ່ປະທັບຢູ່ຂອງພຣະເວດສັນດອນ
ພ້ອມດ້ວຍພຣະໂອຣົດທັງຫຼາຍແລະພຣະຊາຍາ

[໔໐໔໒] ພຣະອົງຊົງເພດນັກບວດອັນປະເສີດ
ຊົງຂໍເກາະໝາກໄມ້ ເຄື່ອງບູຊາໄຟແລະຊະດາ
ນຸ່ງຫົ່ມໜັງເສືອ ບັນທົມເໜືອພື້ນດິນແລະຊົງບູຊາໄຟຢູ່

[໔໐໔໓] ທິວໄມ້ຂຽວນັ້ນມີໝາກຫຼາກຫຼາຍ
ແລະພູຜາສູງຍອດສຽດກ້ອນເພື້ອຂຽວຊະອຸ່ມ
ນັ້ນແລເປັນພູທີ່ເຕັມໄປດ້ວຍດອກອັນຊັ້ນ

[໔໐໔໔] ນັ້ນໝູ່ໄມ້ຕະແບກ ຫູກວາງ ໄມ້ແຄນ
ໄມ້ຮັງ ໄມ້ຄໍ້ ແລະໄມ້ຍາງພາຍ ອ່ອນໄຫວໄປຕາມລົມ
ຄືມານົບດື່ມສຸຣາເທື່ອດຽວກໍຊວນເຊໄປມາຢູ່

[໔໐໔໕] ທ່ານຈະໄດ້ຍິນສຽງນົກນານາຊະນິດ
ທີ່ຈັບຢູ່ເທິງງ່າໄມ້ຄືດັ່ງສຽງທິບພະຍະສັງຄີຕະ
ຄື ນົກໂພຣະດົກ ນົກກາເວົາ ສົ່ງສຽງຂັບຄູກູ່ຮ້ອງ
ບິນຂວັກໄຂວ່ໄປມາຈາກຕົ້ນໜຶ່ງໄປສູ່ອີກຕົ້ນໜຶ່ງ

[໔໐໔໖] ທັງໝູ່ໄມ້ທີ່ຖືກລົມພັດສະບັດງ່າໃບໄຫວພິ້ວສຽດສີກັນໄປມາ
ຄືຈະຮຽກຄົນຜູ້ກຳລັງຍ່າງກາຍໄປໃຫ້ຫວນກັບມາ
ແລະຄືຈະເຊີນຊວນເຫຼົ່າຊົນຜູ້ກຳລັງຍ່າງຜ່ານມາ
ໃຫ້ຊົມຊື່ນອອນຊອນພັກຜ່ອນ ຢູ່ສະຖານທີ່ທີ່ພຣະຣາຊາເວດສັນດອນ
ພ້ອມດ້ວຍພຣະໂອຣົດທັງຫຼາຍແລະພຣະຊາຍາປະທັບຢູ່

[໔໐໔໗] ພຣະອົງຊົງເພດນັກບວດອັນປະເສີດ
ຊົງຂໍເກາະໝາກໄມ້ ເຄື່ອງບູຊາໄຟແລະຊະດາ
ນຸ່ງຫົ່ມໜັງເສືອ ບັນທົມເໜືອພື້ນດິນແລະຊົງບູຊາໄຟຢູ່

[໔໐໔໘] ທີ່ພູມີພາກອັນໜ້າອອນຊອນໃຈ ມີດອກກຸ່ມຮ່ວງຫຼົ່ນກະຈາຍທົ່ວ
ພື້ນແຜ່ນດິນຂຽວຊະອຸ່ມໄປດ້ວຍຫຍ້າແພກ
ຢູ່ບ່ອນນັ້ນ ບໍ່ມີຜົງທຸລີຟຸ້ງຂຶ້ນເລີຍ

[໔໐໔໙] ຫຍ້ານັ້ນສີຂຽວຄ້າຍສ້ອຍຄໍນົກຍູງ
ອ່ອນນຸ້ມຄືສຳຜັດສຳລີ
ຫຍ້າຮາຍຮອບຍາວບໍ່ເກີນ ໔ ນິ້ວ

[໔໐໕໐] ຕົ້ນໝາກມ່ວງ ຊົມພູ່ ໝາກຂວິດ
ແລະໝາກເດື່ອມີໜ່ວຍສຸກຢູ່ໃນບ່ອນຕ່ຳ ໆ
ປ່ານັ້ນເປັນສະຖານທີ່ເພີ່ມຄວາມອອນຊອນຫຼາຍຂຶ້ນ
ຍ້ອນມີໝູ່ໄມ້ທີ່ໃຊ້ບໍຣິໂພກໄດ້

[໔໐໕໑] ມີນ້ຳໃສສະອາດກິ່ນຫອມ ສີຄືແກ້ວໄພທູນ
ເປັນບ່ອນຢູ່ອາໄສຂອງຝູງປາຫຼັ່ງໄຫຼໄປໃນປ່ານັ້ນ

[໔໐໕໒] ພູມີພາກເປັນທີ່ໜ້າອອນຊອນໃຈ ບໍ່ຫ່າງໄກຈາກອາສົມນັ້ນ
ມີສະໂບກຂະຣະນີເດຍລະດາດໄປດ້ວຍດອກປະທຸມແລະດອກອຸບົນ
ຄືມີໃນອຸທະຍານນັນທະວັນຂອງພວກເທວະດາ

[໔໐໕໓] ພາມ ໃນສະໂບກຂະຣະນີນັ້ນ
ມີອຸບົນຢູ່ ໓ ເຫຼົ່າ ຄື ອຸບົນຂຽວ ອຸບົນຂາວ
ແລະອຸບົນແດງ ງາມຕະການຕາຄະນະນາບໍ່ຖ້ວນ

[໔໐໕໔] ໃນສະນັ້ນມີດອກປະທຸມສີຂາວດັ່ງຜ້າໂຂມະພັດ
ສະນັ້ນຊື່ສະມຸຈະລິນ
ເດຍລະດາດໄປດ້ວຍອຸບົນຂາວ ຈິ່ງກົນນີ ແລະຜັກປີ່ງຍອດ

[໔໐໕໕] ອັນໜຶ່ງ ໃນສະນີ້ມີປະທຸມະຊາດບານເດຍລະດາດ
ຜາກົດດັ່ງຈະຫາບ່ອນສຸດບໍ່ໄດ້
ບ້າງກໍບານໃນລະດູຄິມຫັນ ບ້າງກໍບານໃນລະດູເຫມັນ
ຜາກົດຄືລອຍຢູ່ເທິງນ້ຳເຊິ່ງເລີກປະມານພຽງເຂົ່າ

[໔໐໓໒] ປະທຸມມະຊາດງາມຕະການຕາຊູດອກສະພັ່ງ
ສົ່ງກິ່ນອົບອວນ
ໝູ່ພະມອນກໍໂຜບິນແຊ່ວສຽງດັງວີ່ໆວົນຮອບ
ຍ້ອນກິ່ນຫອມຂອງດອກໄມ້

[໔໐໓໗] ພາມ ຢູ່ຮີມຮອບຂອບສະນີ້
ມີຕົ້ນໄມ້ຂຶ້ນຫຼວງຫຼາຍເຊັ່ນຕົ້ນທົ່ມ
ຕົ້ນແຄຝອຍ ແລະຕົ້ນທອງຫຼາງ ແຕກດອກອອກຊໍ່ບານເດຍລະດາດ

[໔໐໓໘] ຕົ້ນໝາກເກືອກາ ຜັກຮາກ ໄມ້ປາຣິຊາດ ກໍມີດອກບານເດຍລະດາດ
ຕົ້ນກາກະທິງມີຢູ່ທີ ໔ ຟາກຝັ່ງຂອງສະມຸຈະລິນ

[໔໐໓໙] ຕົ້ນສົ້ມກົບ ຕົ້ນແຄຂາວ ບົວບົກສົ່ງກິ່ນຟຸ້ງໄປ
ຕົ້ນຄົນທີສໍ ຕົ້ນຄົນທີ ຕົ້ນຂະເໜົາ ແລະຕົ້ນປະດູ່
ຂຶ້ນຢູ່ໃກ້ສະນັ້ນ ມີດອກບານເດຍລະດາດ

[໔໐໔໐] ຕົ້ນໝາກຄໍາບີໄກ່ ໄມ້ໝາກຊາງ ຕົ້ນແກ້ວ ຕົ້ນອີຮຸມ
ກາຣະເກດ ກັນນິກາ ແລະຊະບາ ແຕກດອກບານເດຍລະດາດ

[໔໐໔໑] ຕົ້ນຣົກຟ້າ ຕົ້ນອິນທະນິນ ຕົ້ນໝາກຕ້ອງ ແລະຕົ້ນດອກຈານ
ຕ່າງກໍແຕກດອກອອກຊໍ່ແລະຍອດແດງຣະເຣື່ອ

[໔໐໔໒] ໄມ້ກະບົກ ຕີນເປັດ ກ້ວຍ ຕົ້ນຄໍາຝອຍ ນົມແມວ
ຄົນທາ ດູ່ລາຍ ແລະສະລອດ ແຕກດອກບານເດຍລະດາດ

[໔໐໔໓] ຕົ້ນໝາກໄຟ ຕົ້ນງີ້ວ ຊ້າງນ້າວ ພຸດຂາວ ເກດສະໜາ
ໂກດຂະເໜົາ ແລະໂກດສໍ ແຕກດອກບານເດຍລະດາດ

[໔໐໔໔] ຢູ່ບໍລິເວນສະນັ້ນ ມີຕົ້ນໄມ້ທີ່ມີທັງອ່ອນແລະແກ່
ຕົ້ນບໍ່ຄົດງໍ ແຕກດອກແຍ້ມບານ
ຕັ້ງຢູ່ທັງ ໔ ຂ້າງອາສົມຮອບເຮືອນໄຟ

[໔໐໔໕] ອັນໜຶ່ງ ທີ່ຮີມຮອບຂອບສະນີ້ ມີພັນໄມ້ເກີດຂຶ້ນຫຼວງຫຼາຍ
ຄື ສີໄຄ ຖົ່ວຂຽວ ໝາກແປບ ສາຫຣ່າຍ ແລະຜັກພາຍ

[໔໐໔໖] ນໍ້າໃນສະນີ້ ຖືກລົມລໍາເພີຍພັດ

ເກີດເປັນຣະລອກຄື້ນກະທົບຝັ່ງ
ມີໝູ່ແມງໂຜບິນເຄົ້າເກສອນດອກໄມ້ທີ່ແຍ້ມບານ
ສີສຽດເທດ ຕົ້ນຕາວ ແລະຜັກປີ່ງຍອດມີຢູ່ຫຼາຍ

[໔໐໔໗] ພາມ ຕົ້ນໄມ້ທັງຫຼາຍເດຍລະດາດໄປດ້ວຍກ້ອຍໄມ້ຊະນິດຕ່າງ ໆ
ກິ່ນຂອງບຸບຜະຊາດເຫຼົ່ານັ້ນຫອມອົບອວນ
ຢູ່ໄດ້ເຖິງ ໗ ມື້ ບໍ່ຣະເຫຍຫາຍໄປ

[໔໐໔໘] ບຸບຜະຊາດທັງຫຼາຍເກີດຢູ່ລຽງລາຍ ໔ ຟາກຝັ່ງ
ສະມຸຈະລິນ ລ້ວນແຕ່ສວຍງາມ
ປ່ານັ້ນເດຍລະດາດໄປດ້ວຍຕົ້ນດອກຄູນເຮັດໃຫ້ສວຍງາມ

[໔໐໔໙] ກິ່ນດອກຄູນນັ້ນຫອມອົບອວນ
ຢູ່ໄດ້ເຖິງເຄິ່ງເດືອນ ບໍ່ຣະເຫີຍຫາຍ
ດອກອັນຊັນຂຽວ ອັນຊັນຂາວ ແລະກຸ່ມແດງ ມີດອກບານເດຍລະດາດ
ປ່ານັ້ນເດຍລະດາດໄປດ້ວຍອົບເຊີຍແລະຜັກອີຕູ່

[໔໐໕໐] ຄືປ່ານັ້ນຈະໃຫ້ຄົນບັນເທີງໃຈ
ດ້ວຍດອກໄມ້ແລະງ່າໄມ້ທີ່ມີກິ່ນຫອມ
ໝູ່ພະມອນກໍໂຜບິນແຊ່ວສຽງດັງວີໆວົນຮອບ
ຍ້ອນກິ່ນຫອມຂອງດອກໄມ້

[໔໐໕໑] ພາມ ທີ່ຮີມຮອບຂອບສະນັ້ນ ມີຟັກແຟງ ແຕງ
ນ້ຳເຕົ້າ ໓ ຊະນິດ ຄື ຊະນິດໜຶ່ງມີໜ່ວຍໃຫຍ່ຂະໜາດທໍ່ໝໍ້
ອີກ ໔ ຊະນິດເຫຼົ່ານັ້ນມີໜ່ວຍໃຫຍ່ຂະໜາດທໍ່ກອງຕະໂພນ

[໔໐໕໔] ອັນໜຶ່ງ ຢູ່ໃກ້ສະນີ້ ມີໃບຜັກກາດ
ເປັນຈຳນວນຫຼາຍ ທັງກະທຽມທີ່ມີໃບຂຽວສົດ
ຕົ້ນປາມຕັ້ງຢູ່ຄືຕົ້ນຕານ
ຜັກສາມຫາວເປັນຈຳນວນຫຼາຍຄວນເດັດດອກດ້ວຍກຳມື

[໔໐໕໓] ມີເຄືອໂຄກກະອອມ ນົມຕຳເລີຍ ເຄືອຫຍ້ານາງ
ອ້ອຍສາມສວນ ໄມ້ອະໂສກ ຕົ້ນທຽນ ເຄືອເຂົາຮໍ ຊິງຊ້າຊາລີ

[໔໐໕໔] ວ່ານຫາງຊ້າງ ອັງກາບ ເຄືອພູ ແລະມະລິຊ້ອນ ມີດອກແຍ້ມບານ
ຕົ້ນດອກຈານເຄືອມີດອກບານເດຍລະດາດ ຂຶ້ນຢູ່ຕາມຕົ້ນໄມ້

[໔໐໕໕] ຕົ້ນກ້າງປາ ກຳຍານ ຄັດເຄົ້າ ອ້ອຍສາມສອນ ມະລິເລືອ
ມະລິທຳມະດາ ຊະບາ ບົວບົກ ງົດງາມ

[໔໐໕໖] ຕົ້ນແຄຝອຍ ຝ້າຍທະເລ ແລະກັນນິກາມີດອກເບ່ງບານ
ຜາກົດດັ່ງຕາໜ່າງຄຳງົດງາມ ເຮືອງເຮື່ອ ປຽບຄືແປວໄຟ

[໔໐໕໗] ດອກໄມ້ທີ່ເກີດເທິງບົກແລະເກີດໃນນ້ຳເຫຼົ່ານັ້ນ
ທັງໝົດຕ່າງກໍຜາກົດຢູ່ໃນສະນັ້ນ
ຍ້ອນມີນ້ຳຂັງຢູ່ຫຼາຍໜ້າອອນຊອນ ດ້ວຍປະການດັ່ງນີ້

[໔໐໕໘] ອັນໜຶ່ງ ໃນສະໂບກຂະຣະນີນັ້ນ
ມີປາທີ່ລ່ອງກລອຍຢູ່ໃນນ້ຳຫຼາຍຊະນິດ
ຄື ປາວຽນໄຟ ປາຄໍ່ ປາດຸກ
ແຂ້ ປາມັງກອນ ປາກ່າ

[໔໐໕໙] ຢູ່ທີ່ໃກ້ສະນັ້ນ ມີອ້ອຍສາມສອນຕົ້ນ ອ້ອຍສາມສອນເຄືອ ກຳຍານ
ປະຍົງ ເນຣະພູສີ ແຫ້ວໝູ ສັດຕະບຸດ ສະມຸນແວ້ງ

[໔໐໖໐] ພິມມະເສນ ສາມສິບ ເກດສະໜາ ເຄືອຂັ້ນໄດລີງເປັນນອນຫຼາຍ
ບົວບົກ ໂກດຂາວ ທົ່ມເລືອດ ຕົ້ນໝາດ

[໔໐໖໑] ຂີ້ມິ້ນ ແກ້ມຫອມ ທໍຣະດານ ກຳຄູນ ສົ້ມມໍພິເພກ
ສີໄຄເຄືອ ກາຣະບູນ ແລະກະລິງຄຸກ

[໔໐໖໒] ອັນໜຶ່ງ ໃນປ່ານັ້ນ ມີສັດຫຼາຍໆຊະນິດ ຄື
ຣາດຊະສີ ເສືອໂຄ່ງ ຍັກສີນິມິໜ້າຄືລາ ຊ້າງພັງ
ຊ້າງພາຍ ເນື້ອຊາຍ ໂຕຟານ ລະມັ່ງ ແລະອີເຫງັນ

[໔໐໖໓] ໝາຈອກ ໝາໄນ ບ່າງ ກະຮອກ
ຈາມະຣີ ຊະນີ ລີງລົມ ຄ່າງ ລີງ ລີງຈຸ່ນ

[໔໐໖໔] ຢູ່ໃກ້ສະນັ້ນ ມີກວາງ ກະທິງ ໝີ ງົວປ່າ ແຮດ
ໝູ ພັງພອນ ແລະງູເຫົ່າ ເປັນຈຳນວນຫຼາຍ

[໔໐໖໕] ຄວາຍ ໝາໃນ ໝາຈອກ ກະປອມ ແລນ ເຫັ້ຍ
ເສືອດາວ ແລະເສືອເຫຼືອງມີຢູ່ໂດຍຮອບດ້ານ

[໔໐໖໖] ກະຕ່າຍ ແຮ້ງ ຣາດຊະສີ ແລະເສືອປາ
ສະກຸນະຊາດຫຼາຍຊະນິດ ຄື ນົກກວັກ ນົກຍູງ ນົກທົ່ງຂາວ ໄກ່ຟ້າ

[໔໐໖໗] ນົກກະປູດ ໄກ່ປ່າ ນົກທັດສະດີລີງ ຮ່ຳຮ້ອງຄູ່ຂັບຫາກັນແລະກັນ
ນົກຍາງໂທນ ນົກຍາງກອກ ນົກໂພຣະດົກ ນົກຕ້ອຍຕີວິດ ນົກກະຮຽນ

[໔໐໖໘] ແຫຼວດຳ ແຫຼວແດງ ນົກຊ້ອນຫອຍ ນົກພິກ ນົກຄັບແຄ
ນົກແຂວກ ນົກກົດ ນົກກະເຕັນໃຫຍ່ ນົກນາງແອ່ນ

[໔໐໖໙] ນົກຄຸ່ມ ນົກກະທາ ນົກກະທຸງ ນົກຈອກ
ນົກກະຈາບ ນົກກະເຕັນນ້ອຍ ນົກກາງເຂນ

[໔໐໗໐] ນັກກາຣະເວກ ນົກແອ່ນລົມ ນົກເງືອກ ນົກອອກ
ສະມຸຈະລິນອັ່ງອໍໄປດ້ວຍຝູງນົກນານາຊະນິດ
ກູ່ຮ້ອງຂານຂັບດ້ວຍສຽງຕ່າງ ໆ ກັນ

[໔໐໗໑] ອັນໜຶ່ງ ຢູ່ໃກ້ສະນີ້ ມີຝູງນົກຫຼາກຫຼາຍມີຂົນປີກງາມວິຈິດ
ມີສຽງໄພເລາະສະເໜາະໂສດບັນເທີງໃຈຢູ່ກັບຄູ່ຂອງຕົນ
ກູ່ຮ້ອງປະຊັນສຽງກັນແລະກັນ

[໔໐໗໒] ອັນໜຶ່ງ ຢູ່ໃກ້ສະນີ້ ມີຝູງນົກສົ່ງສຽງຮ້ອງມ່ວນຢູ່ສະເໝີ
ມີຕາງາມປະກອບດ້ວຍເບົ້າຕາຂາວ ມີຝູງນົກທີ່ມີຂົນປີກງາມວິຈິດ

[໔໐໗໓] ອັນໜຶ່ງ ຢູ່ໃກ້ສະນີ້ ມີຝູງນົກສົ່ງສຽງຮ້ອງມ່ວນຢູ່ສະເໝີ
ມີຫອນ ມີສ້ອຍຄໍຂຽວ ກູ່ຮ້ອງປະຊັນສຽງກັນແລະກັນ

[໔໐໗໔] ມີໄກ່ເຖື່ອນ ໄກ່ຟ້າ ນົກເປົ້າ ນົກນາງນວນ ແຫຼວດຳ
ແຫຼວນົກເຂົາ ນົກການ້ຳ ນົກແຂກເຕົ້າ ແລະນົກສາລິກາ

[໔໐໗໕] ອັນໜຶ່ງ ຢູ່ໃກ້ສະນີ້ ມີນົກເປັນຈຳນວນຫຼາຍເປັນພວກ ໆ
ຄື ເຫຼືອງ ແດງ ຂາວ ນົກທັດສະດີລີງ ພະຍາທົ່ງຄຳ
ນົກການ້ຳ ນົກແຂກເຕົ້າ ນົກອັງງ

[໔໐໗໖] ນົກກາເວົາ ນົກເອີກຂາວ ທົ່ງຂາວ
ນົກເງືອກ ນົກເຄົ້າແມວ ທ່ານ
ນົກຍາງ ນົກໂພຣະດົກ ນົກຕ້ອຍຕີວິດ

[໔໐ໆໆ] ນົກກາງແກ ຫົງແດງ ນົກຈັກພາກ ນົກເປັດນໍ້າ
ນົກຫັດສະດີລິງ ສົ່ງສຽງຮ້ອງທີ່ໜ້າອອນຊອນໃຈ
ນົກເຫຼົ່ານັ້ນຕ່າງກໍສົ່ງສຽງຮ້ອງກູ່ກ້ອງຫາກັນແລະກັນຢູ່ຕີນພູ
ທັງເຊົ້າແລະເຢັນຢູ່ເປັນນິດຈະການ

[໔໐ໆ໗] ອັນໜຶ່ງ ຢູ່ໃກ້ສະນີ້ ມີຝູງນົກຈຳນວນຫຼາຍທີ່ມີສີຕ່າງ ໆ ກັນ
ບັນເທີງໃຈຢູ່ກັບຄູ່ຂອງຕົນກູ່ປະຊັນສຽງກັນແລະກັນ

[໔໐ໆ໙] ອັນໜຶ່ງ ຢູ່ໃກ້ສະນີ້ ມີຝູງນົກຫຼາກຫຼາຍມີສີຕ່າງ ໆ ກັນ
ທັງໝົດຕ່າງກໍຂັນຄູກູ່ຮ້ອງສຽງມ່ວນ
ຢູ່ຟາກຝັ່ງທັງ ໔ ຂອງສະມຸຈະລິນ

[໔໐໗໐] ອັນໜຶ່ງ ຢູ່ໃກ້ສະນີ້ ມີຝູງນົກກາຣະເວກ
ຕ່າງກໍບັນເທີງໃຈຢູ່ກັບຄູ່ຂອງຕົນ ກູ່ປະຊັນສຽງກັນແລະກັນ

[໔໐໗໑] ອັນໜຶ່ງ ຢູ່ໃກ້ສະນີ້ ຝູງນົກກາຣະເວກທັງໝົດນັ້ນ
ຕ່າງກໍກູ່ຮ້ອງສຽງມ່ວນຢູ່ຟາກຝັ່ງທັງ ໔ ຂ້າງຂອງສະມຸຈະລິນ

[໔໐໗໔] ປ່ານັ້ນໜາແໜ້ນໄປດ້ວຍເນື້ອຊາຍ ໂຕຟານ
ເປັນບ່ອນຢູ່ອາໄສຂອງຊ້າງພາຍແລະຊ້າງພັງ
ເດຍລະດາດໄປດ້ວຍເຄືອເຂົານານາຊະນິດ
ເປັນບ່ອນອາໄສຢູ່ຂອງຝູງຊະມົດ

[໔໐໗໓] ອັນໜຶ່ງ ຢູ່ໃກ້ສະນີ້ ມີທັນຍະຊາດເປັນຈຳນວນຫຼາຍ
ຄື ເຂົ້າຟ່າງ ໝາກເດືອຍຫຼວງຫຼາຍ
ເຂົ້າສາລີທີ່ບໍ່ຕ້ອງຫຸງດ້ວຍຟືນໄຟ ແລະອ້ອຍບໍ່ແມ່ນໜ້ອຍກໍມີຢູ່ໃນປ່ານັ້ນ

[໔໐໗໕] ທາງນີ້ເປັນທາງຍ່າງໄປໄດ້ຄົນດຽວ ກົງໄປສູ່ອາສົມ
ຄົນຜູ້ໄປເຖິງອາສົມເຊິ່ງເປັນສະຖານທີ່ທີ່ພຣະເຈົ້າເວດສັນດອນ
ພ້ອມດ້ວຍພຣະໂອຣົດທັງຫຼາຍປະທັບຢູ່ນັ້ນ
ຈະບໍ່ປະສົບຄວາມຫິວ ຄວາມກະຫາຍ ແລະຄວາມບໍ່ຍິນດີ

[໔໐໗໕] ພຣະອົງຊົງເພດເປັນນັກບວດອັນປະເສີດ
ຊົງຂໍເກາະໝາກໄມ້ ເຄື່ອງບູຊາໄຟແລະຊະດາ
ນຸ່ງຫົ່ມໜັງເສືອ ບັນທົມເໜືອພື້ນດິນແລະບູຊາໄຟຢູ່

[໔໐໗໖] ຊູຊົກຜູ້ເປັນເຜົ່າພັນແຫ່ງພາມ
ເມື່ອໄດ້ຟັງຄຳແນະນຳນີ້ແລ້ວ ກະທຳປະທັກຂິນ
ມີໃຈເບີກບານ ອຳລາທ່ານລືສີ
ແລ້ວຫຼີກໄປສູ່ສະຖານທີ່ທີ່ພຣະເຈົ້າເວດສັນດອນປະທັບຢູ່

**ພັນນາກັນມະຫາພົນ ຈົບ**

## ກັນກຸມານ

(ພຣະເວດສັນດອນຕັດວ່າ)

[໔໐໗໗] ລຸກຂຶ້ນຢືນເທີ້ນ ຊາລີ ການມາຂອງພວກຍາຈົກໃນມື້ນີ້
ຜາກົດຄືທີ່ລູກເຫັນພາມມາເມື່ອຄາວກ່ອນ ໆ
ຄວາມຊົມຊື່ນຍິນດີເຮັດໃຫ້ພໍ່ກະເສມສານ

(ພຣະຊາລີຂາບທູນວ່າ)

[໔໐໗໘] ຂ້າແດ່ ພຣະບິດາ ແມ່ນຂ້ານ້ອຍກໍເຫັນຜູ້ນັ້ນ
ຜາກົດຄືພາມ ເບິ່ງຄືວ່າຄົນເດີນທາງ
ຈັກເປັນແຂກຂອງພວກເຮົາ

(ຊູຊົກທູນຖາມວ່າ)

[໔໐໗໙] ພຣະອົງບໍ່ມີພະຍາດບຽດບຽນບໍ ຊົງສຸກສຳຣານດີບໍ
ລ້ຽງອັດຕະພາບດ້ວຍການສະແຫວງຫາມູນຜະລາຫານສະດວກບໍ
ມູນຜະລາຫານກໍມີຫຼາຍບໍ

[໔໐໘໐] ເຮືອດ ຍຸງ ແລະສັດເລືອຄານມີໜ້ອຍບໍ
ໃນປ່າທີ່ມີເນື້ອຮ້າຍສາລະວົນ ບໍ່ມີມາບຽດບຽນບໍ

(ພຣະເວດສັນດອນຕັດວ່າ)

[໔໐໘໑] ທ່ານພາມ ເຮົາທັງຫຼາຍບໍ່ມີພະຍາດບຽດບຽນເປັນສຸກສຳຣານດີ
ອັນໜຶ່ງ ເຮົາລ້ຽງອັດຕະພາບດ້ວຍການສະແຫວງຫາມູນຜະລາຫານສະດວກດີ
ທັງມູນຜະລາຫານກໍມີຫຼາຍ

[໔໐໘໔] ອັນໜຶ່ງ ເຮືອດ ຍຸງ ແລະສັດເລືອຄານກໍມີໜ້ອຍ
ໃນປ່າທີ່ມີເນື້ອຮ້າຍຢູ່ສາລະວົນ ກໍບໍ່ມີມາບຽດບຽນເຮົາເລີຍ

[໔໐໘໙] ເມື່ອເຮົາມາຢູ່ໃນປ່າມີຊີວິດອັນຫງອຍເຫງົາຕະຫຼອດ ໗ ເດືອນ
ເຮົາເພິ່ງຈະເຫັນທ່ານຜູ້ເປັນພາມບູຊາໄຟ
ຊົງພົດອັນປະເສີດ ຖືໄມ້ການເທົ້າມີສີດັ່ງໜ່ວຍໝາກຕູມ
ແລະໝາກເຕົ້ານ້ຳນີ້ເປັນຄົນທຳອິດ

[໔໐໙໐] ທ່ານມະຫາພາມ ທ່ານມາດີແລ້ວ ບໍ່ໄດ້ມາຮ້າຍ
ທ່ານຜູ້ຈະເລີນ ຂໍເຊີນເຂົ້າໄປຂ້າງໃນ
ເຊີນລ້າງຕີນທັງ ໔ ຂອງທ່ານເທີ້ນ

[໔໐໙໑] ພາມ ໝາກພັບ ໝາກຫາດ ໝາກຊາງ
ໝາກເມົ່າມີຣົດຫວານຄືນ້ຳເຜີ້ງ
ເຊີນທ່ານເລືອກສັນແຕ່ໜ່ວຍດີ ໆ ເທີ້ນ

[໔໐໙໒] ມະຫາພາມ ແມ່ນນ້ຳດື່ມນີ້ກໍເຢັນສະນິດ ເຮົານຳມາຈາກຮ່ອມພູ
ຖ້າທ່ານຕ້ອງການກໍເຊີນດື່ມເທີ້ນ

[໔໐໙໓] ອັນໜຶ່ງ ທ່ານມາເຖິງປ່າໃຫຍ່ ຍ້ອນເຫດໃດ
ຫຼືຍ້ອນປັດໄຈອັນໃດ
ເຮົາຖາມແລ້ວ ຂໍທ່ານຈົ່ງບອກຄວາມນັ້ນແກ່ເຮົາ

(ຊູຊົກຂາບທູນວ່າ)

[໔໐໙໔] ແມ່ນ້ຳເຕັມປ່ຽມຢູ່ຕະຫຼອດເວລາບໍ່ເຫືອດແຫ້ງສັນໃດ
ພຣະອົງກໍສັນນັ້ນ ຂ້ານ້ອຍມາເພື່ອທູນຂໍ
ຂໍພຣະອົງຜູ້ທີ່ຂ້ານ້ອຍທູນຂໍແລ້ວ
ຊົງພຣະກະລຸນາພຣະຣາດຊະທານພຣະໂອຣົດທັງຫຼາຍເທີ້ນ

(ພຣະເວດສັນດອນຕັດວ່າ)

[໔໐໙໕] ທ່ານພາມ ເຮົາຍອມໃຫ້ ເຮົາບໍ່ໄດ້ຫວັ່ນໄຫວ
ທ່ານຈົ່ງເປັນໃຫຍ່ ນຳລູກທັງ ໔ ຂອງເຮົາໄປເທີ້ນ
ພຣະນາງມັດທີຣາດຊະບຸດຕີໄປປ່າແຕ່ເຊົ້າ
ຈັກກັບມາຈາກການສະແຫວງຫາໝາກໄມ້ໃນເວລາຄ່ຳ

[໔໑໐໐] ທ່ານພາມ ຈຶ່ງພັກແຮມຄືນຈັກຄືນໜຶ່ງເທີ້ນ ມື້ອື່ນເຊົ້າຈຶ່ງຄ່ອຍໄປ
ເມື່ອກຸມານແລະກຸມາຣີທີ່ພຣະມານດາຂອງເຂົາໃຫ້ອາບນ້ຳດຳຫົວ
ປະດັບຮວດດອກໄມ້ໄວ້ແລ້ວ

[໔໑໐໑] ພາມ ຈຶ່ງພັກແຮມຄືນຈັກຄືນໜຶ່ງເທີ້ນ ມື້ອື່ນເຊົ້າຈຶ່ງຄ່ອຍໄປ
ຈຶ່ງພາກຸມານແລະກຸມາຣີທີ່ປະດັບຕົກແຕ່ງດ້ວຍກິ່ນຫອມຊະນິດຕ່າງ ໆ ໄປ
ໃນໜົນທາງທີ່ປົກຄຸມໄປດ້ວຍດອກໄມ້ນານາຊະນິດ
ດາດາດໄປດ້ວຍມູນຜະລາຫານນານາປະການ

(ຊູຊົກຂາບທູນວ່າ)

[໔໑໐໒] ຂ້າແດ່ ພຣະອົງຜູ້ຊົງເປັນຈອມທັບ
ຂ້າພຣະອົງບໍ່ພໍໃຈທີ່ຈະພັກຢູ່ ຂ້າພຣະອົງຍິນດີທີ່ຈະໄປ
ແມ່ນອັນຕະລາຍຈະເພິ່ງມີແກ່ຂ້າພຣະອົງ ຂ້າພຣະອົງກໍຈະໄປໃຫ້ໄດ້

[໔໑໐໓] ຍ້ອນວ່າ ທຳມະດາສະຕີເຫຼົ່ານີ້ເປັນຜູ້ບໍ່ສົມຄວນແກ່ການຂໍ
ມີປົກກະຕິກະທຳອັນຕະລາຍ ຍິງທັງຫຼາຍຮູ້ມົນ[๑]
ຍ່ອມຮັບທຸກສິ່ງໂດຍຂ້າງຊ້າຍ

[໔໑໐໔] ເມື່ອພຣະອົງຊົງພ່ຳເພັງທານດ້ວຍພຣະສັດທາ
ພຣະອົງຢ່າໄດ້ເຫັນພຣະມານດາຂອງພຣະປິໂຍຣົດນັ້ນເລີຍ
ຂ້າແດ່ ພຣະອົງຜູ້ຊົງເປັນຈອມທັບ
ພຣະມານດາຂອງພຣະປິໂຍຣົດທັງ ໔ ພຣະອົງນັ້ນ
ຈະເພິ່ງເຮັດອັນຕະລາຍໄດ້ ຂ້າພຣະອົງຈະໄປໃຫ້ໄດ້

[໔໑໐໕] ຂໍພຣະອົງຕັດຮຽກພຣະໂອຣົດເຫຼົ່ານັ້ນມາເທີ້ນ
ຢ່າໃຫ້ພຣະໂອຣົດເຫຼົ່ານັ້ນໄດ້ພົບເຫັນພຣະມານດາເລີຍ
ເມື່ອພຣະອົງຊົງພ່ຳເພັງທານຢູ່ດ້ວຍສັດທາ
ບຸນຍ່ອມຈະເລີນຍິ່ງຂຶ້ນດ້ວຍອາການແນວນີ້

[໔໑໐໖] ຂໍພຣະອົງຕັດຮຽກພຣະໂອຣົດເຫຼົ່ານັ້ນມາເທີ້ນ
ຢ່າໃຫ້ພຣະໂອຣົດເຫຼົ່ານັ້ນໄດ້ພົບເຫັນພຣະມານດາເລີຍ
ຂໍເດຊະ ພຣະອົງຊົງປະທານຊັບຄືພຣະໂອຣົດທັງຫຼາຍ
ແກ່ຂ້າພຣະອົງ ແລ້ວຈັກສະເດັດໄປສະຫວັນ

(ພຣະເວດສັນດອນຕັດວ່າ)

[໔໐໗] ຖ້າທ່ານບໍ່ປາຖະໜາຈະເຫັນພະຣິຍາຂອງເຮົາຜູ້ມີຂໍ້ວັດປະຕິບັດອັນງາມ
ກໍຈົ່ງທູນຖວາຍພຣະກຸມານທັງ ໒ ຄືພຣະຊາລີແລະພຣະກັນຫາຊີນາ
ແດ່ພຣະເຈົ້ານະຄອນສີນໄຊຜູ້ເປັນພຣະໄອຍະກາ

[໔໐໘] ພຣະອົງທອດພຣະເນດເຫັນພຣະຣາດຊະກຸມານເຫຼົ່ານີ້
ຜູ້ມີພຣະສຸຣະສຽງມ່ວນ ຕັດພຣະວາຈາໜ້າຮັກ
ຊົງປີ້ມພຣະຫະໄທປຣິດາປາໂມດ
ຈັກພຣະຣາດຊະທານຊັບແກ່ທ່ານຫຼວງຫຼາຍ

(ຊູຊົກຂາບທູນວ່າ)

[໔໐໙] ຂ້າແດ່ ພຣະຣາດຊະບຸດ ຂໍພຣະອົງໂຜດຊົງຟັງຂ້າພຣະອົງກ່ອນ
ຂ້າພຣະອົງຢ້ານການທີ່ຈະຖືກຫາວ່າສົກຊົງເອົາໄປ
ພຣະເຈົ້ານະຄອນສີນໄຊມະຫາຣາດຈະເພິ່ງລົງພຣະຣາດຊະອາຍາຂ້າພຣະອົງ
ຄື ຈະຊົງປັບສີນໄໝຫຼືໃຫ້ປະຫານຊີວິດ
ຂ້າພຣະອົງຈະຂາດທັງຊັບແລະຂ້າທາດ
ແລະຈະຖືກນາງພາມມະນີຜູ້ເປັນເຜົ່າພັນຂອງພາມຕິຕຽນໄດ້

(ພຣະເວດສັນດອນຕັດວ່າ)

[໔໑໐] ພຣະມະຫາຣາດຊົງຕັ້ງຢູ່ໃນທຳ ຊົງເປັນຜູ້ຜະດຸງຣັດ
ໃຫ້ຈະເລີນແກ່ຊາວນະຄອນສີພີ ທອດພຣະເນດເຫັນພຣະກຸມານເຫຼົ່ານີ້
ຜູ້ມີພຣະສຸຣະສຽງມ່ວນ ຕັດພຣະວາຈາໜ້າຮັກ
ໄດ້ປີຕິແລະໂສມະນັດແລ້ວຈັກພຣະຣາດຊະທານຊັບແກ່ທ່ານຫຼວງຫຼາຍ

(ຊູຊົກຂາບທູນວ່າ)

[໔໑໑] ຂ້າພຣະອົງຈັກເຮັດຕາມສິ່ງທີ່ພຣະອົງຊົງພ່ຳສອນຄົງບໍ່ໄດ້
ຈັກນຳເດັກອ່ອນທັງຫຼາຍໄປເປັນຂ້າທາດຮັບໃຊ້
ຂອງນາງພາມມະນີທີ່ນັ້ນ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໔໑໒] ລຳດັບນັ້ນ ພຣະກຸມານທັງ ໒

ຄື ພຣະຊາລີແລະພຣະກັນຫາຊິນາ ໄດ້ສະດັບຄຳຂອງຊູຊົກຜູ້ຫຍາບຊ້າ
ຕົກພຣະຫະໄທຈຶ່ງພາກັນສະເດັດແລ່ນໜີໄປຈາກບ່ອນນັ້ນ

(ພຣະເວດສັນດອນຕັດຮຽກ ໔ ກຸມານວ່າ)

[໔໑໑໓] ຊາລີລູກຮັກ ມານີ້ເທີ້ນ
ເຈົ້າທັງ ໔ ຈົ່ງຊ່ອຍກັນພ່ຳເພັງປາຣະມີຂອງພໍ່ໃຫ້ເຕັມເທີ້ນ
ຈົ່ງຊ່ອຍກັນໂສດສົງຫະໄທຂອງພໍ່ໃຫ້ເປືອກເຢັນເທີ້ນ
ຈົ່ງເຊື່ອຟັງຄຳຂອງພໍ່ເທີ້ນ

[໔໑໑໔] ເຈົ້າທັງ ໔ ຈົ່ງເປັນຄືຍານນາວາຂອງພໍ່
ອັນບໍ່ໂຍກໂງກໃນສາຄອນຄືພົບເທີ້ນ ພໍ່ຈັກຂ້າມຝັ່ງຄືຊາດ
ຈັກຊ່ອຍສັດໂລກພ້ອມດ້ວຍເທວະໂລກໃຫ້ຂ້າມດ້ວຍ

[໔໑໑໕] ກັນຫາລູກຮັກ ມານີ້ເທີ້ນ ທານປາຣະມີເປັນທີ່ຮັກຂອງພໍ່
ເຈົ້າທັງ ໔ ຈົ່ງຊ່ອຍກັນໂສດສົງຫະໄທຂອງພໍ່ໃຫ້ເປືອກເຢັນເທີ້ນ
ຈົ່ງເຊື່ອຟັງຄຳຂອງພໍ່ເທີ້ນ

[໔໑໑໖] ເຈົ້າທັງ ໔ ຈົ່ງເປັນຄືຍານນາວາຂອງພໍ່
ອັນບໍ່ໂຍກໂງກໃນສາຄອນຄືພົບເທີ້ນ ພໍ່ຈັກຂ້າມຝັ່ງຄືຊາດ
ຈັກຊ່ອຍສັດໂລກພ້ອມດ້ວຍເທວະໂລກໃຫ້ຂ້າມດ້ວຍ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໔໑໑໗] ລຳດັບນັ້ນ ພຣະເວດສັນດອນຜູ້ຜະດຸງຣັດໃຫ້ຈະເລີນແກ່ຊາວນະຄອນສີພີ
ຊົງພາພຣະກຸມານທັງ ໔ ຄື ພຣະຊາລີແລະພຣະກັນຫາຊິນາມາ
ໄດ້ພຣະຣາດຊະທານໃຫ້ແກ່ພາມແລ້ວ

[໔໑໑໘] ລຳດັບນັ້ນ ພຣະເວດສັນດອນຊົງພາພຣະກຸມານທັງ ໔
ຄືພຣະຊາລີແລະພຣະກັນຫາຊິນາມາ
ໄດ້ພຣະຣາດຊະທານໃຫ້ແກ່ພາມແລ້ວ
ກໍຊົງພຣະຫະໄທຊື່ນບານໃນປຸດຕະທານອັນອຸດົມ

[໔໑໑໙] ຄັ້ງນັ້ນ ເມື່ອພຣະເວດສັນດອນໄດ້ພຣະຣາດຊະທານ
ພຣະກຸມານທັງ ໔ ແລ້ວ ຄວາມບັນລືລັ່ນ

ເປັນຕາຢ້ານຂົນຫົວລຸກ ໄດ້ເກີດຂຶ້ນ
ແຜ່ນດິນກໍສະທ້ານຫວັ່ນໄຫວ

[໔໑໔໐] ຄັ້ງນັ້ນ ພຣະເວດສັນດອນຜູ້ຜະດຸງຣັດໃຫ້ຈະເລີນແກ່ຊາວນະຄອນສີພີ
ຊົງປະຄອງອັນຊະລີ ພຣະຣາດຊະທານພຣະກຸມານ
ຜູ້ຈະເລີນດ້ວຍຄວາມສຸກໃຫ້ເປັນທານແກ່ພາມ
ຄວາມບັນລືລັ່ນເປັນຕາຢ້ານຂົນຫົວລຸກ
ໄດ້ເກີດຂຶ້ນແລ້ວ

[໔໑໔໑] ລຳດັບນັ້ນ ພາມຜູ້ຫຍາບຊ້າກັດເຄືອເຂົາໃຫ້ຂາດແລ້ວ
ເອົາເຄືອເຂົາມັດພຣະຫັດຂອງພຣະກຸມານທັງ ໒
ຈັບກຸມດຶງທຶ້ນລາກໄປດ້ວຍເຄືອເຂົາ

[໔໑໔໒] ແຕ່ນັ້ນ ພາມນັ້ນຖືເອົາເຊືອກແລະໄມ້ການເທົ້າ
ທຸບຕີພຣະກຸມານທັງ ໒ ນັ້ນໄປ
ທັງທີ່ພຣະເຈົ້າເວດສັນດອນພຣະເຈົ້ານະຄອນສີພີທອດພຣະເນດເຫັນຢູ່

[໔໑໔໓] ລຳດັບນັ້ນ ພຣະກຸມານທັງຫຼາຍ
ພໍລຸດຈາກພາມກໍຟ້າວແລ່ນໜີໄປ
ພຣະຊາລີມີພຣະເນດທັງ ໒ ນອງໄປດ້ວຍພຣະອັດສຸຊົນ
ຊະເງີ້ແນມເບິ່ງພຣະບິດາ

[໔໑໔໔] ຊົງຖວາຍບັງຄົມພຣະບາດທັງສອງຂອງພຣະບິດາ
ພຣະວໍຣະກາຍສັ່ນສະທ້ານຄືໃບໂພ
ເມື່ອຊົງຖວາຍບັງຄົມພຣະບາດທັງສອງຂອງພຣະບິດາແລ້ວ
ກໍໄດ້ຂາບທູນດັ່ງນີ້ວ່າ

[໔໑໔໕] ຂ້າແດ່ ພຣະບິດາ ພຣະມານດາກຳລັງສະເດັດອອກໄປປ່າ
ພຣະອົງກໍຈະພຣະຣາດຊະທານຂ້ານ້ອຍທັງ ໒ ສາແລ້ວ
ຂ້າແດ່ ພຣະບິດາ ຂໍພຣະອົງໂຜດປະທານຂ້ານ້ອຍທັງ ໒
ເມື່ອຂ້ານ້ອຍທັງ ໒ ເຫັນພຣະມານດາກັບມາກ່ອນ

[໔໑໔໖] ຂ້າແດ່ ພຣະບິດາ ພຣະມານດາກຳລັງສະເດັດອອກໄປປ່າ
ພຣະອົງກໍຈະພຣະຣາດຊະທານຂ້ານ້ອຍທັງ ໒ ສາແລ້ວ

ຂໍພຣະອົງໂຜດພຣະຣາດຊະທານຂ້ານ້ອຍທັງ ໒
ຈົນກວ່າພຣະມານດາຂອງຂ້ານ້ອຍທັງ ໒ ຈະໄດ້ສະເດັດມາ
ເມື່ອນັ້ນ ພາມນີ້ຈະຂາຍຫຼືຈະຂ້າ
ກໍຈົ່ງເຮັດຕາມຄວາມປາຖະໜາເທີ້ນ

[໒໑໒໗] ພາມຜູ້ຫຍາບຊ້ານີ້ປະກອບດ້ວຍບຸຣຸດໂທດ ໑໘ ປະການ[໑] ຄື
໑. ມີຕີນທູ່ ໒. ມີເລັບກຸດ
໓. ມີປີ່ນ່ອງຍ່ອນຍານ ໔. ມີຮີມຝີປາກເທິງຍາວ
໕. ມີນໍ້າລາຍໄຫຼ ໖. ມີຂ້ຽວ
໗. ມີດັງຫັກ

[໒໑໒໘] ໘. ມີພຸງຄືໝໍ້ ໙. ມີຫຼັງຄ່ອມ
໑໐. ມີຕາເຫຼ່ ໑໑. ມີໜວດແດງ
໑໒. ມີຜົມເຫຼືອງ ໑໓. ມີໜັງຍື່ນຕົກກະ

[໒໑໒໙] ໑໔. ມີຕາເຫຼືອງ ໑໕. ມີກາຍຄົດ
໑໖. ມີຂາໂຂງ ໑໗. ມີຂົນຫຍາບຍາວ
໑໘. ນຸ່ງຫົ່ມໜັງເສືອ ເປັນອະມະນຸດທີ່ເປັນຕາຢ້ານ

[໒໑໓໐] ເປັນມະນຸດຫຼືຍັກທີ່ກິນຊີ້ນແລະເລືອດ
ອອກຈາກເຮືອນມາສູ່ປ່າ ມາທູນຂໍຊັບກັບພຣະອົງ ຂ້ານ້ອຍ

(ກັນຫາຊາລີກ່າວວ່າ)

[໒໑໓໑] ຂ້າແດ່ ພຣະບິດາ ຂ້ານ້ອຍທັງ ໒ ກຳລັງຖືກຜີສາດນຳໄປຢູ່
ຍ້ອນເຫດໃດນໍ ພຣະອົງຈຶ່ງຊົງແນມເມີນຢູ່
ພຣະຫະໄທຂອງສະເດັດພໍ່ເຫັນຈະຄືຫີນ
ຫຼືບໍ່ດັ່ງນັ້ນ ກໍຄືແຜ່ນເຫຼັກທີ່ຕຶງໄວ້
[໒໑໓໒] ພຣະອົງບໍ່ຊົງຮູ້ສຶກວ່າ ຂ້ານ້ອຍທັງ ໒
ຖືກພາມຜູ້ຫຍາບຊ້າເຫຼືອເກີນ ຜູ້ສະແຫວງຫາຊັບຜູກມັດ
ແກ່ຄ້ຽນຕີຂ້ານ້ອຍທັງ ໒ ຄືຄົນລ້ຽງງົວຄ້ຽນຕີງົວ
[໒໑໓໓] ຂໍໃຫ້ນ້ອງກັນຫາຢູ່ໃນບ່ອນນີ້ນີ້ແລ້ວ
ນາງຍັງບໍ່ຮູ້ຈັກທຸກຮ້ອນອັນໃດ ໆ ນາງຈະຮ່ຳໄຮ
ຄືລູກເນື້ອທີ່ຍັງດື່ມນົມພາກຈາກຝູງບໍ່ເຫັນແມ່

(ພຣະກຸມານຮ່ຳໄຮເຖິງພຣະມານດາແລະພຣະບິດາວ່າ)

[໔໑໓໔] ຂ້າພຣະອົງບໍ່ເປັນທຸກ
ຍ້ອນຄວາມທຸກແນວນີ້ຄົນເພິ່ງໄດ້ຮັບຄືກັນ
ແຕ່ທຸກທີ່ຂ້ານ້ອຍບໍ່ເຫັນພຣະມານດາ
ເປັນທຸກທີ່ຍິ່ງກວ່ານີ້ຂອງຂ້ານ້ອຍ

[໔໑໓໕] ຂ້າພຣະອົງບໍ່ເປັນທຸກ
ຍ້ອນຄວາມທຸກແນວນີ້ຄົນເພິ່ງໄດ້ຮັບຄືກັນ
ແຕ່ທຸກທີ່ຂ້ານ້ອຍບໍ່ເຫັນສະເດັດພໍ່
ເປັນທຸກທີ່ຍິ່ງກວ່ານີ້ຂອງຂ້ານ້ອຍ

[໔໑໓໖] ພຣະມານດານັ້ນຈັກຊົງທົນທຸກລຳບາກແນ່
ເມື່ອບໍ່ໄດ້ທອດພຣະເນດເຫັນພຣະກັນຫາຊິນາກຸມາຣີ
ຜູ້ມີດວງເນດງົດງາມ ກໍຈັກຊົງກັນແສງພ່ຳຫາຕະຫຼອດການລະນານ

[໔໑໓໗] ພຣະບິດານັ້ນຈັກຊົງທົນທຸກລຳບາກແນ່
ເມື່ອບໍ່ໄດ້ທອດພຣະເນດເຫັນພຣະກັນຫາຊິນາກຸມາຣີ
ຜູ້ມີດວງເນດງົດງາມ ກໍຈັກຊົງກັນແສງພ່ຳຫາຕະຫຼອດການລະນານ

[໔໑໓໘] ພຣະມານດານັ້ນຈັກຊົງທົນທຸກລຳບາກແນ່
ເມື່ອບໍ່ໄດ້ທອດພຣະເນດເຫັນພຣະກັນຫາຊິນາກຸມາຣີ
ຜູ້ມີດວງເນດງົດງາມ ກໍຈັກຊົງກັນແສງພ່ຳຫາ
ໃນອາສົມຕະຫຼອດການລະນານ

[໔໑໓໙] ພຣະບິດານັ້ນຈັກຊົງທົນທຸກລຳບາກແນ່
ເມື່ອບໍ່ໄດ້ທອດພຣະເນດເຫັນພຣະກັນຫາຊິນາກຸມາຣີ
ຜູ້ມີດວງເນດງົດງາມ ກໍຈັກຊົງກັນແສງພ່ຳຫາ
ໃນອາສົມຕະຫຼອດການລະນານ

[໔໑໔໐] ພຣະມານດານັ້ນຈັກຊົງທົນທຸກລຳບາກແນ່
ຈັກຊົງກັນແສງພ່ຳຫາຕະຫຼອດການລະນານ
ຊົງຫວນຣະນຶກເຖິງເຮົາທັງ ໔ ຕະຫຼອດເຄິ່ງຄືນຫຼືທັງຄືນແລ້ວ
ຈະຊົງຊູບຜອມຕາຍໄປຄືແມ່ນ້ຳນ້ອຍໃນລະດູແລ້ງເຫືອດແຫ້ງໄປ

[໔໑໔໑] ພຣະບິດານັ້ນຈັກຊົງທົນທຸກລຳບາກແນ່
ຈັກຊົງກັນແສງພໍ່າຫາຕະຫຼອດການລະນານ
ຊົງຫວນຣະນຶກເຖິງເຮົາທັງ ໔ ຕະຫຼອດເຄິ່ງຄືນຫຼືທັງຄືນແລ້ວ
ຈະຊົງຊູບຜອມຕາຍໄປຄືແມ່ນ້ຳເຂີນເຫືອດແຫ້ງໄປ

[໔໑໔໔] ຣຸກຂະຊາດຊະນິດຕ່າງ ໆ ເຫຼົ່ານີ້
ຄື ຕົ້ນຫວ້າ ຕົ້ນຍາງພາຍ ທີ່ມີງ່າຫ້ອຍຍ້ອຍ
ມື້ນີ້ ເຮົາທັງ ໔ ຈະຕ້ອງລະຖິ້ມຣຸກຂະຊາດຕ່າງ ໆ ເຫຼົ່ານັ້ນໄປ

[໔໑໔໓] ຣຸກຂະຊາດຊະນິດທີ່ມີໝາກຊະນິດຕ່າງ ໆ
ຄື ຕົ້ນໂພໃບ ຕົ້ນໝາກມີ້ ຕົ້ນໄຮ
ແລະຕົ້ນໝາກຂວິດ ທີ່ເຮົາທັງ ໔ ເຄີຍຫຼິ້ນມາກ່ອນ
ມື້ນີ້ ເຮົາທັງ ໔ ຈະຕ້ອງລະຖິ້ມຣຸກຂະຊາດເຫຼົ່ານັ້ນໄປ

[໔໑໔໔] ສວນເຫຼົ່ານີ້ກໍຍັງຕັ້ງຢູ່ ນີ້ແມ່ນ້ຳທີ່ເຢືອກເຢັນ
ເຮົາທັງ ໔ ເຄີຍລົງຫຼິ້ນມາກ່ອນ
ມື້ນີ້ ເຮົາທັງ ໔ ຈະຕ້ອງລະຖິ້ມສິ່ງທັງ ໔ ນັ້ນໄປ

[໔໑໔໕] ບຸບຜະຊາດຊະນິດຕ່າງ ໆ ເທິງພູໜ່ວຍນັ້ນ
ທີ່ເຮົາທັງ ໔ ເຄີຍທັດຊົງມາກ່ອນ
ມື້ນີ້ ເຮົາທັງ ໔ ຈະຕ້ອງລະຖິ້ມສິ່ງເຫຼົ່ານັ້ນໄປ

[໔໑໔໖] ໝາກໄມ້ຊະນິດຕ່າງ ໆ ເທິງພູໜ່ວຍນັ້ນ
ທີ່ເຮົາທັງ ໔ ເຄີຍບໍຣິໂພກມາກ່ອນ
ມື້ນີ້ ເຮົາທັງ ໔ ຈະຕ້ອງລະຖິ້ມໝາກໄມ້ເຫຼົ່ານັ້ນໄປ

[໔໑໔໗] ສິ່ງຂອງເຫຼົ່ານີ້ ຄື ຕຸ໊ກຕາຊ້າງ ຕຸ໊ກຕາມ້າ ແລະຕຸ໊ກຕາງົວ
ທີ່ພຣະບິດາຊົງປັ້ນໄວ້ໃຫ້ເຮົາທັງ ໔ ຫຼິ້ນ
ເຊິ່ງເຮົາທັງ ໔ ເຄີຍຫຼິ້ນມາກ່ອນ
ມື້ນີ້ ເຮົາທັງ ໔ ຈະຕ້ອງລະຖິ້ມຕຸ໊ກຕາເຫຼົ່ານັ້ນໄປ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໔໑໔໘] ພຣະກຸມານທັງ ໔ ພຣະອົງຖືກພາມຊູຊົກນຳໄປຢູ່
ໄດ້ຂາບທູນພຣະບິດາດັ່ງນີ້ວ່າ

ຂ້າແດ່ ພຣະບິດາ ຂໍໃຫ້ພຣະອົງຊົງພຣະກະລຸນາ
ຕັດບອກພຣະມານດາວ່າ ລູກທັງ ໔ ບໍ່ມີພະຍາດ
ແລະຂໍພຣະອົງຊົງພຣະກະເສມສຳຣານເທີ້ນ

(ຊາລີກ່າວວ່າ)

[໔໑໔໙] ຕຸ໊ກຕາຊ້າງ ຕຸ໊ກຕາມ້າ ແລະຕຸ໊ກຕາງົວ
ເຫຼົ່ານີ້ເປັນຂອງຂ້ານ້ອຍທັງ ໔
ຂໍໃຫ້ພຣະອົງໂຜດປະທານຕຸ໊ກຕາເຫຼົ່ານັ້ນແກ່ພຣະມານດາ
ຄວາມໂສກເສົ້າຂອງພຣະອົງຈັກຫາຍໄປຍ້ອນຕຸ໊ກຕາເຫຼົ່ານັ້ນ

[໔໑໕໐] ຕຸ໊ກຕາຊ້າງ ຕຸ໊ກຕາມ້າ ແລະຕຸ໊ກຕາງົວ
ເຫຼົ່ານີ້ເປັນຂອງຂ້ານ້ອຍທັງ ໔
ພຣະມານດາໄດ້ທອດພຣະເນດເຫັນຕຸ໊ກຕາເຫຼົ່ານັ້ນ
ກໍຈັກຊົງກຳຈັດຄວາມໂສກເສົ້າໄດ້

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໔໑໕໑] ລຳດັບນັ້ນ ພຣະເວດສັນດອນຂັດຕິຍະຣາຊາຊົງພໍ່າເພັງທານແລ້ວ
ສະເດັດເຂົ້າໄປສູ່ບັນສາລາຊົງກັນແສງຮ່ຳໄຮວ່າ

(ພຣະເວດສັນດອນຊົງຮ່ຳໄຮວ່າ)

[໔໑໕໔] ມື້ນີ້ ລູກນ້ອຍທັງ ໔ ຈະຫິວເຂົ້າ ຫິວນ້ຳແນວໃດນໍ
ຈັກເດີນທາງໄກ ຮ້ອງໄຫ້ສະອຶກສະອື້ນ
ເມື່ອໃນຕອນຄ່ຳເວລາບໍຣິໂພກອາຫານ
ໃຜຈະໃຫ້ອາຫານແກ່ລູກທັງ ໔ ນັ້ນ

[໔໑໕໓] ມື້ນີ້ ລູກນ້ອຍທັງ ໔ ຈະຫິວເຂົ້າ ຫິວນ້ຳແນວໃດນໍ
ຈັກເດີນທາງໄກ ຮ້ອງໄຫ້ສະອຶກສະອື້ນ
ເມື່ອໃນຕອນຄ່ຳເວລາບໍຣິໂພກອາຫານ
ລູກທັງ ໔ ເຄີຍອ້ອນມັດທີ່ຜູ້ເປັນມານດາວ່າ ພຣະເຈົ້າແມ່
ລູກທັງ ໔ ຫິວແລ້ວ ຂໍສະເດັດແມ່ຈຶ່ງປະທານແກ່ລູກທັງ ໔ ເທີ້ນ

[໔໑໕໔] ລູກທັງ ໔ ບໍ່ໄດ້ໃສ່ເກີບ

ຈະເດີນທາງດ້ວຍຕີນເປົ່າໄດ້ແນວໃດ
ລູກທັງ ໔ ຈະອ່ອນແຮງມີບາທາທັງ ໔ ຂ້າງຟົກຊ້ຳ
ໃຜຈະຈູງມືລູກທັງ ໔ ນັ້ນເດີນທາງ

[໔໑໕໕] ເປັນຫຍັງນໍ ພາມນັ້ນຊ່າງດຸຮ້າຍຫຼາຍບໍ່ລະອາຍ
ຄ້ຽນຕີລູກ ໆ ຜູ້ບໍ່ປະທຸດສະຮ້າຍຕໍ່ໜ້າເຮົາ

[໔໑໕໖] ແມ່ນແຕ່ຄົນທີ່ຕົກເປັນທາສີເປັນຂ້າທາດຂອງເຮົາ
ຫຼືຄົນຮັບໃຊ້ອື່ນ ໃຜນໍທີ່ມີຄວາມລະອາຍ
ຈັກຄ້ຽນຕີຄົນທີ່ແສນຕ່ຳຕ້ອຍແມ່ນນັ້ນໄດ້

[໔໑໕໗] ເມື່ອເຮົາຍັງຢູ່ ພາມຊ່າງດ່າ
ຊ່າງຄ້ຽນລູກຮັກທັງ ໔ ຂອງເຮົາຜູ້ແນມເບິ່ງຢູ່
ຄືປາທີ່ຕິດຢູ່ທີ່ໜ້າໄຊ

[໔໑໕໘] ຫຼືເຮົາຈັກຖືເອົາທະນູ ຈັກເນັບພຣະຂັນໄວ້ຂ້າງຊ້າຍ
ນຳເອົາລູກທັງ ໔ ຂອງເຮົາມາ
ຍ້ອນວ່າລູກທັງ ໔ ຖືກຄ້ຽນຕີເປັນທຸກທໍລະມານ

[໔໑໕໙] ການທີ່ກຸມານທັງຫຼາຍເດືອດຮ້ອນ
ເປັນທຸກແສນສາຫັດນີ້ບໍ່ຄວນເລີຍ
ກໍໃຜນໍຮູ້ທຳຂອງສັດຕະບຸຣຸດທັງຫຼາຍ
ໃຫ້ທານແລ້ວຍ່ອມເດືອດຮ້ອນໃຈໃນພາຍຫຼັງ

(ຊາລີກ່າວວ່າ)

[໔໑໖໐] ໄດ້ຂ່າວວ່າ ຄົນລາງພວກໃນໂລກນີ້ໄດ້ເວົ້າຄວາມຈິງໄວ້ແນວນີ້ວ່າ
ບຸດໃດບໍ່ມີມານດາຂອງຕົນເອງ ບຸດນັ້ນກໍຄືບໍ່ມີບິດາ

[໔໑໖໑] ມານີ້ເທີ້ນ ນ້ອງກັນທາ ເຮົາທັງ ໔ ຈັກຕາຍນຳກັນ
ຈະມີຊີວິດຢູ່ໄປກໍເປົ່າປະໂຫຍດ
ພຣະບິດາຜູ້ຊົງເປັນຈອມປະຊາຊົນໄດ້ປະທານເຮົາທັງ ໔
ແກ່ຕາພາມຜູ້ສະແຫວງຫາຊັບ ຜູ້ຫຍາບຊ້າເຫຼືອເກີນ
ລາວຄ້ຽນຕີຂ້ານ້ອຍທັງ ໔ ຄືຄົນລ້ຽງງົວຄ້ຽນຕີງົວ

[໔໑໒໔] ຣຸກຂະຊາດຊະນິດຕ່າງ ໆ ເຫຼົ່ານີ້ ຄື ຕົ້ນຫວ້າ
ຕົ້ນຍາງພາຍມີງ່າຫ້ອຍຍ້ອຍ ທີ່ເຮົາທັງ ໔ ເຄີຍຫຼິ້ນມາກ່ອນ
ນ້ອງກັນຫາ ມື້ນີ້ ເຮົາທັງ ໔ ຈະຕ້ອງລະຖິ້ມຣຸກຂະຊາດເຫຼົ່ານັ້ນໄປ

[໔໑໒໓] ຣຸກຂະຊາດທີ່ມີໝາກຕ່າງຊະນິດ ໆ ຄື ຕົ້ນໂພໃບ
ຕົ້ນໝາກມີ້ ຕົ້ນໄຮ ແລະຕົ້ນໝາກຂວິດ ທີ່ເຮົາທັງ ໔ ເຄີຍຫຼິ້ນມາກ່ອນ
ນ້ອງກັນຫາ ມື້ນີ້ ເຮົາທັງ ໔ ຈະຕ້ອງລະຖິ້ມ
ຣຸກຂະຊາດເຫຼົ່ານັ້ນໄປ

[໔໑໒໔] ສວນເຫຼົ່ານີ້ກໍຍັງຕັ້ງຢູ່ ນີ້ແມ່ນ້ຳທີ່ເຢືອກເຢັນ
ເຮົາທັງ ໔ ເຄີຍລົງຫຼິ້ນມາກ່ອນ
ນ້ອງກັນຫາ ມື້ນີ້ ເຮົາທັງ ໔ ຈະຕ້ອງລະຖິ້ມສິ່ງທັງ ໔ ນັ້ນໄປ

[໔໑໒໕] ບຸບຜະຊາດຊະນິດຕ່າງ ໆ ເທິງພູໜ່ວຍນັ້ນ
ທີ່ເຮົາທັງ ໔ ເຄີຍທັດຊົງມາກ່ອນ
ນ້ອງກັນຫາ ມື້ນີ້ ເຮົາທັງ ໔ ຈະຕ້ອງລະຖິ້ມສິ່ງເຫຼົ່ານັ້ນໄປ

[໔໑໒໖] ໝາກໄມ້ຊະນິດຕ່າງ ໆ ເທິງພູໜ່ວຍນັ້ນ
ທີ່ເຮົາທັງ ໔ ເຄີຍບໍຣິໂພກມາກ່ອນ ນ້ອງກັນຫາ ມື້ນີ້
ເຮົາທັງ ໔ ຈະຕ້ອງລະຖິ້ມໝາກໄມ້ເຫຼົ່ານັ້ນໄປ

[໔໑໒໗] ສິ່ງຂອງເຫຼົ່ານີ້ ຄື ຕຸ໊ກຕາຊ້າງ ຕຸ໊ກຕາມ້າ ແລະຕຸ໊ກຕາງົວ
ທີ່ພຣະບິດາຊົງປັ້ນໄວ້ໃຫ້ເຮົາທັງ ໔ ຫຼິ້ນ
ເຊິ່ງເຮົາທັງ ໔ ເຄີຍຫຼິ້ນມາກ່ອນ
ນ້ອງກັນຫາ ມື້ນີ້ ເຮົາທັງ ໔ ຈະຕ້ອງລະຖິ້ມຕຸ໊ກຕາເຫຼົ່ານັ້ນໄປ

[໔໑໒໘] ພຣະກຸມານທັງ ໔ ເຫຼົ່ານັ້ນ ຄື ພຣະຊາລີ
ແລະພຣະກັນຫາຊິນາຖືກພາມຊູຊົກນຳໄປຢູ່
ພໍພົ້ນອອກຈາກມືພາມ ກໍພາກັນແລ່ນໄປທາງນັ້ນ ໆ

[໔໑໒໙] ລຳດັບນັ້ນ ພາມນັ້ນຖືເອົາເຊືອກແລະໄມ້ການເທົ້າ
ທຸບຕີຣາດຊະກຸມານແລະກຸມາຣີທັງ ໔ ນັ້ນແລ້ວນຳໄປ
ທັງທີ່ພຣະເວດສັນດອນພຣະເຈົ້ານະຄອນສີພີທອດພຣະເນດເຫັນຢູ່

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໔໑໗໐] ພຣະກັນຫາຊິນາໄດ້ຂາບທູນພຣະບິດາວ່າ ຂ້າແດ່ ພຣະບິດາ
ພາມນີ້ຄຽນຕີຂ້ານ້ອຍດ້ວຍໄມ້ການເທົ້າຄືຕີທາສີຜູ້ເກີດໃນເຮືອນເບ້ຍ

[໔໑໗໑] ຂ້າແດ່ ພຣະບິດາ ຜູ້ນີ້ຄົງຈະບໍ່ແມ່ນພາມເປັນແນ່
ຍ້ອນພາມທັງຫຼາຍເປັນຜູ້ມີທຳ
ແຕ່ພາມຄົງຈະເປັນຍັກແປງເພດເປັນພາມ
ນຳລູກທັງ ໒ ໄປເພື່ອຈະກິນເປັນອາຫານ ຂ້ານ້ອຍ
ລູກທັງ ໒ ຖືກພາມຜູ້ເປັນຜີສາດນຳໄປ
ຂ້າແດ່ ພຣະບິດາ ເປັນຫຍັງນໍ ພຣະອົງຈຶ່ງເມີນເສີຍຢູ່ນໍ

(ພຣະກັນຫາຊິນາໄດ້ຍ່າງຮ່ຳໄຮໄປວ່າ)

[໔໑໗໒] ຕີນຂອງເຮົາທັງ ໒ ນີ້ຍັງນ້ອຍໆເປັນທຸກ ທັງຫົນທາງກໍໄກ
ຍ່າງໄປໄດ້ແສນຍາກ ເມື່ອພຣະອາທິດຄ້ອຍລົງຕ່ຳ
ພາມກໍເລັ່ງເຮົາທັງ ໒ ໃຫ້ຟ້າວຍ່າງ

[໔໑໗໓] ເຮົາທັງ ໒ ຂໍໂອດຄວນຂາບໄຫວ້ເທບພະເຈົ້າທັງຫຼາຍ
ຜູ້ສິງສະຖິດຢູ່ຕາມພູເຂົາ ລຳເນົາໄພ ສະນ້ຳ
ແລະນ້ຳອອກບໍ່ ທີ່ມີທ່າສວຍງາມ ດ້ວຍຂະໜ່ອມ

[໔໑໗໔] ຂໍເທບພະເຈົ້າທັງຫຼາຍຜູ້ສິງສະຖິດຢູ່ຕາມປ່າຫຍ້າ ລະດາວັນ
ຕົ້ນໄມ້ທີ່ເປັນໂອສົດ ເທິງພູຜາ ແລະປ່າໄມ້
ຂໍໃຫ້ຊ່ອຍຂາບທູນພຣະມານດາວ່າ ເຮົາທັງ ໒ ນີ້ບໍ່ມີພະຍາດ
ພາມນີ້ນຳເຮົາທັງ ໒ ໄປ

[໔໑໗໕] ອັນໜຶ່ງ ເທບພະເຈົ້າຜູ້ຈະເລີນທັງຫຼາຍ ຂໍໃຫ້ທ່ານທັງຫຼາຍ
ຈົ່ງຊ່ອຍຂາບທູນພຣະແມ່ເຈົ້າມັດທີຜູ້ເປັນພຣະມານດາຂອງເຮົາທັງ ໒ ວ່າ
ຖ້າພຣະແມ່ເຈົ້າປາຖະໜາຈະສະເດັດຕິດຕາມມາ
ກໍໃຫ້ຟ້າວສະເດັດຕິດຕາມມາໂດຍໄວ

[໔໑໗໖] ທາງນີ້ເປັນທາງຍ່າງໄປໄດ້ຄົນດຽວ ຊື່ໄປສູ່ອາສົມ
ພຣະມານດາເພິ່ງສະເດັດຕິດຕາມມາທາງນັ້ນທໍ່ນັ້ນ
ກໍຈະທັນໄດ້ເຫັນເຮົາທັງ ໒ ໂດຍທັນທີ

[໔໑໗໗] ໂອນໍ ພຣະເຈົ້າແມ່ຜູ້ຊົງເພດເປັນຕາປະສິບີ

ຊຶ່ງນຳມູນຜະລາຫານມາຈາກປ່າ
ໄດ້ເຫັນອາສົມອັນວ່າງເປົ່າ ພຣະອົງຈັກເປັນທຸກ

[໔໑໗໘] ພຣະມານດາສະເດັດຫ່ຽວໄປສະແຫວງຫາມູນຜະລາຫານຈົນລ່ວງເວລາ
ຄົງໄດ້ມາບໍ່ແມ່ນໜ້ອຍ ຄົງບໍ່ຮູ້ວ່າ
ເຮົາທັງ ໔ ຖືກພາມຜູ້ສະແຫວງຫາຊັບຜູກມັດພາໄປ

[໔໑໗໙] ຖືກພາມຜູ້ຫຍາບຊ້າເຫຼືອເກີນ ຜູ້ສະແຫວງຫາຊັບຜູກມັດ
ລາວຄຸ້ມຕີຂ້ານ້ອຍທັງ ໔ ຄືຄົນລ້ຽງງົວຄຸ້ມຕີງົວ
ເອີກໍມື້ນີ້ ເຮົາທັງ ໔ ຈະໄດ້ເຫັນພຣະມານດາ
ສະເດັດມາຈາກການສະແຫວງຫາມູນຜະລາຫານໃນເວລາຄ່ຳ

[໔໑໘໐] ພຣະມານດາເພິ່ງປະທານໝາກໄມ້ທີ່ໃສ່ດ້ວຍນ້ຳເຜີ້ງແກ່ພາມ
ຄັ້ງນັ້ນ ພາມນີ້ຫິວກະຫາຍ ຈຶ່ງຈະບໍ່ເລັ່ງໃຫ້ເຮົາທັງ ໔ ຍ່າງ

[໔໑໘໑] ຕີນທັງ ໔ ຂອງເຮົາບວມນໍ
ພາມກໍເລັ່ງໃຫ້ເຮົາທັງ ໔ ຟ້າວຍ່າງ
ພຣະກຸມານທັງຫຼາຍຊຶ່ງຮັກແພງໃນພຣະມານດາ
ຊຶ່ງກັນແສງຮ່ຳໄຮຢູ່ບ່ອນນັ້ນດ້ວຍປະການດັ່ງນີ້

**ກັນກຸມານ ຈົບ**

## ກັນມັດທີ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໔໑໘໔] ເທວະດາເຫຼົ່ານັ້ນໄດ້ຟັງພຣະກຸມານທັງ ໔ ນັ້ນ
ຊຶ່ງກັນແສງຮ່ຳໄຮແລ້ວ ຈຶ່ງໄດ້ກ່າວກັບເທບພະບຸດທັງ ໓
ດັ່ງນີ້ວ່າ ທ່ານທັງ ໓ ຈົ່ງແປງເພດເປັນສັດຮ້າຍໃນປ່າ
ຄື ຣາດຊະສີ ເສືອໂຄ່ງ ແລະເສືອເຫຼືອງ

[໔໑໘໓] ຢ່າໃຫ້ພຣະນາງມັດທີຣາດຊະບຸດຕີສະເດັດກັບມາຈາກການສະແຫວງຫາ
ມູນຜະລາຫານໃນຕອນຄ່ຳ ແລະຢ່າໃຫ້ສັດຮ້າຍໃນປ່າ
ອັນເປັນແຄວ້ນຂອງເຮົາທັງຫຼາຍລົບກວນພຣະນາງມັດທີຣາດຊະບຸດຕີໄດ້

[๔๑๗๔] ຖ້າຣາດຊະສີ ເສືອໂຄ່ງ ແລະເສືອເຫຼືອງ
ເພິ່ງລົບກວນພຣະນາງຜູ້ຊົງສິຣິໂສມ
ພຣະຊາລີກຸມານກໍຈະມີພະຊົນຢູ່ບໍ່ໄດ້ເລີຍ
ແລ້ວພຣະກັນຫາຊີນາຈະມີພະຊົນຢູ່ໄດ້ຈັ່ງໃດ
ພຣະນາງຜູ້ຊົງລັກສະນະອັນສະຫງ່າງາມ
ຈະເພິ່ງສູນເສຍທັງພຣະສາມີແລະພຣະລູກຮັກທັງ ໔ ໄປທໍ່ນັ້ນ

(ພຣະນາງມັດທີພິຈາຣະນາວ່າ)

[๔๑๗๕] ສຽງຂອງເຮົາກໍຫຼຸດຕົກລົງ ຕາຂ້າງຂວາກໍສະເມ່ນຢູ່ຣົກ ໆ
ຕົ້ນໄມ້ທັງຫຼາຍທີ່ເຄີຍມີໝາກກໍກັບບໍ່ມີໝາກ
ແລະທຸກ ໆ ທິດກໍມືດມົນ

[๔๑๗๖] ເມື່ອພຣະນາງສະເດັດກັບບ່າຍພຣະພັກມາສູ່ອາສົມ
ໃນເວລາທີ່ພຣະອາທິດອັດສະດົງຄົດ ເຫຼົ່າສັດຮ້າຍກໍມາຢືນຂວາງທາງ

(ພຣະນາງມັດທີຮໍ່າເພິງວ່າ)

[๔๑๗๗] ເມື່ອພຣະອາທິດຄ້ອຍຕໍ່າລົງ ແລະອາສົມກໍຍັງຢູ່ໄກເກີນໄປ
ພຣະເຈົ້າອ້າຍເວດສັນດອນແລະພຣະລູກຮັກທັງ ໔ ນັ້ນ
ກໍຖ້າບໍຣິໂພກມູນຜະລາຫານທີ່ເຮົາຈັກນໍາໄປຈາກປ່ານີ້

[๔๑๗๘] ພຣະຈອມກະສັດນັ້ນປະທັບຢູ່ໃນບັນນະສາລາພຣະອົງດຽວ
ຄົງຈະຊົງປອບປະໂລມໃຫ້ລູກນ້ອຍທັງ ໔ ຜູ້ຫິວກະຫາຍ
ຖ້າທອດພຣະເນດເບິ່ງເຮົາຜູ້ຍັງມາບໍ່ເຖິງໃຫ້ຍິນດີຢ່າງແນ່ແທ້

[๔๑๗๙] ລູກນ້ອຍເຫຼົ່ານັ້ນຂອງເຮົາເປັນກໍາພ້າໜ້າສົງສານ
ໃນເວລາຄໍ່າເປັນເວລາກິນເວລາດື່ມກໍຈັກຖ້າ
ຄືລູກເນື້ອທີ່ກໍາລັງດື່ມນົມຢ່າງແນ່ແທ້

[๔๑๘๐] ລູກນ້ອຍເຫຼົ່ານັ້ນຂອງເຮົາເປັນກໍາພ້າໜ້າສົງສານ
ໃນເວລາຄໍ່າເປັນເວລາກິນເວລາດື່ມກໍຈັກຖ້າ
ຄືລູກເນື້ອທີ່ກໍາລັງຫິວນໍ້າຢ່າງແນ່ແທ້

[๔๑๘๑] ລູກນ້ອຍເຫຼົ່ານັ້ນຂອງເຮົາເປັນກໍາພ້າໜ້າສົງສານ

ຄົງຈະຢືນຖ້າຕ້ອນຮັບເຮົາ
ຄືງົວນ້ອຍຄອຍຊະເງີ້ຫາແມ່ຢ່າງແນ່ແທ້

[໔໑໘໔] ລູກນ້ອຍເຫຼົ່ານັ້ນຂອງເຮົາເປັນກຳພ້າໜ້າສົງສານ
ຄົງຈະຢືນຖ້າຕ້ອນຮັບເຮົາ
ຄືລູກຫົງທີ່ຕົກຢູ່ໃນເປືອກຕົມຢ່າງແນ່ແທ້

[໔໑໘໕] ລູກນ້ອຍເຫຼົ່ານັ້ນຂອງເຮົາເປັນກຳພ້າໜ້າສົງສານ
ຄົງຈະຢືນຖ້າຕ້ອນຮັບເຮົາຢູ່ບໍ່ໄກຈາກອາສົມ

[໔໑໘໖] ຫົນທາງທີ່ຈະໄປກໍມີຢູ່ທາງດຽວ
ແລະເປັນທາງທີ່ຍ່າງໄປໄດ້ຄົນດຽວ ໂດຍຂ້າງໜຶ່ງເປັນສະນ້ຳ
ອີກຂ້າງໜຶ່ງເປັນບຶງ ເຮົາຍັງບໍ່ເຫັນທາງອື່ນທີ່ຈະໄປສູ່ອາສົມໄດ້

[໔໑໘໗] ຂ້າແດ່ ພະຍາເນື້ອທັງຫຼາຍຜູ້ມີກຳລັງຫຼາຍໃນປ່າໃຫຍ່
ຂ້າພະເຈົ້າຂໍນອບນ້ອມແດ່ຕໍ່ທ່ານທັງຫຼາຍ
ທ່ານທັງຫຼາຍກັບຂ້າພະເຈົ້າກໍເປັນອ້າຍນ້ອງກັນໂດຍທຳ
ຂ້າພະເຈົ້າຂໍອ້ອນວອນ ຂໍທ່ານທັງຫຼາຍຈົ່ງໃຫ້ທາງແກ່ຂ້າພະເຈົ້າເທີ້ນ

[໔໑໘໘] ຂ້າພະເຈົ້າເປັນພັນລະຍາຂອງພຣະຣາດຊະບຸດຜູ້ມີສີຣິ
ຜູ້ຖືກຂັບໄລ່ຈາກນະຄອນສີພີ
ແລະຂ້າພະເຈົ້າບໍ່ໄດ້ດູໝິ່ນພຣະສະວາມີພຣະອົງນັ້ນເລີຍ
ຄືດັ່ງນາງສີດາຄອຍປະພຶດຕາມພຣະຣາມ

[໔໑໘໙] ຂໍທ່ານທັງຫຼາຍຈົ່ງຫຼີກທາງໃຫ້ເຮົາ
ແລ້ວກັບໄປຢ້ຽມລູກນ້ອຍຂອງທ່ານ
ໃນເວລາອອກຫາອາຫານໃນຕອນຄ່ຳ
ສ່ວນເຮົາກໍຈະກັບໄປຢ້ຽມລູກນ້ອຍທັງ ໒ ຄື
ພຣະຊາລີແລະພຣະກັນຫາຊິນາ

[໔໑໘໙] ອັນໜຶ່ງ ມູນຜະລາຫານນີ້ກໍມີຢູ່ຫຼາຍ
ແລະພັກສາກໍມີຢູ່ບໍ່ໜ້ອຍ ເຮົາຂໍແບ່ງໃຫ້ພວກທ່ານເຄິ່ງໜຶ່ງ
ເຮົາອ້ອນວອນແລ້ວ ຂໍທ່ານທັງຫຼາຍຈົ່ງໃຫ້ທາງແກ່ເຮົາເທີ້ນ

[໔໑໘໘] ພຣະມານດາຂອງເຮົາທັງຫຼາຍເປັນຣາດຊະບຸດຕີ

ແລະພຣະບິດາຂອງເຮົາທັງຫຼາຍກໍເປັນພຣະຣາດຊະບຸດ
ທ່ານທັງຫຼາຍກັບເຮົາເປັນອ້າຍນ້ອງກັນໂດຍທຳ
ເຮົາອ້ອນວອນແລ້ວ ຂໍທ່ານທັງຫຼາຍຈົ່ງໃຫ້ທາງແກ່ເຮົາເທີ້ນ

[໔໔໐໐] ພະຍາເນື້ອຮ້າຍທັງຫຼາຍໄດ້ຟັງວາຈາອັນມ່ວນ
ເຊິ່ງປະກອບດ້ວຍຄວາມກາຣຸນເປັນລົ້ນພົ້ນ
ຂອງພຣະນາງຜູ້ຊົງກັນແສງຮ່ຳໄຮຢູ່
ຈຶ່ງໄດ້ພາກັນຫຼີກອອກຈາກທາງໄປ

[໔໔໐໑] ລູກນ້ອຍທັງຫຼາຍຄົງຂະມຸກຂະມົວໄປດ້ວຍຝຸ່ນ
ຄົງຈະຢືນຖ້າຕ້ອນຮັບເຮົາ
ຄືງົວນ້ອຍຢືນຖ້າຊະເງີ້ຫາແມ່ຢ່າງແນ່ແທ້

[໔໔໐໔] ລູກນ້ອຍທັງຫຼາຍຄົງຂະມຸກຂະມົວໄປດ້ວຍຝຸ່ນ
ຄົງຈະຢືນຖ້າຕ້ອນຮັບເຮົາຢູ່ບ່ອນນີ້
ຄືລູກຫົງທີ່ຕົກຢູ່ໃນເປືອກຕົມຢ່າງແນ່ແທ້

[໔໔໐໓] ລູກນ້ອຍທັງຫຼາຍຄົງຂະມຸກຂະມົວໄປດ້ວຍຝຸ່ນ
ຄົງຈະຢືນຖ້າຕ້ອນຮັບເຮົາຢູ່ບ່ອນນີ້ ບໍ່ຫ່າງໄກຈາກອາສົມ

[໔໔໐໔] ລູກນ້ອຍເຫຼົ່ານັ້ນເຄີຍແຈ່ມໃສແລ່ນມາຕ້ອນຮັບເຮົາ
ຄືຈະເຮັດໃຫ້ຫະໄທຂອງເຮົາຫວັ່ນໄຫວ
ຄືລູກເນື້ອເຫັນແມ່ແລ້ວຫູຊັນແຈ່ມໃສແລ່ນໄປແລ່ນມາຮອບແມ່
ມື້ນີ້ ເຮົາບໍ່ໄດ້ເຫັນລູກນ້ອຍທັງ ໔ ຄື
ທ້າວຊາລີແລະນາງກັນຫາຊິນານັ້ນເລີຍ

[໔໔໐໕] ເຮົາລະລູກນ້ອຍທັງຫຼາຍໄວ້ອອກໄປຫາໝາກໄມ້
ຄືແມ່ແບ້ແລະແມ່ເນື້ອລະລູກນ້ອຍ ໄປຫາກິນ
ຄືປັກສີລະລູກນ້ອຍໄປຈາກຮັງ ຫຼືຄືແມ່ຣາດຊະສີ
ຜູ້ຕ້ອງການອາຫານລະລູກນ້ອຍໄວ້ອອກໄປຫາກິນ
ມື້ນີ້ ເຮົາບໍ່ເຫັນລູກນ້ອຍທັງ ໔ ຄື
ທ້າວຊາລີແລະນາງກັນຫາຊິນານັ້ນເລີຍ

[໔໔໐໖] ນີ້ຮອຍຕີນແລ່ນຫຼິ້ນໄປມາຂອງລູກນ້ອຍທັງ ໔

ຍັງຜາກົດຢູ່ຄືຮອຍຕີນຊ້າງທີ່ຕີນພູ
ນີ້ກອງຊາຍທີ່ລູກນ້ອຍທັງ ໔ ຂຶ້ນມາຫຼິ້ນ
ຍັງກະຈັດກະຈາຍຢູ່ບ່ອນໃກ້ອາສົມ
ມື້ນີ້ ເຮົາບໍ່ເຫັນລູກນ້ອຍທັງ ໔ ຄື
ທ້າວຊາລີແລະນາງກັນຫາຊິນານັ້ນເລີຍ

[໔໔໐໗] ລູກນ້ອຍທັງຫຼາຍເຄີຍຊະຊາຍໄປດ້ວຍຊາຍ
ແລະຂະມຸກຂະມົວໄປດ້ວຍຝຸ່ນ ແລ່ນເຂົ້າມາລ້ອມເຮົາຢູ່ຮອບ ໆ
ເຮົາບໍ່ໄດ້ເຫັນເດັກອ່ອນເຫຼົ່ານັ້ນ

[໔໔໐໘] ແຕ່ກ່ອນລູກນ້ອຍທັງຫຼາຍເຄີຍຕ້ອນຮັບເຮົາຜູ້ກັບມາ
ຈາກປ່າແຕ່ບ່ອນໄກ ມື້ນີ້ ເຮົາບໍ່ເຫັນລູກນ້ອຍທັງ ໔ ຄື
ທ້າວຊາລີແລະນາງກັນຫາຊິນານັ້ນເລີຍ

[໔໔໐໙] ລູກນ້ອຍທັງຫຼາຍເຄີຍໄປຖ້າຕ້ອນຮັບແມ່ ຖ້າແນມເບິ່ງເຮົາແຕ່ທີ່ໄກ
ຄືລູກແບ້ຫຼືລູກເນື້ອຖ້າຊະເງີ້ຫາແມ່
ເຮົາບໍ່ໄດ້ເຫັນເດັກອ່ອນເຫຼົ່ານັ້ນເລີຍ

[໔໔໑໐] ໜ່ວຍໝາກຕູມສີເຫຼືອງທີ່ຕົກຢູ່ນີ້
ເປັນຂອງຫຼິ້ນຂອງລູກນ້ອຍທັງ ໔ ນັ້ນ
ມື້ນີ້ ເຮົາບໍ່ໄດ້ເຫັນລູກນ້ອຍທັງ ໔ ຄື
ທ້າວຊາລີແລະນາງກັນຫາຊິນານັ້ນເລີຍ

[໔໔໑໑] ຖັນທັງ ໔ ຂອງເຮົານີ້ຍັງເຕັມໄປດ້ວຍນ້ຳນົມ
ແລະອົກຂອງເຮົາຄືຈະແຕກດັບ
ມື້ນີ້ ເຮົາບໍ່ໄດ້ເຫັນລູກນ້ອຍທັງ ໔ ຄື
ທ້າວຊາລີແລະນາງກັນຫາຊິນານັ້ນເລີຍ

[໔໔໑໔] ໃຜນໍຈະຄົ້ນຖົງ ໃຜນໍຈະຈ່ອງຖັນທັງ ໔ ຂອງເຮົາ
ມື້ນີ້ ເຮົາບໍ່ເຫັນລູກນ້ອຍທັງ ໔ ຄື
ທ້າວຊາລີແລະນາງກັນຫາຊິນານັ້ນເລີຍ
[໔໔໑໓] ເວລາຄ່ຳ ລູກນ້ອຍທັງ ໔ ຂະມຸກຂະມົວໄປດ້ວຍຝຸ່ນ
ເຄີຍແລ່ນເຂົ້າມາຈ່ອງທີ່ຖົງຂອງເຮົາ
ມື້ນີ້ ເຮົາບໍ່ໄດ້ເຫັນເດັກອ່ອນເຫຼົ່ານັ້ນເລີຍ

[໔໔໑໔] ແຕ່ກ່ອນ ອາສົມນີ້ຜາກົດແກ່ເຮົາຄືໂຮງມະໂຫຣະສົບ
ມື້ນີ້ ເມື່ອເຮົາບໍ່ເຫັນລູກນ້ອຍເຫຼົ່ານັ້ນ
ອາສົມຜາກົດຄືດັ່ງຈະໝຸນໄປ

[໔໔໑໕] ນີ້ອັນໃດ ອາສົມຈຶ່ງຜາກົດກັບເຮົາເບິ່ງງຽບສະຫງັດແທ້ນໍ
ແມ່ນຝູງກາປ່າກໍບໍ່ໄດ້ສົ່ງສຽງຮ້ອງ
ເດັກອ່ອນທັງຫຼາຍຂອງເຮົາຄົງຈະຕາຍແນ່

[໔໔໑໖] ນີ້ອັນໃດ ອາສົມຈຶ່ງຜາກົດແກ່ເຮົາເບິ່ງງຽບສະຫງັດແທ້ນໍ
ແມ່ນຝູງນົກກໍບໍ່ໄດ້ສົ່ງສຽງຮ້ອງ
ເດັກອ່ອນທັງຫຼາຍຂອງເຮົາຄົງຈະຕາຍແນ່

[໔໔໑໗] ນີ້ອັນໃດ ພຣະອົງຈຶ່ງຊົງນິດເສີຍຢູ່
ແມ່ນເມື່ອຄືນໃຈຂ້ານ້ອຍກໍຄືຝັນໄປ ແມ່ນຝູງກາປ່າກໍບໍ່ໄດ້ສົ່ງສຽງຮ້ອງ
ເດັກອ່ອນທັງຫຼາຍຂອງຂ້ານ້ອຍຄົງຈະຕາຍແນ່

[໔໔໑໘] ນີ້ອັນໃດ ພຣະອົງຈຶ່ງຊົງນິດເສີຍຢູ່
ແມ່ນເມື່ອຄືນໃຈຂ້ານ້ອຍກໍຄືຝັນໄປ ແມ່ນຝູງນົກກໍບໍ່ໄດ້ສົ່ງສຽງຮ້ອງ
ເດັກອ່ອນທັງຫຼາຍຂອງຂ້ານ້ອຍຄົງຈະຕາຍແນ່

[໔໔໑໙] ຂ້າແດ່ ພຣະລູກເຈົ້າ ເຫຼົ່າເນື້ອຮ້າຍໃນປ່າອັນງຽບສະຫງັດ
ໄດ້ກິນເດັກອ່ອນທັງຫຼາຍຂອງຂ້ານ້ອຍແລ້ວບໍຈັ່ງໃດນໍ
ຫຼືວ່າໃຜນຳເດັກອ່ອນທັງຫຼາຍຂອງຂ້ານ້ອຍໄປ

[໔໔໒໐] ເດັກອ່ອນເຫຼົ່ານັ້ນຜູ້ກຳລັງເວົ້າຈາໜ້າຮັກ
ພຣະອົງຊົງສົ່ງໄປເປັນທູດ ຫຼືວ່າຍັງຫຼັບຢູ່
ຫຼືເດັກອ່ອນເຫຼົ່ານັ້ນຂອງເຮົາອອກໄປຫຼິ້ນພາຍນອກ

[໔໔໒໑] ເສັ້ນຜົມ ລາຍມື ລາຍຕີນຂອງເດັກອ່ອນເຫຼົ່ານັ້ນບໍ່ໄດ້ຜາກົດເລີຍ
ຫຼືນົກທັງຫຼາຍມາເວີ່ນແສ່ວເອົາໄປ
ຫຼືວ່າໃຜນຳເດັກອ່ອນທັງຫຼາຍຂອງຂ້ານ້ອຍໄປ

[໔໔໒໒] ການທີ່ຂ້ານ້ອຍບໍ່ໄດ້ເຫັນລູກນ້ອຍທັງ ໒ ຄື
ທ້າວຊາລີແລະນາງກັນຫາຊິນາໃນມື້ນີ້ນັ້ນ
ເປັນທຸກຍິ່ງກວ່າການຖືກຂັບໄລ່ຈາກແຄວ້ນ
ປຽບຄືບາດທີ່ຖືກລູກສອນແທງ

[໔໔໔໓] ການທີ່ຂ້ານ້ອຍບໍ່ໄດ້ເຫັນລູກນ້ອຍທັງ ໔
ແລະພຣະອົງບໍ່ໄດ້ຕັດກັບຂ້ານ້ອຍນີ້
ເປັນຄືລູກສອນສຽບແທງຫະໄທຂອງຂ້ານ້ອຍຊ້ຳສອງ
ຫະໄທຂອງຂ້ານ້ອຍຍ່ອມຫວັ່ນໄຫວ

[໔໔໔໔] ຂ້າແດ່ ພຣະຣາດຊະບຸດ ຖ້າຄືນມື້ນີ້ພຣະອົງບໍ່ໄດ້ຕັດກັບຂ້ານ້ອຍ
ມື້ອື່ນເຊົ້າພຣະອົງຄົງຈະໄດ້ທອດພຣະເນດຂ້ານ້ອຍ
ຜູ້ປາສະຈາກຊີວິດຕາຍໄປແລ້ວ

(ພຣະເວດສັນດອນຕັດວ່າ)

[໔໔໔໕] ແມ່ມັດທີຣາດຊະບຸດຕີຜູ້ມີຮູບໂສມງົດງາມ ຜູ້ມີຍົດ
ມົວໄປສະແຫວງຫາມູນຜະລາຫານແຕ່ເຊົ້າ
ເປັນຫຍັງຈຶ່ງກັບມາຈົນມືດ

(ພຣະນາງມັດທີຂາບທູນວ່າ)

[໔໔໔໖] ພຣະອົງໄດ້ຊົງສະດັບແລ້ວບໍ່ແມ່ນບໍ
ເຊິ່ງສຽງບັນລືລັ່ນຂອງຣາດຊະສີແລະເສືອໂຄ່ງ
ຕ່າງກໍມຸ້ງມາສູ່ສະນີ້ເພື່ອຈະດື່ມນ້ຳ

[໔໔໔໗] ບຸບພະນິມິດໄດ້ເກີດມີແກ່ຂ້ານ້ອຍຜູ້ກຳລັງທ່ຽວຢູ່ໃນປ່າໃຫຍ່
ຄື ສຽມພາດຕົກຈາກມືຂອງຂ້ານ້ອຍ
ແລະກະຕ່າທີ່ຫາບຢູ່ກໍພາດຕົກຈາກບ່າ

[໔໔໔໘] ເວລານັ້ນ ຂ້ານ້ອຍຢ້ານກົວເປັນກຳລັງ
ຈຶ່ງໄດ້ທຳອັນຊະລີ ນອບນ້ອມໄປທົ່ວທຸກທິດ
ຂໍຄວາມປອດໄພເພິ່ງມີແຕ່ທີ່ນີ້ດ້ວຍເທີ້ນ

[໔໔໔໙] ຂໍພຣະຣາດຊະບຸດຂອງເຮົາຢ່າໄດ້ຖືກຣາດຊະສີ
ຫຼືເສືອເຫຼືອງບຽດບຽນເລີຍ
ຫຼືຂໍໃຫ້ເດັກອ່ອນທັງຫຼາຍຢ່າໄດ້ຖືກໝີ
ໝາປ່າ ຫຼືເສືອດາວຮັງຄວານເລີຍ

[໔໔໙໐] ສັດຮ້າຍທັງ ໓ ໃນປ່າ ຄື ຣາດຊະສີ ເສືອໂຄ່ງ

ແລະເສືອເຫຼືອງໄດ້ມາຢືນຂວາງທາງຂ້ານ້ອຍ
ຍ້ອນແນວນັ້ນ ຂ້ານ້ອຍຈຶ່ງກັບມາເຖິງໃນເວລາຄ່ຳ

(ພຣະນາງມັດທີຊົງຮ່ຳໄຮວ່າ)

[໔໔໑] ເຮົາເປັນຜູ້ບໍ່ຜະໝາດ ໝັ່ນປະຕິບັດພຣະສະວາມີ
ບຳລຸງລ້ຽງດູລູກນ້ອຍທັງຫຼາຍທຸກມື້
ຄືມານົບປະຕິບັດອາຈານ
ເຮົາເກົ້າຜົມປະພຶດພົມມະຈັນ

[໔໔໔] ນຸ່ງໜັງເສືອ ທ່ຽວໄປສະແຫວງຫາມູນຜະລາຫານ
ໃນປ່າມາທຸກວັນຄືນຍ້ອນຄວາມຮັກເຈົ້າທັງຫຼາຍ ເດີລູກນ້ອຍ

[໔໔໓] ຂີ້ມິ້ນເຫຼືອງ ໜ່ວຍໝາກຕູມສຸກແມ່ຫາມາແລ້ວ
ແລະແມ່ກໍໄດ້ນຳໝາກໄມ້ສຸກມາ ນີ້ເປັນຂອງຫຼິ້ນຂອງລູກຮັກທັງ ໔ ເດີລູກ

[໔໔໔] ຂ້າແດ່ ພຣະອົງຜູ້ຈອມກະສັດ ເຫງົ້າບົວພ້ອມທັງຝັກ
ໜໍ່ອຸບົນ ແລະກະຈັບ ທີ່ຄຸກນ້ຳເຜິ້ງ
ຂໍເຊີນພຣະອົງຊົງສະເຫວີຍພ້ອມພຣະໂອຣົດທັງຫຼາຍເທີ້ນ

[໔໔໕] ຂໍພຣະອົງໂຜດປະທານດອກບົວຫຼວງໃຫ້ທ້າວຊາລີ
ປະທານດອກໂກມຸດໃຫ້ກຸມາຣີ
ພຣະອົງຈະໄດ້ທອດພຣະເນດພຣະກຸມານທັງຫຼາຍ
ຜູ້ຊົງປະດັບດອກໄມ້ຟ້ອນລຳຢູ່
ຂ້າແດ່ ພຣະເຈົ້ານະຄອນສີພີ ຂໍພຣະອົງໂຜດຕັດຮຽກ
ພຣະໂອຣົດທັງຫຼາຍມາເທີ້ນ

[໔໔໖] ຂ້າແດ່ ພຣະອົງຜູ້ເປັນຈອມທັບ ຕໍ່ຈາກນັ້ນ
ຂໍພຣະອົງຊົງສະດັບພຣະສຸຣະສຽງອັນມ່ວນອ່ອນຫວານ
ຂອງນາງກັນຫາຊີນາຜູ້ເຊິ່ງກຳລັງເຂົ້າສູ່ອາສົມເທີ້ນ

[໔໔໗] ເຮົາທັງ ໔ ຖືກເນຣະເທດຈາກແຄວ້ນ ເປັນຜູ້ມີສຸກແລະທຸກສະເໝີກັນ
ຂ້າແດ່ ພຣະເຈົ້ານະຄອນສີພີ ເຖິງພຣະອົງກໍໂຜດທອດພຣະເນດລູກນ້ອຍທັງ ໔
ຄື ທ້າວຊາລີແລະນາງກັນຫາຊີນາເທີ້ນ

[໔໔໓໗] ຂ້ານ້ອຍຄົງໄດ້ສາບແຊ່ງສະມະນະແລະພາມ
ຜູ້ມີພົມມະຈັນເປັນເບື້ອງໜ້າ ມີສີນ ເປັນພະຫູສູດໃນໂລກເປັນແນ່
ມື້ນີ້ ຂ້ານ້ອຍຈຶ່ງບໍ່ເຫັນລູກນ້ອຍທັງ ໒
ຄື ທ້າວຊາລີແລະນາງກັນຫາຊິນາ

[໔໔໓໙] ຣຸກຂະຊາດຊະນິດຕ່າງ ໆ ເຫຼົ່ານີ້ ຄື ຕົ້ນຫວ້າ
ຕົ້ນຍາງພາຍມີງ່າຫ້ອຍຍ້ອຍ ທີ່ພຣະກຸມານທັງ ໒ ເຄີຍຫຼິ້ນມາກ່ອນ
ມື້ນີ້ ກຸມານເຫຼົ່ານັ້ນບໍ່ຜາກົດໃຫ້ເຫັນ

[໔໔໔໐] ຣຸກຂະຊາດທີ່ມີໝາກຊະນິດຕ່າງ ໆ ຄື ຕົ້ນໂພໃບ ຕົ້ນໝາກມີ້
ຕົ້ນໄຮ ແລະຕົ້ນໝາກຂວິດ ເຫຼົ່ານີ້ທີ່ກຸມານທັງ ໒ ເຄີຍມາແລ່ນຫຼິ້ນ
ມື້ນີ້ ກຸມານເຫຼົ່ານັ້ນບໍ່ຜາກົດໃຫ້ເຫັນ

[໔໔໔໑] ສວນເຫຼົ່ານີ້ກໍຍັງຕັ້ງຢູ່ ນີ້ແມ່ນ້ຳທີ່ເຢືອກເຢັນ
ທີ່ກຸມານທັງ ໒ ເຄີຍມາຫຼິ້ນ
ກຸມານທັງ ໒ ບໍ່ຜາກົດໃຫ້ເຫັນ

[໔໔໔໒] ບຸບຜະຊາດຊະນິດຕ່າງ ໆ ມີຢູ່ເທິງພູໜ່ວຍນີ້
ທີ່ກຸມານທັງ ໒ ເຄີຍທັດຊົງ
ກຸມານເຫຼົ່ານັ້ນບໍ່ຜາກົດໃຫ້ເຫັນ

[໔໔໔໓] ໝາກໄມ້ຊະນິດຕ່າງ ໆ ທີ່ມີຢູ່ເທິງພູໜ່ວຍນີ້
ທີ່ກຸມານທັງ ໒ ເຄີຍມາສະເຫວີຍ
ກຸມານເຫຼົ່ານັ້ນບໍ່ຜາກົດໃຫ້ເຫັນ

[໔໔໔໔] ຕຸ໊ກຕາຊ້າງ ຕຸ໊ກຕາມ້າ ແລະຕຸ໊ກຕາງົວ
ເຫຼົ່ານີ້ທີ່ກຸມານເຫຼົ່ານັ້ນເຄີຍຫຼິ້ນ
ກຸມານເຫຼົ່ານັ້ນບໍ່ຜາກົດໃຫ້ເຫັນ

[໔໔໔໕] ຕຸ໊ກຕາເນື້ອຊາຍຄຳນ້ອຍ ໆ ຕຸ໊ກຕາກະຕ່າຍ ຕຸ໊ກຕານົກເຄົ້າ
ຕຸ໊ກຕາຊະມົດເຫຼົ່ານີ້ຫຼວງຫຼາຍທີ່ກຸມານທັງ ໒ ເຄີຍຫຼິ້ນ
ກຸມານເຫຼົ່ານັ້ນບໍ່ຜາກົດໃຫ້ເຫັນ

[໔໔໔໖] ຕຸ໊ກຕາຫົງ ຕຸ໊ກຕານົກກະຣຽນ
ຕຸ໊ກຕານົກຍູງທີ່ມີແວວຫາງງາມວິຈິດ

ເຫຼົ່ານີ້ທີ່ກຸມານທັງ ๒ ເຄີຍຫຼິ້ນ
ກຸມານເຫຼົ່ານັ້ນບໍ່ຜາກົດໃຫ້ເຫັນ

[๒๒๔๗] ຟຸ່ມໄມ້ມີດອກບານເດຍລະດາດທຸກລະດູເຫຼົ່ານີ້
ທີ່ກຸມານທັງ ๒ ເຄີຍມາຫຼິ້ນ
ກຸມານເຫຼົ່ານັ້ນບໍ່ຜາກົດໃຫ້ເຫັນ

[๒๒๔๘] ສະໂບກຂະຣະນີທີ່ໜ້າອອນຊອນເຫຼົ່ານີ້ ມີນົກຈັກພາກສົ່ງສຽງກູ່ຂັນ
ເດຍລະດາດໄປດ້ວຍດອກມົນທາລົກ ປະທຸມ ແລະອຸບົນ
ທີ່ກຸມານທັງ ๒ ເຄີຍມາຫຼິ້ນ ກຸມານເຫຼົ່ານັ້ນບໍ່ຜາກົດໃຫ້ເຫັນ

[๒๒๔๙] ພຣະອົງບໍ່ໄດ້ຫັກຟືນ ບໍ່ໄດ້ຕັກນ້ຳ ບໍ່ໄດ້ດັງໄຟ
ຍ້ອນເຫດໃດນໍ ພຣະອົງຈຶ່ງຊົງຫງອຍເຫງົາຈຸກເຈົ່າຢູ່

[๒๒๕๐] ຍ້ອນຄົນຮັກກັບຄົນຮັກຍັງລວມກັນຢູ່
ຄວາມທຸກຮ້ອນຂອງຂ້ານ້ອຍຍ່ອມຫາຍໄປ
ມື້ນີ້ ຂ້ານ້ອຍບໍ່ໄດ້ເຫັນລູກນ້ອຍທັງ ๒
ຄື ທ້າວຊາລີແລະນາງກັນຫາຊິນາ

[๒๒๕๑] ຂ້າແດ່ ສົມມຸດຕິເທບ ຂ້ານ້ອຍບໍ່ໄດ້ເຫັນລູກນ້ອຍທັງ ๒ ຂອງຂ້ອຍ
ບໍ່ຮູ້ວ່າ ຜູ້ໃດນຳລູກນ້ອຍເຫຼົ່ານັ້ນໄປ
ແມ່ນແຕ່ຝູງກາປ່າກໍບໍ່ໄດ້ສົ່ງສຽງຮ້ອງ
ເດັກອ່ອນທັງຫຼາຍຂອງຂ້ານ້ອຍຄົງຕາຍແລ້ວເປັນແນ່

[๒๒๕๒] ຂ້າແດ່ ສົມມຸດຕິເທບ ຂ້ານ້ອຍບໍ່ໄດ້ເຫັນລູກນ້ອຍທັງ ๒ ຂອງເຮົາ
ບໍ່ຮູ້ວ່າ ຜູ້ໃດນຳລູກນ້ອຍເຫຼົ່ານັ້ນໄປ
ແມ່ນຝູງນົກກໍບໍ່ໄດ້ສົ່ງສຽງຮ້ອງ
ເດັກອ່ອນທັງຫຼາຍຂອງຂ້ານ້ອຍຄົງຕາຍແລ້ວເປັນແນ່

[๒๒๕๓] ພຣະນາງມັດທີຊົງປະຣິເວທະນາ
ພ້ອມທ່ຽວໄປແລ່ນຫາຕາມຮ່ອມພູແລະປ່າຮົກ
ໃນທ້ອງເຂົາວົງກົດນັ້ນແລ້ວສະເດັດມາຍັງອາສົມອີກ
ຊົງກັນແສງຢູ່ໃນສຳນັກພຣະຣາດຊະສະວາມີ ທູນຮ່ຳໄຮວ່າ

[๒๒๕๔] ຂ້າແດ່ ສົມມຸດຕິເທບ ຂ້ານ້ອຍບໍ່ໄດ້ເຫັນລູກນ້ອຍທັງ ๒ ຂອງເຮົາ

ແລະບໍ່ຮູ້ວ່າ ຜູ້ໃດນຳລູກນ້ອຍເຫຼົ່ານັ້ນໄປ
ແມ່ນແຕ່ຝູງກາປ່າກໍບໍ່ໄດ້ສົ່ງສຽງຮ້ອງ
ເດັກອ່ອນທັງຫຼາຍຂອງຂ້ານ້ອຍຄົງຕາຍແລ້ວເປັນແນ່

[໔໘໕໔] ຂ້າແດ່ ສົມມຸດຕິເທບ ຂ້ານ້ອຍບໍ່ເຫັນລູກນ້ອຍທັງ ໔ ຂອງເຮົາ
ແລະບໍ່ຮູ້ວ່າ ຜູ້ໃດນຳລູກນ້ອຍເຫຼົ່ານັ້ນໄປ
ແມ່ນແຕ່ຝູງນົກກໍບໍ່ສົ່ງສຽງຮ້ອງ
ເດັກອ່ອນທັງຫຼາຍຂອງຂ້ານ້ອຍຄົງຕາຍແລ້ວເປັນແນ່

[໔໘໕໕] ຂ້າແດ່ ສົມມຸດຕິເທບ ຂ້ານ້ອຍບໍ່ເຫັນລູກນ້ອຍທັງ ໔ ຂອງເຮົາ
ແລະບໍ່ຮູ້ວ່າຜູ້ໃດນຳລູກນ້ອຍເຫຼົ່ານັ້ນໄປ
ທັງທີ່ທ່ຽວໄປຫາທີ່ເຫງົ້າໄມ້ ພູ ແລະຖ້ຳ

[໔໘໕໖] ພຣະນາງມັດທີຣາດຊະບຸດຕີຜູ້ຊົງພຣະຮູບໂສມງົດງາມ ຜູ້ມີພຣະຍົດ
ປະຄອງພຣະພາຫາຮ່ຳໄຮລົ້ມລົງ ທີ່ພື້ນດິນ
ແທບພຣະບາດທັງສອງຂອງພຣະເວດສັນດອນນັ້ນນັ້ນເອງດ້ວຍປະການດັ່ງນີ້

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໔໘໕໗] ພຣະເວດສັນດອນຣາດຊະລືສີຊົງກອບນ້ຳປະພົມ
ພຣະນາງມັດທີຣາດຊະບຸດຕີຜູ້ສະເດັດມາເຝົ້າພຣະອົງ
(ຊົງວິສັນຍີລົ້ມລົງແທບພຣະບາດທັງສອງຂອງພຣະອົງ)
ຊົງຮູ້ວ່າ ພຣະນາງຊົງຟື້ນພຣະອົງດີແລ້ວ
ຈຶ່ງໄດ້ຕັດພຣະດຳຣັດນີ້ກັບພຣະນາງວ່າ

[໔໘໕໘] ມັດທີ ເຮົາບໍ່ຢາກຈະບອກຄວາມທຸກແກ່ນາງແຕ່ທຳອິດກ່ອນ
ພາມແກ່ຍາຈົກຜູ້ຕົກຍາກມາສູ່ອາສົມ
[໔໘໕໙] ເຮົາໄດ້ໃຫ້ລູກນ້ອຍທັງ ໔ ແກ່ພາມນັ້ນໄປ
ມັດທີ ນາງຢ່າໄດ້ຢ້ານເລີຍ ນາງຈົ່ງດີໃຈເທີ້ນ
ມັດທີ ນາງຢ່າເຫັນລູກນ້ອຍທັງ ໔ ເລີຍ ຢ່າໄດ້ຮ້ອງໄຫ້ໄປເລີຍ
ເມື່ອເຮົາຍັງຊີວິດຢູ່ ບໍ່ມີໂລກໄພ ກໍຈັກໄດ້ພົບລູກນ້ອຍທັງ ໔ ແນ່
[໔໘໖໑] ສັດຕະບຸຣຸດເຫັນຍາຈົກມາຫາແລ້ວເພິ່ງໃຫ້ບຸດ ປະສຸສັດ
ທັນຍະຊາດ ແລະຊັບອື່ນໃດໃນເຮືອນ
ມັດທີ ຂໍນາງຈົ່ງອະນຸໂມທະນາປຸດຕະທານອັນສູງສຸດຂອງເຮົາເທີ້ນ

(ພຣະນາງມັດທີຂາບທູນວ່າ)

[໔໔໖໔] ຂ້າແດ່ ສົມມຸດຕິເທບ ຂ້ານ້ອຍຂໍອະນຸໂມທະນາ
ປຸດຕະທານອັນສູງສົ່ງຂອງພຣະອົງ
ຂໍພຣະອົງພຣະຣາດຊະທານປຸດຕະທານອັນສູງສົ່ງແລ້ວ
ຊົງເຮັດພຣະຫະໄທໃຫ້ຜ່ອງໃສເທີ້ນ
ຂໍພຣະອົງຈົ່ງຊົງພ່ຳເພັງທານໃຫ້ຍິ່ງ ໆ ຂຶ້ນໄປເທີ້ນ

[໔໔໖໕] ຂ້າແດ່ ພຣະອົງຜູ້ເປັນໃຫຍ່ແຫ່ງຊົນ
ໃນໝູ່ມະນຸດຜູ້ເປັນຄົນຂີ້ຖີ່
ພຣະອົງຜູ້ຜະດຸງຣັດໃຫ້ຈະເລີນແກ່ຊາວນະຄອນສີພີ
ໄດ້ຊົງພ່ຳເພັງທານແກ່ພາມແລ້ວ

[໔໔໖໖] ແຜ່ນດິນກໍບັນລືລັ່ນແກ່ພຣະອົງ
ກິດຕິສັບຂອງພຣະອົງບັນລືໄປເຖິງສະຫວັນຊັ້ນໄຕຣທິບ
ສາຍຟ້າກໍແມບເຫຼື້ອມເມືອບມາບຢູ່ໂດຍຮອບ
ດັງສະທ້ານຄືປານດັ່ງວ່າພູຈະພັງທະລາຍລົງ

[໔໔໖໗] ເທບພະເຈົ້າທັງ ໔ ໝູ່ຜູ້ສິງສະຖິດຢູ່ທີ່ພູນາຣະທະ
ຕ່າງຖວາຍອະນຸໂມທະນາແດ່ພຣະເວດສັນດອນນັ້ນວ່າ
ພຣະອິນ ພຣະພົມ ທ້າວປະຊາບໍດີ
ພຣະໂສມ ຍົມຍັກ ທ້າວເວດສຸວັນມະຫາຣາດ
ແລະເທບພະເຈົ້າເຫຼົ່າສະຫວັນຊັ້ນຕາວະຕິງສາ
ພ້ອມທັງພຣະອິນທຸກາຖ້ວນໜ້າ ຕ່າງກໍຖວາຍອະນຸໂມທະນາ

[໔໔໖໘] ພຣະນາງມັດທີຣາດຊະບຸດຕີຜູ້ຊົງຮູບໂສມງົດງາມ
ຜູ້ມີພຣະຍົດ ກໍຊົງອະນຸໂມທະນາປຸດຕະທານ
ອັນສູງສຸດຂອງພຣະເວດສັນດອນແລ້ວດ້ວຍປະການດັ່ງນີ້ແລ

**ກັນມັດທີ ຈົບ**

# ກັນສັກກະບັນ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໔໔໗໗] ຕໍ່ຈາກນັ້ນ ເມື່ອຣາຕີສະຫວ່າງແລ້ວ ດວງອາທິດຂຶ້ນແລ້ວ
ທ້າວສັກກະເທວະຣາດຊົງແປງເພດເປັນພາມ
ໄດ້ຜາກົດແກ່ກະສັດທັງ ໔ ພຣະອົງນັ້ນແຕ່ເຊົ້າມືດ

(ພາມທູນຖາມວ່າ)

[໔໔໗໘] ພຣະຜູ້ເປັນເຈົ້າບໍ່ມີໂຣຄາພາດບຽດບຽນບໍນໍ
ຊົງພຣະກະເສມສຳຣານດີບໍ
ພຣະຜູ້ເປັນເຈົ້າລ້ຽງອັດຕະພາບດ້ວຍການສະແຫວງຫາມູນຜະລາຫານສະດວກບໍ
ມູນຜະລາຫານມີຫຼາຍບໍ

[໔໔໗໙] ເຮືອດ ຍຸງ ແລະສັດເລືອຄານມີໜ້ອຍບໍ
ໃນປ່າທີ່ມີເນື້ອຮ້າຍຢູ່ສາລະວົນບໍ່ມີມາບຽດບຽນບໍ

(ພຣະເວດສັນດອນຕອບວ່າ)

[໔໔໘໐] ທ່ານພາມ ເຮົາບໍ່ມີພະຍາດມາບຽດບຽນ ເປັນສຸກສຳຣານດີ
ອັນໜຶ່ງ ເຮົາລ້ຽງອັດຕະພາບດ້ວຍການສະແຫວງຫາມູນຜະລາຫານ
ແລະມູນຜະລາຫານກໍມີຢູ່ຫຼາຍ

[໔໔໘໑] ອັນໜຶ່ງ ເຮືອດ ຍຸງ ແລະສັດເລືອຄານກໍມີໜ້ອຍ
ໃນປ່າທີ່ມີເນື້ອຮ້າຍຢູ່ສາລະວົນ ກໍບໍ່ມີມາບຽດບຽນເຮົາເລີຍ

[໔໔໘໒] ເມື່ອພວກເຮົາມີຊີວິດເສົ້າໂສກຢູ່ໃນປ່າມາຕະຫຼອດ ໗ ເດືອນ
ເຮົາຍ່ອມເຫັນທ່ານຜູ້ເປັນພາມ ຜູ້ຊົງເພດອັນປະເສີດ
ບູຊາໄຟ ຖືໄມ້ການເທົ້າສີດັ່ງໜ່ວຍໝາກຕູມສຸກ
ແລະໝາກເຕົ້ານ້ຳນີ້ເປັນຄົນທີ ໔

[໔໔໘໓] ມະຫາພາມ ທ່ານມາດີແລ້ວ ບໍ່ໄດ້ມາຮ້າຍ
ທ່ານຜູ້ຈະເລີນ ຂໍເຊີນເຂົ້າໄປພາຍໃນ ເຊີນລ້າງຕີນຂອງທ່ານເທີ້ນ

[໔໔໘໔] ພາມ ໝາກພັບ ໝາກຫາດ ໝາກຊາງ

ໝາກເມົ່າທີ່ມີຣົດຫວານຄືນ້ຳເຜີ້ງ
ເຊີນທ່ານເລືອກບໍຣິໂພກແຕ່ໜ່ວຍທີ່ດີ ໆ ເທີ້ນ

[໔໔໑໔] ມະຫາພາມ ແມ່ນນ້ຳດື່ມນີ້ກໍເຢັນສະນິດເຮົານຳມາຈາກຮ່ອມພູ
ຖ້າທ່ານຕ້ອງການກໍເຊີນດື່ມເທີ້ນ

[໔໔໑໕] ອັນໜຶ່ງ ທ່ານມາເຖິງປ່າໃຫຍ່ ຍ້ອນເຫດໃດ
ຫຼືຍ້ອນປັດໄຈອັນໃດ
ເຮົາຖາມແລ້ວ ຂໍທ່ານຈົ່ງບອກຄວາມນັ້ນແກ່ເຮົາ

(ພາມຂາບທູນວ່າ)

[໔໔໑໖] ແມ່ນ້ຳຍັງເຕັມປ່ຽມຕະຫຼອດເວລາບໍ່ເຫືອດແຫ້ງສັນໃດ
ພຣະອົງຊົງມີພຣະຫະໄທເຕັມປ່ຽມດ້ວຍສັດທາສັນນັ້ນ
ຂ້າພຣະອົງທູນຂໍແລ້ວ ຂໍພຣະອົງຊົງພຣະກະລຸນາ
ພຣະຣາດຊະທານພຣະຊາຍາແກ່ຂ້າພຣະອົງເທີ້ນ

(ພຣະເວດສັນດອນຕັດວ່າ)

[໔໔໑໗] ທ່ານພາມ ທ່ານຂໍສິ່ງໃດ ເຮົາຈະໃຫ້ສິ່ງນັ້ນ
ເຮົາບໍ່ໄດ້ຫວັ່ນໄຫວເລີຍ ເຮົາບໍ່ເຊື່ອງສິ່ງຂອງທີ່ມີຢູ່
ໃຈຂອງເຮົາຍິນດີໃນທານ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໔໔໑໘] ພຣະເວດສັນດອນຜູ້ຜະດຸງຣັດໃຫ້ຈະເລີນແກ່ຊາວນະຄອນສີພີ
ຊົງກຸມພຣະຫັດຂອງພຣະນາງມັດທີ ຊົງຈັບເຕົ້ານ້ຳ
ຫຼັ່ງນ້ຳພຣະຣາດຊະທານພຣະນາງມັດທີໃຫ້ເປັນທານແກ່ພາມ
[໔໔໑໐] ຂະນະນັ້ນ ເມື່ອພຣະມະຫາກະສັດ
ຊົງບໍລິຈາກພຣະນາງມັດທີໃຫ້ເປັນທານ
ຄວາມເປັນຕາຢ້ານຂົນຫົວລຸກໄດ້ເກີດຂຶ້ນ
ແຜ່ນດິນກໍຫວັ່ນໄຫວ
[໔໔໑໑] ພຣະນາງມັດທີບໍ່ໄດ້ມີພຣະພັກເງົ້າງໍ ບໍ່ໄດ້ຊົງເກີ້ເຂີນ
ແລະບໍ່ໄດ້ຊົງກັນແສງ ຊົງຈ້ອງເບິ່ງພຣະສະວາມີໂດຍດຸດສະນີພາບ
ໂດຍຄິດວ່າ ພຣະອົງຍ່ອມຊົງຮູ້ສິ່ງທີ່ປະເສີດ

(ພຣະສາດສະດາຕັດພຣະດຳຣັດນີ້ວ່າ)

ເມື່ອຕະຖາຄົດເປັນພຣະເວດສັນດອນ
ບໍລິຈາກທ້າວຊາລີແລະນາງກັນຫາຊິນາເຊິ່ງເປັນທິດາ
ແລະພຣະມັດທີເທວີຜູ້ມີຂໍ້ວັດປະຕິບັດອັນດີ ຜູ້ຢຳເກງໃນພຣະສະວາມີ
ບໍ່ໄດ້ຄຶດເສຍດາຍເລີຍ ຍ້ອນເຫດແຫ່ງພຣະໂພທິຍານທໍ່ນັ້ນ
ບຸດທັງ ໔ ເປັນທີ່ກຽດຊັງຂອງເຮົາກໍເປັນໄປບໍ່ໄດ້
ພຣະນາງມັດທີເທວີຈະບໍ່ເປັນທີ່ຮັກຂອງເຮົາກໍເປັນໄປບໍ່ໄດ້
ແຕ່ພຣະສັບພັນຍຸຕະຍານເປັນທີ່ຮັກຂອງເຮົາ
ດັ່ງນັ້ນ ເຮົາຈຶ່ງໄດ້ໃຫ້ຂອງເຊິ່ງເປັນທີ່ຮັກ

(ຕໍ່ມາ ພຣະນາງມັດທີຂາບທູນວ່າ)

[໔໔໗໔] ຂ້ານ້ອຍເປັນພຣະຊາຍາຂອງພຣະອົງຕັ້ງແຕ່ຍັງເປັນສາວລຸ້ນ
ພຣະອົງຊົງເປັນພຣະສະວາມີຜູ້ເປັນໃຫຍ່ຂອງຂ້ານ້ອຍ
ພຣະອົງຊົງປາຖະໜາຈະພຣະຣາດຊະທານຂ້ານ້ອຍແກ່ຜູ້ໃດ
ກໍຊົງພຣະຣາດຊະທານແກ່ຜູ້ນັ້ນເທີ້ນ
ຫຼືຊົງປາຖະໜາຈະຂາຍຫຼືຈະຂ້າ ກໍຊົງຂາຍຫຼືຊົງຂ້າເທີ້ນ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໔໔໗໕] ທ້າວສັກກະຈອມເທບຊົງຮູ້ພຣະດຳຣິຂອງກະສັດທັງ ໔ ນັ້ນ
ຈຶ່ງໄດ້ຕັດດັ່ງນີ້ວ່າ ຂ້າເສິກທັງມວນ°ທັງທີ່ເປັນຂອງທິບແລະເປັນຂອງມະນຸດ
ພຣະອົງຊົງຊະນະແລ້ວ

[໔໔໗໖] ແຜ່ນດິນກໍບັນລືລັ່ນແກ່ພຣະອົງ
ກິດຕິສັບຂອງພຣະອົງບັນລືໄປເຖິງສະຫວັນຊັ້ນໄຕຣທິບ
ສາຍຟ້າກໍແມບເຫຼື້ອມເມືອບມາບຢູ່ໂດຍຮອບ
ດັງສະທ້ານຄືປານດັ່ງວ່າພູພັງທະລາຍລົງ

[໔໔໗໗] ເທບພະເຈົ້າທັງ ໔ ໝູ່ຜູ້ສິງສະຖິດຢູ່ທີ່ພູນາຣະທະ
ຕ່າງຖວາຍອະນຸໂມທະນາແດ່ພຣະເວດສັນດອນນັ້ນວ່າ
ພຣະອິນ ພຣະພົມ ທ້າວປະຊາບໍດີ
ພຣະໂສມ ຍົມຍັກ ທ້າວເວດສຸວັນມະຫາຣາດແລະຫວຍເທບທັງມວນ
ຕ່າງກໍຖວາຍອະນຸໂມທະນາວ່າ ພຣະອົງຊົງກະທຳສິ່ງທີ່ເຮັດໄດ້ຍາກແທ້

[໔໔໗໖] ສັດຕະບຸຣຸດທັງຫຼາຍເມື່ອຈະໃຫ້ທານຊື່ວ່າໃຫ້ໄດ້ຍາກ໌
ເມື່ອຈະເຮັດກຳກໍຊື່ວ່າເຮັດໄດ້ຍາກ
ທຳຂອງສັດຕະບຸຣຸດທັງຫຼາຍພວກອະສັດຕະບຸຣຸດຮູ້ໄດ້ຍາກ

[໔໔໗໗] ຍ້ອນແນວນັ້ນ ສັດຕະບຸຣຸດແລະອະສັດຕະບຸຣຸດ
ຈຶ່ງມີຄະຕິທີ່ໄປຈາກໂລກນີ້ຕ່າງກັນ ຄື
ພວກອະສັດຕະບຸຣຸດຍ່ອມໄປສູ່ນະຣົກ ພວກສັດຕະບຸຣຸດຍ່ອມໄປສູ່ສະຫວັນ

[໔໔໗໘] ການທີ່ພຣະອົງສະເດັດມາປະທັບຢູ່ໃນປ່າ
ໄດ້ພຣະຣາດຊະທານພຣະກຸມານທັງຫຼາຍແລະພຣະຊາຍາໃຫ້ເປັນທານນີ້
ຊື່ວ່າເປັນຍານອັນປະເສີດ ບໍ່ເປັນຍານທີ່ພາກ້າວລົງສູ່ອະບາຍພູມ
ຂໍມະຫາທານຂອງພຣະອົງຈົ່ງອອກຜົນໃນສະຫວັນເທີ້ນ

(ທ້າວສັກກະຕັດວ່າ)

[໔໔໗໙] ຂ້າພະເຈົ້າຂໍຖວາຍພຣະນາງມັດທີພຣະຊາຍາ
ຜູ້ມີຄວາມງາມທົ່ວສັບພາງກາຍຄືນແກ່ພຣະຜູ້ເປັນເຈົ້າ
ພຣະອົງທັ່ງນັ້ນຊົງເປັນຜູ້ຄູ່ຄວນກັບພຣະນາງມັດທີ
ແລະພຣະນາງມັດທີກໍເປັນຜູ້ຄູ່ຄວນແກ່ພຣະສະວາມີ

[໔໔໘໐] ນ້ຳນົມແລະສັງທັງ ໔ ມີສີຄືກັນສັນໃດ
ພຣະອົງແລະພຣະນາງມັດທີກໍຊົງມີພຣະຫະໄທສະເໝີຄືກັນສັນນັ້ນ

[໔໔໘໑] ທັງ ໔ ພຣະອົງເປັນກະສັດຜູ້ສົມບູນດ້ວຍພຣະໂຄດ
ເປັນອຸພະໂຕສຸຊາດ໌ທັງຝ່າຍພຣະມານດາແລະພຣະບິດາ
ຊົງຖືກເນຣະເທດຈາກແຄວ້ນມາຢູ່ທີ່ອາສົມໃນປ່ານີ້
ບຸນທັງຫຼາຍທີ່ພຣະອົງກະທຳມາແລ້ວສັນໃດ
ຂໍພຣະອົງຊົງໃຫ້ທານ ກະທຳບຸນຢູ່ບໍ່ສິ້ນສຸດສັນນັ້ນ

[໔໔໘໔] ຂ້າແດ່ ພຣະຣາດຊະລືສີ ຂ້ານ້ອຍເປັນທ້າວສັກກະຈອມເທບ
ມາໃນສຳນັກຂອງພຣະອົງ ຂໍພຣະອົງຊົງເລືອກຮັບພອນ
ຂ້ານ້ອຍຂໍຖວາຍພອນ ໘ ປະການແກ່ພຣະອົງ

(ພຣະເວດສັນດອນຕັດວ່າ)

[໔໔໙] ຂ້າແດ່ທ້າວສັກກະຜູ້ຊົງເປັນໃຫຍ່ແຫ່ງພູດທັງປວງ
ຖ້າພຣະອົງຈະປະສາດພອນແກ່ຂ້ານ້ອຍ
ຂໍໃຫ້ພຣະບິດາຈົ່ງມາຮັບຂ້ານ້ອຍ
ຂໍພຣະບິດາຊົງຕ້ອນຮັບຂ້ານ້ອຍ
ຜູ້ອອກຈາກປ່ານີ້ໄປເຖິງເຮືອນຂອງຕົນດ້ວຍຣາດຊະອາດ
ນີ້ເປັນພອນປະການທີ ໑

[໔໔໔] ຂໍໃຫ້ຂ້ານ້ອຍບໍ່ເພິ່ງພໍໃຈການຂ້າຄົນ
ອັນໜຶ່ງ ແມ່ນຜູ້ນັ້ນຈະເປັນນັກໂທດເຖິງປະຫານຊີວິດ
ຜູ້ກະທຳຄວາມຜິດແນວຮ້າຍແຮງ
ຂໍໃຫ້ຂ້ານ້ອຍເພິ່ງໄດ້ປົດປ່ອຍໃຫ້ພົ້ນຈາກການຖືກປະຫານຊີວິດ
ນີ້ເປັນພອນປະການທີ ໔

[໔໔໕] ຂໍໃຫ້ປະຊາຊົນທັງຫຼາຍທັງຄົນແກ່ ທັງເດັກ ແລະຄົນປານກາງ
ເພິ່ງເຂົ້າມາອາໄສຂ້ານ້ອຍລ້ຽງຊີວິດ
ນີ້ເປັນພອນປະການທີ ໓

[໔໔໖] ຂໍໃຫ້ຂ້ານ້ອຍຢ່າເພິ່ງລ່ວງລະເມີດພັນລະຍາຜູ້ອື່ນ
ພໍໃຈແຕ່ໃນພັນລະຍາຂອງຕົນບໍ່ໄປສູ່ອຳນາດຂອງຍິງທັງຫຼາຍ
ນີ້ເປັນພົນປະການທີ ໔

[໔໔໗] ຂ້າແດ່ທ້າວສັກກະ ຂໍໃຫ້ບຸດຂອງຂ້ານ້ອຍຜູ້ພັດພາກໄປນັ້ນ
ເພິ່ງມີອາຍຸຍືນຍາວ ຈົ່ງຄອບຄອງແຜ່ນດິນໂດຍທຳເທີ້ນ
ນີ້ເປັນພອນປະການທີ ໕

[໔໔໘] ຕໍ່ຈາກນັ້ນ ເມື່ອຣາຕີສະຫວ່າງແລ້ວ ດວງອາທິດຂຶ້ນແລ້ວ
ຂໍໃຫ້ອາຫານທິບເພິ່ງຜາກົດ
ນີ້ເປັນພອນປະການທີ ໖

[໔໔໙] ເມື່ອຂ້ານ້ອຍໃຫ້ທານຢູ່ ຂໍຢ່າໃຫ້ວັດຖຸທານໝົດສິ້ນໄປ
ເມື່ອກຳລັງໃຫ້ ຂໍໃຫ້ຂ້ານ້ອຍເພິ່ງເຮັດໃຈໃຫ້ຜ່ອງໃສ
ເມື່ອໃຫ້ແລ້ວ ຂໍຢ່າໃຫ້ຂ້ານ້ອຍໄດ້ເດືອດຮ້ອນໃຈໃນພາຍຫຼັງ
ນີ້ເປັນພອນປະການທີ ໗

[໔໓໐໐] ເມື່ອພົ້ນຈາກອັດຕະພາບນີ້ໄປ
ຂໍໃຫ້ຂ້ານ້ອຍໄປສູ່ສະຫວັນ ອັນເປັນການໄປພິເສດ
ເມື່ອຈຸຕິຈາກພົບນັ້ນແລ້ວ ບໍ່ຕ້ອງກັບມາເກີດອີກ
ນີ້ເປັນພອນປະການທີ ໘

[໔໓໐໑] ເມື່ອໄດ້ສະດັບພຣະດຳຣັດຂອງພຣະເວດສັນດອນແລ້ວ
ທ້າວສັກກະຈອມເທບໄດ້ຕັດພຣະດຳຣັດດັ່ງນີ້ວ່າ
ຄົງບໍ່ດົນປານໃດ ພຣະບິດາບັງເກີດເກົ້າຂອງພຣະອົງ
ກໍຄົງຈະສະເດັດມາຢ້ຽມພຣະອົງ

[໔໓໐໒] ເມື່ອຕັດພຣະດຳຣັດນີ້ແລ້ວ ທ້າວມະຄະວານສຸຊຳບໍດີເທວະຣາດ
ກໍໄດ້ພຣະຣາດຊະທານພອນແກ່ພຣະເວດສັນດອນແລ້ວ
ສະເດັດກັບໄປສູ່ໝູ່ຊາວສະຫວັນ

**ກັນສັກກະບັນ ຈົບ**

# ກັນມະຫາຣາດ

(ພຣະເຈົ້າສິບໄຊທອດພຣະເນດເຫັນ ໒ ກຸມານຈຶ່ງຕັດວ່າ)

[໔໓໐໓] ນັ້ນໃຜນໍ ໜ້າງາມຍິ່ງດັ່ງຄຳທຳມະຊາດ
ທີ່ນາຍຊ່າງຫຼໍ່ຫຼອມດ້ວຍໄຟ ສີໃສສຸກປັ່ງ
ດັ່ງແທ່ງຄຳທຳມະຊາດທີ່ລະລາຍຄວ້າງຢູ່ທີ່ປາກເບົ້າ

[໔໓໐໔] ເດັກອ່ອນເຫຼົ່ານີ້ມີອະໄວຍະວະຄ້າຍຄືງກັນ
ມີລັກສະນະຄ້າຍຄືງກັນ ຄື
ຄົນໜຶ່ງຄືທ້າວຊາລີ
ອີກຄົນຄືນາງກັນຫາຊິນາ

[໔໓໐໕] ເດັກອ່ອນເຫຼົ່ານີ້ມີຮູບສະເໝີກັນຄືຣາດຊະສີອອກຈາກຖ້ຳຄຳ
ເດັກອ່ອນເຫຼົ່ານີ້ຜາກົດຄືຫຼໍ່ຫຼອມ
ດ້ວຍຄຳທຳມະຊາດເລີຍແທ້ນາ

[໔໓໐໖] ພາຣະທະວາຊະພາມ ທ່ານໄດ້ນຳ
ເດັກອ່ອນເຫຼົ່ານີ້ມາຈາກບ່ອນໃດ

ມື້ນີ້ ທ່ານໄດ້ມາເຖິງແຄວ້ນຂອງເຮົາແລ້ວ
ຈະໄປທາງໃດຕໍ່ໄປ

(ຊູຊົກຂາບທູນວ່າ)

[໔໗໐໗] ຂ້າແດ່ ສົມມຸດຕິເທບ
ເດັກອ່ອນເຫຼົ່ານີ້ມີຜູ້ໃຫ້ແກ່ຂ້າພຣະອົງດ້ວຍຄວາມພໍໃຈ
ຕັ້ງແຕ່ວັນທີ່ໄດ້ເດັກອ່ອນເຫຼົ່ານີ້ມາ ມື້ນີ້ເປັນຄືນທີ ໑໕

(ພຣະເຈົ້າສົນໄຊຕັດວ່າ)

[໔໗໐໘] ດ້ວຍວາຈາມ່ວນອັນໃດນໍ ທ່ານຈຶ່ງໄດ້ເດັກອ່ອນເຫຼົ່ານີ້ມາ
ທ່ານຄວນເຮັດໃຫ້ເຮົາເຊື່ອໂດຍວິທີທີ່ຊອບ
ໃຜໃຫ້ປຸດຕະທານອັນສູງສຸດນັ້ນແກ່ທ່ານ

(ຊູຊົກຂາບທູນວ່າ)

[໔໗໐໙] ພຣະຣາຊາຜູ້ຊົງເປັນບ່ອນເພິ່ງຂອງພວກຍາຈົກທີ່ມາທູນຂໍ
ເປັນດັ່ງທໍຣະນີເປັນບ່ອນເພິ່ງຂອງສັດທັງຫຼາຍ
ຄືພຣະເວດສັນດອນຜູ້ສະເດັດໄປປະທັບຢູ່ໃນປ່າ
ໄດ້ພຣະຣາດຊະທານພຣະໂອຣົດທັງຫຼາຍແກ່ຂ້າພຣະອົງ

[໔໗໑໐] ພຣະຣາຊາຜູ້ຊົງເປັນທີ່ຕ້ອງປະສົງຂອງພວກຍາຈົກຜູ້ມາທູນຂໍ
ເປັນດັ່ງສາຄອນອັນເປັນທີ່ຮອງຮັບຂອງແມ່ນ້ຳທັງຫຼາຍທີ່ຫຼັ່ງໄຫຼມາ
ຄືພຣະເວດສັນດອນຜູ້ສະເດັດໄປປະທັບຢູ່ໃນປ່າ
ໄດ້ພຣະຣາດຊະທານພຣະໂອຣົດທັງຫຼາຍແກ່ຂ້າພຣະອົງ

(ພວກອຳມາດຕິຕຽນພຣະເວດສັນດອນວ່າ)

[໔໗໑໑] ທ່ານຜູ້ຈະເລີນທັງຫຼາຍ ພຣະຣາຊາຜູ້ມີສັດທາ
ຊົງຢູ່ຄອບຄອງເຮືອນ ຊົງເຮັດກຳທີ່ບໍ່ສົມຄວນນໍ
ພຣະເວດສັນດອນຖືກເນຣະເທດອອກຈາກແຄວ້ນໄປຢູ່ໃນປ່າ
ຈະເພິ່ງພຣະຣາດຊະທານພຣະໂອຣົດທັງຫຼາຍໄດ້ແນວໃດນໍ

[໔໗໑໒] ທ່ານຜູ້ຈະເລີນທັງຫຼາຍ ຊາວພຣະນະຄອນມີປະມານທໍ່ໃດ
ທີ່ມາປະຊຸມກັນຢູ່ໃນບ່ອນນີ້ ຂໍທຸກທ່ານຈົ່ງຊ່ອຍກັນພິຈາລະນາເບິ່ງເລື້ອງນີ້

ພຣະເວດສັນດອນປະທັບຢູ່ໃນປ່າ
ໄດ້ພຣະຣາດຊະທານພຣະໂອຣົດທັງຫຼາຍໄດ້ແນວໃດ

[໔໓໑໓] ພຣະອົງຈິ່ງພຣະຣາດຊະທານຂ້າທາດ ທາສີ ມ້າ ແມ່ມ້າອັດສະດອນ
ລົດ ແລະຊ້າງກຸນຊອນໂຕປະເສີດໄປເທີ້ນ
ເປັນຫຍັງ ຈິ່ງຊົງພຣະຣາດຊະທານເດັກອ່ອນທັງຫຼາຍນໍ

(ພຣະຊາລີກຸມານຂາບທູນວ່າ)

[໔໓໑໔] ຂ້າແດ່ ສົມເດັດພຣະໄອຍະກາ ໃນເຮືອນຂອງຜູ້ໃດບໍ່ມີຂ້າທາດ
ມ້າ ແມ່ມ້າອັດສະດອນ ລົດ ແລະຊ້າງກຸນຊອນໂຕປະເສີດ
ຜູ້ນັ້ນຈະເພິ່ງໃຫ້ອັນໃດ

(ພຣະເຈົ້າສົນໄຊຕັດວ່າ)

[໔໓໑໕] ບຸດນ້ອຍທັງຫຼາຍ ປູ່ສັນເສີນທານແຫ່ງບິດາຂອງເຈົ້ານັ້ນ
ບໍ່ໄດ້ຕິຕຽນເລີຍ ຫະໄທແຫ່ງບິດາຂອງເຈົ້າເປັນແນວໃດນໍ
ຈິ່ງໄດ້ໃຫ້ເຈົ້າທັງ ໔ ແກ່ພາມວະນິພົກ

(ພຣະຊາລີກຸມານຂາບທູນວ່າ)

ຂ້າແດ່ ພຣະໄອຍະກາມະຫາຣາດ ພຣະບິດາຂອງຂ້ານ້ອຍ
ພຣະຣາດຊະທານພວກຂ້ານ້ອຍແກ່ພາມວະນິພົກແລ້ວ
ໄດ້ຊົງສະດັບຄໍາເວົ້າຮ່ໍາໄຮກັນແສງເຊິ່ງນ້ອງກັນຫາໄດ້ກ່າວແລ້ວ

[໔໓໑໖] ຂ້າແດ່ ສົມເດັດພຣະໄອຍະກາ ພຣະຫະໄທຂອງພຣະບິດານັ້ນ
ເປັນທຸກແລະຮ້ອນຮົນ ມີດວງພຣະເນດແດງດັ່ງດາວໂຣຫິນີ
ມີພຣະອັດສຸຊົນຫຼັ່ງໄຫຼ

[໔໓໑໗] ນ້ອງກັນຫາຊິນາໄດ້ຂາບທູນພຣະບິດາວ່າ
ຂ້າແດ່ ພຣະບິດາ ພາມນີ້ຄ້ຽນຕີຂ້ານ້ອຍ
ດ້ວຍໄມ້ການເທົ້າຄືຕີທາສີຜູ້ເກີດໃນເຮືອນເບ້ຍ

[໔໓໑໘] ຂ້າແດ່ ພຣະບິດາ ຜູ້ນີ້ຄົງຈະບໍ່ແມ່ນພາມແນ່
ຍ້ອນພາມທັງຫຼາຍເປັນຜູ້ມີທໍາ
ແຕ່ພາມຄົງຈະເປັນຍັກແປງເພດເປັນພາມ

ນຳລູກທັງ ໔ ໄປເພື່ອຈະກິນເປັນອາຫານ ຂ້ານ້ອຍ
ລູກທັງ ໔ ຖືກພາມຜູ້ເປັນຜີສາດນຳໄປ
ຂ້າແດ່ ພຣະບິດາ ເປັນຫຍັງນໍ ພຣະອົງຈິ່ງຊົງເມີນເສີຍຢູ່ນໍ

(ພຣະເຈົ້າສົນໄຊຕັດວ່າ)

[໔໓໑໗] ມານດາຂອງເຈົ້າທັງຫຼາຍ ເປັນພຣະຣາດຊະບຸດຕີ
ບິດາເປັນຣາດຊະບຸດ ເຈົ້າທັງຫຼາຍ ເຄີຍຂື້ນນັ່ງຕັກຂອງປູ່
ແຕ່ບັດນີ້ ຍ້ອນເຫດໃດ ຈິ່ງຢືນຢູ່ຫ່າງໄກນໍ

(ພຣະຊາລີກຸມານຂາບທູນວ່າ)

[໔໓໔໐] ພຣະມານດາຂອງຂ້ານ້ອຍທັງຫຼາຍ ເປັນພຣະຣາດຊະບຸດຕີ
ແລະພຣະບິດາກໍເປັນພຣະຣາດຊະບຸດ
ແຕ່ຂ້ານ້ອຍທັງຫຼາຍ ເປັນຂ້າທາດຂອງພາມ
ຍ້ອນແນວນັ້ນ ຈິ່ງຢືນຢູ່ຫ່າງໄກ ຂ້ານ້ອຍ

(ພຣະເຈົ້າສົນໄຊຕັດວ່າ)

[໔໓໔໑] ເຈົ້າທັງຫຼາຍກ່າວແນວນີ້ບໍ່ຖືກເລີຍ
ຫະໄທຂອງປູ່ກຳລັງຮ້ອນຮົນ ກາຍຂອງປູ່ຄືຢູ່ເທິງກອງຟອນ
ປູ່ບໍ່ຮັບຄວາມສຸກເທິງຣາດຊະອາດເລີຍ

[໔໓໔໔] ເຈົ້າທັງຫຼາຍກ່າວແນວນີ້ບໍ່ຖືກເລີຍ
ຢ່າໄດ້ຕື່ມຄວາມໂສກເສົ້າໃຫ້ເກີດແກ່ປູ່ເລີຍ
ປູ່ຈັກໄຖ່ເຈົ້າທັງຫຼາຍດ້ວຍຊັບ ເຈົ້າທັງຫຼາຍຈັກບໍ່ເປັນຂ້າທາດ

[໔໓໔໓] ທ້າວຊາລີ ບິດາຂອງເຈົ້າທັງຫຼາຍ
ໄດ້ຕີລາຄາພວກເຈົ້າໄວ້ທີ່ໃດ ຈິ່ງໃຫ້ພາມ
ຂໍໃຫ້ເຈົ້າທັງຫຼາຍຈົ່ງບອກປູ່ຕາມຄວາມຈິງ
ພະນັກງານທັງຫຼາຍຈົ່ງໃຫ້ພາມຮັບເອົາຊັບໄປເທີ້ນ

(ພຣະຊາລີກຸມານຂາບທູນວ່າ)

[໔໓໔໔] ຂ້າແດ່ ພຣະໄອຍະກາ ພຣະບິດາຊົງຕີລາຄາຂ້ານ້ອຍ
ມີຄ່າທີ່ລາຄາຄຳ ໑,໐໐໐ ແທ່ງ

ຊົງຕິລາຄານ້ອງກັນຫາຊີນາຣາດຊະກັນຍາ
ດ້ວຍສັດພາຫະນະມີຊ້າງເປັນຕົ້ນແນວລະ ໑໐໐
ແລ້ວຈຶ່ງໄດ້ພຣະຣາດຊະທານໃຫ້ແກ່ພາມ

(ພຣະເຈົ້າສົນໄຊຕັດວ່າ)

[໔໓໔໕] ມະຫາດນ້ອຍ ເຈົ້າຈຶ່ງລຸກຂຶ້ນ ຟ້າວໄປນຳທາສີ ຂ້າທາດ ງົວ ຊ້າງ
ແລະງົວອຸສະພະຣາດແນວລະ ໑໐໐ ກັບຄຳ ໑,໐໐໐ ແທ່ງ
ມາໃຫ້ແກ່ພາມ ເປັນຄ່າໄຖ່ບຸດທັງຫຼາຍ

[໔໓໔໖] ລຳດັບນັ້ນ ພະນັກງານຟ້າວໄປນຳທາສີ ຂ້າທາດ ງົວ ຊ້າງ
ແລະງົວອຸສະພະຣາດແນວລະ ໑໐໐ ມາໃຫ້ແກ່ພາມ
ເປັນຄ່າໄຖ່

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໔໓໔໗] ກະສັດທັງ ໔ ຊົງໄຖ່ແລ້ວ
ຮັບສັ່ງໃຫ້ອາບນ້ຳແລະໃຫ້ສະເຫວີຍພຣະກະຍາຫານສຳເລັດ
ໃຫ້ປະດັບດ້ວຍອາພອນທັງຫຼາຍແລ້ວ
ສົມເດັດພຣະໄອຍະກາຊົງອຸ້ມເດັກອ່ອນອົງໜຶ່ງ
ສົມເດັດພຣະໄອຍິກາຊົງອຸ້ມອົງໜຶ່ງ

[໔໓໔໘] ພຣະກຸມານທັງ ໔ ຊົງສົງພຣະສຽນແລ້ວ
ຊົງພຣະພູສາອັນສະອາດ ຊົງປະດັບດ້ວຍອາພອນທັງປວງແລ້ວ
ພຣະຣາຊາຜູ້ພຣະໄອຍະກາກໍຊົງອຸ້ມພຣະຊາລີຂຶ້ນປະທັບເທິງພຣະເພົາ

[໔໓໔໙] ພຣະກຸມານທັງ ໔ ຊົງປະດັບກຸນທົນ
ທີ່ມີສຽງດັງກ້ອງໜ້າອອນຊອນໃຈ
ຊົງປະດັບດອກໄມ້ແລະເຄື່ອງປະດັບທັງປວງແລ້ວ
ພຣະຣາຊາຊົງອຸ້ມພຣະຊາລີກຸມານຂຶ້ນປະທັບ
ເທິງພຣະເພົາແລ້ວໄດ້ຕັດຖາມດັ່ງນີ້ວ່າ

[໔໓໕໐] ທ້າວຊາລີ ພຣະບິດາແລະພຣະມານດາທັງ ໔ ຂອງເຈົ້າ
ບໍ່ມີພະຍາດດອກບໍ ລ້ຽງອັດຕະພາບດ້ວຍການສະແຫວງຫາ
ຜະລາຫານບໍ ມູນຜະລາຫານມີຫຼາຍບໍ

[໔໓໓໑] ເຮືອດ ຍຸງ ແລະສັດເລືອຄານມີໜ້ອຍບໍ
ໃນປ່າທີ່ມີເນື້ອຮ້າຍສາລະວັນ ບໍ່ມີມາບຽດບຽນບໍ

(ພຣະຊາລີກຸມານຂາບທູນວ່າ)

[໔໓໓໔] ຂ້າແດ່ ສົມມຸດຕິເທບ ພຣະບິດາແລະພຣະມານດາຂອງຂ້ານ້ອຍ
ທັງ ໔ ພຣະອົງນັ້ນບໍ່ມີພະຍາດ
ລ້ຽງອັດຕະພາບດ້ວຍການສະແຫວງຫາຜະລາຫານ ແລະມູນຜະລາຫານກໍມີຫຼາຍ

[໔໓໓໓] ອັນໜຶ່ງ ເຮືອດ ຍຸງ ແລະສັດເລືອຄານກໍມີໜ້ອຍ
ໃນປ່າທີ່ມີສັດຮ້າຍສາລະວັນ ກໍບໍ່ມີມາບຽດບຽນ
ເຊິ່ງພຣະບິດາແລະພຣະມານດາທັງ ໔ ພຣະອົງນັ້ນເລີຍ

[໔໓໓໔] ພຣະມານດາຂອງຂ້ານ້ອຍຊົງຂຸດຮາກບົວ ເຫງົ້າບົວ
ຊົງແມ້ນໝາກກະທັນ ໝາກຮົກຟ້າ ແລະໝາກຕູມ
ນຳມາລ້ຽງພຣະບິດາແລະຂ້ານ້ອຍທັງ ໔

[໔໓໓໕] ພຣະມານດານັ້ນຊົງນຳມູນຜະລາຫານໃດມາຈາກປ່າ
ພຣະບິດາແລະຂ້ານ້ອຍທັງ ໔ ມາລວມກັນ
ສະເຫວີຍມູນຜະລາຫານນັ້ນໃນທຸກຄືນວັນ

[໔໓໓໖] ພຣະມານດາຂອງຂ້ານ້ອຍທັງ ໔ ເປັນກະສັດສຸຂຸມາລະຊາດ
ຕ້ອງມາທ່ຽວສະແຫວງຫາໝາກໄມ້ ມີພຣະສະຫວີວັນຈ່ອຍເຫຼືອງ
ຍ້ອນລົມແລະແດດ ຄືດອກບົວຫຼວງທີ່ຖືກຍ່ອງດ້ວຍມື

[໔໓໓໗] ເມື່ອພຣະມານດາສະເດັດທ່ຽວໄປໃນປ່າໃຫຍ່
ເຊິ່ງເປັນປ່າທີ່ມີສັດຮ້າຍສາລະວັນ
ເປັນບ່ອນຢູ່ອາໄສຂອງແຮດແລະເສືອເຫຼືອງ
ພຣະເກສາຂອງພຣະອົງກໍຫຼົ່ນ

[໔໓໓໘] ພຣະມານດາຊົງເກົ້າພຣະເມົາລີ
ຊົງໄວ້ເຊິ່ງເທື່ອໄຄທີ່ພຣະກັດສະ ຊົງພຣະພູສາໜັງເສືອ
ບັນທົມເໜືອແຜ່ນດິນແລະຊົງບູຊາໄຟ

[໔໓໓໙] ບຸດທັງຫຼາຍເກີດມາແລ້ວເປັນທີ່ຮັກຂອງມະນຸດໃນໂລກ
ພຣະໄອຍະກາຂອງເຮົາທັງຫຼາຍບໍ່ເກີດພຣະສິເນຫາໃນພຣະໂອຣົດເປັນແນ່

(ພຣະເຈົ້າສົນໄຊຕັດວ່າ)

[໔໓໔໐] ຫຼານຮັກ ຈິງແນວນັ້ນ ການທີ່ປູ່ໃຫ້ເນຣະເທດ
ເຊິ່ງພຣະບິດາຂອງເຈົ້າຜູ້ບໍ່ມີໂທດຍ້ອນຄຳເວົ້າຂອງຊາວນະຄອນສີພີນັ້ນ
ຊື່ວ່າປູ່ໄດ້ເຮັດກຳຊົ່ວຮ້າຍ
ແລະຊື່ວ່າປູ່ໄດ້ເຮັດກຳທີ່ທຳລາຍຄວາມຈະເລີນແລ້ວ

[໔໓໔໑] ສິ່ງໃດສິ່ງໜຶ່ງຂອງປູ່ມີຢູ່ໃນນະຄອນນີ້ກໍດີ
ຊັບແລະທັນຍະຊາດໃດ ໆ ມີຢູ່ກໍດີ
ຂໍໃຫ້ພຣະເຈົ້າເວດສັນດອນຈົ່ງມາເປັນເຈົ້າປົກຄອງສິ່ງນັ້ນ ໆ ໃນນະຄອນສີພີເທີ້ນ

(ພຣະຊາລີກຸມານຂາບທູນວ່າ)

[໔໓໔໒] ຂໍເດຊະສົມມຸດຕິເທບ ພຣະບິດາຂອງຂ້ານ້ອຍ
ເປັນຜູ້ສູງສຸດແຫ່ງຊາວນະຄອນສີພີຄົງຈັກບໍ່ສະເດັດມາຍ້ອນຄຳຂອງຂ້ານ້ອຍ
ຂໍໃຫ້ພຣະອົງຜູ້ສົມມຸດຕິເທບສະເດັດໄປຊົງອະພິເສກ
ພຣະບິດາຂອງຂ້ານ້ອຍດ້ວຍໂພຄະທັງຫຼາຍດ້ວຍພຣະອົງເອງເທີ້ນ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໔໓໔໓] ລຳດັບນັ້ນ ພຣະເຈົ້ານະຄອນສົນໄຊຈຶ່ງໄດ້ຮັບສັ່ງເສນາບໍດີວ່າ
ກອງທັບ ຄື ກອງພົນຊ້າງ ກອງພົນມ້າ ກອງພົນລົດ
ກອງພົນຣາບຈົ່ງກະກຽມອາວຸດໃຫ້ພ້ອມ
ຊາວນິຄົມ ພາມ ແລະພວກປຸໂຣຫິດຈົ່ງຕາມເຮົາໄປ

[໔໓໔໔] ຕໍ່ຈາກນັ້ນ ເຫຼົ່າທະຫານ ໖໐,໐໐໐ ນາຍຜູ້ສະງ່າງາມ
ມັດສອດ(ອາວຸດ)ແລ້ວ ປະດັບດ້ວຍຜ້າສີຕ່າງ ໆ ກັນ
ຈົ່ງພາກັນຟ້າວຕາມມາໂດຍໄວ

[໔໓໔໕] ເຫຼົ່າທະຫານຜູ້ມັດສອດ(ອາວຸດ)ແລ້ວ
ປະດັບປະດາດ້ວຍເສື້ອຜ້າສີຕ່າງ ໆ ກັນ ຄື
ພວກໜຶ່ງແຕ່ງດ້ວຍຜ້າສີຂຽວ ພວກໜຶ່ງແຕ່ງສີເຫຼືອງ
ພວກໜຶ່ງແຕ່ງສີແດງ ພວກໜຶ່ງແຕ່ງສີຂາວຈົ່ງຟ້າວຕາມມາ

[໔໓໔໖] ພູຄັນທະມາດມີກິ່ນຫອມຖືກທີມະປົກຄຸມ

ເດຍລະດາດໄປດ້ວຍພືກສາຊາດນານາຊະນິດ
ເປັນບ່ອນອາໄສຢູ່ຂອງຝູງສັດຫຼວງຫຼາຍ

[໔໓໔໗] ແລະມີຕົ້ນໄມ້ທີ່ເປັນທິບພະຍະໂອສົດ
ສະຫວ່າງສະໄຫວແລະຟຸ້ງກະຈາຍໄປທົ່ວທິດສັນໃດ
ຂໍເຫຼົ່າທະຫານຜູ້ມັດສອດ(ອາວຸດ)ແລ້ວຈົ່ງຟ້າວຕາມມາ
ແລະຈົ່ງຮຸ່ງເຮືອງມີກຽດຕິຍົດຟຸ້ງຊ່າລືໄປທົ່ວທິດສັນນັ້ນເທີ້ນ

[໔໓໔໘] ຕໍ່ຈາກນັ້ນ ຈົ່ງຈັດທຽມຊ້າງທີ່ສູງໃຫຍ່ ໑໔,໐໐໐ ເຊືອກ
ມີສາຍຮັດປະຄັບຄຳມີເຄື່ອງປະດັບ
ແລະເຄື່ອງປົກຄຸມຫົວທີ່ສຳເລັດແລ້ວດ້ວຍຄຳ

[໔໓໔໙] ມີນາຍຄວານຊ້າງຖືໂຕມອນແລະຂໍ
ຂຶ້ນຂີ່ຄໍປະຈຳ ກຽມພ້ອມທັງປວງ
ປະດັບຕົກແຕ່ງສວຍງາມ ຈົ່ງຟ້າວຕາມມາ

[໔໓໕໐] ຕໍ່ຈາກນັ້ນ ຈົ່ງຈັດມ້າສິນທົບຊາດອາຊາໄນ
໑໔,໐໐໐ ໂຕ ທີ່ແລ່ນໄວ

[໔໓໕໑] ພ້ອມດ້ວຍນາຍສາຣະຖີຜູ້ປະດັບດ້ວຍເຄື່ອງປະດັບ
ຖືແສ້ແລະດາບສັ້ນ ມັດສອດ(ອາວຸດ)ຂຶ້ນຂີ່ປະຈຳຫຼັງ

[໔໓໕໒] ຕໍ່ຈາກນັ້ນ ຈົ່ງຈັດທຽມກະບວນລົດ ໑໔,໐໐໐ ຄັນ
ທີ່ມີເຫຼັກຫຸ້ມກົງລໍ້ຢ່າງແໜ້ນໜາ ເຮືອນຣົດຂະຈິດດ້ວຍຄຳ

[໔໓໕໓] ຈົ່ງຍົກທຸງຂຶ້ນປັກໄວ້ເທິງລົດຄັນນັ້ນ ໆ
ພວກນາຍຂະມັງທະນູຜູ້ຍິງໄດ້ແມ່ນຍຳ ວ່ອງໄວຊ່ຽວຊານ
ໃນລົດທັງຫຼາຍ ຈົ່ງກຽມໂລ່ເກາະ ແລະແລ່ງທະນູໄວ້ໃຫ້ພ້ອມ
ທະຫານເຫຼົ່ານີ້ຈົ່ງກະກຽມໃຫ້ພ້ອມແລ້ວຟ້າວຕາມມາ

[໔໓໕໔] ຂໍຈົ່ງໃຫ້ໂຮຍເຂົ້າຕອກ ດອກໄມ້
ມາໄລ ຂອງຫອມ ແລະເຄື່ອງລູບທາເທີ້ນ
ແລະຈົ່ງໃຫ້ຈັດຕັ້ງເຄື່ອງບູຊາອັນມີຄ່າ
ຕາມທາງທີ່ພຣະເຈົ້າເວດສັນດອນໂອຣົດຂອງເຮົາຈັກສະເດັດມາ

[໔໓໕໘] ໃນເຮືອນແຕ່ລະໝູ່ບ້ານ ຈຶ່ງໃຫ້ຕັ້ງໝໍ້ສຸຣາແລະເມໄຣໄວ້
ໝູ່ລະ ໑໐໐ ໝໍ້ທີ່ຫົນທາງທີ່ພຣະເຈົ້າເວດສັນດອນໂອຣົດຂອງເຮົາຈັກສະເດັດມາ

[໔໓໕໙] ຈຶ່ງໃຫ້ຕັ້ງມັງສາຫານ ເຂົ້າໜົມ ເຂົ້າໜົມແດກງາ
ເຂົ້າໜົມກຸມມາດ ທີ່ປຸງດ້ວຍຊີ້ນປາໄວ້ໃກ້ທາງ
ທີ່ພຣະເຈົ້າເວດສັນດອນໂອຣົດຂອງເຮົາຈັກສະເດັດມາ

[໔໓໕໗] ຈຶ່ງໃຫ້ຕັ້ງເນີຍໃສ ນ້ຳມັນ ນົມສົ້ມ ນົມສົດ
ເຂົ້າໜົມແປ້ງ ເຂົ້າຟ່າງ ແລະສຸຣາເປັນຈຳນວນຫຼາຍ
ໄວ້ໃກ້ທາງທີ່ພຣະເຈົ້າເວດສັນດອນໂອຣົດຂອງເຮົາຈັກສະເດັດມາ

[໔໓໕໘] ໃຫ້ມີພະນັກງານພິເສດທັງຄົວຫວານແລະຄົວຄາວ
ຈັດຕັ້ງໄວ້ເພື່ອປະຊາຊົນທົ່ວໄປ
ໃຫ້ມີມະໂຫຣະສົບຟ້ອນລຳຂັບຮ້ອງທຸກ ໆ ແນວ
ເພງຕົບມື ກອງຍາວ ຄົນຂັບເສພາ
ແລະຄົນຜູ້ບັນເທົາຄວາມໂສກເສົ້າ[១]

[໔໓໕໙] ພວກມະໂຫຣີຈຶ່ງຫຼິ້ນດົນຕີ
ດີດພິນພ້ອມທັງຕີກອງນ້ອຍກອງໃຫຍ່
ເປົ່າຫອຍສັງ ຕີກອງໜ້າດຽວ

[໔໓໖໐] ຕີກອງຕະໂພນ ແກວ່ງບັນເດາະ ເປົ່າຫອຍສັງ ດີດຈະເຂ້
ແລະຕີກອງໃຫຍ່ ກອງນ້ອຍ

(ພຣະສາດສະດາເມື່ອຈະຊີ້ງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໔໓໖໑] ກອງທັບຂອງນະຄອນສີພີເປັນກອງທັບໃຫຍ່
ທີ່ຈັດເປັນກະບວນຕັ້ງໄວ້ສຳເລັດແລ້ວ
ມີພຣະຊາລີຣາດຊະກຸມານເປັນຜູ້ນຳທາງ ໄດ້ຍາຕາໄປສູ່ເຂົາວົງກົດ

[໔໓໖໒] ຊ້າງພາຍອາຍຸ ໖໐ ປີ ມີສາຍຮັດປະຄັບຄຳ
ມັດຕົກແຕ່ງໄວ້ ບັນລືກ້ອງໂກນຈະນາດກະທຶ່ມຢູ່
ຊ້າງວາຣະນະກໍບັນລືໂກນຈະນາດກະທຶ່ມຢູ່

[໔໓໖໓] ເຫຼົ່າມ້າອາຊາໄນກໍແຜດສຽງແຫຼມດັງລັ່ນ

ສຽງກົງລໍ້ດັງກຶກກ້ອງ ຝຸ່ນລະອອງຟຸ້ງກະຈາຍເຖິງນະພາກາດ
ກອງທັບຂອງຊາວນະຄອນສີພີກໍຈັດກະບວນຕັ້ງໄວ້ດີແລ້ວ

[໔໙໒໔] ກອງທັບນັ້ນເປັນກອງທັບໃຫຍ່ ຈັດເປັນກະບວນຕັ້ງໄວ້
ສາມາດທຳລາຍລ້າງອະຣິຣາດຊະສັດຕູໄດ້
ມີພຣະຊາລີຣາດຊະກຸມານເປັນຜູ້ນຳທາງ ໄດ້ຍາຕາໄປສູ່ເຂົາວົງກົດ

[໔໙໒໕] ພຣະເຈົ້ານະຄອນສີນໄຊພ້ອມດ້ວຍຂ້າຣາດຊະບໍຣິພານເຫຼົ່ານັ້ນ
ສະເດັດເຂົ້າໄປສູ່ປ່າໃຫຍ່ມີງ່າໄມ້ຫຼວງຫຼາຍແລະສາຍນ້ຳ
ເດຍລະດາດໄປດ້ວຍຕົ້ນໄມ້ດອກແລະຕົ້ນໄມ້ໃຫ້ໝາກທັງ ໔ ຢ່າງ

[໔໙໒໖] ໃນປ່າໃຫຍ່ນັ້ນ ມີນົກຫຼາກຫຼາຍສີ
ມີສຽງກ່ອມມ່ວນ ຈັບຢູ່ເທິງຕົ້ນໄມ້ທີ່ແຕກດອກຕາມລະດູ
ຮ້ອງປະສານສຽງ ສຽງຣະເບງເປັນຄູ່ ໆ

[໔໙໒໗] ພຣະເຈົ້ານະຄອນສີນໄຊພ້ອມດ້ວຍຣາດຊະບໍຣິພານເຫຼົ່ານັ້ນ
ສະເດັດພຣະຣາດຊະດຳເນີນໄປສູ່ທາງໄກ
ລ່ວງເລີຍຫຼາຍມື້ຫຼາຍຄືນ
ຈຶ່ງບັນລຸເຖິງປະເທດທີ່ພຣະເວດສັນດອນປະທັບຢູ່

**ກັນມະຫາຣາດ ຈົບ**

## ກັນສະກະສັດ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໔໙໒໘] ພຣະເວດສັນດອນໄດ້ຊົງສະດັບສຽງກຶກກ້ອງແຫ່ງກອງທັບເຫຼົ່ານັ້ນ
ກໍຕົກພຣະທະໄທຢ້ານ ສະເດັດຂຶ້ນພູ ຊົງຫວາດຫວັ່ນພັ່ນພຶງ
ທອດພຣະເນດເບິ່ງກອງທັບ ຕັດວ່າ

[໔໙໒໙] ເຊີນເບິ່ງເທີ້ນມັດທີ ສຽງກຶກກ້ອງເຊັ່ນໃດໃນປ່າ
ມ້າອາຊາໄນສົ່ງສຽງແຜດຮ້ອງກ້ອງສະໜັ່ນ ຍາກົດຍອດທຸງໄຫວ ໆ
[໔໙໓໐] ນາຍພານເຫຼົ່ານີ້ໄດ້ຊຶງຕາໜ່າງລ້ອມໝູ່ເນື້ອໃນປ່າ
ໄລ່ຕ້ອນໃຫ້ຕົກລົງໃນຂຸມແລ້ວ ໄລ່ສຽບແທງດ້ວຍຫອກອັນຄົມ
ຄັດເລືອກເອົາຊີ້ນເຫຼົ່ານັ້ນໂຕອ້ວນ ໆ ສັນໃດ

[໔໓໗໑] ເຮົາທັງ ໔ ກໍສັນນັ້ນ ເປັນຜູ້ບໍ່ມີໂທດ
ຖືກຂັບໄລ່ຈາກແຄວ້ນມາຢູ່ໃນປ່າ
ຈຶ່ງຕົກຢູ່ໃນເງື້ອມມືຂອງພວກສັດຕູເປັນແນ່
ຈົ່ງເບິ່ງຖ້າຈັ່ງຊັ້ນຄົນຜູ້ຂ້າຄົນທີ່ບໍ່ມີກຳລັງ

(ພຣະນາງມັດທີຂາບທູນວ່າ)

[໔໓໗໔] ພວກສັດຕູຍ່ຳຍີພຣະອົງບໍ່ໄດ້
ປຽບຄືໄຟຍ່ຳຍີແມ່ນ້ຳບໍ່ໄດ້ສັນນັ້ນ
ຂໍພຣະອົງຈົ່ງຊົງຣະນຶກເຖິງຂໍ້ນັ້ນນັ້ນແລ
ແຕ່ນີ້ໄປຈະເພິ່ງມີແຕ່ຄວາມໂດຍປອດໄພ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໔໓໗໓] ລຳດັບນັ້ນ ພຣະເຈົ້າເວດສັນດອນໄດ້ສະເດັດລົງຈາກພູ
ປະທັບນັ່ງໃນບັນສາລາ ຊົງຕັ້ງພຣະທະໄທໃຫ້ໜັກແໜ້ນ

[໔໓໗໔] ພຣະບິດາຮັບສັ່ງໃຫ້ຖອຍລົດກັບ ໃຫ້ວາງກຳລັງກອງທັບໄວ້ແລ້ວ
ສະເດັດເຂົ້າໄປຫາພຣະໂອຣົດຜູ້ປະທັບຢູ່ໃນປ່າພຽງລຳພັງ

[໔໓໗໕] ສະເດັດລົງຈາກຄໍຊ້າງພຣະທີ່ນັ່ງ ຊົງປຽງພຣະອັງສາ
ປະນົມພຣະຫັດ ຫ້ອມລ້ອມແຫ່ແຫນດ້ວຍໝູ່ອຳມາດ
ສະເດັດໄປເພື່ອອະພິເສກພຣະໂອຣົດ

[໔໓໗໖] ຢູ່ບ່ອນນັ້ນ ພຣະອົງໄດ້ທອດພຣະເນດເຫັນ
ພຣະໂອຣົດຊົງເພດເປັນບັນພະຊິດ
ປະທັບນັ່ງເຂົ້າຊານຢູ່ໃນບັນສາລາ
ເປັນສະມາທິແນ່ວແນ່ ບໍ່ມີໄພແຕ່ບ່ອນໃດ

[໔໓໗໗] ພຣະເວດສັນດອນແລະພຣະນາງມັດທີ
ທອດພຣະເນດເຫັນພຣະບິດາ
ຜູ້ມີຄວາມຮັກໃນບຸດກຳລັງສະເດັດມາ
ໄດ້ຊົງຕ້ອນຮັບຖວາຍອະພິວາດ

[໔໓໗໘] ຝ່າຍພຣະນາງມັດທີຊົງຊົບພຣະສຽນຖວາຍອະພິວາດ

ແທບພຣະບາດທັງສອງຂອງພຣະສັດສຸຣະ(ພໍ່ປູ່)ຂາບທູນວ່າ
ຂ້າແດ່ ສົມມຸດຕິເທບ ຂ້ານ້ອຍມັດທີສະໃພ້ຂອງພຣະອົງ
ຂໍຖວາຍບັງຄົມພຣະບາດທັງສອງ
ພຣະເຈົ້ານະຄອນສົນໄຊຊົງສວມກອດ ໔ ກະສັດ ໃຊ້ຝາພຣະຫັດ
ລູບພຣະປຣິດສະດາງຢູ່ໄປມາ ທີ່ອາສົມນັ້ນ (ຕັດວ່າ)

[໔໓໗໙] ລູກຮັກ ພວກເຈົ້າບໍ່ມີພະຍາດບຽດບຽນ ເປັນສຸກສຳຮານດີບໍ
ລ້ຽງອັດຕະພາບດ້ວຍການສະແຫວງຫາມູນຜະລາຫານສະດວກບໍ
ມູນຜະລາຫານມີຫຼາຍຢູ່ບໍ

[໔໓໘໐] ເຮືອດ ຍຸງ ແລະສັດເລືອຄານມີໜ້ອຍບໍ
ໃນປ່າທີ່ມີເນື້ອຮ້າຍສາລະວົນ ບໍ່ມາບຽດບຽນບໍ

(ພຣະເວດສັນດອນຂາບທູນວ່າ)

[໔໓໘໑] ຂ້າແດ່ ສົມມຸດຕິເທບ ພວກຂ້ານ້ອຍເປັນຢູ່ຕາມມີຕາມໄດ້
ຂ້ານ້ອຍທັງຫຼາຍເປັນຢູ່ຢ່າງຝືດເຄືອງ
ຊີວິດເປັນຢູ່ໄດ້ດ້ວຍການທ່ຽວສະແຫວງຫາ

[໔໓໘໔] ຂ້າແດ່ ມະຫາຣາດ ນາຍສາຣະຖີທໍລະມານມ້າໃຫ້ໝົດລິດສັນໃດ
ຂ້ານ້ອຍທັງຫຼາຍກໍຖືກທໍລະມານໃຫ້ໝົດລິດສັນນັ້ນ
ຄວາມໝົດລິດຍ່ອມທໍລະມານຂ້ານ້ອຍທັງຫຼາຍ

[໔໓໘໓] ຂ້າແດ່ ມະຫາຣາດ ເມື່ອຂ້ານ້ອຍທັງຫຼາຍ
ຖືກເນຣະເທດມາມີຊີວິດຢູ່ຢ່າງຫງອຍເຫງົາໃນປ່າ
ຂ້ານ້ອຍທັງຫຼາຍ ມີເນື້ອໜັງຊູບຊີດຜອມລົງ
ຍ້ອນບໍ່ໄດ້ພົບພຣະບິດາແລະພຣະມານດາ

[໔໓໘໔] ຂ້າແດ່ ມະຫາຣາດ ທາຍາດຜູ້ມີມະໂນຣົດຍັງບໍ່ສົມບູນ
ຂອງຂ້ານ້ອຍຜູ້ປະເສີດແຫ່ງຊາວນະຄອນສີພີ
ຄືທ້າວຊາລີ ແລະນາງກັນຫາຊີນາ ທັງ ໔ ອົງ
ຍັງຕົກຢູ່ໃນອຳນາດຂອງພາມຜູ້ຫຍາບຊ້າ
ມັນຄ້ຽນຕີທ້າວຊາລີ ແລະນາງກັນຫາຊີນາທັງ ໔ ນັ້ນຄືຄ້ຽນຕີງົວ

[໔໓໘໕] ຖ້າພຣະອົງຊົງຮູ້

ຫຼືຊົງໄດ້ສະດັບຂ່າວລູກທັງ ໔ ຂອງພຣະຣາດຊະບຸດຕີນັ້ນ
ຂໍໄດ້ຊົງກະລຸນາຟ້າວຕັດບອກແກ່ຂ້ານ້ອຍທັງຫຼາຍດ້ວຍເທີ້ນ
ຄືໝໍຟ້າວປິ່ນປົວຄົນຜູ້ຖືກງູກັດ

(ພຣະເຈົ້າສົນໄຊຕັດວ່າ)

[໔໓໘໖] ກຸມານທັງ ໔ ຄື ທ້າວຊາລີແລະນາງກັນຫາຊິນາ
ພໍ່ໄດ້ໃຫ້ຊັບແກ່ພາມແລ້ວໄຖ່ຖອນມາ
ລູກຮັກ ລູກຢ່າໄດ້ຢ້ານເລີຍ ຈົ່ງເບົາໃຈເທີ້ນ

(ພຣະເວດສັນດອນທູນຖາມວ່າ)

[໔໓໘໗] ຂ້າແດ່ ພຣະບິດາ ພຣະອົງບໍ່ມີພະຍາດບຽດບຽນບໍ
ຊົງພຣະກະເສມສຳຣານດີບໍ
ພຣະຈັກຂຸຂອງພຣະມານດາຂອງຂ້າພຣະອົງຍັງບໍ່ເສື່ອມບໍ

(ພຣະເຈົ້າສົນໄຊຕັດວ່າ)

[໔໓໘໘] ລູກຮັກ ພໍ່ສະບາຍດີ ບໍ່ມີພະຍາດບຽດບຽນ
ອັນໜຶ່ງ ຈັກຂຸແມ່ຂອງເຈົ້າກໍບໍ່ເສື່ອມ

(ພຣະເວດສັນດອນທູນຖາມວ່າ)

[໔໓໘໙] ຣາດຊະພາຫະນະຂອງພຣະອົງທີ່ເຂົ້າທຽມແລ້ວຍັງໝັ້ນຄົງບໍ
ຣາດຊະພາຫະນະຍັງນຳພາຣະໄປໄດ້ບໍ
ຊົນນະບົດຈະເລີນດີຢູ່ບໍ ຝົນບໍ່ແຫ້ງແລ້ງບໍ

(ພຣະເຈົ້າສົນໄຊຕອບວ່າ)

[໔໓໙໐] ຣາດຊະພາຫະນະຂອງເຮົາທີ່ທຽມແລ້ວຍັງໝັ້ນຄົງ
ຣາດຊະພາຫະນະຍັງນຳພາຣະໄປໄດ້
ຊົນນະບົດກໍຈະເລີນດີ ແລະຝົນກໍບໍ່ແລ້ງ

[໔໓໙໑] ເມື່ອກະສັດທັງ ໓ ເຫຼົ່ານັ້ນກຳລັງຊົງສົນທະນາກັນແນວນີ້
ດ້ວຍປະການດັ່ງນີ້ ພຣະມານດາຜູ້ເປັນຣາດຊະບຸດຕີ
ບໍ່ຊົງສະຫຼອງພຣະບາດ ສະເດັດໄປຜາກົດທີ່ປ່ອງພູ

[໔໓໘] ພຣະເວດສັນດອນແລະພຣະນາງມັດທີທອດພຣະເນດເຫັນພຣະມານດາ
ຜູ້ມີຄວາມຮັກໃນພຣະໂອຣົດກຳລັງສະເດັດມາ
ຈຶ່ງຊີງຕ້ອນຮັບຖວາຍອະພິວາດ

[໔໓໙] ຝ່າຍພຣະນາງມັດທີຊີງຊົບພຣະສຽນເກົ້າຖວາຍອະພິວາດ
ແທບພຣະບາດທັງສອງຂອງພຣະສັດສຸ(ແມ່ຍ່າ)ຂາບທູນວ່າ
ຂ້າແດ່ ສົມເດັດພຣະໄອຍິກາ ຂ້ານ້ອຍມັດທີສະໃພ້ຂອງພຣະອົງ
ຂໍຖວາຍບັງຄົມພຣະບາດທັງສອງ

[໔໓໔] ສ່ວນບຸດນ້ອຍທັງຫຼາຍ
ສະເດັດມາແຕ່ທີ່ໄກໂດຍສະຫວັດດີພາບ
ທອດພຣະເນດເຫັນພຣະນາງມັດທີ ກໍຊີງຮ່ຳໄຮແລ່ນເຂົ້າໄປຫາ
ອຸປະມາຄືງົວນ້ອຍຖ້າຊະເງີ້ຫາແມ່ແທ້ນາ

[໔໓໕] ຝ່າຍພຣະນາງມັດທີທອດພຣະເນດເຫັນບຸດນ້ອຍທັງຫຼາຍ
ຜູ້ສະເດັດມາແຕ່ທີ່ໄກໂດຍສະຫວັດດີພາບ
ທັງສັ່ນເຊນໄປທົ່ວພຣະວໍຣະກາຍຄືແມ່ມົດ
ນ້ຳນົມກໍຫຼັ່ງໄຫຼ

[໔໓໖] ເມື່ອພຣະຍາດທັງຫຼາຍມາພ້ອມກັນແລ້ວ
ຂະນະນັ້ນ ກໍໄດ້ເກີດສຽງດັງອຶກກະທຶກກຶກກ້ອງ
ພູທັງຫຼາຍກໍມີສຽງດັງລັ່ນ
ແຜ່ນດິນສະເທືອນຫວັ່ນໄຫວ

[໔໓໗] ຝົນຕົກລົງຍັງທໍ່ທາຣະໃຫ້ຫຼັ່ງໄຫຼໄປ
ຂະນະທີ່ພຣະເຈົ້າເວດສັນດອນໄດ້ສະມາຄົມກັບພຣະຍາດທັງຫຼາຍ

[໔໓໘] ໃນການທີ່ກະສັດທັງຫຼາຍ ຄື ພຣະຣາຊາ ພຣະເທວີ ພຣະໂອຣົດ
ພຣະສຸນິສາ ແລະພຣະນັດດາທັງຫຼາຍ
ມາປະຊຸມພ້ອມກັນແລ້ວ ກໍໄດ້ເກີດອັດສະຈັນໜ້າຂົນຫົວລຸກ

[໔໓໙] ປະຊາຣາດສະດອນທັງປວງມາພ້ອມໃຈກັນ
ປະນົມມືຖວາຍບັງຄົມພຣະມະຫາກະສັດ
ຮ້ອງໄຫ້ວິງວອນພຣະເວດສັນດອນແລະພຣະນາງມັດທີ

ໃນປ່າອັນເປັນຕາຢ້ານວ່າ
ຂໍພຣະອົງຊົງເປັນພຣະຣາຊາຜູ້ເປັນໃຫຍ່ແຫ່ງຂ້າພຣະອົງທັງຫຼາຍ
ຂໍພຣະອົງທັງ ໘ ຊົງພຣະກະລຸນາສະເຫວີຍຣາດຊະສົມບັດ
ເປັນພຣະຣາຊາຜູ້ເປັນໃຫຍ່ແຫ່ງຂ້າພຣະອົງທັງຫຼາຍເທີ້ນ

**ກັນສະກະສັດ ຈົບ**

## ກັນນະຄອນກັນ

(ພຣະເວດສັນດອນຕັດວ່າ)

[໘໕໐໐] ພຣະບິດາ ຊາວຊົນນະບົດ ແລະຊາວນິຄົມ
ໄດ້ພ້ອມໃຈກັນເນຣະເທດຂ້ານ້ອຍ
ຜູ້ຄອງຣາດຊະສົມບັດໂດຍທຳຈາກແຄວ້ນ

(ພຣະເຈົ້າສົນໄຊຕັດວ່າ)

[໘໕໐໑] ລູກຮັກ ຈິງແນວນັ້ນ ການທີ່ພໍ່ໃຫ້ເນຣະເທດ
ເຊິ່ງລູກຜູ້ບໍ່ມີຄວາມຜິດອອກໄປຈາກແຄວ້ນຕາມຄຳຂອງຊາວນະຄອນສີພີນັ້ນ
ຊື່ວ່າພໍ່ໄດ້ເຮັດກຳຊົ່ວຮ້າຍ
ແລະຊື່ວ່າພໍ່ໄດ້ເຮັດກຳທີ່ທຳລາຍຄວາມຈະເລີນແລ້ວ

[໘໕໐໘] ຂຶ້ນຊື່ວ່າບຸດຄວນຊ່ອຍປົດເປື້ອງຄວາມທຸກ
ຂອງມານດາບິດາແລະອ້າຍນ້ອງທີ່ເກີດຂື້ນ
ຍ້ອນເຫດແນວໃດແນວໜຶ່ງ ແມ່ນດ້ວຍຊີວິດຂອງຕົນ

(ພຣະສາດສະດາເມື່ອຈະຊົງປະກາດເນື້ອຄວາມນັ້ນ ຈຶ່ງຕັດວ່າ)

[໘໕໐໓] ລຳດັບນັ້ນ ພຣະເຈົ້າເວດສັນດອນໄດ້ຊົງຊຳຮະລ້າງທຸລີແລະສິ່ງສົກກະປົກ
ເມື່ອຊົງຊຳຮະລ້າງທຸລີແລະສິ່ງສົກກະປົກແລ້ວ
ໄດ້ຊົງເພດເປັນພຣະຣາຊາ

[໘໕໐໔] ພຣະເວດສັນດອນບໍຣົມກະສັດຊົງສົງພຣະສຽນແລ້ວ
ຊົງເຄື່ອງປະດັບອັນສະອາດ ຊົງປະດັບດ້ວຍອາພອນທຸກຢ່າງ
ສອດພຣະແສງຂັນທີ່ເຮັດໃຫ້ຣາດຊະປັດຈາມິດເດືອດຮ້ອນເກງຂາມ
ສະເດັດຂຶ້ນຊົງພະຍາປັດຈະຍະນາກ

[๘๘๐๕] ຄັ້ງນັ້ນ ເຫຼົ່າທະຫານ ໖໐,໐໐໐ ນາຍຜູ້ສະງ່າງາມ
ຕ່າງກໍຊົມຊື່ນຍິນດີ ຫ້ອມລ້ອມພຣະມະຫາກະສັດຜູ້ຊົງເປັນຈອມທັບ

[๘๘๐๖] ລຳດັບນັ້ນ ເຫຼົ່າພຣະສະໜົມກຳນັນໃນຂອງພຣະເຈົ້ານະຄອນສີພີ
ມາປະຊຸມພ້ອມກັນ ທູນເຊີນພຣະນາງມັດທີໃຫ້ສົງນ້ຳແລ້ວ
ຖວາຍພຣະພອນວ່າ ຂໍພຣະເວດສັນດອນຈົ່ງຊົງອະພິບານຮັກສາພຣະເຈົ້າແມ່
ທ້າວຊາລີແລະນາງກັນຫາຊິນາທັງ ๘ ພຣະອົງ
ອັນໜຶ່ງ ຂໍພຣະເຈົ້ານະຄອນສີນໄຊມະຫາຣາດຈົ່ງຊົງອະພິບານພຣະແມ່ເຈົ້າເທີ້ນ

[๘๘๐๗] ພຣະເວດສັນດອນບໍຣົມກະສັດແລະພຣະນາງມັດທີ
ກັບມາດຳລົງໃນສິຣິຣາດຊະສົມບັດຕາມເກົ່າແລ້ວ
ຊົງຣະນຶກເຖິງຄວາມລຳບາກຂອງຕົນໃນການກ່ອນ
ຈຶ່ງຮັບສັ່ງໃຫ້ນຳກອງບັນທິເພຣີໄປຕີປະກາດ
ທີ່ຄຸ້ມຄອງເຂົາວົງກົດອັນໜ້າອອນຊອນ

[๘๘๐๘] ພຣະນາງມັດທີຜູ້ສົມບູນດ້ວຍລັກສະນະໄດ້ປັດໄຈ໌ ນີ້ແລ້ວ
ຊົງຣະນຶກເຖິງຄວາມລຳບາກຂອງຕົນໃນການກ່ອນ
ເມື່ອໄດ້ພົບພຣະໂອຣົດທັງຫຼາຍກໍມີພຣະທະໄທຍິນດີໂສມະນັດ

[๘๘๐๙] ກໍພຣະນາງມັດທີຜູ້ສົມບູນດ້ວຍລັກສະນະໄດ້ປັດໄຈນີ້ແລ້ວ
ຊົງຣະນຶກເຖິງຄວາມລຳບາກຂອງຕົນໃນການກ່ອນ
ມີພຣະທະໄທຊົມຊື່ນຍິນດີປຣີດາພ້ອມກັບພຣະໂອຣົດທັງຫຼາຍ

[๘๘๑๐] ລູກຮັກທັງ ๘ ແຕ່ກ່ອນແມ່ໄດ້ພ່ຳເພັງຂໍ້ວັດປະຕິບັດນີ້
ນອນເໜືອແຜ່ນດິນເປັນນິດຈະການ
ນີ້ເປັນຂໍ້ວັດປະຕິບັດຂອງແມ່ ຍ້ອນແມ່ຮັກເຈົ້າທັງຫຼາຍ

[๘๘๑๑] ຂໍ້ວັດປະຕິບັດຂອງແມ່ສຳເລັດໃນມື້ນີ້ ຍ້ອນໄດ້ພົບພວກເຈົ້າ
ລູກຮັກທັງ ๘ ຂໍຄວາມໂສມະນັດທີ່ເກີດຈາກແມ່ກໍດີ
ຈາກພຣະບິດາກໍດີ ຈົ່ງຄຸ້ມຄອງລູກ
ອັນໜຶ່ງ ຂໍພຣະເຈົ້ານະຄອນສີນໄຊມະຫາຣາດ
ຈົ່ງຊົງອະພິບານຄວາມໂສມະນັດນັ້ນ

[๘๘๑๘] ບຸນກຸສົນແນວໃດແນວໜຶ່ງ

ທີ່ແມ່ແລະພຣະບິດາຂອງລູກເຮັດແລ້ວມີຢູ່
ດ້ວຍບຸນກຸສົນທັງໝົດນັ້ນ ຂໍລູກຈົ່ງເປັນຜູ້ບໍ່ແກ່ບໍ່ຕາຍ

[໔໔໑໓] ພຣະນາງມັດທີຊົງງົດງາມດ້ວຍພຣະພູສາແນວໃດ
ພຣະນາງຜຸດດີສັດສຸເທວີກໍຊົງຈັດພຣະພູສາແນວນັ້ນ
ຄື ພຣະພູສາກັບປາສິກະພັດ ໂກໄສຍະພັດ ໂຂມະພັດ
ແລະໂກທຸມພອນພັດ ສົ່ງໄປປະທານແກ່ພຣະນາງມັດທີຣາດຊະສຸນິສາ

[໔໔໑໔] ພຣະນາງມັດທີຊົງງົດງາມດ້ວຍເຄື່ອງປະດັບແນວໃດ
ພຣະນາງຜຸດດີສັດສຸເທວີກໍຊົງຈັດເຄື່ອງປະດັບແນວນັ້ນ
ຄື ພຣະທຳມຣງສຸພັນນະຣັດ ສ້ອຍພຣະສໍນິບພະຣັດ
ສົ່ງໄປປະທານແກ່ພຣະນາງມັດທີຣາດຊະສຸນິສາ

[໔໔໑໕] ພຣະນາງມັດທີຊົງງົດງາມດ້ວຍເຄື່ອງປະດັບແນວໃດ
ພຣະນາງຜຸດດີສັດສຸເທວີກໍຊົງຈັດເຄື່ອງປະດັບແນວນັ້ນ
ຄື ພຣະອະໄລສຳລັບປະດັບຂໍ້ພຣະບາດ
ພຣະກຸນທົນສຳລັບພຣະກັນ ສາຍຮັດພຣະອົງຝັງແກ້ວມະນີເພັດ
ສົ່ງໄປປະທານແກ່ພຣະນາງມັດທີຣາດຊະສຸນິສາ

[໔໔໑໖] ພຣະນາງມັດທີຊົງງົດງາມດ້ວຍເຄື່ອງປະດັບແນວໃດ
ພຣະນາງຜຸດສະດີສັດສຸເທວີກໍຊົງຈັດເຄື່ອງປະດັບແນວນັ້ນ
ຄື ດອກໄມ້ກອງເຄື່ອງປະດັບພຣະເມົາລີ
ເຄື່ອງປະດັບພຣະນະລາດແລະເຄື່ອງປະດັບຝັງແກ້ວມະນີສີຕ່າງ ໆ ກັນ
ສົ່ງໄປປະທານແກ່ພຣະນາງມັດທີຣາດຊະສຸນິສາ

[໔໔໑໗] ພຣະນາງມັດທີຊົງງົດງາມດ້ວຍເຄື່ອງປະດັບແນວໃດ
ພຣະນາງຜຸດດີສັດສຸເທວີກໍຊົງຈັດເຄື່ອງປະດັບແນວນັ້ນ
ຄື ເຄື່ອງປະດັບພຣະຖັນ ເຄື່ອງປະດັບພຣະອັງສາ
ສະອີ້ງເພັດ ແລະສະຫຼອງພຣະບາດ
ສົ່ງໄປປະທານແກ່ພຣະນາງມັດທີຣາດຊະສຸນິສາ

[໔໔໑໘] ພຣະນາງມັດທີຣາດຊະບຸດຕີຊົງກວດເບິ່ງເຄື່ອງປະດັບ
ທີ່ຮ້ອຍດ້ວຍດ້າຍແລະບໍ່ຮ້ອຍດ້ວຍດ້າຍ
ພຣະນາງມັດທີຣາດຊະບຸດຕີຊົງກວດເບິ່ງແລະປະດັບຕົກແຕ່ງແລ້ວ
ຊົງງົດງາມດັ່ງນາງເທບກັນຍາໃນພຣະອຸທະຍານນັນທະວັນ

[໔໔໑໗] ພຣະນາງມັດທີຣາດຊະບຸດຕີຊົງສົງພຣະສຽນ
ຊົງເຄື່ອງປະດັບອັນສະອາດ ປະດັບດ້ວຍເຄື່ອງປະດັບທຸກຢ່າງ
ຊົງງົດງາມດັ່ງນາງເທບອັບປະສອນໃນສະຫວັນຊັ້ນຕາວະຕິງສາ

[໔໔໔໐] ພຣະນາງມັດທີຣາດຊະບຸດຕີຊົງມີຮິມປາກງາມ
ຊົງງົດງາມດັ່ງຕົ້ນກ້ວຍສີຄຳທີ່ເກີດໃນສວນຈິດລະດາຖືກລົມພັດໄປມາ

[໔໔໔໑] ພຣະນາງມັດທີຣາດຊະບຸດຕີມີປາກແດງຄືໝາກໄຂແລະໝາກຕຳນິນສຸກ
ງົດງາມດັ່ງກິນນະຣີມີຂົນປີກງາມວິຈິດ ບິນເວີນຢູ່ໃນອາກາດ

[໔໔໔໔] ເຫຼົ່າພະນັກງານຕົກແຕ່ງດະຣຸນຫັດຖີອັນເປັນຊ້າງພຣະທີ່ນັ່ງ
ໂຕປະເສີດ ອົດທົນຕໍ່ຫອກແຫງແລະລູກສອນ
ມີງາຮຽວງາມຄືງອນລົດ ມີກຳລັງກ້າຫານ
ສຳເລັດແລ້ວໃຫ້ນຳມາປະທຽບເກີຍຖ້າຕ້ອນຮັບພຣະນາງມັດທີນັ້ນ

[໔໔໔໓] ພຣະນາງມັດທີນັ້ນສະເດັດຂຶ້ນປະທັບເທິງຫຼັງດະຣຸນຫັດຖີ
ອັນເປັນຊ້າງພຣະທີ່ນັ່ງໂຕປະເສີດ ອົດທົນຕໍ່ຫອກແຫງແລະລູກສອນ
ມີງາຮຽວງາມຄືງອນລົດ ມີກຳລັງກ້າຫານ

[໔໔໔໔] ໝູ່ເນື້ອປະມານທໍ່ໃດທີ່ມີຢູ່ໃນປ່າທັງປວງທີ່ເຂົາວົງກົດນີ້
ໝູ່ເນື້ອປະມານທໍ່ນັ້ນບໍ່ບຽດບຽນກັນແລະກັນ
ດ້ວຍອຳນາດຂອງພຣະເວດສັນດອນ

[໔໔໔໕] ຝູງນົກປະມານທໍ່ໃດທີ່ມີຢູ່ໃນປ່າທັງປວງທີ່ເຂົາວົງກົດນີ້
ຝູງນົກປະມານທໍ່ນັ້ນບໍ່ບຽດບຽນກັນແລະກັນ
ດ້ວຍອຳນາດຂອງພຣະເວດສັນດອນ

[໔໔໔໖] ໝູ່ເນື້ອປະມານທໍ່ໃດທີ່ມີຢູ່ໃນປ່າທັງປວງທີ່ເຂົາວົງກົດນີ້
ໝູ່ເນື້ອປະມານທໍ່ນັ້ນມາປະຊຸມໃນບ່ອນດຽວກັນ
ໃນເມື່ອພຣະເວດສັນດອນຜູ້ຊົງຜະດຸງຣັດໃຫ້ຈະເລີນ
ແກ່ຊາວນະຄອນສີພີຈະສະເດັດກັບ

[໔໔໔໗] ຝູງນົກປະມານທໍ່ໃດທີ່ມີຢູ່ໃນປ່າທັງປວງທີ່ເຂົາວົງກົດນີ້
ຝູງນົກປະມານທໍ່ນັ້ນມາປະຊຸມໃນບ່ອນດຽວກັນ
ໃນເມື່ອພຣະເວດສັນດອນຜູ້ຊົງຜະດຸງຣັດໃຫ້ຈະເລີນ
ແກ່ຊາວນະຄອນສີພີຈະສະເດັດກັບ

[໔໔໔໗] ໝູ່ເນື້ອປະມານທໍ່ໃດທີ່ມີຢູ່ໃນປ່າທັງປວງທີ່ເຂົາວົງກົດນີ້
ໝູ່ເນື້ອປະມານທໍ່ນັ້ນບໍ່ໄດ້ສົ່ງສຽງຮ້ອງມ່ວນຄືໃນການກ່ອນ
ໃນເມື່ອພຣະເວດສັນດອນຜູ້ຊົງຜະດຸງຮັດໃຫ້ຈະເລີນ
ແກ່ຊາວນະຄອນສີພີຈະສະເດັດກັບ

[໔໔໔໙] ຝູງນົກປະມານທໍ່ໃດທີ່ມີຢູ່ໃນປ່າທັງປວງທີ່ເຂົາວົງກົດນີ້
ຝູງນົກປະມານທໍ່ນັ້ນບໍ່ໄດ້ສົ່ງສຽງຮ້ອງມ່ວນຄືໃນການກ່ອນ
ໃນເມື່ອພຣະເວດສັນດອນຜູ້ຊົງຜະດຸງຮັດໃຫ້ຈະເລີນ
ແກ່ຊາວນະຄອນສີພີຈະສະເດັດກັບ

[໔໔໕໐] ຮາດຊະມັກຄະວິຖີທີ່ຈະສະເດັດພຣະຮາດຊະດຳເນີນນັ້ນ
ປະຊາຮາດສະດອນຊ່ອຍກັນປະດັບຕົກແຕ່ງງາມຕະການຕາ
ລາດດ້ວຍດອກໄມ້ ຕັ້ງແຕ່ນະຄອນເຊຕຸດອນ
ຈົນຮອດບ່ອນຢູ່ຂອງພຣະເວດສັນດອນ

[໔໔໕໑] ລຳດັບນັ້ນ ເຫຼົ່າທະຫານ ໖໐,໐໐໐ ນາຍ
ຜູ້ແຕ່ງເຄື່ອງພ້ອມທັງປວງ ງາມສະງ່າໜ້າເບິ່ງ
ຕ່າງພາກັນຕິດຕາມຫ້ອມລ້ອມຢູ່ໂດຍຮອບ
ໃນເມື່ອພຣະເວດສັນດອນຜູ້ຊົງຜະດຸງຮັດໃຫ້ຈະເລີນ
ແກ່ຊາວນະຄອນສີພີສະເດັດກັບ

[໔໔໕໒] ພວກພຣະສະໜົມກຳນັນໃນ ພຣະກຸມານ ແພດ ແລະພວກພາມ
ຕ່າງພາກັນຕິດຕາມພຣະເວດສັນດອນຫ້ອມລ້ອມຢູ່ໂດຍຮອບ
ໃນເມື່ອພຣະເວດສັນດອນຜູ້ຊົງຜະດຸງຮັດໃຫ້ຈະເລີນແກ່ຊາວນະຄອນສີພີສະເດັດກັບ

[໔໔໕໓] ກອງພົນຊ້າງ ກອງພົນມ້າ ກອງພົນລົດ ແລະກອງພົນຮາບ
ຕ່າງພາກັນຕາມສະເດັດຫ້ອມລ້ອມໂດຍຮອບ
ໃນເມື່ອພຣະເວດສັນດອນຜູ້ຊົງຜະດຸງຮັດໃຫ້ຈະເລີນ
ແກ່ຊາວນະຄອນສີພີສະເດັດກັບ

[໔໔໕໔] ຊາວຊົນນະບົດແລະຊາວນິຄົມມາປະຊຸມພ້ອມກັນແລ້ວ
ຕ່າງພ້ອມໃຈກັນມາປະຊຸມຫ້ອມລ້ອມຢູ່ໂດຍຮອບ
ໃນເມື່ອພຣະເວດສັນດອນຜູ້ຊົງຜະດຸງຮັດໃຫ້ຈະເລີນ
ແກ່ຊາວນະຄອນສີພີສະເດັດກັບ

[໔໘໓໕] ເຫຼົ່າທະຫານກ້າຕ່າງກໍໃສ່ໝວກ ໃສ່ເກາະ
ຖືດາບ ຖືໂລ່ໜັງຍ່າງນຳໜ້າ
ໃນເມື່ອພຣະເວດສັນດອນຜູ້ຊົງຜະດຸງຣັດໃຫ້ຈະເລີນແກ່ຊາວນະຄອນສີພີສະເດັດກັບ

[໔໘໓໖] ກະສັດທັງ ໖ ພຣະອົງນັ້ນສະເດັດເຂົ້າສູ່ພຣະນະຄອນທີ່ໜ້າອອນຊອນ
ເຊິ່ງມີປ້ອມປາການແລະປະຕູຫຼວງຫຼາຍ
ປະກອບດ້ວຍເຂົ້ານ້ຳອຸດົມ
ແລະການຟ້ອນລຳແລະຂັບຮ້ອງທັງ ໔ ປະການ

[໔໘໓໗] ຊາວຊົນນະບົດແລະຊາວນິຄົມຕ່າງຊົມຊື່ນໂສມະນັດຍິນດີ
ພ້ອມໃຈກັນມາປະຊຸມ ໃນເມື່ອພຣະເວດສັນດອນ
ຜູ້ຊົງຜະດຸງຣັດໃຫ້ຈະເລີນແກ່ຊາວນະຄອນສີພີສະເດັດ
ເຖິງພຣະນະຄອນໂດຍລຳດັບແລ້ວ

[໔໘໓໘] ເມື່ອພຣະເວດສັນດອນຜູ້ຊົງພຣະຣາດຊະທານຊັບສະເດັດມາເຖິງແລ້ວ
ຊາວຊົນນະບົດແລະຊາວນິຄົມຕ່າງກໍໂບກຜ້າສະບັດໄປມາ
ພຣະອົງຮັບສັ່ງໃຫ້ນຳກອງບັນທິເພຣີໄປຕີປະກາດໃນພຣະນະຄອນ
ແລະຮັບສັ່ງໃຫ້ປະກາດປົດປ່ອຍສັດທັງປວງ
ຈາກເຄື່ອງພັນທະນາການ

[໔໘໓໙] ຂະນະທີ່ພຣະເວດສັນດອນຜູ້ຊົງຜະດຸງຣັດໃຫ້ຈະເລີນແກ່ຊາວນະຄອນສີພີສະເດັດເຂົ້າພຣະນະຄອນ
ທ້າວສັກກະເທວະຣາດກໍຊົງບັນດານໃຫ້ຝົນຄຳຕົກລົງມາ

[໔໘໔໐] ຕໍ່ມາ ພຣະເຈົ້າເວດສັນດອນ ຜູ້ເປັນກະສັດ ຜູ້ມີປັນຍາ
ຊົງພໍ່າເພັງທານແລ້ວ ຫຼັງຈາກສະຫວັນຄົດແລ້ວ
ພຣະອົງກໍສະເດັດເຂົ້າເຖິງສຸກຄະຕິໂລກສະຫວັນດັ່ງນີ້ແລ

**ກັນນະຄອນກັນ ຈົບ**

**ມະຫາເວດສັນດອນຊາດົກທີ ໑໐ ຈົບ**

**ມະຫານິບາດ ຈົບ**

**ຊາດົກ ພາກ ໔ ຈົບ**